# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໑໙

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໑໑

## ສັງຍຸດຕະນິກາຍ ມະຫາວານວັກ



ສະບັບຄົ້ນຄ້ົວວັດທາດຫຼວງເໜືອ

ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈຳນວນ ໔໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮົບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາລົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໒ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໄສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງ ຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ໙ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໙ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໒ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໒໕ ຫົວ ຕ່າງແຕ່ສາລະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທ ຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາລະບານ

# ພຣະໄຕຣປິດົກ

## ເຫຼັ້ມທີ ໑໙

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໑໑

## ສັງຍຸດຕະນິກາຍ ມະຫາວານວັກ

ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ

# ໑. ມັກຄະສັງຍຸດ

## ໑. ອະວິດຊາວັກ

ໝວດວ່າດ້ວຍອະວິດຊາ

## ໑. ອະວິດຊາສູດ

ວ່າດ້ວຍອະວິດຊາ

[໑] ຂ້າພະເຈົ້າໄດ້ຟັງມາແບວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດເມືອງສາວັດຖີໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ ພິກຂຸທັງຫຼາຍ

ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ ພິກຂຸທັງຫຼາຍ ອະວິດຊາ (ຄວາມບໍ່ຮູ້ແຈ້ງ) ເປັນປະທານແຫ່ງການເຂົ້າເຖິງອະກຸສົນທຳທັງຫຼາຍ ອະຫິຣິກະ (ຄວາມບໍ່ລະອາຍບາບ) ອະໂນດຕັບປະ (ຄວາມບໍ່ເກງກົວບາບ) ກໍມີຕາມມາດ້ວຍ

໑. ຜູ້ມີອະວິດຊາບໍ່ເຫັນແຈ້ງຍ່ອມມີມິດສາທິດຖິ (ເຫັນຜິດ)
໒. ຜູ້ມີມິດສາທິດຖິຍ່ອມມີມິດສາສັງກັບປະ (ດຳຣິຜິດ)
໓. ຜູ້ມີມິດສາສັງກັບປະຍ່ອມມີມິດສາວາຈາ (ເຈລະຈາຜິດ)
໔. ຜູ້ມີມິດສາວາຈາຍ່ອມມີມິດສາກຳມັນຕະ (ກະທຳຜິດ)
໕. ຜູ້ມີມິດສາກຳມັນຕະຍ່ອມມີມິດສາອາຊີວະ (ລ້ຽງຊີບຜິດ)
໖. ຜູ້ມີມິດສາອາຊີວະຍ່ອມມີມິດສາວາຍາມະ (ພະຍາຍາມຜິດ)
໗. ຜູ້ມີມິດສາວາຍາມະຍ່ອມມີມິດສາສະຕິ (ຣະນຶກຜິດ)
໘. ຜູ້ມີມິດສາສະຕິຍ່ອມມີມິດສາສະມາທິ (ຕັ້ງຈິດໝັ້ນຜິດ)

ພິກຂຸທັງຫຼາຍ ວິດຊາ (ຄວາມຮູ້ແຈ້ງ) ເປັນປະທານແຫ່ງການເຂົ້າເຖິງກຸສົນທຳທັງຫຼາຍ ຫິຣິ (ຄວາມລະອາຍບາບ) ແລະໂອດຕັບປະ (ຄວາມເກງກົວບາບ) ກໍມີຕາມມາດ້ວຍ

໑. ຜູ້ມີວິດຊາເຫັນແຈ້ງຍ່ອມມີສຳມາທິດຖິ (ເຫັນຖືກ)
໒. ຜູ້ມີສຳມາທິດຖິຍ່ອມມີສຳມາສັງກັບປະ (ຄິດຖືກ)
໓. ຜູ້ມີສຳມາສັງກັບປະຍ່ອມມີສຳມາວາຈາ (ເຈຣະຈາຖືກ)
໔. ຜູ້ມີສຳມາວາຈາຍ່ອມມີສຳມາກຳມັນຕະ (ການງານຖືກ)
໕. ຜູ້ມີສຳມາກຳມັນຕະຍ່ອມມີສຳມາອາຊີວະ (ລ້ຽງຊີວິດຖືກ)
໖. ຜູ້ມີສຳມາອາຊີວະຍ່ອມມີສຳມາວາຍາມະ (ພະຍາຍາມຖືກ)
໗. ຜູ້ມີສຳມາວາຍາມະຍ່ອມມີສຳມາສະຕິ (ຣະນຶກຖືກ)
໘. ຜູ້ມີສຳມາສະຕິຍ່ອມມີສຳມາສະມາທິ (ຕັ້ງຈິດໝັ້ນຖືກ)

**ອະວິດຊາສູດທີ ໑ ຈົບ**

# ໒. ອຸປັດທະສູດ

## ວ່າດ້ວຍຄວາມເປັນຜູ້ມີມິດດີເປັນພົມມະຈັນເຄິ່ງໜຶ່ງ

[໒] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນິຄົມຂອງເຈົ້າສາກະຍະ ຊື່ວ່າສັກກະຣະ ແຄວ້ນສັກກະ ຄັ້ງນັ້ນແລ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຄວາມເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ເປັນພົມມະຈັນເຄິ່ງໜຶ່ງ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ຢ່າກ່າວແນວນັ້ນ ອານົນ ຢ່າກ່າວແນວນັ້ນ ອານົນ ແທ້ຈິງ ຄວາມເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ເປັນພົມມະຈັນທັງໝົດ ຢ່າງແນ່ນອນ ອານົນ ພິກຂຸຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຈະເລີນ ອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ

ພິກຂຸຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກ ມີອົງ ໘ ໃຫ້ຫຼາຍ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນອາໄສວິເວກ (ຄວາມສະຫງັດ) ອາໄສວິຣາຄະ (ຄວາມຄາຍ ກຳໜັດ) ອາໄສນິໂຣດ (ຄວາມດັບ) ນ້ອມໄປໃນໂວດສັກຄະ (ຄວາມສະລະ)
໒. ຈະເລີນສຳມາສັງກັບປະອັນອາໄສວິເວກ ฯລฯ
໓. ຈະເລີນສຳມາວາຈາ ฯລฯ
໔. ຈະເລີນສຳມາກຳມັນຕະ ฯລฯ
໕. ຈະເລີນສຳມາອາຊີວະ ฯລฯ
໖. ຈະເລີນສຳມາວາຍາມະ ฯລฯ
໗. ຈະເລີນສຳມາສະຕິ ฯລฯ
໘. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກ ມີອົງ ໘ ໃຫ້ຫຼາຍ ແນວນີ້ແລ

ອັນໜຶ່ງ ຂໍ້ທີ່ວ່າຄວາມເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ເປັນພົມມະຈັນທັງໝົດຢ່າງແນ່ນອນນັ້ນເພິ່ງຮູ້ໂດຍປະຣິຍາຍນີ້ ດ້ວຍວ່າຍ້ອນອາໄສເຮົາຜູ້ເປັນມິດດີ ເຫຼົ່າສັດຜູ້ມີຊາດ (ຄວາມເກີດ) ເປັນທຳມະດາຍ່ອມພົ້ນຈາກຊາດ ຜູ້ມີຊະຣາ (ຄວາມແກ່) ເປັນທຳມະດາຍ່ອມພົ້ນຈາກຊະຣາ ຜູ້ມີມໍລະນະ (ຄວາມຕາຍ) ເປັນທຳມະດາຍ່ອມພົ້ນຈາກມໍລະນະ ຜູ້ມີໂສກະ (ຄວາມໂສກເສົ້າ) ປະຣິເທວະ (ຄວາມຮ່ຳໄຮ) ທຸກ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ແລະອຸປາຍາດ (ຄວາມຄັບແຄ້ນໃຈ) ເປັນທຳມະດາຍ່ອມພົ້ນຈາກໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ

ອານົນ ຂໍ້ທີ່ວ່າຄວາມເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ເປັນພົມມະຈັນທັງໝົດຢ່າງແນ່ນອນນັ້ນເພິ່ງຮູ້ໂດຍປະຣິຍາຍນີ້ແລ

**ອຸປັດທະສູດທີ ໒ ຈົບ**

# ໖. ສາຣີປຸດຕະສູດ

## ວ່າດ້ວຍພຣະສາຣີບຸດ

[໖] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ຄັ້ງນັ້ນແລ ທ່ານພຣະສາຣີບຸດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຄວາມເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ເປັນພົມມະຈັນທັງໝົດຢ່າງແນ່ນອນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ຖືກແລ້ວ ຖືກແລ້ວ ສາຣີບຸດ ຄວາມເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ເປັນພົມມະຈັນທັງໝົດ ສາຣີບຸດ ພິກຂຸຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ

ພິກຂຸຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກ ມີອົງ ໘ ໃຫ້ຫຼາຍແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ฯลฯ

໘. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກ ມີອົງ ໘ ໃຫ້ຫຼາຍ ແນວນີ້ແລ

ສາຣີບຸດ ອັນໜຶ່ງ ຂໍ້ທີ່ວ່າຄວາມເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ເປັນພົມມະຈັນທັງໝົດນັ້ນ ເພິ່ງຮູ້ໂດຍປະຣິຍາຍນີ້ ດ້ວຍວ່າຍ້ອນອາໄສເຮົາຜູ້ເປັນມິດດີ ເຫຼົ່າສັດຜູ້ມີຊາດເປັນທຳມະດາຍ່ອມພົ້ນຈາກຊາດ ຜູ້ມີຊະຣາເປັນທຳມະດາຍ່ອມພົ້ນຈາກຊະຣາ ຜູ້ມີມໍລະນະເປັນທຳມະດາຍ່ອມພົ້ນຈາກມໍລະນະ ຜູ້ມີໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ເປັນທຳມະດາຍ່ອມພົ້ນຈາກໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ

ສາຣີບຸດ ຂໍ້ທີ່ວ່າຄວາມເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ເປັນພົມມະຈັນທັງໝົດນັ້ນ ເພິ່ງຮູ້ໂດຍປະຣິຍາຍນີ້ແລ

**ສາຣີປຸດຕະສູດທີ ໖ ຈົບ**

# ໔. ຊານຸດໂສນິພານມະນະສູດ

## ວ່າດ້ວຍຊານຸດໂສນິ

[໔] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ເມື່ອໃນເວລາເຊົ້າ ທ່ານພຣະອານົນຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປບິນທະບາດຍັງເມືອງສາວັດຖີ ໄດ້ເຫັນພາມຊື່ ຊານຸດໂສນິ ອອກຈາກເມືອງສາວັດຖີດ້ວຍລົດທຽມດ້ວຍມ້າຂາວລ້ວນ ໄນຍະວ່າ ມ້າທີ່ທຽມເປັນມ້າຂາວ ເຄື່ອງປະດັບຂາວ ໂຕລົດຂາວ ຫຼັງຄາຂາວ ເຊືອກຂາວ ດ້າມຄັນແຫຼມຂາວ ຮົ່ມຂາວ ຜ້າໂພກຂາວ ຜ້ານຸ່ງຂາວ ເກີບຂາວ ແລະພັດວິວາລະວິຊະນີ (ພັດວີຫຼືແສ້ຂົນຈາມະຣີ) ກໍຂາວ ຊົນທັງຫຼາຍ ເຫັນທ່ານແລ້ວພາກັນເວົ້າແນວນີ້ວ່າ ທ່ານຜູ້ຈະເລີນ ຍານປະເສີດນໍ ຮູບຂອງຍານກໍປະເສີດນໍ

ຕໍ່ມາ ທ່ານພຣະອານົນ ທ່ຽວບິນທະບາດໃນເມືອງສາວັດຖີ ກັບຈາກບິນທະບາດ ພາຍຫຼັງສັນພັດຕາຫານສຳເລັດແລ້ວ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ໃນເວລາເຊົ້າ ຂ້າພຣະອົງຄອງອັນຕະຣະວາສົກ ຖືບາດ ແລະຈີວອນເຂົ້າໄປບິນທະບາດຍັງເມືອງສາວັດຖີ ໄດ້ເຫັນຊານຸດໂສນິອອກຈາກເມືອງສາວັດຖີດ້ວຍລົດທຽມດ້ວຍມ້າຂາວລ້ວນ ໄນຍະວ່າ ມ້າທີ່ທຽມເປັນມ້າຂາວ ເຄື່ອງປະດັບຂາວ ໂຕລົດຂາວ ຫຼັງຄາຂາວ ເຊືອກຂາວ ດ້າມຄັນແຫຼມຂາວ ຮົ່ມຂາວ ຜ້າໂພກຂາວ ຜ້ານຸ່ງຂາວ ເກີບຂາວ ແລະພັດກັບແສ້ກໍຂາວ ຊົນທັງຫຼາຍເຫັນທ່ານແລ້ວພາກັນເວົ້າວ່າ ທ່ານຜູ້ຈະເລີນ ຍານປະເສີດນໍ ຮູບຂອງຍານກໍປະເສີດນໍ ຂ້າແດ່ພຣະອົງຜູ້ຈະເລີນ ພຣະອົງອາດຊົງບັນຍັດຍານອັນປະເສີດໃນພຣະທຳວິໄນນີ້ໄດ້ບໍ່ນໍ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ອານົນ ອາດບັນຍັດໄດ້ ຄຳວ່າ ຍານອັນປະເສີດນັ້ນເປັນຊື່ຂອງອະຣິຍະມັກມີອົງ ໘ ນີ້ເອງ ຮຽກວ່າ ພົມຍານແດ່ ທຳຍານແດ່ ລົດພິໄຊສົງຄາມອັນປະເສີດແດ່

ສຳມາທິດຖິທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ເປັນທຳມີການກຳຈັດຣາຄະ ໂທສະແລະໂມຫະເປັນບ່ອນສຸດ

ສຳມາສັງກັບປະທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ເປັນທຳມີການກຳຈັດຣາຄະໂທສະ ແລະໂມຫະເປັນບ່ອນສຸດ

ສຳມາວາຈາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ເປັນທຳມີການກຳຈັດຣາຄະ ໂທສະແລະໂມຫະເປັນບ່ອນສຸດ

ສຳມາກຳມັນຕະທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ເປັນທຳມີການກຳຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ

ສຳມາອາຊີວະທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ເປັນທຳມີການກຳຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ

ສຳມາວາຍາມະທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ເປັນທຳມີການກຳຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ

ສຳມາສະຕິທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ເປັນທຳມີການກຳຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ

ສຳມາສະມາທິທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ເປັນທຳມີການກຳຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ

ຄຳວ່າ ຍານອັນປະເສີດ ນັ້ນເປັນຊື່ຂອງອະຣິຍະມັກມີອົງ ໘ ນີ້ເອງ ຮຽກວ່າ ພົມຍານແດ່ ທຳຍານແດ່ ລົດພິໄຊສົງຄາມອັນປະເສີດແດ່ນັ້ນ ເພິ່ງຮູ້ໂດຍປະຣິຍາຍນີ້ແລ

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

ລົດໃດມີທຳຄືສັດທາແລະປັນຍາເປັນແອກທຸກເມື່ອ
ມີຫິຣິເປັນງອນ ມີໃຈເປັນເຊືອກ
ມີສະຕິເປັນນາຍສາຣະຖີຜູ້ຖ້າຄວບຄຸມ
ລົດນີ້ມີສີນເປັນເຄື່ອງປະດັບ
ມີຊານເປັນເພົາ ມີຄວາມພຽນເປັນລໍ້
ມີອຸເປກຂາເປັນທູບ ມີຄວາມບໍ່ຍາກໄດ້ເປັນຫຼັງຄາ
ກຸນລະບຸດໃດມີຄວາມບໍ່ພະຍາບາດ
ມີຄວາມບໍ່ບຽດບຽນແລະມີວິເວກເປັນອາວຸດ
ມີຄວາມອົດທົນເປັນເກາະໜັງ
ກຸນລະບຸດນັ້ນຍ່ອມປະພຶດເພື່ອຄວາມກະເສມຈາກໂຍຄະ
ພົມຍານອັນປະເສີດນີ້
ເກີດແລ້ວໃນຕົນຂອງບຸກຄົນເຫຼົ່າໃດ
ບຸກຄົນເຫຼົ່ານັ້ນເປັນນັກປາດ ມີໄຊຊະນະ
ຍ່ອມອອກໄປຈາກໂລກໂດຍແທ້

**ຊານຸດໂສນີພາມມະນະສູດທີ ໔ ຈົບ**

# ໕. ກິມັດຖິຍະສູດ

## ວ່າດ້ວຍຄຳຖາມກ່ຽວກັບປະໂຫຍດຂອງການປະພຶດພົມມະຈັນ

[໕] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ຄັ້ງນັ້ນ ພິກຂຸຫຼາຍອົງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານອະໂອກາດ ພວກອັນຍະເດຍຣະຖີປະຣິພາຊົກຖາມຂ້າພຣະອົງທັງຫຼາຍແນວນີ້ວ່າ ຜູ້ມີອາຍຸທັງຫຼາຍ ພວກທ່ານຢູ່ປະພຶດພົມມະຈັນໃນພຣະສະມະນະໂຄດົມເພື່ອປະໂຫຍດອັນໃດ ຂ້າພຣະອົງທັງຫຼາຍຖືກຖາມແນວນີ້ແລ້ວ ຈຶ່ງຕອບອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແນວນີ້ວ່າ ຜູ້ມີອາຍຸທັງຫຼາຍ ພວກເຮົາຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອກຳນົດຮູ້ທຸກ ຂ້າພຣະອົງທັງຫຼາຍຖືກຖາມແນວນີ້ແລ້ວ ຕອບແນວນີ້ ຊື່ວ່າເວົ້າກົງຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ ບໍ່ຊື່ວ່າກ່າວຕູ່ພຣະຜູ້ມີພຣະພາກເຈົ້າດ້ວຍຄຳຕົວະບໍ ຊື່ວ່າກ່າວແກ້ຢ່າງສົມເຫດສົມຜົນບໍ ບໍ່ມີແດ່ບໍທີ່ຄຳເຊັ່ນນັ້ນແລະຄຳທີ່ກ່າວຕໍ່ ໆ ກັນມາຈະເປັນເຫດໃຫ້ຖືກຕຳໜິໄດ້

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ເອົາເທີ້ນ ພິກຂຸທັງຫຼາຍ ທ່ານທັງຫຼາຍຖືກຖາມແນວນັ້ນແລ້ວ ຕອບແນວນັ້ນ ຊື່ວ່າເວົ້າກົງຕາມຄຳທີ່ເຮົາກ່າວໄວ້ ບໍ່ຊື່ວ່າກ່າວຕູ່ເຮົາດ້ວຍຄຳຕົວະ ຊື່ວ່າກ່າວແກ້ຢ່າງສົມເຫດສົມຜົນ ບໍ່ມີຄຳເຊັ່ນນັ້ນແລະຄຳທີ່ກ່າວຕໍ່ ໆ ກັນມາທີ່ຈະເປັນເຫດໃຫ້ຖືກຕຳໜິໄດ້ ຍ້ອນທ່ານທັງຫຼາຍຢູ່ປະພຶດພົມມະຈັນໃນເຮົາເພື່ອກຳນົດຮູ້ທຸກ ພິກຂຸທັງຫຼາຍ ຖ້າອັນຍະເດຍຣະຖີປະຣິພາຊົກເພິ່ງຖາມທ່ານທັງຫຼາຍວ່າ ຜູ້ມີອາຍຸທັງຫຼາຍ ມີມັກ ມີປະຕິປະທາເພື່ອກຳນົດຮູ້ທຸກນັ້ນຢູ່ບໍ ທ່ານທັງຫຼາຍຖືກຖາມແນວນີ້ແລ້ວ ເພິ່ງຕອບອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແນວນີ້ວ່າ ຜູ້ມີອາຍຸທັງຫຼາຍ ມີມັກ ມີປະຕິປະທາເພື່ອກຳນົດຮູ້ທຸກນັ້ນຢູ່

ມັກ ເປັນແນວໃດ? ປະຕິປະທາເພື່ອກຳນົດຮູ້ທຸກນັ້ນ ເປັນແນວໃດ?
ຄື ອະຣິຍະມັກມີອົງ ໘ ນີ້ແລ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ຄືມັກ ນີ້ຄື ປະຕິປະທາເພື່ອກຳນົດຮູ້ທຸກ
ພິກຂຸທັງຫຼາຍ ທ່ານທັງຫຼາຍຖືກຖາມແນວນີ້ແລ້ວ ເພິ່ງຕອບອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແນວນີ້

**ກິມັດຖິຍະສູດທີ ໕ ຈົບ**

# ຝ. ປະຖົມອັນຍະຕະຣະພິກຂຸສູດ

## ວ່າດ້ວຍພິກຂຸອົງໜຶ່ງທູນຖາມບັນຫາ ສູດທີ ໑

[ຝ] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ຄັ້ງນັ້ນແລ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ພຣະອົງຕັດວ່າ ພົມມະຈັນ ພົມມະຈັນ ພົມມະຈັນເປັນແນວໃດ? ບ່ອນສຸດແຫ່ງ ພົມມະຈັນເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ອະຣິຍະມັກມີອົງ ๘ ນີ້ແລ ເປັນພົມມະຈັນໄດ້ແກ່

໑. ສຳມາທິດຖິ ຯລຯ ๘. ສຳມາສະມາທິ

ທຳເປັນທີ່ສິ້ນຣາຄະ ໂທສະ ແລະໂມຫະ ນີ້ເປັນບ່ອນສຸດແຫ່ງພົມມະຈັນ

**ປະຖົມອັນຍະຕະຣະພິກຂຸສູດທີ ຝ ຈົບ**

# ກ. ທຸຕິຍະອັນຍະຕະຣະພິກຂຸສູດ

## ວ່າດ້ວຍພິກຂຸອົງໜຶ່ງທູນຖາມບັນຫາ ສູດທີ ໘

[ກ] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ຄັ້ງນັ້ນ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ພຣະອົງ ຕັດວ່າ ທຳເປັນທີ່ກຳຈັດຣາຄະ ໂທສະ ແລະໂມຫະ ຄຳວ່າ ທຳເປັນທີ່ກຳຈັດຣາຄະ ໂທສະ ແລະໂມຫະ ນີ້ເປັນຊື່ຂອງອັນໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ຄຳວ່າ ທຳເປັນທີ່ກຳຈັດຣາຄະ ໂທສະ ແລະໂມຫະ ນີ້ເປັນຊື່ຂອງນິບພານທາດ ຍ້ອນເຫດນັ້ນຈຶ່ງຮຽກວ່າ ທຳເປັນທີ່ສິ້ນອາສະວະ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພິກຂຸນັ້ນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າຕໍ່ໄປວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງຕັດວ່າ ອະມະຕະ ອະມະຕະ ອະມະຕະເປັນແນວໃດ?

ທາງທີ່ໃຫ້ເຖິງອະມະຕະເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ທຳເປັນທີ່ສິ້ນຣາຄະ ໂທສະ ແລະໂມຫະ ນີ້ ຮຽກວ່າ ອະມະຕະ ອະຣິຍະມັກມີອົງ ໘ ນີ້ແລ ເປັນທາງທີ່ໃຫ້ເຖິງອະມະຕະ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

**ທຸຕິຍະອັນຍະຕະຣະພິກຂຸສູດທີ ໗ ຈົບ**

# ໘. ວິພັງຄະສູດ

## ວ່າດ້ວຍການຈຳແນກອະຣິຍະມັກ

[໘] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງ ຈັກຈຳແນກອະຣິຍະມັກມີອົງ ໘ ແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ

ເມື່ອພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ພິກຂຸທັງຫຼາຍ ອະຣິຍະມັກມີອົງ ໘ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ສຳມາທິດຖິ ເປັນແນວໃດ?

ຄື ຄວາມຮູ້ໃນທຸກ ຄວາມຮູ້ໃນທຸກຂະສະມຸໄທ (ເຫດເກີດທຸກ) ຄວາມຮູ້ໃນທຸກຂະນິໂຣທະ (ຄວາມດັບທຸກ) ຄວາມຮູ້ໃນທຸກຂະນິໂຣທະຄາມິນີປະຕິປະທາ (ຂໍ້ປະຕິບັດທີ່ໃຫ້ເຖິງຄວາມດັບທຸກ) ນີ້ຮຽກວ່າ ສຳມາທິດຖິ

ສຳມາສັງກັບປະ ເປັນແນວໃດ?

ຄື ຄວາມດຳຣິໃນເນກຂຳມະ (ການອອກຈາກກາມ) ຄວາມດຳຣິໃນອະພະຍາບາດ (ຄວາມບໍ່ພະຍາບາດ) ຄວາມດຳຣິໃນອະວິຫິງສາ (ການບໍ່ບຽດບຽນ) ນີ້ຮຽກວ່າ ສຳມາສັງກັບປະ

ສຳມາວາຈາ ເປັນແນວໃດ?

ຄື ເຈຕະນາເປັນເຫດເວັ້ນຈາກມຸສາວາທະ (ເວົ້າຕົວະ) ເຈຕະນາເປັນເຫດເວັ້ນຈາກປິສຸນາວາຈາ (ເວົ້າສັບສໍ່) ເຈຕະນາເປັນເຫດເວັ້ນຈາກຜະຣຸສະວາຈາ (ເວົ້າຄໍາຫຍາບ) ເຈຕະນາເປັນເຫດເວັ້ນຈາກສໍາຜັບປະລາປະ (ເວົ້າບໍ່ມີສາຣະ) ນີ້ຮຽກວ່າ ສໍາມາວາຈາ

ສໍາມາກໍາມັນຕະ ເປັນແນວໃດ?

ຄື ເຈຕະນາເປັນເຫດເວັ້ນຈາກປານາຕິບາດ (ການຂ້າສັດ) ເຈຕະນາເປັນເຫດເວັ້ນຈາກອະທິນນາທານ (ການລັກຊັບ) ເຈຕະນາເປັນເຫດເວັ້ນຈາກອະພົມມະຈັນ (ພຶດຕິກໍາອັນເປັນຂ້າເສິກຕໍ່ພົມມະຈັນ) ນີ້ຮຽກວ່າ ສໍາມາກໍາມັນຕະ

ສໍາມາອາຊີວະ ເປັນແນວໃດ?

ຄື ອະຣິຍະສາວົກໃນທໍາວິໄນນີ້ລະມິດສາອາຊີວະ ສໍາເລັດການລ້ຽງຊີບດ້ວຍສໍາມາອາຊີວະ ນີ້ຮຽກວ່າ ສໍາມາອາຊີວະ

ສໍາມາວາຍາມະ ເປັນແນວໃດ?

ຄື ພິກຂຸໃນທໍາວິໄນນີ້

໑. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນ ເພື່ອປ້ອງກັນບາບອະກຸສົນທໍາທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ
໒. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນເພື່ອລະບາບອະກຸສົນທໍາທີ່ເກີດຂຶ້ນແລ້ວ
໓. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອເຮັດກຸສົນທໍາທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ
໔. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ່ງໝັ້ນ ເພື່ອຄວາມດໍາລົງຢູ່ ບໍ່ເລືອນຫາຍ ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທໍາທີ່ເກີດຂຶ້ນແລ້ວ ນີ້ຮຽກວ່າ ສໍາມາວາຍາມະ

ສໍາມາສະຕິ ເປັນແນວໃດ?

ຄື ພິກຂຸໃນທໍາວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສໍາປະຊັນຍະ ມີສະຕິ ກໍາຈັດອະພິດຊ າແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ມີຄວາມພຽນ ມີສໍາປະຊັນ

ຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

໓. ພິຈາລະນາເຫັນຈິດໃນຈິດຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ນີ້ຮຽກວ່າ ສຳມາສະຕິ

ສຳມາສະມາທິ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກວິຈານ ປີຕິ ແລະສຸກອັນເກີດຈາກວິເວກຢູ່

໒. ຍ້ອນວິຕົກວິຈານສະງົບລະງັບໄປ ບັນລຸທຸຕິຍະຊານ ມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິແລະສຸກອັນເກີດຈາກສະມາທິຢູ່

໓. ຍ້ອນປີຕິຈາງຄາຍອອກ ພິກຂຸມີອຸເປກຂາ ມີສະຕິ ມີສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍ ສັນເສີນວ່າຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ

໔. ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ນີ້ຮຽກວ່າສຳມາສະມາທິ

**ວິພັງຄະສູດທີ ໗ ຈົບ**

# ໘. ສູກະສູດ

## ວ່າດ້ວຍອຸປະມາດ້ວຍເດືອຍ

[໘] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເປັນໄປບໍ່ໄດ້ເລີຍທີ່ເດືອຍເຂົ້າສາລີຫຼືເດືອຍເຂົ້າໜຽວທີ່ບຸກຄົນຕັ້ງໄວ້ບໍ່ກົງຈັກຕຳມື ຫຼື ຕີນທີ່ໄປກະທົບເຂົ້າ ຫຼືເຮັດໃຫ້ເລືອດອອກ ຂໍ້ນັ້ນຍ້ອນ

ເຫດໃດ ຍ້ອນຕັ້ງເດືອຍເຂົ້າໄວ້ບໍ່ກົງ ແມ່ນສັນໃດ ເປັນໄປບໍ່ໄດ້ເລີຍທີ່ພິກຂຸອົງນັ້ນມີທິດຖິທີ່ຕັ້ງໄວ້ຜິດ ມີມັກພາວະນາທີ່ຕັ້ງໄວ້ຜິດ ຈັກທຳລາຍອະວິດຊາ ໃຫ້ວິດຊາເກີດຂຶ້ນ ເຮັດນິບພານໃຫ້ແຈ້ງ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຕັ້ງທິດຖິໄວ້ຜິດ ຄື ກັນສັນນັ້ນ

ພິກຂຸທັງຫຼາຍ ເປັນໄປໄດ້ທີ່ເດືອຍເຂົ້າສາລີຫຼືເດືອຍເຂົ້າໜຽວທີ່ບຸກຄົນຕັ້ງໄວ້ກົງ ຈັກຕຳມືຫຼືຕີນທີ່ໄປກະທົບເຂົ້າຫຼືເຮັດໃຫ້ເລືອດອອກ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຕັ້ງເດືອຍເຂົ້າໄວ້ກົງ ແມ່ນສັນໃດ ເປັນໄປໄດ້ທີ່ພິກຂຸອົງນັ້ນມີທິດຖິທີ່ຕັ້ງໄວ້ຖືກ ມີມັກພາວະນາທີ່ຕັ້ງໄວ້ຖືກ ຈັກທຳລາຍອະວິດຊາ ໃຫ້ວິດຊາເກີດຂຶ້ນ ເຮັດນິບພານໃຫ້ແຈ້ງ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຕັ້ງທິດຖິໄວ້ຖືກ ຄື ກັນສັນນັ້ນ

ພິກຂຸມີທິດຖິທີ່ຕັ້ງໄວ້ຖືກ ມີມັກພາວະນາທີ່ຕັ້ງໄວ້ຖືກ ຍ່ອມທຳລາຍອະວິດຊາ ໃຫ້ວິດຊາເກີດຂຶ້ນ ເຮັດນິບພານໃຫ້ແຈ້ງ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ฯลฯ

໘. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸມີທິດຖິທີ່ຕັ້ງໄວ້ຖືກ ມີມັກພາວະນາທີ່ຕັ້ງໄວ້ຖືກ ຍ່ອມທຳລາຍອະວິດຊາ ໃຫ້ວິດຊາເກີດຂຶ້ນ ເຮັດນິບພານໃຫ້ແຈ້ງ ເປັນແນວນີ້ແລ

**ສູກະສູດທີ ໙ ຈົບ**

# ໑໐. ນັນທິຍະສູດ

## ວ່າດ້ວຍນັນທິຍະປະຣິພາຊົກ

[໑໐] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ຄັ້ງນັ້ນແລ ນັນທິຍະປະຣິພາຊົກເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາ ປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມ ພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ທ່ານພຣະໂຄດົມ ທຳເຫຼົ່າໃດທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມໃຫ້ເຖິງນິບພານ ມີນິບພານເປັນເບື້ອງໜ້າ ມີນິບພານເປັນບ່ອນສຸດ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ນັນທິຍະ ທຳ ໗ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມໃຫ້ເຖິງນິບພານ ມີນິບພານເປັນເບື້ອງໜ້າ ມີນິບພານເປັນບ່ອນສຸດ

ທຳ ໘ ປະການ ອັນໃດແດ່ ຄື

໑. ສຳມາທິດຖິ ໆລໆ ໘. ສຳມາສະມາທິ

ນັນທິຍະ ທຳ ໘ ປະການນີ້ແລ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມໃຫ້ເຖິງນິບພານ ມີນິບພານເປັນເບື້ອງໜ້າ ມີນິບພານເປັນບ່ອນສຸດ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ນັນທິຍະປະຣິພາຊົກໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ທ່ານພຣະໂຄດົມຊົງປະກາດທຳແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ຂວ້ຳໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼື ເຍືອງໄຟໃນບ່ອນມືດ ດ້ວຍຕັ້ງໃຈວ່າ ຄົນມີຕາດີຈັກເຫັນຮູບໄດ້ ຂ້າພຣະອົງນີ້ຂໍເຖິງທ່ານພຣະໂຄດົມພ້ອມທັງພຣະທຳ ແລະພຣະສົງເປັນສະຣະນະ ຂໍທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ນັນທິຍະສູດທີ ໑໐ ຈົບ**

**ອະວິດຊາວັກທີ ໑ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ອະວິດຊາສູດ | ໒. ອຸປັດທະສູດ |
| ໓. ສາຣີປຸດຕະສູດ | ໔. ຊານຸດໂສນີພາມມະນະສູດ |
| ໕. ກິມັດຖິຍະສູດ | ໖. ປະຖົມອັນຍະຕະຣະພິກຂຸສູດ |
| ໗. ທຸຕິຍະອັນຍະຕະຣະພິກຂຸສູດ | ໘. ວິພັງຄະສູດ |
| ໙. ສູກະສູດ | ໑໐. ນັນທິຍະສູດ |

# ໘. ວິຫາຣະວັກ

## ໝວດວ່າດ້ວຍວິຫານທຳ

# ໑. ປະຖົມວິຫາຣະສູດ

## ວ່າດ້ວຍວິຫານທຳ ສູດທີ ໑

[໑໑] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາປາຖະໜາຈະຫຼີບຫຼີກຈັກເຄິ່ງເດືອນ ໃຜ ໆ ຢ່າເຂົ້າໄປຫາເຮົາ ຍົກເວັ້ນພິກຂຸຜູ້ນຳອາຫານບິນທະບາດເຂົ້າໄປໃຫ້ອິງດຽວ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ໃນເຄິ່ງເດືອນນີ້ຈຶ່ງບໍ່ມີໃຜເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເລີຍ ຍົກເວັ້ນພິກຂຸຜູ້ນຳອາຫານບິນທະບາດໄປທູນຖວາຍອົງດຽວ

ເມື່ອເຄິ່ງເດືອນນັ້ນຜ່ານໄປ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກບ່ອນຫຼີບຫຼີກແລ້ວ ຮັບສັ່ງ ຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ເຮົານັ້ນ ທຳອິດຕັດສະຣູ້ ໄດ້ຢູ່ດ້ວຍສ່ວນແຫ່ງວິຫານທຳ (ທຳເປັນເຄື່ອງຢູ່) ຮູ້ແຈ້ງແນວນີ້ ວ່າ

ຍ້ອນມິດສາທິດຖິເປັນປັດໄຈ ຄວາມສະເຫວີຍອາລົມຈຶ່ງມີ
ຍ້ອນສຳມາທິດຖິເປັນປັດໄຈ ຄວາມສະເຫວີຍອາລົມຈຶ່ງມີ

ຯລຯ

ຍ້ອນມິດສາສະມາທິເປັນປັດໄຈ ຄວາມສະເຫວີຍອາລົມຈຶ່ງມີ
ຍ້ອນສຳມາສະມາທິເປັນປັດໄຈ ຄວາມສະເຫວີຍອາລົມຈຶ່ງມີ
ຍ້ອນສັນທະເປັນປັດໄຈ ຄວາມສະເຫວີຍອາລົມຈຶ່ງມີ
ຍ້ອນວິຕົກເປັນປັດໄຈ ຄວາມສະເຫວີຍອາລົມຈຶ່ງມີ
ຍ້ອນສັນຍາເປັນປັດໄຈ ຄວາມສະເຫວີຍອາລົມຈຶ່ງມີ
ຍ້ອນສັນທະ ວິຕົກ ແລະສັນຍາເປັນທຳບໍ່ສະງົບເປັນປັດໄຈ ຄວາມສະເຫວີຍອາລົມຈຶ່ງມີ
ຍ້ອນສັນທະ ວິຕົກ ແລະສັນຍາເປັນທຳສະງົບເປັນປັດໄຈ ຄວາມສະເຫວີຍອາລົມຈຶ່ງມີ

ຄວາມພະຍາຍາມເພື່ອບັນລຸທຳທີ່ຍັງບໍ່ບັນລຸມີຢູ່ ແຕ່ຍ້ອນເມື່ອຍັງບໍ່ໄດ້ບັນລຸຖານະນັ້ນເປັນປັດໄຈ ຄວາມສະເຫວີຍອາລົມຈຶ່ງມີ

**ປະຖົມວິຫາຣະສູດທີ ໑ ຈົບ**

# ໘. ທຸຕິຍະວິຫາຣະສູດ

## ວ່າດ້ວຍວິຫານທຳ ສູດທີ ໘

[໑໘] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເຮົາປາຖະໜາຈະຫຼີບຫຼີກຕະຫຼອດ ໓ ເດືອນ ໃຜ ໆ ຢ່າເຂົ້າໄປ ຫາເຮົາ ຍົກເວັ້ນພິກຂຸຜູ້ນຳອາຫານບິນທະບາດເຂົ້າໄປໃຫ້ອົງດຽວ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ໃນ ໓ ເດືອນນີ້ຈຶ່ງບໍ່ມີໃຜເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເລີຍ ຍົກເວັ້ນພິກຂຸຜູ້ນຳອາຫານບິນທະ ບາດເຂົ້າໄປທູນຖວາຍອົງດຽວ

ເມື່ອ ໓ ເດືອນນັ້ນຜ່ານໄປ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກບ່ອນຫຼີບຫຼີກແລ້ວ ຮັບສັ່ງ ຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ເຮົານັ້ນທຳອິດຕັດສະຮູ້ ໄດ້ຢູ່ດ້ວຍສ່ວນແຫ່ງວິຫານທຳ ຮູ້ແຈ້ງແນວນີ້ ວ່າ

ຍ້ອນມິດສາທິດຖິເປັນປັດໄຈ ຄວາມສະເຫວີຍອາລົມຈຶ່ງມີ
ຍ້ອນມິດສາທິດຖິເປັນທຳສະງົບເປັນປັດໄຈ ຄວາມສະເຫວີຍອາລົມຈຶ່ງມີ
ຍ້ອນສຳມາທິດຖິເປັນປັດໄຈ ຄວາມສະເຫວີຍອາລົມຈຶ່ງມີ
ຍ້ອນສຳມາທິດຖິເປັນທຳສະງົບເປັນປັດໄຈ ຄວາມສະເຫວີຍອາລົມຈຶ່ງມີ

ຯລຯ

ຍ້ອນມິດສາສະມາທິເປັນປັດໄຈ ຄວາມສະເຫວີຍອາລົມຈຶ່ງມີ
ຍ້ອນມິດສາສະມາທິເປັນທຳສະງົບເປັນປັດໄຈ ຄວາມສະເຫວີຍອາລົມຈຶ່ງມີ
ຍ້ອນສຳມາສະມາທິເປັນປັດໄຈ ຄວາມສະເຫວີຍອາລົມຈຶ່ງມີ
ຍ້ອນສຳມາສະມາທິເປັນທຳສະງົບເປັນປັດໄຈ ຄວາມສະເຫວີຍອາລົມຈຶ່ງມີ
ຍ້ອນສັນທະເປັນປັດໄຈ ຄວາມສະເຫວີຍອາລົມຈຶ່ງມີ
ຍ້ອນສັນທະເປັນທຳສະງົບເປັນປັດໄຈ ຄວາມສະເຫວີຍອາລົມຈຶ່ງມີ
ຍ້ອນວິຕົກເປັນປັດໄຈ ຄວາມສະເຫວີຍອາລົມຈຶ່ງມີ
ຍ້ອນວິຕົກເປັນທຳສະງົບເປັນປັດໄຈ ຄວາມສະເຫວີຍອາລົມຈຶ່ງມີ
ຍ້ອນສັນຍາເປັນປັດໄຈ ຄວາມສະເຫວີຍອາລົມຈຶ່ງມີ
ຍ້ອນສັນຍາເປັນທຳສະງົບເປັນປັດໄຈ ຄວາມສະເຫວີຍອາລົມຈຶ່ງມີ
ຍ້ອນສັນທະ ວິຕົກ ແລະສັນຍາເປັນທຳບໍ່ສະງົບເປັນປັດໄຈ ຄວາມສະເຫວີຍອາລົມຈຶ່ງມີ
ຍ້ອນສັນທະ ວິຕົກ ແລະສັນຍາເປັນທຳສະງົບເປັນປັດໄຈ ຄວາມສະເຫວີຍອາລົມຈຶ່ງມີ

ຄວາມພະຍາຍາມເພື່ອບັນລຸທຳທີ່ຍັງບໍ່ບັນລຸ ມີຢູ່ ແຕ່ຍ້ອນເມື່ອຍັງບໍ່ໄດ້ບັນລຸຖານະນັ້ນ ເປັນປັດໄຈ ຄວາມສະເຫວີຍອາລົມຈຶ່ງມີ

**ທຸຕິຍະວິຫາຣະສູດທີ ໘ ຈົບ**

# ໙. ເສກຂະສູດ

## ວ່າດ້ວຍອົງຄຸນຂອງພຣະເສຂະ

[໑໙] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ຄັ້ງນັ້ນແລ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງຕັດວ່າ ພຣະເສຂະ ພຣະເສຂະ ດ້ວຍເຫດພຽງທໍ່ໃດນໍ? ພິກຂຸຈຶ່ງຊື່ວ່າ ເປັນພຣະເສຂະ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸໃນທຳວິໄນນີ້ປະກອບດ້ວຍສຳມາທິດຖິອັນ ເປັນຂອງພຣະເສຂະ ຯລຯ ປະກອບດ້ວຍສຳມາສະມາທິອັນເປັນຂອງພຣະເສຂະ ດ້ວຍເຫດ ພຽງທໍ່ນີ້ແລ ພິກຂຸຈຶ່ງຊື່ວ່າເປັນພຣະເສຂະ

**ເສກຂະສູດທີ ໙ ຈົບ**

# ໑໐. ປະຖົມອຸບປາທະສູດ

## ວ່າດ້ວຍຄວາມເກີດຂຶ້ນແຫ່ງທຳ ສູດທີ ໑

[໒໐] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ທຳ ໘ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ເວັ້ນຄວາມອຸບັດຂຶ້ນຂອງພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ຍ່ອມບໍ່ເກີດຂຶ້ນ

ທຳ ໘ ປະການ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ພິກຂຸທັງຫຼາຍ ທຳ ໘ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ທີ່ຍັງບໍ່ເກີດຍ່ອມເກີດ

ຂຶ້ນ ເວັ້ນຄວາມອຸບັດຂຶ້ນຂອງພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າແລ້ວ ຍ່ອມບໍ່ເກີດຂຶ້ນ

**ປະຖົມອຸບປາທະສູດທີ ໔ ຈົບ**

# ໕. ທຸຕິຍະອຸບປາທະສູດ

## ວ່າດ້ວຍຄວາມເກີດຂຶ້ນແຫ່ງທຳ ສູດທີ ໔

[໑໕] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ທຳ ໗ ປະການນີ້ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ເວັ້ນວິໄນຂອງພຣະສຸຄົດ ຍ່ອມບໍ່ເກີດຂຶ້ນ

ທຳ ໗ ປະການ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໗. ສຳມາສະມາທິ

ພິກຂຸທັງຫຼາຍ ທຳ ໗ ປະການນີ້ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ເວັ້ນວິໄນຂອງພຣະສຸຄົດ ຍ່ອມບໍ່ເກີດຂຶ້ນ

**ທຸຕິຍະອຸບປາທະສູດທີ ໕ ຈົບ**

# ໖. ປະຖົມປະຣິສຸດທະສູດ

## ວ່າດ້ວຍທຳອັນບໍລິສຸດ ສູດທີ ໑

[໑໖] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ທຳ ໗ ປະການນີ້ບໍລິສຸດ ຜ່ອງແຜ້ວ ບໍ່ມີກິເລດພຽງດັ່ງເນີນ ປາສະຈາກຄວາມເສົ້າໝອງ ທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ເວັ້ນຄວາມອຸບັດຂຶ້ນຂອງພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ຍ່ອມບໍ່ເກີດຂຶ້ນ

ທຳ ໗ ປະການ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໗. ສຳມາສະມາທິ

ພິກຂຸທັງຫຼາຍ ທຳ ໗ ປະການນີ້ແລບໍລິສຸດ ຜ່ອງແຜ້ວ ບໍ່ມີກິເລດພຽງດັ່ງເງິນ ປາສະຈາກຄວາມເສົ້າໝອງ ທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ເວັ້ນຄວາມອຸບັດຂຶ້ນຂອງພຣະຕະຖາຄົດ ອະຣະຫັນຕະສຳມາສຳພຸດທະເຈົ້າ ຍ່ອມບໍ່ເກີດຂຶ້ນ

**ປະຖົມປະຣິສຸດທະສູດທີ ໖ ຈົບ**

# ໗. ທຸຕິຍະປະຣິສຸດທະສູດ

## ວ່າດ້ວຍທຳອັນບໍລິສຸດ ສູດທີ ໘

[໑໗] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ທຳ ໗ ປະການນີ້ບໍລິສຸດ ຜ່ອງແຜ້ວ ບໍ່ມີກິເລດພຽງດັ່ງເງິນ ປາສະຈາກ ຄວາມເສົ້າໝອງ ທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ເວັ້ນວິໄນຂອງພຣະສຸຄົຕ ຍ່ອມບໍ່ເກີດຂຶ້ນ

ທຳ ໗ ປະການ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໗. ສຳມາສະມາທິ

ພິກຂຸທັງຫຼາຍ ທຳ ໗ ປະການນີ້ແລບໍລິສຸດ ຜ່ອງແຜ້ວ ບໍ່ມີກິເລດພຽງດັ່ງເງິນ ປາສະ ຈາກຄວາມເສົ້າໝອງ ທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ເວັ້ນວິໄນຂອງພຣະສຸຄົດ ຍ່ອມບໍ່ເກີດຂຶ້ນ

**ທຸຕິຍະປະຣິສຸດທະສູດທີ ໗ ຈົບ**

# ໗. ປະຖົມກຸກກຸຕາຣາມະສູດ

## ວ່າດ້ວຍການສົນທະນາທຳໃນກຸກກຸຕາຣາມະ ສູດທີ ໑

[໑໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ທ່ານພຣະອານົນກັບທ່ານພຣະພັດທະ ຢູ່ທີ່ກຸກກຸຕາຣາມ ເຂດເມືອງປາຕະລີ ບຸດ ເມື່ອໃນເວລາຄ່ຳ ທ່ານພຣະພັດທະອອກຈາກບ່ອນຫຼີກຫຼີກ ເຂົ້າໄປຫາທ່ານພຣະອານົນຮອດ ບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນຖາມທ່ານພຣະອານົນດັ່ງນີ້ ວ່າ

ທ່ານອານົນ ທີ່ຮຽກກັນວ່າ ອະພົມມະຈັນ ອະພົມມະຈັນ ອະພົມມະຈັນ ເປັນແນວໃດ?

ທ່ານພຣະອານົນຕອບວ່າ ດີແລ້ວ ດີແລ້ວ ທ່ານພັດທະ ປັນຍາໃຝ່ຮູ້ຂອງທ່ານດີຫຼາຍ ປະຕິພານດີຫຼາຍ ເຂົ້າໃຈສອບຖາມ ກໍທ່ານຖາມວ່າ ທີ່ຮຽກກັນວ່າ ອະພົມມະຈັນ ອະພົມມະຈັນ ອະພົມມະຈັນເປັນແນວໃດບໍ?

ແມ່ນແລ້ວ ຜູ້ມີອາຍຸ

ຜູ້ມີອາຍຸ ມິດສາມັກ (ທາງຜິດ) ມີອົງ ໘ ນີ້ແລ ເປັນອະພົມມະຈັນ ໄດ້ແກ່

໑. ມິດສາທິດຖິ ຯລຯ ໘. ມິດສາສະມາທິ

**ປະຖົມກຸກກຸຕາຣາມະສູດທີ ໘ ຈົບ**

# ໗. ທຸຕິຍະກຸກກຸຕາຣາມະສູດ

## ວ່າດ້ວຍການສົນທະນາທຳໃນກຸກກຸຕາຣາມ ສູດທີ ໔

[໑໗] ເລື້ອງເກີດຂຶ້ນທີ່ເມືອງປາຕະລິບຸດ

ທ່ານພຣະພັດທະໄດ້ຮຽນຖາມທ່ານພຣະອານົນວ່າ ທ່ານອານົນ ທີ່ຮຽກກັນວ່າ ພົມມະຈັນ ພົມມະຈັນ ພົມມະຈັນເປັນແນວໃດ? ບ່ອນສຸດແຫ່ງພົມມະຈັນເປັນແນວໃດ?

ທ່ານພຣະອານົນຕອບວ່າ ດີແລ້ວ ດີແລ້ວ ທ່ານພັດທະ ປັນຍາໃຝ່ຮູ້ຂອງທ່ານດີຫຼາຍ ປະຕິພານດີຫຼາຍ ເຂົ້າໃຈສອບຖາມ ກໍທ່ານຖາມວ່າ ທີ່ຮຽກກັນວ່າ ພົມມະຈັນ ພົມມະຈັນ ພົມມະຈັນເປັນແນວໃດ? ບ່ອນສຸດແຫ່ງພົມມະຈັນເປັນແນວໃດ? ແມ່ນບໍ?

ແມ່ນແລ້ວ ຜູ້ມີອາຍຸ

ຜູ້ມີອາຍຸ ອະຣິຍະມັກມີອົງ ໘ ນີ້ແລເປັນພົມມະຈັນ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ທຳເປັນທີ່ສິ້ນຣາຄະ ໂທສະ ແລະ ໂມຫະ ນີ້ເປັນບ່ອນສຸດແຫ່ງພົມມະຈັນ

**ທຸຕິຍະກຸກກຸຕາຣາມະສູດທີ ໗ ຈົບ**

# ໑໐. ຕະຕິຍະກຸກກຸຕາຣາມະສູດ

## ວ່າດ້ວຍການສົນທະນາທຳໃນກຸກກຸຕາຣາມະ ສູດທີ ໑

[໔໐] ເລື້ອງເກີດຂຶ້ນທີ່ເມືອງປາຕະລີບຸດ

ທ່ານພຣະພັດທະໄດ້ຮຽນຖາມທ່ານພຣະອານົນວ່າ ທ່ານອານົນ ທີ່ຮຽກກັນວ່າ ພົມມະຈັນ ພົມມະຈັນ ພົມມະຈັນເປັນແນວໃດ? ພົມມະຈາຣີເປັນແນວໃດ? ບ່ອນສຸດແຫ່ງພົມມະຈັນເປັນແນວໃດ?

ທ່ານພຣະອານົນຕອບວ່າ ດີແລ້ວ ດີແລ້ວ ທ່ານພັດທະ ປັນຍາໃຝ່ຮູ້ຂອງທ່ານດີຫຼາຍ ປະຕິພານດີຫຼາຍ ເຂົ້າໃຈສອບຖາມ ກໍທ່ານຖາມວ່າ ທີ່ຮຽກກັນວ່າ ພົມມະຈັນ ພົມມະຈັນ ພົມມະຈັນເປັນແນວໃດ? ພົມມະຈາຣີເປັນແນວໃດ? ບ່ອນສຸດແຫ່ງພົມມະຈັນເປັນແນວໃດ? ແມ່ນບໍ?

ແມ່ນແລ້ວ ຜູ້ມີອາຍຸ

ຜູ້ມີອາຍຸ ອະຣິຍະມັກມີອົງ ໘ ນີ້ແລເປັນພົມມະຈັນ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ບຸກຄົນຜູ້ປະກອບດ້ວຍອະຣິຍະມັກມີອົງ ໘ ນີ້ຮຽກວ່າ ພົມມະຈາຣີ
ທຳເປັນທີ່ສິ້ນຣາຄະ ໂທສະ ແລະໂມຫະ ນີ້ເປັນບ່ອນສຸດແຫ່ງພົມມະຈັນ
ພຣະສູດອີກ ໑ ສູດ ມີເຫດເກີດແນວດຽວກັນ

**ຕະຕິຍະກຸກກຸຕາຣາມະສູດທີ ໑໐ ຈົບ**

**ວິຫາຣະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ປະຖົມວິຫາຣະສູດ
໒. ທຸຕິຍະວິຫາຣະສູດ
໓. ເສກຂະສູດ
໔. ປະຖົມອຸບປາທະສູດ
໕. ທຸຕິຍະອຸບປາທະສູດ
໖. ປະຖົມປະຣິສຸດທະສູດ
໗. ທຸຕິຍະປະຣິສຸດທະສູດ
໘. ປະຖົມກຸກກຸຕາຣາມະສູດ
໙. ທຸຕິຍະກຸກກຸຕາຣາມະສູດ
໑໐. ຕະຕິຍະກຸກກຸຕາຣາມະສູດ

# ໓. ມິດສັດຕະວັກ

## ໝວດວ່າດ້ວຍມິດສັດຕະທຳ

## ໑. ມິດສັດຕະສູດ

### ວ່າດ້ວຍມິດສັດຕະທຳ

[໘໑] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງມິດສັດຕະເຮັດ (ທຳທີ່ຜິດ) ແລະສັມມັດຕະທຳ (ທຳທີ່ຊອບ) ແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ມິດສັດຕະເຮັດ ອັນໃດແນ ຄື

໑. ມິດສາທິດຖິ ຯລຯ ໙. ມິດສາສະມາທິ

ນີ້ຮຽກວ່າ ມິດສັດຕະທຳ

ສັມມັດຕະທຳ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໙. ສຳມາສະມາທິ

ນີ້ຮຽກວ່າ ສຳມັດຕະທຳ

**ມິດສັດຕະສູດທີ ໑ ຈົບ**

## ໘. ອະກຸສົນທຳມະສູດ

### ວ່າດ້ວຍອະກຸສົນທຳ

[໘໘] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເຮົາຈັກສະແດງອະກຸສົນທຳ ແລະກຸສົນທຳແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ອະກຸສົນທຳ ອັນໃດແດ່ ຄື

໑. ມິດສາທິດຖິ ຯລຯ ໗. ມິດສາສະມາທິ

ນີ້ຮຽກວ່າ ອະກຸສົນທຳ
ກຸສົນທຳ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໗. ສຳມາສະມາທິ

ນີ້ຮຽກວ່າ ກຸສົນທຳ

**ອະກຸສົນທຳມະສູດທີ ໔ ຈົບ**

## ໓. ປະຖົມປະຕິປະທາສູດ

### ວ່າດ້ວຍປະຕິປະທາ ສູດທີ ໑

[໔໓] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເຮົາຈັກສະແດງມິດສາປະຕິປະທາ (ຂໍ້ປະຕິບັດຜິດ) ແລະສຳມາປະຕິປະທາ (ຂໍ້ປະຕິບັດຖືກ) ແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ
ມິດສາປະຕິປະທາ ອັນໃດແດ່ ຄື

໑. ມິດສາທິດຖິ ຯລຯ ໗. ມິດສາສະມາທິ

ນີ້ຮຽກວ່າ ມິດສາປະຕິປະທາ
ສຳມາປະຕິປະທາ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໗. ສຳມາສະມາທິ

ນີ້ຮຽກວ່າ ສຳມາປະຕິປະທາ

**ປະຖົມປະຕິປະທາສູດທີ ໓ ຈົບ**

## ໔. ທຸຕິຍະປະຕິປະທາສູດ

### ວ່າດ້ວຍປະຕິປະທາ ສູດທີ ໔

[໔໔] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເຮົາບໍ່ສັນເສີນມິດສາປະຕິປະທາຂອງຄະລືຫັດຫຼືບັນພະຊິດ ຄະລືຫັດ ຫຼື ບັນພະຊິດ ຜູ້ປະຕິບັດຜິດ ຍ່ອມເຮັດຍາຍະທຳທີ່ເປັນກຸສົນໃຫ້ສຳເລັດບໍ່ໄດ້ ຍ້ອນເຫດແຫ່ງການ ປະຕິບັດຜິດ

ມິດສາປະຕິປະທາ ອັນໃດແດ່ ຄື

໑. ມິດສາທິດຖິ ຯລຯ ໘. ມິດສາສະມາທິ

ນີ້ຮຽກວ່າ ມິດສາປະຕິປະທາ

ເຮົາບໍ່ສັນເສີນມິດສາປະຕິປະທາຂອງຄະລືຫັດຫຼືບັນພະຊິດ ຄະລືຫັດຫຼືບັນພະຊິດ ຜູ້ປະ ຕິບັດຜິດ ຍ່ອມເຮັດຍາຍະທຳທີ່ເປັນກຸສົນໃຫ້ສຳເລັດບໍ່ໄດ້ ຍ້ອນເຫດແຫ່ງການປະຕິບັດຜິດ

ພິກຂຸທັງຫຼາຍ ແຕ່ເຮົາສັນເສີນສຳມາປະຕິປະທາຂອງຄະລືຫັດຫຼືບັນພະຊິດ ຄະລືຫັດຫຼື ບັນພະຊິດຜູ້ປະຕິບັດຖືກ ຍ່ອມເຮັດຍາຍະທຳທີ່ເປັນກຸສົນໃຫ້ສຳເລັດໄດ້ ຍ້ອນເຫດແຫ່ງການ ປະຕິບັດຖືກ

ສຳມາປະຕິປະທາ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ຮຽກວ່າ ສຳມາປະຕິປະທາ

ເຮົາສັນເສີນສຳມາປະຕິປະທາຂອງຄະລືຫັດຫຼືບັນພະຊິດ ຄະລືຫັດຫຼືບັນພະຊິດຜູ້ປະຕິ ບັດຖືກຍ່ອມເຮັດຍາຍະທຳທີ່ເປັນກຸສົນໃຫ້ສຳເລັດໄດ້ ຍ້ອນເຫດແຫ່ງການປະຕິບັດຖືກ

**ທຸຕິຍະປະຕິປະທາສູດທີ 4 ຈົບ**

# ໕. ປະຖົມອະສັບປຸຣິສະສູດ

## ວ່າດ້ວຍອະສັດຕະບຸຣຸດ ສູດທີ ໑

[໔໕] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເຮົາຈັກສະແດງອະສັດຕະບຸຣຸດ ແລະສັດຕະບຸຣຸດແກ່ທ່ານທັງຫຼາຍ ທ່ານ ທັງຫຼາຍຈົ່ງຟັງ

ອະສັດຕະບຸຣຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ມີມິດສາທິດຖິ ມີມິດສາສັງກັບປະ ມີມິດສາວາຈາ ມີມິດສາກຳມັນຕະ ມີມິດສາອາຊີວະ ມີມິດສາວາຍາມະ ມີມິດສາສະຕິ ມີມິດສາສະມາທິ

ບຸກຄົນນີ້ຮຽກວ່າ ອະສັດຕະບຸຣຸດ

ສັດຕະບຸຣຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ມີສຳມາທິດຖິ ມີສຳມາສັງກັບປະ ມີສຳມາວາຈາ ມີສຳມາກຳມັນຕະ ມີສຳມາອາຊີວະ ມີສຳມາວາຍາມະ ມີສຳມາສະຕິ ມີສຳມາສະມາທິ

ບຸກຄົນນີ້ຮຽກວ່າ ສັດຕະບຸຣຸດ

**ປະຖົມອະສັບປຸຣິສະສູດທີ ໕ ຈົບ**

# ໖. ທຸຕິຍະອະສັບປຸຣິສະສູດ

## ວ່າດ້ວຍອະສັດຕະບຸຣຸດ ສູດທີ ໘

[໘໖] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເຮົາຈັກສະແດງອະສັດຕະບຸຣຸດ ແລະອະສັດຕະບຸຣຸດທີ່ຍິ່ງກວ່າອະສັດຕະບຸຣຸດ ແລະຈັກສະແດງສັດຕະບຸຣຸດ ແລະສັດຕະບຸຣຸດທີ່ຍິ່ງກວ່າສັດຕະບຸຣຸດແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ອະສັດຕະບຸຣຸດ ເປັນແນວໃດ?
ຄື ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ມີ ມິດສາທິດຖິ ຯລຯ ມີມິດສາສະມາທິ
ບຸກຄົນນີ້ຮຽກວ່າ ອະສັດຕະບຸຣຸດ

ອະສັດຕະບຸຣຸດທີ່ຍິ່ງກວ່າອະສັດຕະບຸຣຸດ ເປັນແນວໃດ?
ຄື ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ມີມິດສາທິດຖິ ຯລຯ ມີມິດສາສະມາທິ ມີມິດສາຍານະ (ຮູ້ຜິດ) ມີມິດສາວິມຸດຕິ (ລຸດພົ້ນຜິດ)
ບຸກຄົນນີ້ຮຽກວ່າ ອະສັດຕະບຸຣຸດທີ່ຍິ່ງກວ່າອະສັດຕະບຸຣຸດ

ສັດຕະບຸຣຸດ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ມີສຳມາທິດຖິ ຯລຯ ມີສຳມາສະມາທິ
ບຸກຄົນນີ້ຮຽກວ່າ ສັດຕະບຸຣຸດ

ສັດຕະບຸຣຸດທີ່ຍິ່ງກວ່າສັດຕະບຸຣຸດ ເປັນແນວໃດ?
ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ມີສຳມາທິດຖິ ຯລຯ ມີສຳມາສະມາທິ ມີສຳມາຍານະ (ຮູ້ຖືກ) ມີສຳມາວິມຸດຕິ (ລຸດພົ້ນຖືກ)
ບຸກຄົນນີ້ຮຽກວ່າ ສັດຕະບຸຣຸດທີ່ຍິ່ງກວ່າສັດຕະບຸຣຸດ

**ທຸຕິຍະອະສັປປຸຣິສະສູດທີ ໖ ຈົບ**

# ໗. ກຸມພະສູດ

## ວ່າດ້ວຍອຸປະມາດ້ວຍໝໍ້

[໘໗] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ໝໍ້ທີ່ບໍ່ມີເຄື່ອງຮອງຮັບ ກໍ້ງໄປໄດ້ງ່າຍ ທີ່ມີເຄື່ອງຮອງຮັບກໍ້ງໄປໄດ້ຍາກ ແມ່ນສັນໃດ ຈິດກໍຄືກັນສັນນັ້ນ ທີ່ບໍ່ມີທຳເຄື່ອງຮອງຮັບ ກັບກອກ ໄດ້ງ່າຍ ທີ່ມີທຳເຄື່ອງຮອງຮັບ ກັບກອກໄດ້ຍາກ

ອັນໃດນໍ? ເປັນທຳເຄື່ອງຮອງຮັບຈິດ

ຄື ອະຣິຍະມັກມີອົງ ໘ ນີ້ແລ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ເປັນທຳເຄື່ອງຮອງຮັບຈິດ

ໝໍ້ທີ່ບໍ່ມີເຄື່ອງຮອງຮັບ ກໍ້ງໄປໄດ້ງ່າຍ ທີ່ມີເຄື່ອງຮອງຮັບ ກໍ້ງໄປໄດ້ຍາກ

ແມ່ນສັນໃດ ຈິດກໍຄືກັນສັນນັ້ນ ທີ່ບໍ່ມີທຳເຄື່ອງຮອງຮັບ ກັບກອກໄດ້ງ່າຍ ທີ່ມີທຳ ເຄື່ອງຮອງຮັບ ກັບກອກໄດ້ຍາກ

**ກຸມພະສູດທີ ໗ ຈົບ**

# ໗. ສະມາທິສູດ

## ວ່າດ້ວຍສະມາທິ

[໘໗] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເຮົາຈັກສະແດງອະຣິຍະສຳມາສະມາທິທີ່ມີອຸປະນິສະ໑ແດ່ ທີ່ມີບໍຣິຂານແດ່ ແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ອະຣິຍະສຳມາສະມາທິທີ່ມີອຸປະນິສະ ທີ່ມີບໍຣິຂານ ອັນໃດແດ່ ຄື

໑. ສຳມາທິດຖີ ຯລຯ ໗. ສຳມາສະມາທິ

ສະພາວະທີ່ຈິດມີອາລົມດຽວ ເຊິ່ງມີອົງ ໗ ປະການນີ້ຮ້ອມລ້ອມ ຮຽກວ່າ ອະຣິຍະສຳມາສະມາທິທີ່ມີອຸປະນິສະແດ່ ວ່າ ອະຣິຍະສຳມາສະມາທິທີ່ມີບໍຣິຂານແດ່

**ສະມາທິສູດທີ ໗ ຈົບ**

# ໘. ເວທະນາສູດ

## ວ່າດ້ວຍເວທະນາ

[໘໘] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເວທະນາ ໓ ປະການນີ້

ເວທະນາ ໓ ປະການ ອັນໃດແດ່ ຄື

໑. ສຸກຂະເວທະນາ (ຄວາມຮູ້ສຶກສຸກ)
໒. ທຸກຂະເວທະນາ (ຄວາມຮູ້ສຶກທຸກ)
໓. ອະທຸກຂະມະສຸກຂະເວທະນາ (ຄວາມຮູ້ສຶກທີ່ບໍ່ແມ່ນສຸກບໍ່ແມ່ນທຸກ)

ເວທະນາ ໓ ປະການນີ້

ພິກຂຸທັງຫຼາຍ ບຸກຄົນເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອກຳນົດຮູ້ເວທະນາ ໓ ປະການນີ້

ອະຣິຍະມັກມີອົງ ໘ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ພິກຂຸທັງຫຼາຍ ບຸກຄົນເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອກຳນົດຮູ້ເວທະນາ ໓ ປະການນີ້ແລ

**ເວທະນາສູດທີ ໙ ຈົບ**

## ໑໐. ອຸດຕິຍະສູດ

### ວ່າດ້ວຍພຣະອຸດຕິຍະ

[໓໐] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ຄັ້ງນັ້ນແລ ທ່ານພຣະອຸດຕິຍະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານ ວະໂຣກາດ ຂ້າພຣະອົງຫຼີບຫຼີກຢູ່ໃນບ່ອນສະຫງັດ ໄດ້ເກີດຄວາມຄິດຄຳນຶງຂຶ້ນມາວ່າ ກາມມະຄຸນ ໕ ປະການ ພຣະຜູ້ມີພຣະພາກເຈົ້າໄດ້ຕັດໄວ້ແລ້ວ ກາມມະຄຸນ ໕ ປະການ ອັນໃດແດ່ ທີ່ພຣະຜູ້ມີພຣະ ພາກເຈົ້າໄດ້ຕັດໄວ້ແລ້ວ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ດີແລ້ວ ດີແລ້ວ ອຸດຕິຍະ ກາມມະຄຸນ ໕ ປະການນີ້ ເຮົາໄດ້ກ່າວໄວ້ແລ້ວ

ກາມມະຄຸນ ໕ ປະການ ອັນໃດແດ່ ຄື

໑. ຮູບທີ່ເພິ່ງຮູ້ແຈ້ງທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ
໒. ສຽງທີ່ເພິ່ງຮູ້ແຈ້ງທາງຫູ ຯລຯ
໓. ກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ຯລຯ
໔. ຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ
໕. ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ກາມມະຄຸນ ໕ ປະການນີ້ ເຮົາໄດ້ກ່າວໄວ້ແລ້ວ

ອຸດຕິຍະ ບຸກຄົນເພິ່ງຈະເລີນອະຣິຍະມັກມີອົງ ๗ ເພື່ອລະການມະຄຸນ ๕ ປະການນີ້

ອະຣິຍະມັກມີອົງ ๗ ອັນໃດແດ່ ຄື

๑. ສຳມາທິດຖິ ฯລฯ ๗. ສຳມາສະມາທິ

ອຸດຕິຍະ ບຸກຄົນເພິ່ງຈະເລີນອະຣິຍະມັກມີອົງ ๗ ເພື່ອລະການມະຄຸນ ๕ ປະການນີ້

**ອຸດຕິຍະສູດທີ ๑๐ ຈົບ**

**ມິດສັດຕະວັກທີ ๓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

๑. ມິດສັດຕະສູດ
๒. ປະຖົມປະຕິປະທາສູດ
๓. ປະຖົມອະສັບປຸຣິສະສູດ
๔. ກຸມພະສູດ
๕. ເວທະນາສູດ
๖. ອະກຸສົນທຳມະສູດ
๗. ທຸຕິຍະປະຕິປະທາສູດ
๘. ທຸຕິຍະອະສັບປຸຣິສະສູດ
๙. ສະມາທິສູດ
๑๐. ອຸດຕິຍະສູດ

# ๔. ປະຕິປັດຕິວັກ

### ໝວດວ່າດ້ວຍການປະຕິບັດ

## ๑. ປະຖົມປະຕິປັດຕິສູດ

### ວ່າດ້ວຍການປະຕິບັດ ສູດທີ ๑

[๓๑] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງມິດສາປະຕິບັດ (ການປະຕິບັດຜິດ) ແລະສຳມາປະຕິບັດ (ການປະຕິບັດຖືກ) ແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ມິດສາປະຕິບັດ ອັນໃດແດ່ ຄື

໑. ມິດສາທິດຖິ ຯລຯ ໙. ມິດສາສະມາທິ

ນີ້ຮຽກວ່າ ມິດສາປະຕິບັດ

ສຳມາປະຕິບັດ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໙. ສຳມາສະມາທິ

ນີ້ຮຽກວ່າ ສຳມາປະຕິບັດ

**ປະຖົມປະຕິປັດຕິສູດທີ ໑ ຈົບ**

# ໔. ທຸຕິຍະປະຕິປັດຕິສູດ

## ວ່າດ້ວຍການປະຕິບັດ ສູດທີ ໔

[໓໔] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເຮົາຈັກສະແດງບຸກຄົນຜູ້ປະຕິບັດຜິດ ແລະບຸກຄົນຜູ້ປະຕິບັດຖືກແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ບຸກຄົນຜູ້ປະຕິບັດຜິດ ເປັນແນວໃດ?
ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ມີມິດສາທິດຖິ ຯລຯ ມີມິດສາສະມາທິ
ບຸກຄົນນີ້ຮຽກວ່າ ຜູ້ປະຕິບັດຜິດ

ບຸກຄົນຜູ້ປະຕິບັດຖືກ ເປັນແນວໃດ?
ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ມີສຳມາທິດຖິ ຯລຯ ມີສຳມາສະມາທິ
ບຸກຄົນນີ້ຮຽກວ່າ ຜູ້ປະຕິບັດຖືກ

**ທຸຕິຍະປະຕິປັດຕິສູດທີ ໔ ຈົບ**

# ໕. ວິຣັດທະສູດ

## ວ່າດ້ວຍທຳທີ່ບຸກຄົນພາດ

[໕໕] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ອະຣິຍະມັກມີອົງ ໘ ອັນບຸກຄົນເຫຼົ່າໃດເຫຼົ່າໜຶ່ງພາດ[๑]ແລ້ວ ອະຣິຍະມັກມີອົງ ໘ ທີ່ໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງ ກໍຊື່ວ່າ ເປັນອັນບຸກຄົນເຫຼົ່ານັ້ນພາດແລ້ວ

ອະຣິຍະມັກມີອົງ ໘ ອັນບຸກຄົນເຫຼົ່າໃດເຫຼົ່າໜຶ່ງ ຜາຣົບແລ້ວ ອະຣິຍະມັກມີອົງ ໘ ທີ່ໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງ ກໍຊື່ວ່າເປັນອັນບຸກຄົນເຫຼົ່ານັ້ນຜາຣົບແລ້ວ

ອະຣິຍະມັກມີອົງ ໘ ອັນໃດແດ່ ຄື

໑. ສໍາມາທິດຖິ ຯລຯ ໘. ສໍາມາສະມາທິ

ອະຣິຍະມັກມີອົງ ໘ ອັນບຸກຄົນເຫຼົ່າໃດເຫຼົ່າໜຶ່ງພາດແລ້ວ ອະຣິຍະມັກມີອົງ ໘ ທີ່ໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງ ກໍຊື່ວ່າ ເປັນອັນບຸກຄົນເຫຼົ່ານັ້ນພາດແລ້ວ

ອະຣິຍະມັກມີອົງ ໘ ອັນບຸກຄົນເຫຼົ່າໃດເຫຼົ່າໜຶ່ງຜາຣົບແລ້ວ ອະຣິຍະມັກມີອົງ ໘ ທີ່ໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງ ກໍຊື່ວ່າເປັນອັນບຸກຄົນເຫຼົ່ານັ້ນຜາຣົບແລ້ວ

**ວິຣັດທະສູດທີ ໓ ຈົບ**

# ໔. ປາຣັງຄະມະສູດ

## ວ່າດ້ວຍທໍາທີ່ໃຫ້ເຖິງຝັ່ງ

[໖໔] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ທໍາ ໘ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວຍ່ອມເປັນໄປເພື່ອເຖິງຝັ່ງນັ້ນ ຈາກຝັ່ງນີ້

ທໍາ ໘ ປະການ ອັນໃດແດ່ ຄື

໑. ສໍາມາທິດຖິ ຯລຯ ໘. ສໍາມາສະມາທິ

ທໍາ ໘ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຖິງຝັ່ງນັ້ນ ຈາກຝັ່ງນີ້

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

ໃນໝູ່ມະນຸດ ເຫຼົ່າຊົນຜູ້ໄປເຖິງຝັ່ງນັ້ນມີຈຳນວນໜ້ອຍ
ສ່ວນໝູ່ສັດນອກນີ້ເລາະໄປຕາມຝັ່ງນີ້ສ່ວນຫຼາຍ
ສ່ວນຊົນເຫຼົ່າໃດປະພຶດຕາມທຳ
ໃນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໂດຍຖືກຕ້ອງ
ຊົນເຫຼົ່ານັ້ນຈັກຂ້າມພົ້ນວັດຕະ
ອັນເປັນບ້ວງມານທີ່ຂ້າມໄດ້ແສນຍາກ ຈັກເຖິງຝັ່ງນັ້ນ
ບັນດິດລະທຳດຳແລ້ວເພິ່ງຈະເລີນທຳຂາວ
ອອກຈາກທີ່ມີນໍ້າ ມາສູ່ທີ່ບໍ່ມີນໍ້າ
ລະກາມທັງຫຼາຍແລ້ວເປັນຜູ້ໝົດຄວາມກັງວົນ
ເພິ່ງປາຖະໜາຄວາມຍິນດີຍິ່ງໃນວິເວກ໌ທີ່ຍິນດີໄດ້ຍາກຍິ່ງ
ບັນດິດເພິ່ງຊຳຣະຕົນໃຫ້ຜ່ອງແຜ້ວ
ຈາກເຄື່ອງເສົ້າໝອງແຫ່ງຈິດທັງຫຼາຍ
ບັນດິດເຫຼົ່າໃດອົບຮົມຈິດໂດຍຖືກຕ້ອງ
ໃນອົງທຳເປັນເຄື່ອງຕັດສະຣູ້ທັງຫຼາຍ
ບໍ່ຖືໝັ້ນ ຍິນດີໃນນິບພານເປັນທີ່ສະລະຄວາມຖືໝັ້ນ
ບັນດິດເຫຼົ່ານັ້ນສິ້ນອາສະວະແລ້ວ
ມີຄວາມຮຸ່ງເຮືອງ ດັບເຢັນແລ້ວໃນໂລກ

**ປາຣັງຄະມະສູດທີ ໔ ຈົບ**

# ໕. ປະຖົມສາມັນຍະສູດ

## ວ່າດ້ວຍຄວາມເປັນສະມະນະ ສູດທີ ໑

[໓໕] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເຮົາຈັກສະແດງສາມັນຍະ (ຄວາມເປັນສະມະນະ) ແລະສາມັນຍະຜົນ (ຜົນແຫ່ງຄວາມເປັນສະມະນະ) ແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ສາມັນຍະ ເປັນແນວໃດ?

ຄື ອະຣິຍະມັກມີອົງ ໘ ນີ້ແລ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ຮຽກວ່າ ສາມັນຍະ
ສາມັນຍະຜົນ ເປັນແນວໃດ?
ຄື ໂສດາປັດຕິຜົນ ສະກະທາຄາມີຜົນ ອະນາຄາມີຜົນ ອະຣະຫັດຕະຜົນ
ເຫຼົ່ານີ້ຮຽກວ່າ ສາມັນຍະຜົນ

**ປະຖົມສາມັນຍະສູດທີ ໕ ຈົບ**

# ໖. ທຸຕິຍະສາມັນຍະສູດ

## ວ່າດ້ວຍຄວາມເປັນສະມະນະ ສູດທີ ໔

[໖໖] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເຮົາຈັກສະແດງສາມັນຍະ ແລະປະໂຫຍດແຫ່ງສາມັນຍະແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ສາມັນຍະ ເປັນແນວໃດ?

ຄື ອະຣິຍະມັກມີອົງ ໘ ນີ້ແລ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ຮຽກວ່າ ສາມັນຍະ

ປະໂຫຍດແຫ່ງສາມັນຍະ ເປັນແນວໃດ?
ຄື ທຳເປັນທີ່ສິ້ນຣາຄະ ໂທສະ ແລະໂມຫະ
ນີ້ຮຽກວ່າ ປະໂຫຍດແຫ່ງສາມັນຍະ

**ທຸຕິຍະສາມັນຍະສູດທີ ໖ ຈົບ**

# ໗. ປະຖົມພົມມັນຍະສູດ

## ວ່າດ້ວຍຄວາມເປັນພົມ ສູດທີ ໑

[໖໗] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເຮົາຈັກສະແດງພົມມັນຍະ (ຄວາມເປັນພົມ) ແລະ ພົມມັນຍະຜົນ (ຜົນແຫ່ງຄວາມເປັນພົມ) ແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ພົມມັນຍະ ເປັນແນວໃດ?

ຄື ອະຣິຍະມັກມີອົງ ໘ ນີ້ແລ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ຮຽກວ່າ ພົມມັນຍະ

ພົມມັນຍະຜົນ ເປັນແນວໃດ

ຄື ໂສດາປັດຕິຜົນ ສະກະທາຄາມິຜົນ ອະນາຄາມິຜົນ ອະຣະຫັດຕະຜົນ

ເຫຼົ່ານີ້ຮຽກວ່າ ພົມມັນຍະຜົນ

**ປະຖົມພົມມັນຍະສູດທີ ໗ ຈົບ**

# ໘. ທຸຕິຍະພົມມັນຍະສູດ

## ວ່າດ້ວຍຄວາມເປັນພົມ ສູດທີ ໘

[໖໘] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເຮົາຈັກສະແດງພົມມັນຍະ ແລະປະໂຫຍດແຫ່ງພົມມັນຍະ ແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ພົມມັນຍະ ເປັນແນວໃດ?

ຄື ອະຣິຍະມັກມີອົງ ໘ ນີ້ແລ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ຮຽກວ່າ ພົມມັນຍະ

ປະໂຫຍດແຫ່ງພົມມັນຍະ ເປັນແນວໃດ?

ຄື ທຳເປັນທີ່ສິ້ນຣາຄະ ໂທສະ ແລະໂມຫະ

ນີ້ຮຽກວ່າ ປະໂຫຍດແຫ່ງພົມມັນຍະ

**ທຸຕິຍະພົມມັນຍະສູດທີ ๗ ຈົບ**

# ๙. ປະຖົມພົມຈະຣິຍະສູດ

## ວ່າດ້ວຍພົມມະຈັນ ສູດທີ ๑

[๖๙] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເຮົາຈັກສະແດງພົມມະຈັນ ແລະຜົນແຫ່ງພົມມະຈັນແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ພົມມະຈັນ ເປັນແນວໃດ?

ຄື ອະຣິຍະມັກມີອົງ ๘ ນີ້ແລ ໄດ້ແກ່

๑. ສຳມາທິດຖິ ฯລฯ ๘. ສຳມາສະມາທິ

ນີ້ຮຽກວ່າ ພົມມະຈັນ

ຜົນແຫ່ງພົມມະຈັນ ເປັນແນວໃດ?

ຄື ໂສດາປັດຕິຜົນ ສະກະທາຄາມິຜົນ ອະນາຄາມິຜົນ ອະຣະຫັດຕະຜົນ

ເຫຼົ່ານີ້ຮຽກວ່າ ຜົນແຫ່ງພົມມະຈັນ

**ປະຖົມພົມມະຈະຣິຍະສູດທີ ๙ ຈົບ**

# ๑๐. ທຸຕິຍະພົມມະຈະຣິຍະສູດ

## ວ່າດ້ວຍພົມມະຈັນ ສູດທີ ๒

[๗๐] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເຮົາຈັກສະແດງພົມມະຈັນ ແລະປະໂຫຍດແຫ່ງພົມມະຈັນແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ພົມມະຈັນ ເປັນແນວໃດ?

ຄື ອະຣິຍະມັກມີອົງ ໘ ນີ້ແລ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ຮຽກວ່າ ພົມມະຈັນ

ປະໂຫຍດແຫ່ງພົມມະຈັນ ເປັນແນວໃດ?

ຄື ທຳເປັນທີ່ສິ້ນຣາຄະ ໂທສະ ແລະໂມຫະ

ນີ້ຮຽກວ່າ ປະໂຫຍດແຫ່ງພົມມະຈັນ

**ທຸຕິຍະພົມມະຈະຣິຍະສູດທີ ໑໐ ຈົບ**

**ປະຕິປັດຕິວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ປະຖົມປະຕິປັດຕິສູດ
໒. ທຸຕິຍະປະຕິປັດຕິສູດ
໓. ວິຣັດທະສູດ
໔. ປາຣັງຄະມະສູດ
໕. ປະຖົມສາມັນຍະສູດ
໖. ທຸຕິຍະສາມັນຍະສູດ
໗. ປະຖົມພົມມັນຍະສູດ
໘. ທຸຕິຍະພົມມັນຍະສູດ
໙. ປະຖົມພົມມະຈະຣິຍະສູດ
໑໐. ທຸຕິຍະພົມມະຈະຣິຍະສູດ

# ໕. ອັນຍະຕິດຖິຍະເປີຍຍາລະວັກ

## ໝວດວ່າດ້ວຍອັນຍະຕິດຖິຍະເປີຍຍາລະ

## ໑. ຣາຄະວິຣາຄະສູດ

### ວ່າດ້ວຍມັກແລະປະຕິປະທາເພື່ອຄາຍຣາຄະ

[໔໑] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຖ້າພວກອັນຍະເດຍຣະຖີປະຣິພາຊົກເພິ່ງຖາມ ທ່ານທັງຫຼາຍແນວນີ້ວ່າ ຜູ້ມີອາຍຸທັງຫຼາຍ ທ່ານທັງຫຼາຍ ຢູ່ປະພຶດພົມມະຈັນໃນພຣະສະມະນະໂຄດົມເພື່ອຕ້ອງການອັນໃດ ທ່ານທັງຫຼາຍຖືກຖາມແນວນີ້ ເພິ່ງຕອບອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແນວນີ້ວ່າ ທ່ານທັງຫຼາຍ ເຮົາທັງຫຼາຍຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອຄາຍຣາຄະ

ອັນໜຶ່ງ ຖ້າພວກອັນຍະເດຍຣະຖີປະຣິພາຊົກ ເພິ່ງຖາມທ່ານທັງຫຼາຍແນວນີ້ວ່າ ຜູ້ມີອາຍຸທັງຫຼາຍ ມີມັກ ມີປະຕິປະທາເພື່ອຄາຍຣາຄະຢູ່ບໍ ທ່ານທັງຫຼາຍຖືກຖາມແນວນີ້ ເພິ່ງຕອບອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແນວນີ້ວ່າ ທ່ານທັງຫຼາຍ ມີມັກ ມີປະຕິປະທາເພື່ອຄາຍຣາຄະຢູ່

ມັກ ເປັນແນວໃດ? ປະຕິປະທາເພື່ອຄາຍຣາຄະ ເປັນແນວໃດ?

ຄື ອະຣິຍະມັກມີອົງ ໘ ນີ້ແລ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ຄືມັກ ນີ້ຄືປະຕິປະທາເພື່ອຄາຍຣາຄະ

ພິກຂຸທັງຫຼາຍ ທ່ານທັງຫຼາຍຖືກຖາມແນວນີ້ ເພິ່ງຕອບອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແນວນີ້

**ຣາຄະວິຣາຄະສູດທີ ໑ ຈົບ**

## ໒-໗. ສັງໂຍຊະນັບປະຫານາທິສຸດຕະສັກກະ

### ວ່າດ້ວຍພຣະສູດ ໖ ສູດ ມີສັງໂຍຊະນະປະຫານະສູດເປັນຕົ້ນ

[໔໒-໔໗] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ຖ້າພວກອັນຍະເດຍຣະຖີປະຣິພາຊົກ ເພິ່ງຖາມທ່ານທັງຫຼາຍແນວນີ້ວ່າ ຜູ້ມີອາຍຸທັງຫຼາຍ ທ່ານທັງຫຼາຍຢູ່ປະພຶດພົມມະຈັນໃນພຣະສະມະນະໂຄດົມ ເພື່ອຕ້ອງການອັນໃດ ທ່ານທັງຫຼາຍຖືກຖາມແນວນີ້ ເພິ່ງຕອບອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແນວນີ້ວ່າ ທ່ານທັງຫຼາຍ ເຮົາທັງຫຼາຍຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອລະສັງໂຍດ ຯລຯ

ທ່ານທັງຫຼາຍ ເຮົາທັງຫຼາຍຢູ່ປະພຶດພົມມະຈັນ ໃນພຣະຜູ້ມີພຣະພາກເຈົ້າ ເພື່ອຖອນອະນຸໄສ ຯລຯ

ທ່ານທັງຫຼາຍ ເຮົາທັງຫຼາຍຢູ່ປະພຶດພົມມະຈັນ ໃນພຣະຜູ້ມີພຣະພາກເຈົ້າເພື່ອກຳນົດຮູ້ອັດທານະ (ທາງໄກ) ຯລຯ

ທ່ານທັງຫຼາຍ ເຮົາທັງຫຼາຍຢູ່ປະພຶດພົມມະຈັນ ໃນພຣະຜູ້ມີພຣະພາກເຈົ້າເພື່ອຄວາມສິ້ນອາສະວະ ຯລຯ

ທ່ານທັງຫຼາຍ ເຮົາທັງຫຼາຍຢູ່ປະພຶດພົມມະຈັນ ໃນພຣະຜູ້ມີພຣະພາກເຈົ້າເພື່ອເຮັດ ໃຫ້ແຈ້ງຜົນແຫ່ງວິດຊາແລະວິມຸດຕິ ຯລຯ

ທ່ານທັງຫຼາຍ ເຮົາທັງຫຼາຍຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າ ເພື່ອຍານທັດສະນະ ຯລຯ

**ສັງໂຍຊະນັບປະທານາທິສຸດຕະສັກກະທີ ໔-໗ ຈົບ**

## ໗. ອະນຸປາທາປະຣິນິບພານສູດ

### ວ່າດ້ວຍມັກແລະປະຕິປະທາເພື່ອອະນຸປາທາປະຣິນິບພານ

[໔໗] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຖ້າພວກອັນຍະເດຍຣະຖີປະຣິພາຊົກເພິ່ງຖາມທ່ານທັງຫຼາຍແນວນີ້ວ່າ ຜູ້ມີອາຍຸທັງຫຼາຍ ທ່ານທັງຫຼາຍຢູ່ປະພຶດພົມມະຈັນໃນພຣະສະມະນະໂຄດົມເພື່ອຕ້ອງການອັນໃດ ທ່ານທັງຫຼາຍ ຖືກຖາມແນວນີ້ ເພິ່ງຕອບອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແນວນີ້ວ່າ ທ່ານທັງຫຼາຍ ເຮົາທັງຫຼາຍຢູ່ປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າເພື່ອອະນຸປາທາປະຣິນິບພານ (ຄວາມດັບບໍ່ມີເຊື້ອ)

ອັນໜຶ່ງ ຖ້າພວກອັນຍະເດຍຣະຖີປະຣິພາຊົກ ເພິ່ງຖາມທ່ານທັງຫຼາຍແນວນີ້ວ່າ ຜູ້ມີອາຍຸທັງຫຼາຍ ມີມັກ ມີປະຕິປະທາເພື່ອອະນຸປາທາປະຣິນິບພານຢູ່ບໍ?

ທ່ານທັງຫຼາຍ ຖືກຖາມແນວນີ້ ເພິ່ງຕອບວ່າ ທ່ານທັງຫຼາຍ ມີມັກ ມີປະຕິປະທາເພື່ອອະນຸປາທາປະຣິນິບພານຢູ່

ມັກ ເປັນແນວໃດ? ປະຕິປະທາເພື່ອອະນຸປາທາປະຣິນິບພານ ເປັນແນວໃດ?

ຄື ອະຣິຍະມັກມີອົງ ໘ ນີ້ແລ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ຄືມັກ ນີ້ຄື ປະຕິປະທາເພື່ອອະນຸປາທາປະຣິນິບພານ

ພິກຂຸທັງຫຼາຍ ທ່ານທັງຫຼາຍຖືກຖາມແນວນີ້ ເພິ່ງຕອບອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແນວນີ້

**ອະນຸປາທາປະຣິນິບພານສູດທີ ໘ ຈົບ**

**ອັນຍະຕິດຖິຍະເປີຍຍາລະວັກທີ ៥ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ຣາຄະວິຣາຄະສູດ ៤-៧. ສັງໂຍຊະນັບປະຫານາທິສູດຕະສັກກະ

໘. ອະນຸປາທາປະຣິນິບພານສູດ

# ៦. ສຸຣິຍະເປີຍຍາລະວັກ

## ໝວດວ່າດ້ວຍສຸຣິຍະເປີຍຍາລະ

# ໑. ກັນລະຍານະມິດຕະສູດ

## ວ່າດ້ວຍກັນລະຍານະມິດ

[៤៧] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເມື່ອດວງອາທິດກຳລັງຈະອຸໄທ ຍ່ອມມີແສງອາລຸນຂຶ້ນມາກ່ອນ ເປັນບຸບພະນິມິດ ສັນໃດ ກັນລະຍານະມິດຕະຕາ (ຄວາມເປັນຜູ້ມີມິດດີ) ກໍເປັນໂຕນຳ ເປັນບຸບພະນິມິດເພື່ອຄວາມເກີດຂຶ້ນແຫ່ງອະຣິຍະມັກມີອົງ ໘ ສັນນັ້ນ

ພິກຂຸຜູ້ມີກັນລະຍານະມິດ (ມິດດີ) ເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ

ພິກຂຸຜູ້ມີກັນລະຍານະມິດຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ຯລຯ

໘. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸຜູ້ມີກັນລະຍານະມິດ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວນີ້ແລ

**ກັນລະຍານະມິດຕະສູດທີ ໑ ຈົບ**

# ໔-໖. ສີລະສຳປະທາທິສຸດຕະປັນຈະກະ

## ວ່າດ້ວຍພຣະສູດ ໕ ສູດ ມີສີລະສຳປະທາສູດເປັນຕົ້ນ

[໕໐-໕໔] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເມື່ອດວງອາທິດກຳລັງຈະອຸໄທ ຍ່ອມມີແສງອາລຸນຂຶ້ນມາກ່ອນ ເປັນບຸບພະນິມິດ ສັນໃດ ສີລະສຳປະທາ ກໍເປັນໂຕນຳ ເປັນບຸບພະນິມິດ ເພື່ອຄວາມເກີດຂຶ້ນແຫ່ງອະຣິຍະມັກ ມີອົງ ໘ ສັນນັ້ນ

ພິກຂຸຜູ້ເຖິງພ້ອມດ້ວຍສີນເພິ່ງຫວັງຂໍ້ນີ້ໄດ້ວ່າ ຯລຯ

ສັນທະສຳປະທາ ຯລຯ

ອັດຕະສຳປະທາ ຯລຯ

ທິດຖິສຳປະທາ ຯລຯ

ອັບປະມາທະສຳປະທາ ຯລຯ

**ສີລະສຳປະທາທິສຸດຕະປັນຈະກະທີ ໔-໖ ຈົບ**

# ໗. ໂຍນິໂສມະນະສິການສຳປະທາສູດ

## ວ່າດ້ວຍໂຍນິໂສມະນະສິການສຳປະທາ

[໕໕] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເມື່ອດວງອາທິດກຳລັງຈະອຸໄທ ຍ່ອມມີແສງອາລຸນຂຶ້ນມາກ່ອນ ເປັນບຸບພະນິມິດ ສັນໃດ ໂຍນິໂສມະນະສິການສຳປະທາ (ຄວາມເຖິງພ້ອມດ້ວຍການມະນະສິການໂດຍແຍບຄາຍ) ກໍເປັນໂຕນຳ ເປັນບຸບພະນິມິດເພື່ອຄວາມເກີດຂຶ້ນແຫ່ງອະຣິຍະມັກມີອົງ ໘ ສັນນັ້ນ

ພິກຂຸຜູ້ເຖິງພ້ອມດ້ວຍໂຍນິໂສມະນະສິການ ເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ

ພິກຂຸຜູ້ເຖິງພ້ອມດ້ວຍໂຍນິໂສມະນະສິການ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ
ຯລຯ
໘. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸຜູ້ເຖິງພ້ອມດ້ວຍໂຍນິໂສມະນະສິການ ຈະເລີນອະຣິຍະມັກມີອົງ ໘ ເຮັດ ອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວນີ້ແລ

**ໂຍນິໂສມະນະສິການສຳປະທາສູດທີ ໗ ຈົບ**

# ໘. ກັນລະຍານະມິດຕະສູດ

## ວ່າດ້ວຍກັນລະຍານະມິດ

[໕໖] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເມື່ອດວງອາທິດກຳລັງຈະອຸໄທ ຍ່ອມມີແສງອາລຸນຂຶ້ນມາກ່ອນ ເປັນບຸບພະນິມິດ ສັນໃດ ກັນລະຍານະມິດຕະຕາກໍເປັນໂຕນຳ ເປັນບຸບພະນິມິດ ເພື່ອຄວາມເກີດຂຶ້ນແຫ່ງອະຣິຍະມັກມີອົງ ໘ ສັນນັ້ນ

ພິກຂຸຜູ້ມີກັນລະຍານະມິດ ເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ

ພິກຂຸຜູ້ມີກັນລະຍານະມິດ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິ ອັນເປັນທຳມີການກຳຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ
ຯລຯ
໘. ຈະເລີນສຳມາສະມາທິ ອັນເປັນທຳມີການກຳຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ

ພິກຂຸທັງຫຼາຍ ພິກຂຸຜູ້ມີກັນລະຍານະມິດຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວນີ້ແລ

**ກັນລະຍານະມິດຕະສູດທີ ໘ ຈົບ**

# ໗-໑໓. ສີລະສຳປະທາທິສຸດຕະປັນຈະກະ

## ວ່າດ້ວຍພຣະສູດ ໕ ສູດ ມີສີລະສຳປະທາສູດເປັນຕົ້ນ

[໕໗-໖໑] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເມື່ອດວງອາທິດກຳລັງຈະອຸໄທ ຍ່ອມມີແສງອາລຸນຂຶ້ນມາກ່ອນ ເປັນບຸບພະນິມິດ ສັນໃດ ສີລະສຳປະທາກໍເປັນໂຕນຳ ເປັນບຸບພະນິມິດ ເພື່ອຄວາມເກີດຂຶ້ນແຫ່ງອະຣິຍະມັກ ມີອົງ ໘ ສັນນັ້ນ ຯລຯ

ສັນທະສຳປະທາ ຯລຯ
ອັດຕະສຳປະທາ ຯລຯ

ທິດຖິສຳປະທາ ฯລฯ
ອັບປະມາທະສຳປະທາ ฯລฯ

**ສີລະສຳປະທາທີສຸດຕະປັນຈະກະທີ ໗-໑໓ ຈົບ**

# ໑໔. ໂຍນິໂສມະນະສິການສຳປະທາສູດ

## ວ່າດ້ວຍໂຍນິໂສມະນະສິການສຳປະທາ

[໖໔] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ฯລฯ ໂຍນິໂສມະນະສິການສຳປະທາ ฯລฯ

ພິກຂຸ ຜູ້ເຖິງພ້ອມດ້ວຍໂຍນິໂສມະນະສິການ ເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ

ພິກຂຸ ຜູ້ເຖິງພ້ອມດ້ວຍໂຍນິໂສມະນະສິການ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນເປັນທຳມີການກຳຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ
ฯລฯ
໘. ຈະເລີນສຳມາສະມາທິອັນເປັນທຳມີການກຳຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ

ພິກຂຸທັງຫຼາຍ ພິກຂຸຜູ້ເຖິງພ້ອມດ້ວຍໂຍນິໂສມະນະສິການ ຈະເລີນອະຣິຍະມັກມີອົງ ໘ ເຮັດ ອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວນີ້ແລ

**ໂຍນິໂສມະນະສິການສຳປະທາສູດທີ ໑໔ ຈົບ**

**ສຸຣິຍະເປີຍຍາລະວັກທີ ໖ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໗. ເອກະທຳມະເປີຍຍາລະວັກ

### ໝວດວ່າດ້ວຍເອກະທຳມະເປີຍຍາລະ

## ໑. ກັນລະຍານະມິດຕະສູດ

### ວ່າດ້ວຍກັນລະຍານະມິດ

[໖໓] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ທຳອັນເປັນເອກ ມີອຸປະກາຣະຫຼາຍ ເພື່ອຄວາມເກີດຂຶ້ນແຫ່ງອະຣິຍະມັກມີອົງ ໘

ທຳອັນເປັນເອກ ຄືອັນໃດ?

ຄື ກັນລະຍານະມິດຕະຕາ

ພິກຂຸທັງຫຼາຍ ພິກຂຸຜູ້ມີກັນລະຍານະມິດເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ

ພິກຂຸຜູ້ມີກັນລະຍານະມິດຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປ

ໃນໂວດສັກຄະ

ຯລຯ

໙. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປ ໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸຜູ້ມີກັນລະຍານະມິດຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວນີ້ແລ

**ກັນລະຍານະມິດຕະສູດທີ ໑ ຈົບ**

# ໒-໖. ສີລະສຳປະທາທິສຸດຕະປັນຈະກະ

## ວ່າດ້ວຍພຣະສູດ ໕ ສູດ ມີສີລະສຳປະທາສູດເປັນຕົ້ນ

[໖໘-໖໙] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ທຳອັນເປັນເອກ ມີອຸປະກາຣະຫຼາຍເພື່ອຄວາມເກີດຂຶ້ນແຫ່ງອະຣິຍະມັກມີອົງ ໘

ທຳອັນເປັນເອກ ຄືອັນໃດ?

ຄື ສີລະສຳປະທາ ຯລຯ

ຄື ສັນທະສຳປະທາ ຯລຯ

ຄື ອັດຕະສຳປະທາ ຯລຯ

ຄື ທິດຖິສຳປະທາ ຯລຯ

ຄື ອັບປະມາທະສຳປະທາ ຯລຯ

**ສີລະສຳປະທາທິສຸດຕະປັນຈະກະທີ ໒-໖ ຈົບ**

# ໗. ໂຍນິໂສມະນະສິການສຳປະທາສູດ

## ວ່າດ້ວຍໂຍນິໂສມະນະສິການສຳປະທາ

[໖໙] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ฯลฯ ຄື ໂຍນິໂສມະນະສິການສຳປະທາ (ຄວາມເຖິງພ້ອມດ້ວຍການມະນະສິການໂດຍແຍບຄາຍ)

ພິກຂຸຜູ້ເຖິງພ້ອມດ້ວຍໂຍນິໂສມະນະສິການເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ

ພິກຂຸຜູ້ເຖິງພ້ອມດ້ວຍໂຍນິໂສມະນະສິການ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ฯลฯ

໘. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປ ໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸຜູ້ເຖິງພ້ອມດ້ວຍໂຍນິໂສມະນະສິການ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວນີ້ແລ

**ໂຍນິໂສມະນະສິການສຳປະທາສູດທີ ໗ ຈົບ**

# ໘. ກັນລະຍານະມິດຕະສູດ

## ວ່າດ້ວຍກັນລະຍານະມິດ

[໗໐] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ທຳອັນເປັນເອກ ມີອຸປະກາຣະຫຼາຍ ເພື່ອຄວາມເກີດຂຶ້ນແຫ່ງອະຣິຍະມັກມີອົງ ໘

ທຳອັນເປັນເອກ ຄື ອັນໃດ?

ຄື ກັນລະຍານະມິດຕະຕາ

ພິກຂຸຜູ້ມີກັນລະຍານະມິດເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ

ພິກຂຸຜູ້ມີກັນລະຍານະມິດຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນເປັນທຳມີການກຳຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ

ຯລຯ

໘. ຈະເລີນສຳມາສະມາທິອັນເປັນທຳມີການກຳຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ

ພິກຂຸທັງຫຼາຍ ພິກຂຸຜູ້ມີກັນລະຍານະມິດຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວນີ້ແລ

**ກັນລະຍານະມິດຕະສູດທີ ໘ ຈົບ**

# ໙-໑໓. ສີລະສຳປະທາທິສຸດຕະປັນຈະກະ

## ວ່າດ້ວຍພຣະສູດ ໕ ສູດ ມີສີລະສຳປະທາສູດເປັນຕົ້ນ

[໗໑-໗໕] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ທຳອັນເປັນເອກ ມີອຸປະກາຣະຫຼາຍເພື່ອຄວາມເກີດຂຶ້ນແຫ່ງອະຣິຍະມັກມີອົງ ໘

ທຳອັນເປັນເອກ ຄືອັນໃດ?

ຄື ສີລະສຳປະທາ ຯລຯ

ຄື ສັນທະສຳປະທາ ຯລຯ

ຄື ອັດຕະສຳປະທາ ຯລຯ

ຄື ທິດຖິສຳປະທາ ຯລຯ

ຄື ອັບປະມາທະສຳປະທາ ຯລຯ

**ສີລະສຳປະທາທິສຸດຕະປັນຈະກະທີ ໙-໑໓ ຈົບ**

# ໑໔. ໂຍນິໂສມະນະສິການສຳປະທາສູດ

## ວ່າດ້ວຍໂຍນິໂສມະນະສິການສຳປະທາ

[໗໖] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ຯລຯ ຄື ໂຍນິໂສມະນະສິການສຳປະທາ

ພິກຂຸທັງຫຼາຍ ພິກຂຸຜູ້ເຖິງພ້ອມດ້ວຍໂຍນິໂສມະນະສິການ ເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຈະເລີນ ອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ

ພິກຂຸຜູ້ເຖິງພ້ອມດ້ວຍໂຍນິໂສມະນະສິການ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິ
ຯລຯ
໘. ຈະເລີນສຳມາສະມາທິ ອັນເປັນທຳມີການກຳຈັດຣາຄະ ໂທສະແລະໂມຫະເປັນບ່ອນສຸດ

ພິກຂຸທັງຫຼາຍ ພິກຂຸຜູ້ເຖິງພ້ອມດ້ວຍໂຍນິໂສມະນະສິການ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວນີ້ແລ

**ໂຍນິໂສມະນະສິການສຳປະທາສູດທີ ໑໔ ຈົບ**

**ເອກະທຳມະເປີຍຍາລະວັກທີ ໗ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ກັນລະຍານະມິດຕະສູດ
໗. ໂຍນິໂສມະນະສິການສຳປະທາສູດ
໖-໑໓. ສີລະສຳປະທາທິສູດຕະປັນຈະກະ
໔-໖. ສີລະສຳປະທາທິສູດຕະປັນຈະກະ
໘. ກັນລະຍານະມິດຕະສູດ
໑໔. ໂຍນິໂສມະນະສິການສຳປະທາສູດ

# ໗. ທຸຕິຍະເອກະທຳມະເປີຍຍາລະວັກ

## ໝວດວ່າດ້ວຍເອກະທຳມະເປີຍຍາລະທີ ໔

## ໑. ກັນລະຍານະມິດຕະສູດ

### ວ່າດ້ວຍກັນລະຍານະມິດ

[ກກ] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຍັງບໍ່ພິຈາລະນາເຫັນທຳອື່ນແມ່ນແນວໜຶ່ງທີ່ເປັນເຫດໃຫ້ອະຣິຍະມັກມີອົງ ໗ ທີ່ຍັງບໍ່ເກີດກໍເກີດຂຶ້ນ ຫຼື ເປັນເຫດໃຫ້ອະຣິຍະມັກມີອົງ ໗ ທີ່ເກີດຂຶ້ນແລ້ວເຖິງຄວາມຈະເລີນເຕັມທີ່ ຄື ກັນລະຍານະມິດຕະຕາ (ຄວາມເປັນຜູ້ມີມິດດີ) ນີ້ເລີຍ

ພິກຂຸຜູ້ມີກັນລະຍານະມິດ ເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຈະເລີນອະຣິຍະມັກມີອົງ ໗ ເຮັດອະຣິຍະມັກມີອົງ ໗ ໃຫ້ຫຼາຍ

ພິກຂຸຜູ້ມີກັນລະຍານະມິດ ຈະເລີນອະຣິຍະມັກມີອົງ ໗ ເຮັດອະຣິຍະມັກມີອົງ ໗ ໃຫ້ຫຼາຍແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນອາໄສວິເວກ

ຯລຯ

໗. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸຜູ້ມີກັນລະຍານະມິດຈະເລີນອະຣິຍະມັກມີອົງ ໗ ເຮັດອະຣິຍະມັກມີອົງ ໗ ໃຫ້ຫຼາຍ ແນວນີ້ແລ

**ກັນລະຍານະມິດຕະສູດທີ ໑ ຈົບ**

## ໒-໖. ສີລະສຳປະທາທິສຸດຕະປັນຈະກະ

### ວ່າດ້ວຍພຣະສູດ ໕ ສູດ ມີສີລະສຳປະທາສູດເປັນຕົ້ນ

[ກ໘-໗໔] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເຮົາບໍ່ພິຈາລະນາເຫັນທຳອື່ນແມ່ນແນວໜຶ່ງທີ່ເປັນເຫດໃຫ້ອະຣິຍະມັກມີອົງ ๘ ທີ່ຍັງບໍ່ເກີດກໍເກີດຂຶ້ນ ຫຼື ເປັນເຫດໃຫ້ອະຣິຍະມັກມີອົງ ๘ ທີ່ເກີດຂຶ້ນແລ້ວເຖິງຄວາມຈະເລີນເຕັມທີ່ ຄື ສີລະສຳປະທານີ້ ฯລฯ

ຄື ສັນທະສຳປະທານີ້ ฯລฯ
ຄື ອັດຕະສຳປະທານີ້ ฯລฯ
ຄື ທິດຖິສຳປະທານີ້ ฯລฯ
ຄື ອັບປະມາທະສຳປະທານີ້ ฯລฯ

**ສີລະສຳປະທາທິສຸດຕະປັນຈະກະທີ ໔-໖ ຈົບ**

# ໗. ໂຍນິໂສມະນະສິການສຳປະທາສູດ

## ວ່າດ້ວຍໂຍນິໂສມະນະສິການສຳປະທາ

[๘໑] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ฯລฯ ຄືໂຍນິໂສມະນະສິການສຳປະທານີ້

ພິກຂຸຜູ້ເຖິງພ້ອມດ້ວຍໂຍນິໂສມະນະສິການ ເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຈະເລີນອະຣິຍະມັກມີອົງ ๘ ເຮັດອະຣິຍະມັກມີອົງ ๘ ໃຫ້ຫຼາຍ

ພິກຂຸຜູ້ເຖິງພ້ອມດ້ວຍໂຍນິໂສມະນະສິການ ຈະເລີນອະຣິຍະມັກມີອົງ ๘ ເຮັດອະຣິຍະມັກ ມີອົງ ๘ ໃຫ້ຫຼາຍ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນອາໄສວິເວກ
ฯລฯ
๘. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປ ໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸຜູ້ເຖິງພ້ອມດ້ວຍໂຍນິໂສມະນະສິການ ຈະເລີນອະຣິຍະມັກມີອົງ ๘ ເຮັດອະຣິຍະມັກມີອົງ ๘ ໃຫ້ຫຼາຍ ແນວນີ້ແລ

**ໂຍນິໂສມະນະສິການສຳປະທາສູດທີ ໗ ຈົບ**

# ໒. ກັນລະຍານະມິດຕະສູດ

## ວ່າດ້ວຍກັນລະຍານະມິດ

[໗໔] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເຮົາຍັງບໍ່ພິຈາລະນາເຫັນທຳອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ອະຣິຍະມັກມີອົງ ໘ ທີ່ຍັງບໍ່ເກີດກໍເກີດຂຶ້ນ ຫຼື ເປັນເຫດໃຫ້ອະຣິຍະມັກມີອົງ ໘ ທີ່ເກີດຂຶ້ນແລ້ວເຖິງຄວາມຈະເລີນເຕັມທີ່ ຄືກັນລະຍານະມິດຕະຕານີ້

ພິກຂຸຜູ້ມີກັນລະຍານະມິດ ເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ

ພິກຂຸຜູ້ມີກັນລະຍານະມິດ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວໃດ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນເປັນທຳມີການກຳຈັດຣາຄະ ໂທສະແລະໂມຫະເປັນບ່ອນສຸດ
ฯລฯ
໘. ຈະເລີນສຳມາສະມາທິອັນເປັນທຳມີການກຳຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ

ພິກຂຸທັງຫຼາຍ ພິກຂຸຜູ້ມີກັນລະຍານະມິດຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວນີ້ແລ

**ກັນລະຍານະມິດຕະສູດທີ ໒ ຈົບ**

# ໓-໑໓. ສີລະສຳປະທາທິສຸດຕະປັນຈະກະ

## ວ່າດ້ວຍພຣະສູດ ໕ ສູດ ມີສີລະສຳປະທາສູດເປັນຕົ້ນ

[໗໕-໗໙] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເຮົາບໍ່ພິຈາລະນາເຫັນທໍາອື່ນ ແມ່ນແນວໜຶ່ງທີ່ເປັນເຫດໃຫ້ອະຣິຍະມັກມີອົງ ໘ ທີ່ຍັງບໍ່ເກີດກໍເກີດຂຶ້ນ ຫຼື ເປັນເຫດໃຫ້ອະຣິຍະມັກມີອົງ ໘ ທີ່ເກີດຂຶ້ນແລ້ວເຖິງຄວາມຈະເລີນເຕັມທີ່ ຄື ສີລະສໍາປະທານີ້ ຯລຯ

ຄື ສັນທະສໍາປະທານີ້ ຯລຯ

ຄື ອັດຕະສໍາປະທານີ້ ຯລຯ

ຄື ທິດຖິສໍາປະທານີ້ ຯລຯ

ຄື ອັບປະມາທະສໍາປະທານີ້ ຯລຯ

**ສີລະສໍາປະທາທິສຸດຕະປັນຈະກະທີ ໙-໑໓ ຈົບ**

# ໑໔. ໂຍນິໂສມະນະສິການສໍາປະທາສູດ

## ວ່າດ້ວຍໂຍນິໂສມະນະສິການສໍາປະທາ

[໑໐] ຯລຯ ຄືໂຍນິໂສມະນະສິການສໍາປະທານີ້

ພິກຂຸຜູ້ເຖິງພ້ອມດ້ວຍໂຍນິໂສມະນະສິການເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ

ພິກຂຸຜູ້ເຖິງພ້ອມດ້ວຍໂຍນິໂສມະນະສິການ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກ ມີອົງ ໘ ໃຫ້ຫຼາຍ ແນວໃດ?

ຄື ພິກຂຸໃນທໍາວິໄນນີ້

໑. ຈະເລີນສໍາມາທິດຖິອັນເປັນທໍາມີການກໍາຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ

ຯລຯ

໘. ຈະເລີນສໍາມາສະມາທິອັນເປັນທໍາມີການກໍາຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ

ພິກຂຸທັງຫຼາຍ ພິກຂຸຜູ້ເຖິງພ້ອມດ້ວຍໂຍນິໂສມະນະສິການ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວນີ້ແລ

**ໂຍນິໂສມະນະສິການສໍາປະທາສູດທີ ໑໔ ຈົບ**

**ທຸຕິຍະເອກະທໍາມະເປີຍຍາລະວັກທີ ໘ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໖. ຄັງຄາເປີຍຍາລະວັກ

### ໝວດວ່າດ້ວຍຄັງຄາເປີຍຍາລະ

## ໑. ປະຖົມປາຈີນນິນນະສູດ

### ວ່າດ້ວຍອຸປະມາດ້ວຍແມ່ນ້ຳໄຫຼໄປສູ່ທິດປາຈີນ ສູດທີ ໑

[໖໑] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ແມ່ນ້ຳຄົງຄາໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອຈະເລີນ ອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸ ເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ

ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ
ຯລຯ
໘. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ

ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວນີ້ແລ

**ປະຖົມປາຈີນນິນນະສູດທີ ໑ ຈົບ**

# ໔-໕. ທຸຕິຍາທິປາຈີນນິນນະສຸດຕະຈະຕຸກກະ

## ວ່າດ້ວຍພຣະສູດ ໔ ສູດ ມີທຸຕິຍະປາຈີນນິນນະສູດເປັນຕົ້ນ

[໗໔-໗໕] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ແມ່ນ້ຳຍະມຸນາໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ฯລฯ

ພິກຂຸທັງຫຼາຍ ແມ່ນ້ຳອະຈິຣະວະດີໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ฯລฯ

ພິກຂຸທັງຫຼາຍ ແມ່ນ້ຳສະຣະພູໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ ທິດປາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ฯລฯ

ພິກຂຸທັງຫຼາຍ ແມ່ນ້ຳມະຮີໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດ ປາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ฯລฯ

**ທຸຕິຍາທິປາຈີນນິນນະສຸດຕະຈະຕຸກກະທີ ໔-໕ ຈົບ**

# ໖. ສັດຖະປາຈີນນິນນະສູດ

## ວ່າດ້ວຍອຸປະມາດ້ວຍແມ່ນ້ຳໄຫຼໄປສູ່ທິດປາຈີນ ສູດທີ ໖

[໗໖] ພິກຂຸທັງຫຼາຍ ແມ່ນ້ຳໃຫຍ່ເຫຼົ່ານີ້ ຄື ແມ່ນ້ຳຄົງຄາ ແມ່ນ້ຳຍະມຸນາ ແມ່ນ້ຳອະຈິຣະວະດີ ແມ່ນ້ຳສະຣະພູ ແມ່ນ້ຳມະຮີທັງໝົດໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ

ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນອາໄສວິເວກ

ຯລຯ

໘. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປ ໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວນີ້ແລ

**ສັດຖະປາຈີນນິນນະສູດທີ່ ໖ ຈົບ**

# ໗. ປະຖົມສະມຸດທະນິນນະສູດ

## ວ່າດ້ວຍອຸປະມາດ້ວຍແມ່ນ້ຳໄຫຼໄປສູ່ສະມຸດ ສູດທີ່ ໑

[໙໗] ພິກຂຸທັງຫຼາຍ ແມ່ນ້ຳຄົງຄາໄຫຼໄປສູ່ສະມຸດ ບ່າໄປສູ່ສະມຸດ ລົ້ນໄປສູ່ສະມຸດ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກ ມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ

ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວໃດ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນອາໄສວິເວກ

ຯລຯ

໘. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປ ໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວນີ້ແລ

**ປະຖົມສະມຸດທະນິນນະສູດທີ່ ໗ ຈົບ**

# ໗-໑໘. ທຸຕິຍາທິສະມຸດທະນິນນະສຸດຕະປັນຈະກະ

## ວ່າດ້ວຍພຣະສູດ ໕ ສູດ ມີທຸຕິຍະສະມຸດທະນິນນະສູດເປັນຕົ້ນ

[໙໗-໑໐໘] ພິກຂຸທັງຫຼາຍ ແມ່ນ້ຳຍະມຸນາໄຫຼໄປສູ່ສະມຸດ ບ່າໄປສູ່ສະມຸດ ລົ້ນໄປສູ່ສະມຸດ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ฯລฯ

ພິກຂຸທັງຫຼາຍ ແມ່ນ້ຳອະຈິຣະວະດີໄຫຼໄປສູ່ສະມຸດ ບ່າໄປສູ່ສະມຸດ ລົ້ນໄປສູ່ສະມຸດ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ฯລฯ

ພິກຂຸທັງຫຼາຍ ແມ່ນ້ຳສະຣະພູໄຫຼໄປສູ່ສະມຸດ ບ່າໄປສູ່ສະມຸດ ລົ້ນໄປສູ່ສະມຸດ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ฯລฯ

ພິກຂຸທັງຫຼາຍ ແມ່ນ້ຳມະຮີໄຫຼໄປສູ່ສະມຸດ ບ່າໄປສູ່ສະມຸດ ລົ້ນໄປສູ່ສະມຸດ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ฯລฯ

ພິກຂຸທັງຫຼາຍ ແມ່ນ້ຳໃຫຍ່ເຫຼົ່ານີ້ ຄື ແມ່ນ້ຳຄົງຄາ ແມ່ນ້ຳຍະມຸນາ ແມ່ນ້ຳອະຈິຣະວະດີ ແມ່ນ້ຳສະຣະພູ ແມ່ນ້ຳມະຮີທັງໝົດໄຫຼໄປສູ່ສະມຸດ ບ່າໄປສູ່ສະມຸດ ລົ້ນໄປສູ່ສະມຸດ

ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ

ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ฯລฯ

໘. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວນີ້ແລ

**ທຸຕິຍາທິສະມຸດທະນິນນະສຸດຕະປັນຈະກະທີ ໘-໑໘ ຈົບ**

ຄັງຄາເປີຍຍາລະວາຣະ ທ່ານຂຽນໄວ້ໂດຍຫຍໍ້ ເພິ່ງໃຫ້ພິດສະດານໃນເປີຍຍາລະ

**ຄັງຄາເປີຍຍາລະວັກທີ ໗ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໑໐. ທຸຕິຍະຄັງຄາເປີຍຍາລະວັກ

### ໝວດວ່າດ້ວຍຄັງຄາເປີຍຍາລະທີ ໒

## ໑. ປະຖົມປາຈີນນິນນະສູດ

### ວ່າດ້ວຍອຸປະມາດ້ວຍແມ່ນ້ຳໄຫຼໄປສູ່ທິດປາຈີນ ສູດທີ ໑

[໑໐໓] ພິກຂຸທັງຫຼາຍ ແມ່ນ້ຳຄົງຄາໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນເປັນທຳມີການກຳຈັດຣາຄະ ໂທສະແລະໂມຫະເປັນບ່ອນສຸດ

ฯລฯ

໘. ຈະເລີນສຳມາສະມາທິອັນເປັນທຳມີການກຳຈັດຣາຄະ ໂທສະແລະໂມຫະເປັນບ່ອນສຸດ

ພິກຂຸທັງຫຼາຍ ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ

ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວນີ້ແລ

**ປະຖົມປາຈີນນິນນະສູດທີ ໑ ຈົບ**

# ໘-໖. ທຸຕິຍາທິປາຈີນນິນນະສຸດຕະປັນຈະກະ

## ວ່າດ້ວຍພຣະສູດ ໕ ສູດ ມີທຸຕິຍະປາຈີນນິນນະສູດເປັນຕົ້ນ

[໑໐໔-໑໐໗] ພິກຂຸທັງຫຼາຍ ແມ່ນ້ຳຍະມຸນາໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຯລຯ

ພິກຂຸທັງຫຼາຍ ແມ່ນ້ຳອະຈິຣະວະດີໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຯລຯ

ພິກຂຸທັງຫຼາຍ ແມ່ນ້ຳສະຣະພູໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຯລຯ

ພິກຂຸທັງຫຼາຍ ແມ່ນ້ຳມະຮີໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຯລຯ

ພິກຂຸທັງຫຼາຍ ແມ່ນ້ຳໃຫຍ່ເຫຼົ່ານີ້ ຄື ແມ່ນ້ຳຄົງຄາ ແມ່ນ້ຳຍະມຸນາ ແມ່ນ້ຳອະຈິຣະວະດີ ແມ່ນ້ຳສະຣະພູ ແມ່ນ້ຳມະຮີທັງໝົດໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຯລຯ

**ທຸຕິຍາທິປາຈີນນິນນະສຸດຕະປັນຈະກະທີ ໘-໖ ຈົບ**

# ໗. ປະຖົມສະມຸດທະນິນນະສູດ

## ວ່າດ້ວຍອຸປະມາດ້ວຍແມ່ນ້ຳໄຫຼໄປສູ່ສະມຸດ ສູດທີ ໑

[໑໐໙] ພິກຂຸທັງຫຼາຍ ແມ່ນ້ຳຄົງຄາໄຫຼໄປສູ່ສະມຸດ ບ່າໄປສູ່ສະມຸດ ລົ້ນໄປສູ່ສະມຸດ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດ ອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປ

ສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນເປັນທຳມີການກຳຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ

ຯລຯ

໘. ຈະເລີນສຳມາສະມາທິອັນເປັນທຳມີການກຳຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ

ພິກຂຸທັງຫຼາຍ ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວນີ້ແລ

**ປະຖົມສະມຸດທະນິນນະສູດທີ ໗ ຈົບ**

# ໘-໑໔. ທຸຕິຍາທິສະມຸດທະນິນນະສຸດຕະປັນຈະກະ

## ວ່າດ້ວຍພຣະສູດ ໕ ສູດ ມີທຸຕິຍະສະມຸດທະນິນນະສູດເປັນຕົ້ນ

[໑໑໐-໑໑໔] ພິກຂຸທັງຫຼາຍ ແມ່ນ້ຳຍະມຸນາໄຫຼໄປສູ່ສະມຸດ ບ່າໄປສູ່ສະມຸດ ລົ້ນໄປສູ່ສະມຸດ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຯລຯ

ພິກຂຸທັງຫຼາຍ ແມ່ນ້ຳອະຈິຣະວະດີໄຫຼໄປສູ່ສະມຸດ ບ່າໄປສູ່ສະມຸດ ລົ້ນໄປສູ່ສະມຸດ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຯລຯ

ພິກຂຸທັງຫຼາຍ ແມ່ນ້ຳສະຣະພູໄຫຼໄປສູ່ສະມຸດ ບ່າໄປສູ່ສະມຸດ ລົ້ນໄປສູ່ສະມຸດ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຯລຯ

ພິກຂຸທັງຫຼາຍ ແມ່ນ້ຳມະຮີໄຫຼໄປສູ່ສະມຸດ ບ່າໄປສູ່ສະມຸດ ລົ້ນໄປສູ່ສະມຸດ

ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຯລຯ

ພິກຂຸທັງຫຼາຍ ແມ່ນ້ຳໃຫຍ່ເຫຼົ່ານີ້ ຄື ແມ່ນ້ຳຄົງຄາ ແມ່ນ້ຳຍະມຸນາ ແມ່ນ້ຳອະຈິຣະວະດີ ແມ່ນ້ຳສະຣະພູ ແມ່ນ້ຳມະຮີທັງໝົດໄຫຼໄປສູ່ສະມຸດ ບ່າໄປສູ່ສະມຸດ ລົ້ນໄປສູ່ສະມຸດ

ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນເປັນທຳມີການກຳຈັດຣາຄະ ໂທສະແລະໂມຫະເປັນບ່ອນສຸດ

ฯລฯ

໘. ຈະເລີນສຳມາສະມາທິອັນເປັນທຳມີການກຳຈັດຣາຄະ ໂທສະແລະໂມຫະເປັນບ່ອນສຸດ

ພິກຂຸທັງຫຼາຍ ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວນີ້ແລ

**ທຸຕິຍາທິສະມຸດທະນິນນະສຸດຕະປັນຈະກະທີ ໒-໑໘ ຈົບ**

(ໝວດທີ ໘ ວ່າດ້ວຍທຳເປັນທີ່ກຳຈັດຣາຄະມີ ໑໘ ສູດ ຄື ໖ ສູດທຳອິດ ວ່າດ້ວຍອຸປະມາດ້ວຍແມ່ນ້ຳໄຫຼໄປສູ່ທິດປາຈີນ ໖ ສູດຫຼັງ ວ່າດ້ວຍອຸປະມາດ້ວຍແມ່ນ້ຳໄຫຼໄປສູ່ສະມຸດ)

# ໑໓. ປະຖົມປາຈີນນິນນະສູດ

## ວ່າດ້ວຍອຸປະມາດ້ວຍແມ່ນ້ຳໄຫຼໄປສູ່ທິດປາຈີນ ສູດທີ ໑

[໑໑໕] ພິກຂຸທັງຫຼາຍ ແມ່ນ້ຳຄົງຄາໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະ ເປັນບ່ອນສຸດ

ฯລฯ

໘. ຈະເລີນສຳມາສະມາທິອັນຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະ ເປັນບ່ອນສຸດ

ພິກຂຸທັງຫຼາຍ ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວນີ້ແລ

**ປະຖົມປາຈີນນິນນະສູດທີ ໑໓ ຈົບ**

# ໑໔-໑໘. ທຸຕິຍາທິປາຈີນນິນນະສຸດຕະປັນຈະກະ

## ວ່າດ້ວຍພຣະສູດ ໕ ສູດ ມີທຸຕິຍະປາຈີນນິນນະສູດເປັນຕົ້ນ

[໑໑໓-໑໘໐] ພິກຂຸທັງຫຼາຍ ແມ່ນ້ຳຍະມຸນາໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດ ປາຈີນ ລົ້ນໄປສູ່ທິດປາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຯລຯ

ພິກຂຸທັງຫຼາຍ ແມ່ນ້ຳອະຈິຣະວະດີໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຯລຯ

ພິກຂຸທັງຫຼາຍ ແມ່ນ້ຳສະຣະພູໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຯລຯ

ພິກຂຸທັງຫຼາຍ ແມ່ນ້ຳມະຮີໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດ ປາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຯລຯ

ພິກຂຸທັງຫຼາຍ ແມ່ນ້ຳໃຫຍ່ເຫຼົ່ານີ້ ຄື ແມ່ນ້ຳຄົງຄາ ແມ່ນ້ຳຍະມຸນາ ແມ່ນ້ຳອະຈິຣະວະດີ ແມ່ນ້ຳສະຣະພູ ແມ່ນ້ຳມະຮີທັງໝົດໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຯລຯ

**ທຸຕິຍາທິປາຈີນນິນນະສຸດຕະປັນຈະກະທີ ໑໔-໑໘ ຈົບ**

# ໑໙. ປະຖົມສະມຸດທະນິນນະສູດ

## ວ່າດ້ວຍອຸປະມາດ້ວຍແມ່ນ້ຳໄຫຼໄປສູ່ສະມຸດ ສູດທີ ໑

[໑໘໑] ພິກຂຸທັງຫຼາຍ ແມ່ນ້ຳຄົງຄາໄຫຼໄປສູ່ສະມຸດ ບ່າໄປສູ່ສະມຸດ ລົ້ນໄປສູ່ສະມຸດ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກ ມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວໃດ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະເປັນບ່ອນສຸດ
ຯລຯ
໘. ຈະເລີນສຳມາສະມາທິອັນຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະ ເປັນບ່ອນສຸດ

ພິກຂຸທັງຫຼາຍ ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວນີ້ແລ

**ປະຖົມສະມຸດທະນິນນະສູດທີ ໑໙ ຈົບ**

# ໘໐-໘໔. ທຸຕິຍາທິສະມຸດທະນິນນະສຸດຕະປັນຈະກະ

## ວ່າດ້ວຍພຣະສູດ ໕ ສູດ ມີທຸຕິຍະສະມຸດທະນິນນະສູດເປັນຕົ້ນ

[໑໘໔-໑໘໗] ພິກຂຸທັງຫຼາຍ ແມ່ນ້ຳຍະມຸນາໄຫຼໄປສູ່ສະມຸດ ບ່າໄປສູ່ສະມຸດ ລົ້ນໄປສູ່ສະມຸດ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຯລຯ

ພິກຂຸທັງຫຼາຍ ແມ່ນ້ຳອະຈິຣະວະດີໄຫຼໄປສູ່ສະມຸດ ບ່າໄປສູ່ສະມຸດ ລົ້ນໄປສູ່ສະມຸດ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຯລຯ

ພິກຂຸທັງຫຼາຍ ແມ່ນ້ຳສະຣະພູໄຫຼໄປສູ່ສະມຸດ ບ່າໄປສູ່ສະມຸດ ລົ້ນໄປສູ່ສະມຸດ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຯລຯ

ພິກຂຸທັງຫຼາຍ ແມ່ນ້ຳມະຮີໄຫຼໄປສູ່ສະມຸດ ບ່າໄປສູ່ສະມຸດ ລົ້ນໄປສູ່ສະມຸດ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຯລຯ

ພິກຂຸທັງຫຼາຍ ແມ່ນ້ຳໃຫຍ່ເຫຼົ່ານີ້ ຄື ແມ່ນ້ຳຄົງຄາ ແມ່ນ້ຳຍະມຸນາ ແມ່ນ້ຳອະຈິຣະວະດີ ແມ່ນ້ຳສະຣະພູ ແມ່ນ້ຳມະຮີທັງໝົດໄຫຼໄປສູ່ສະມຸດ ບ່າໄປສູ່ສະມຸດ ລົ້ນໄປສູ່ສະມຸດ

ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ

໗ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນຍັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະເປັນບ່ອນສຸດ

ຯລຯ

໘. ຈະເລີນສຳມາສະມາທິອັນຍັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະ ເປັນບ່ອນສຸດ

ພິກຂຸທັງຫຼາຍ ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວນີ້ແລ

**ທຸຕິຍາທິສະມຸດທະນິນນະສຸດຕະປັນຈະກະທີ ໔໐-໔໔ ຈົບ**

(ໝວດທີ່ ໖ ວ່າດ້ວຍທຳອັນຍັ່ງລົງສູ່ອະມະຕະມີ ໑໔ ສູດ)

# ໔໕. ປະຖົມປາຈີນນິນນະສູດ

## ວ່າດ້ວຍອຸປະມາດ້ວຍແມ່ນ້ຳໄຫຼໄປສູ່ທິດປາຈີນ ສູດທີ ໑

[໑໔໗] ພິກຂຸທັງຫຼາຍ ແມ່ນ້ຳຄົງຄາໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ ນິບພານ

ຯລຯ

໗. ຈະເລີນສຳມາສະມາທິອັນນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸທັງຫຼາຍ ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວນີ້ແລ

**ປະຖົມປາຈີນນິນນະສູດທີ ໔໕ ຈົບ**

# ໔໖-໖໐. ທຸຕິຍາທິປາຈີນນິນນະສຸດຕະປັນຈະກະ

## ວ່າດ້ວຍພຣະສູດ ໕ ສູດ ມີທຸຕິຍະປາຈີນນິນນະສູດເປັນຕົ້ນ

[໑໔໗-໑໕໔] ພິກຂຸທັງຫຼາຍ ແມ່ນ້ຳຍະມຸນາໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດ ປາຈີນ ລົ້ນໄປສູ່ທິດປາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຯລຯ

ພິກຂຸທັງຫຼາຍ ແມ່ນ້ຳອະຈິຣະວະດີໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຯລຯ

ພິກຂຸທັງຫຼາຍ ແມ່ນ້ຳສະຣະພູໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຯລຯ

ພິກຂຸທັງຫຼາຍ ແມ່ນ້ຳມະຮີໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດໄປຣາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຯລຯ

ພິກຂຸທັງຫຼາຍ ແມ່ນ້ຳໃຫຍ່ເຫຼົ່ານີ້ ຄື ແມ່ນ້ຳຄົງຄາ ແມ່ນ້ຳຍະມຸນາ ແມ່ນ້ຳອະຈິຣະວະດີ ແມ່ນ້ຳສະຣະພູ ແມ່ນ້ຳມະຮີທັງໝົດໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດ ປາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ฯลฯ

๘. ຈະເລີນສຳມາສະມາທິອັນນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸທັງຫຼາຍ ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ๘ ເຮັດອະຣິຍະມັກມີອົງ ๘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວນີ້ແລ

**ທຸຕິຍາທິປາຈີນນິນນະສຸດຕະປັນຈະກະທີ ໔໖-໑໐ ຈົບ**

# ໑໑. ປະຖົມສະມຸດທະນິນນະສູດ

## ວ່າດ້ວຍອຸປະມາດ້ວຍແມ່ນ້ຳໄຫຼໄປສູ່ສະມຸດ ສູດທີ ໑

[໑໓໓] ພິກຂຸທັງຫຼາຍ ແມ່ນ້ຳຄົງຄາໄຫຼໄປສູ່ສະມຸດ ບ່າໄປສູ່ສະມຸດ ລົ້ນໄປສູ່ສະມຸດ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອຈະເລີນອະຣິຍະມັກມີອົງ ๘ ເຮັດອະຣິຍະມັກ ມີອົງ ๘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ๘ ເຮັດອະຣິຍະມັກມີອົງ ๘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ฯลฯ

๘. ຈະເລີນສຳມາສະມາທິອັນນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸທັງຫຼາຍ ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ๘ ເຮັດອະຣິຍະມັກມີອົງ ๘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວນີ້ແລ

**ປະຖົມສະມຸດທະນິນນະສູດທີ ໑໑ ຈົບ**

# ໓໔-໓໗. ທຸຕິຍາທິສະມຸດທະນິນນະສຸດຕະປັນຈະກະ

## ວ່າດ້ວຍພຣະສູດ ໕ ສູດ ມີທຸຕິຍະສະມຸດທະນິນນະສູດເປັນຕົ້ນ

[໑໓໔-໑໓໗] ພິກຂຸທັງຫຼາຍ ແມ່ນ້ຳຍະມຸນາໄຫຼໄປສູ່ສະມຸດ ບ່າໄປສູ່ສະມຸດ ລົ້ນໄປສູ່ສະມຸດ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຯລຯ

ພິກຂຸທັງຫຼາຍ ແມ່ນ້ຳອະຈິຣະວະດີໄຫຼໄປສູ່ສະມຸດ ບ່າໄປສູ່ສະມຸດ ລົ້ນໄປສູ່ສະມຸດ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຯລຯ

ພິກຂຸທັງຫຼາຍ ແມ່ນ້ຳສະຣະພູໄຫຼໄປສູ່ສະມຸດ ບ່າໄປສູ່ສະມຸດ ລົ້ນໄປສູ່ສະມຸດ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຯລຯ

ພິກຂຸທັງຫຼາຍ ແມ່ນ້ຳມຣີໄຫຼໄປສູ່ສະມຸດ ບ່າໄປສູ່ສະມຸດ ລົ້ນໄປສູ່ສະມຸດ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ຯລຯ

ພິກຂຸທັງຫຼາຍ ແມ່ນ້ຳໃຫຍ່ເຫຼົ່ານີ້ ຄື ແມ່ນ້ຳຄົງຄາ ແມ່ນ້ຳຍະມຸນາ ແມ່ນ້ຳອະຈິຣະວະດີ ແມ່ນ້ຳສະຣະພູ ແມ່ນ້ຳມະຣີທັງໝົດໄຫຼໄປສູ່ສະມຸດ ບ່າໄປສູ່ສະມຸດ ລົ້ນໄປສູ່ສະມຸດ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ຯລຯ

໘. ຈະເລີນສຳມາສະມາທິອັນນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸທັງຫຼາຍ ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວນີ້ແລ

**ທຸຕິຍາທິສະມຸດທະນິນນະສຸດຕະປັນຈະກະທີ ໓໔-໓໗ ຈົບ**

**ທຸຕິຍະຄັງຄາເປີຍຍາລະວັກທີ ໑໐ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໑໑. ອັບປະມາທະວັກ

### ໝວດວ່າດ້ວຍຄວາມບໍ່ພະໝາດ

## ໑. ຕະຖາຄະຕະສູດ

### ວ່າດ້ວຍພຣະຕະຖາຄົດເຈົ້າເປັນເລີດ

[໑໓໙] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສັດທັງຫຼາຍບໍ່ມີຕີນ ມີສອງຕີນ ມີສີ່ຕີນ ຫຼືມີຕີນຫຼາຍກໍຕາມ ມີຮູບ ບໍມີຮູບກໍຕາມ ມີສັນຍາ ບໍ່ມີສັນຍາ ຫຼືມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນກໍຕາມ ມີປະມານທໍ່ໃດ ຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ບັນດິດກ່າວວ່າເລີດກວ່າສັດມີປະມານທໍ່ນັ້ນ ສັນໃດ ກຸສົນທຳ ທັງໝົດກໍຄືກັນສັນນັ້ນ ມີຄວາມບໍ່ພະໝາດເປັນມູນ ລວມລົງ ໃນຄວາມບໍ່ ພະໝາດ ຄວາມບໍ່ພະໝາດບັນດິດກ່າວວ່າເລີດກວ່າກຸສົນທຳເຫຼົ່ານັ້ນ

ພິກຂຸຜູ້ບໍ່ພະໝາດເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ

ພິກຂຸຜູ້ບໍ່ພະໝາດ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

໒. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸຜູ້ບໍ່ຜະໝາດຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວນີ້

ພິກຂຸທັງຫຼາຍ ສັດທັງຫຼາຍບໍ່ມີຕີນ ມີສອງຕີນ ມີສີ່ຕີນ ຫຼືມີຕີນຫຼາຍກໍຕາມ ມີຮູບ ບໍ່ມີຮູບກໍຕາມ ມີສັນຍາ ບໍ່ມີສັນຍາ ຫຼື ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍ ບໍ່ແມ່ນກໍຕາມ ມີປະມານທີ່ໃດ ຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າບັນດິດກ່າວວ່າ ເລີດກວ່າສັດມີປະມານທີ່ນັ້ນ ສັນໃດກຸສົນທຳທັງ ໝົດກໍຄືກັນສັນນັ້ນ ມີຄວາມບໍ່ຜະໝາດເປັນມູນ ລວມລົງໃນຄວາມບໍ່ຜະໝາດ ຄວາມບໍ່ຜະໝາດບັນດິດກ່າວວ່າເລີດກວ່າກຸສົນທຳເຫຼົ່ານັ້ນ

ພິກຂຸຜູ້ບໍ່ຜະໝາດເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິມັກ ມີອົງ ໘ ໃຫ້ຫຼາຍ

ພິກຂຸຜູ້ບໍ່ຜະໝາດຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນເປັນທຳມີການກຳຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ

໗ລ໗

໒. ຈະເລີນສຳມາສະມາທິອັນເປັນທຳມີການກຳຈັດຣາຄະ ໂທສະແລະໂມຫະເປັນບ່ອນສຸດ

ພິກຂຸຜູ້ບໍ່ຜະໝາດຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວນີ້

ພິກຂຸທັງຫຼາຍ ສັດທັງຫຼາຍບໍ່ມີຕີນ ມີສອງຕີນ ມີສີ່ຕີນ ຫຼືມີຕີນຫຼາຍກໍຕາມ ມີຮູບ ບໍ່ມີຮູບກໍຕາມ ມີສັນຍາ ບໍ່ມີສັນຍາ ຫຼືມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍ ບໍ່ແມ່ນກໍຕາມ ມີປະມານທີ່ໃດ ຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າບັນດິດກ່າວວ່າ ເລີດກວ່າສັດມີປະມານທີ່ນັ້ນ ສັນໃດກຸສົນທຳທັງ ໝົດກໍສັນນັ້ນຄືກັນ ມີຄວາມບໍ່ຜະໝາດເປັນມູນ ລວມລົງໃນຄວາມບໍ່ຜະໝາດ ຄວາມບໍ່ຜະໝາດບັນດິດກ່າວວ່າເລີດກວ່າກຸສົນທຳເຫຼົ່ານັ້ນ

ພິກຂຸຜູ້ບໍ່ຜະໝາດເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ

ພິກຂຸຜູ້ບໍ່ຜະໝາດຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍແນວໃດ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະເປັນບ່ອນສຸດ

ຯລຯ

໘. ຈະເລີນສຳມາສະມາທິອັນຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະ ເປັນບ່ອນສຸດ

ພິກຂຸຜູ້ບໍ່ຜະໝາດຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວນີ້

ພິກຂຸທັງຫຼາຍ ສັດທັງຫຼາຍມີສອງຕີນ ມີສີ່ຂາ ຫຼືມີຕີນຫຼາຍກໍຕາມ ມີຮູບ ບໍມີຮູບກໍຕາມ ມີສັນຍາ ບໍ່ມີສັນຍາ ຫຼື ມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນກໍຕາມ ມີປະມານທໍ່ໃດ ຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າບັນດິດກ່າວວ່າເລີດກວ່າສັດມີປະມານທໍ່ນັ້ນ ສັນໃດ ກຸສົນທຳທັງໝົດກໍຄືກັນສັນນັ້ນ ມີຄວາມບໍ່ຜະໝາດເປັນມູນ ລວມລົງໃນຄວາມບໍ່ຜະໝາດ ຄວາມບໍ່ຜະໝາດບັນດິດກ່າວວ່າ ເລີດກວ່າກຸສົນທຳເຫຼົ່ານັ້ນ

ພິກຂຸຜູ້ບໍ່ຜະໝາດເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກ ມີອົງ ໘ ໃຫ້ຫຼາຍ

ພິກຂຸຜູ້ບໍ່ຜະໝາດຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ຯລຯ

໘. ຈະເລີນສຳມາສະມາທິອັນນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸທັງຫຼາຍ ພິກຂຸຜູ້ບໍ່ຜະໝາດຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວນີ້ແລ

**ຕະຖາຄະຕະສູດທີ ໑ ຈົບ**

# ໘. ປະທະສູດ

## ວ່າດ້ວຍອຸປະມາດ້ວຍຮອຍຕີນສັດ

[໑໘໐] ພິກຂຸທັງຫຼາຍ ຮອຍຕີນຂອງສັດທີ່ທ່ຽວໄປເທິງແຜ່ນດິນທັງໝົດລວມລົງໃນຮອຍຕີນຊ້າງ ຮອຍຕີນຊ້າງຊາວໂລກກ່າວວ່າເລີດກວ່າຮອຍຕີນເຫຼົ່ານັ້ນ ຍ້ອນເປັນຮອຍໃຫຍ່ ແມ່ນສັນໃດ ກຸສົນທຳທັງໝົດກໍຄືກັນສັນນັ້ນ ມີຄວາມບໍ່ພະໝາດເປັນມູນ ລວມລົງໃນຄວາມບໍ່ພະໝາດ ຄວາມບໍ່ພະໝາດບັນດິດກ່າວວ່າເລີດກວ່າກຸສົນທຳເຫຼົ່ານັ້ນ

ພິກຂຸຜູ້ບໍ່ພະໝາດເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ

ພິກຂຸຜູ້ບໍ່ພະໝາດຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວໃດ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ຯລຯ

໘. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸຜູ້ບໍ່ພະໝາດຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວນີ້ແລ

**ປະທະສູດທີ ໘ ຈົບ**

# ໙-໑໓. ກູຕາທິສຸດຕະປັນຈະກະ

## ວ່າດ້ວຍພຣະສູດ ໕ ສູດ ມີກູຕະສູດເປັນຕົ້ນ

[໑໘໑-໑໘໕] ພິກຂຸທັງຫຼາຍ ກອນຂອງເຮືອນຍອດທັງໝົດກ່າຍໄປເຖິງຍອດ ລວມລົງທີ່ຍອດ ຍອດເຮືອນຊາວໂລກກ່າວວ່າເລີດກວ່າກອນເຫຼົ່ານັ້ນທັງໝົດ ແມ່ນສັນໃດ ກຸສົນທຳທັງໝົດກໍຄືກັນສັນນັ້ນ ຯລຯ

(ເພິ່ງເພີ່ມຂໍ້ຄວາມໃຫ້ພິດສະດານຄືສູດຕົ້ນ)

ກິ່ນຫອມທີ່ເກີດຈາກຮາກຊະນິດໃດຊະນິດໜຶ່ງ ເກດສະໜາຊາວໂລກກ່າວວ່າເລີດກວ່າກິ່ນ ຫອມທີ່ເກີດຈາກຮາກເຫຼົ່ານັ້ນ ແມ່ນສັນໃດ ກຸສົນທຳທັງໝົດກໍຄືກັນສັນນັ້ນ ຯລຯ

ກິ່ນຫອມທີ່ເກີດຈາກແກ່ນຊະນິດໃດຊະນິດໜຶ່ງ ຈັນແດງຊາວໂລກກ່າວວ່າເລີດກວ່າ ກິ່ນທີ່ເກີດຈາກແກ່ນເຫຼົ່ານັ້ນ ແມ່ນສັນໃດ ກຸສົນທຳທັງໝົດກໍຄືກັນສັນນັ້ນ ຯລຯ

ກິ່ນຫອມທີ່ເກີດຈາກດອກຊະນິດໃດຊະນິດໜຶ່ງ ດອກມະລິຊາວໂລກກ່າວວ່າເລີດກວ່າກິ່ນທີ່ເກີດຈາກດອກເຫຼົ່ານັ້ນ ແມ່ນສັນໃດ ກຸສົນທຳທັງໝົດກໍຄືກັນສັນນັ້ນ ຯລຯ

ພຣະຣາຊາຜູ້ມີອຳນາດນ້ອຍທັງໝົດ ຍ່ອມຄ້ອຍຕາມພຣະເຈົ້າຈັກກະພັດ ພຣະເຈົ້າຈັກກະພັດຊາວໂລກກ່າວວ່າເລີດກວ່າພຣະຣາຊາຜູ້ມີອຳນາດນ້ອຍເຫຼົ່ານັ້ນ ແມ່ນສັນໃດ ກຸສົນທຳທັງໝົດກໍຄືກັນສັນນັ້ນ ຯລຯ

**ກູຕາທິສຸດຕະປັນຈະກະທີ ៦-໗ ຈົບ**

# ໙-໑໐. ຈັນທິມາທິສຸດຕະຕິກະ

## ວ່າດ້ວຍພຣະສູດ ៦ ສູດ ມີຈັນທິມະສູດເປັນຕົ້ນ

[໑໘៦-໑໘໙] ພິກຂຸທັງຫຼາຍ ແສງສະຫວ່າງຂອງດວງດາວທັງໝົດຍ່ອມບໍ່ເຖິງສ່ວນທີ່ ໑៦ ແຫ່ງແສງສະຫວ່າງຂອງດວງຈັນ ແສງສະຫວ່າງຂອງດວງຈັນຊາວໂລກກ່າວວ່າເລີດກວ່າແສງສະຫວ່າງຂອງດວງດາວເຫຼົ່ານັ້ນ ແມ່ນສັນໃດ ກຸສົນທຳທັງໝົດກໍຄືກັນສັນນັ້ນ ຯລຯ

ໃນສາລະທະລະດູເມື່ອຝົນຂາດຫາຍ ປາສະຈາກກ້ອນເພື້ອ ດວງອາທິດອຸໄທຂຶ້ນສູ່ທ້ອງຟ້າກຳຈັດຄວາມມືດທີ່ມີຢູ່ໃນອາກາດທັງໝົດຍ່ອມສ່ອງແສງ ແຜ່ແສງຈ້າ ແລະແຈ່ມກະຈ່າງ ແມ່ນສັນໃດ ກຸສົນທຳທັງໝົດກໍຄືກັນສັນນັ້ນ ຯລຯ

ຜ້າທີ່ທໍດ້ວຍດ້າຍຊະນິດໃດຊະນິດໜຶ່ງ ຜ້າແຄວັນກາສີຊາວໂລກກ່າວວ່າເລີດກວ່າຜ້າເຫຼົ່ານັ້ນ ແມ່ນສັນໃດ ກຸສົນທຳທັງໝົດກໍຄືກັນສັນນັ້ນ ມີຄວາມບໍ່ຜະໝາດເປັນມູນ ລວມລົງໃນຄວາມບໍ່ຜະໝາດ ຄວາມບໍ່ຜະໝາດບັນດິດກ່າວວ່າເລີດກວ່າກຸສົນທຳເຫຼົ່ານັ້ນ

ພິກຂຸທັງຫຼາຍ ພິກຂຸຜູ້ບໍ່ຜະໝາດເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຈະເລີນອະຣິຍະມັກມີອົງ ៨ ເຮັດອະຣິຍະມັກມີອົງ ៨ ໃຫ້ຫຼາຍ

(ເພິ່ງເພີ່ມຂໍ້ຄວາມໃຫ້ພິດສະດານຄືຕະຖາຄະຕະສູດ)

**ຈັນທິມາທິສຸດຕະຕິກະທີ ໙-໑໐ ຈົບ**

**ອັບປະມາທະວັກທີ ໑໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໑໘. ພະລະກະຣະນີຍະວັກ

## ໝວດວ່າດ້ວຍການງານທີ່ເພິ່ງເຮັດດ້ວຍກຳລັງ

## ໑. ພະລະສູດ

### ວ່າດ້ວຍອຸປະມາດ້ວຍກຳລັງ

[໑໘໙] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ການງານທີ່ເພິ່ງເຮັດດ້ວຍກຳລັງທັງໝົດ ບຸກຄົນຕ້ອງອາໄສແຜ່ນດິນ ດຳລົງຢູ່ເທິງແຜ່ນດິນຈຶ່ງເຮັດໄດ້ ແມ່ນສັນໃດ ພິກຂຸກໍສັນນັ້ນ ຄືກັນ ອາໄສສີນ ດຳລົງຢູ່ໃນສີນ°ແລ້ວ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ

ພິກຂຸອາໄສສີນ ດຳລົງຢູ່ໃນສີນແລ້ວ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວໃດ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ຫລຯ

໒. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປ ໃນໂວດສັກຄະ

ພິກຂຸອາໄສສີນ ດຳລົງຢູ່ໃນສີນແລ້ວ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວນີ້ແລ

(ເພິ່ງຮູ້ຄວາມພິດສະດານສູດທີ ບໍລິບູນຕາມພັນນາໃນຄັງຄາເປີຍຍາລະຂ້າງຕົ້ນ)

ພິກຂຸທັງຫຼາຍ ການງານທີ່ເພິ່ງເຮັດດ້ວຍກຳລັງທັງໝົດ ບຸກຄົນຕ້ອງອາໄສແຜ່ນດິນດຳລົງຢູ່ເທິງແຜ່ນດິນຈຶ່ງເຮັດໄດ້ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ອາໄສສີນ ດຳລົງຢູ່ ໃນສີນແລ້ວ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ

ພິກຂຸອາໄສສີນ ດຳລົງຢູ່ໃນສີນແລ້ວ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກ ມີອົງ ໘ ໃຫ້ຫຼາຍ ແນວໃດ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນເປັນທຳມີການກຳຈັດຣາຄະ ໂທສະແລະໂມຫະເປັນບ່ອນສຸດ

ຫລຯ

໒. ຈະເລີນສຳມາສະມາທິອັນເປັນທຳມີການກຳຈັດຣາຄະ ໂທສະແລະໂມຫະເປັນບ່ອນສຸດ

ພິກຂຸອາໄສສີນ ດຳລົງຢູ່ໃນສີນແລ້ວ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວນີ້ແລ

ພິກຂຸທັງຫຼາຍ ການງານທີ່ເພິ່ງເຮັດດ້ວຍກຳລັງທັງໝົດ ບຸກຄົນຕ້ອງອາໄສແຜ່ນດິນດຳລົງຢູ່ເທິງແຜ່ນດິນຈຶ່ງເຮັດໄດ້ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ອາໄສສີນ ດຳລົງຢູ່ ໃນສີນແລ້ວ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ

ພິກຂຸອາໄສສີນ ດຳລົງຢູ່ໃນສີນແລ້ວ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກ ມີອົງ ໘ ໃຫ້ຫຼາຍ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະເປັນບ່ອນສຸດ

ຯລຯ

໗. ຈະເລີນສຳມາສະມາທິອັນຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະ ເປັນບ່ອນສຸດ

ພິກຂຸອາໄສສີນ ດຳລົງຢູ່ໃນສີນແລ້ວ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວນີ້ແລ

ພິກຂຸທັງຫຼາຍ ການງານທີ່ເພິ່ງເຮັດດ້ວຍກຳລັງທັງໝົດ ບຸກຄົນຕ້ອງອາໄສແຜ່ນດິນ ດຳລົງຢູ່ເທິງແຜ່ນດິນຈຶ່ງເຮັດໄດ້ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ອາໄສສີນ ດຳລົງຢູ່ ໃນສີນແລ້ວ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ

ພິກຂຸອາໄສສີນ ດຳລົງຢູ່ໃນສີນແລ້ວ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກ ມີອົງ ໘ ໃຫ້ຫຼາຍ ແນວໃດ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ ນິບພານ

ຯລຯ

໗. ຈະເລີນສຳມາສະມາທິອັນນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸທັງຫຼາຍ ພິກຂຸອາໄສສີນ ດຳລົງຢູ່ໃນສີນແລ້ວ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວນີ້ແລ

**ພະລະສູດທີ ໑ ຈົບ**

# ໒. ພີຊະສູດ

## ວ່າດ້ວຍອຸປະມາດ້ວຍພືດ

[໑໕໐] ພິກຂຸທັງຫຼາຍ ພີຊະຄາມ ແລະພູຕະຄາມ໌ທັງໝົດ ລ້ວນອາໄສແຜ່ນດິນດຳລົງຢູ່ເທິງແຜ່ນດິນ ຈຶ່ງຈະເລີນງອກງາມເຕີບໃຫຍ່ໄດ້ ສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອອາໄສສີນດຳ

ລົງຢູ່ໃນສິນ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມເຖິງຄວາມຈະເລີນງອກງາມໄພບູນໃນທຳທັງຫຼາຍ

ພິກຂຸເມື່ອອາໄສສິນ ດຳລົງຢູ່ໃນສິນ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກ ມີອົງ ໘ ໃຫ້ຫຼາຍ ຍ່ອມເຖິງຄວາມຈະເລີນງອກງາມໄພບູນໃນທຳທັງຫຼາຍ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ຯລຯ

໘. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸເມື່ອອາໄສສິນ ດຳລົງຢູ່ໃນສິນ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມເຖິງຄວາມຈະເລີນງອກງາມໄພບູນໃນທຳທັງຫຼາຍ ແນວນີ້ແລ

**ພີຊະສູດທີ ໘ ຈົບ**

# ໙. ນາຄະສູດ

## ວ່າດ້ວຍອຸປະມາດ້ວຍນາກ

[໑໕໑] ພິກຂຸທັງຫຼາຍ ພວກນາກອາໄສພູຫຼວງຫິມະພານຍ່ອມເຕີບໃຫຍ່ມີກຳລັງ ເຕີບໃຫຍ່ມີກຳລັງແລ້ວລົງສູ່ໜອງ ລົງສູ່ໜອງແລ້ວລົງສູ່ບຶງ ລົງສູ່ບຶງແລ້ວລົງສູ່ແມ່ນ້ຳນ້ອຍ ລົງສູ່ແມ່ນ້ຳນ້ອຍແລ້ວລົງສູ່ແມ່ນ້ຳໃຫຍ່ ລົງສູ່ແມ່ນ້ຳໃຫຍ່ແລ້ວລົງສູ່ມຫາສະມຸດສາຄອນ ນາກເຫຼົ່ານັ້ນຍ່ອມເຖິງຄວາມຈະເລີນເຕີບໃຫຍ່ທາງກາຍໃນມະຫາສະມຸດສາຄອນນັ້ນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອອາໄສສິນ ດຳລົງຢູ່ໃນສິນ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມເຖິງຄວາມເປັນໃຫຍ່ໄພບູນໃນທຳທັງຫຼາຍ

ພິກຂຸເມື່ອອາໄສສິນ ດຳລົງຢູ່ໃນສິນ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກ ມີອົງ ໘ ໃຫ້ຫຼາຍ ຍ່ອມເຖິງຄວາມເປັນໃຫຍ່ໄພບູນໃນທຳທັງຫຼາຍ ແນວໃດ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປ ໃນໂວດສັກຄະ

ຯລຯ

໘. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມ ໄປ ໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸເມື່ອອາໄສສິນ ດຳລົງຢູ່ໃນສິນ ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມເຖິງຄວາມເປັນໃຫຍ່ໄພບູນໃນທຳທັງຫຼາຍ ແນວນີ້ແລ

**ນາຄະສູດທີ ๓ ຈົບ**

# ໔. ຣຸກຂະສູດ

## ວ່າດ້ວຍອຸປະມາດ້ວຍຕົ້ນໄມ້

[໑໕໔] ພິກຂຸທັງຫຼາຍ ປຽບຄືຕົ້ນໄມ້ທີ່ນ້ອມໄປສູ່ທິດປາຈີນ ອຽງໄປສູ່ທິດປາຈີນ ໂອນໄປສູ່ທິດປາຈີນ ຕົ້ນໄມ້ນັ້ນຖືກຕັດເຫງົ້າແລ້ວ ເພິ່ງລົ້ມໄປທາງໃດ ລົ້ມໄປທາງທີ່ນ້ອມໄປ ອຽງໄປ ໂອນໄປ ຂ້ານ້ອຍ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍຄືກັນສັນນັ້ນ ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວໃດ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປ ໃນໂວດສັກຄະ

ຯລຯ

໘. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມ ໄປ ໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ

ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວນີ້ແລ

**ຣຸກຂະສູດທີ ໔ ຈົບ**

# ໕. ກຸມພະສູດ

## ວ່າດ້ວຍອຸປະມາດ້ວຍໝໍ້

[໑໕໓] ພິກຂຸທັງຫຼາຍ ໝໍ້ທີ່ຂວ້ຳ ນ້ຳຍ່ອມໄຫຼອອກແນວດຽວ ບໍ່ໄຫຼເຂົ້າ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມຄາຍບາບອະກຸສົນທຳອອກແນວດຽວ ບໍ່ໃຫ້ກັບມາ

ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມຄາຍບາບອະກຸສົນທຳອອກແນວດຽວ ບໍ່ໃຫ້ກັບມາ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ຯລຯ

໘. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ຍ່ອມຄາຍບາບອະກຸສົນທຳອອກແນວດຽວ ບໍ່ໃຫ້ກັບມາ ແນວນີ້ແລ

**ກຸມພະສູດທີ ໕ ຈົບ**

# ໖. ສູກະສູດ

## ວ່າດ້ວຍອຸປະມາດ້ວຍເດືອຍ

[໑໕໔] ພິກຂຸທັງຫຼາຍ ເປັນໄປໄດ້ທີ່ເດືອຍເຂົ້າສາລີຫຼືເດືອຍເຂົ້າໜຽວທີ່ບຸກຄົນ ຕັ້ງໄວ້ກົງຈັກປັກມືຫຼືຕີນທີ່ໄປກະທົບເຂົ້າຫຼືເຮັດໃຫ້ເລືອດອອກ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຕັ້ງເດືອຍເຂົ້າໄວ້ກົງ ແມ່ນສັນໃດ ເປັນໄປໄດ້ທີ່ພິກຂຸອົງນັ້ນມີທິດຖິທີ່ຕັ້ງໄວ້ຖືກ ມີມັກພາວະນາທີ່ຕັ້ງໄວ້ຖືກ ຈັກ

ທຳລາຍອະວິດຊາ ໃຫ້ວິດຊາເກີດຂຶ້ນ ເຮັດນິບພານໃຫ້ແຈ້ງ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຕັ້ງທິດຖິໄວ້ຖືກ ຄືກັນສັນນັ້ນ

ພິກຂຸມີທິດຖິທີ່ຕັ້ງໄວ້ຖືກ ມີມັກພາວະນາທີ່ຕັ້ງໄວ້ຖືກ ຍ່ອມທຳລາຍອະວິດຊາ ໃຫ້ວິດຊາເກີດຂຶ້ນ ເຮັດນິບພານໃຫ້ແຈ້ງ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ຯລຯ

໘. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປ ໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸມີທິດຖິທີ່ຕັ້ງໄວ້ຖືກ ມີມັກພາວະນາທີ່ຕັ້ງໄວ້ຖືກ ຍ່ອມທຳລາຍອະວິດຊາ ໃຫ້ວິດຊາເກີດຂຶ້ນ ເຮັດນິບພານໃຫ້ແຈ້ງ ແນວນີ້ແລ

**ສູກະສູດທີ ៦ ຈົບ**

## ໗. ອາກາສະສູດ

### ວ່າດ້ວຍອຸປະມາດ້ວຍອາກາດ

[໑໕໕] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ລົມຫຼາຍຊະນິດພັດໄປໃນອາກາດ ຄື ລົມທາງທິດຕາເວັນອອກພັດໄປແດ່ ລົມທາງທິດຕາເວັນຕົກພັດໄປແດ່ ລົມທາງທິດເໜືອພັດໄປແດ່ ລົມທາງທິດໃຕ້ພັດໄປແດ່ ລົມມີຝຸ່ນພັດໄປແດ່ ລົມບໍ່ມີຝຸ່ນພັດໄປແດ່ ລົມໜາວພັດໄປແດ່ ລົມຮ້ອນພັດໄປແດ່ ລົມອ່ອນພັດໄປແດ່ ລົມແຮງພັດໄປແດ່ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອຈະເລີນ ອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ສະຕິປັດຖານ ໔ ປະການເຖິງຄວາມຈະເລີນເຕັມທີ່ແດ່ ສຳມັບ ປະທານ ໔ ປະການເຖິງຄວາມຈະເລີນເຕັມທີ່ແດ່ ອິດທິບາດ ໔ ປະການເຖິງ ຄວາມຈະເລີນເຕັມທີ່ແດ່ ອິນຊີ ໕ ປະການເຖິງຄວາມຈະເລີນເຕັມທີ່ແດ່ ພະລະ ໕ ປະການ ເຖິງຄວາມຈະເລີນເຕັມທີ່ແດ່ ໂພດຊົງ ໗ ປະການເຖິງຄວາມຈະເລີນເຕັມທີ່ແດ່

ເມື່ອພິກຂຸຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ສະຕິປັດຖານ

໔ ປະການເຖິງຄວາມຈະເລີນເຕັມທີ່ແດ່ ສຳມັບປະທານ ໔ ປະການເຖິງຄວາມຈະເລີນເຕັມທີ່ແດ່ ອິດທິບາດ ໔ ປະການເຖິງຄວາມຈະເລີນເຕັມທີ່ແດ່ ອິນຊີ ໕ ປະການເຖິງຄວາມຈະເລີນເຕັມທີ່ແດ່ ພະລະ ໕ ປະການເຖິງຄວາມຈະເລີນເຕັມທີ່ແດ່ ໂພດຊົງ ໗ ປະການເຖິງຄວາມຈະເລີນເຕັມທີ່ແດ່ ແນວໃດ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິ

ຯລຯ

໘. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປ ໃນໂວດສັກຄະ

ພິກຂຸທັງຫຼາຍ ເມື່ອພິກຂຸຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ສະຕິປັດຖານ ໔ ປະການເຖິງຄວາມຈະເລີນເຕັມທີ່ແດ່ ສຳມັບປະທານ ໔ ປະການເຖິງ ຄວາມຈະເລີນເຕັມທີ່ແດ່ ອິດທິບາດ ໔ ປະການເຖິງຄວາມຈະເລີນເຕັມທີ່ແດ່ ອິນຊີ ໕ ປະການເຖິງຄວາມຈະເລີນເຕັມທີ່ແດ່ ພະລະ ໕ ປະການເຖິງຄວາມຈະເລີນເຕັມທີ່ແດ່ ໂພດຊົງ ໗ ປະການເຖິງຄວາມຈະເລີນເຕັມທີ່ແດ່ ແນວນີ້ແລ

**ອາກາສະສູດທີ ໗ ຈົບ**

# ໘. ປະຖົມເມຄະສູດ

## ວ່າດ້ວຍອຸປະມາດ້ວຍກ້ອນເຟື້ອຝົນ ສູດທີ ໑

[໑໔໖] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ກ້ອນເຟື້ອຝົນກ້ອນໃຫຍ່ທີ່ເກີດນອກລະດູ ພັດເອົາຝຸ່ນລະອອງທຸລີທີ່ຕັ້ງຂຶ້ນໃນເດືອນທ້າຍລະດູຮ້ອນ[໑]ໃຫ້ສູນຫາຍໄປໂດຍທັນທີ ແມ່ນສັນໃດ ພິກຂຸກໍສັນນັ້ນ

ຄືກັນ ເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍຍ່ອມເຮັດບາບອະກຸສົນທຳທີ່ເກີດຂຶ້ນແລ້ວ ໆ ໃຫ້ອັນຕະຣະທານສະງົບໄປໂດຍທັນທີ

ພິກຂຸຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍຍ່ອມເຮັດບາບອະກຸສົນທຳທີ່ເກີດຂຶ້ນແລ້ວ ໆ ໃຫ້ອັນຕະຣະທານສະງົບໂດຍທັນທີ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິ

ຯລຯ

໘. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປ ໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍຍ່ອມເຮັດບາບອະກຸສົນທຳທີ່ເກີດຂຶ້ນແລ້ວ ໆ ໃຫ້ອັນຕະຣະທານສະງົບໄປໂດຍທັນທີ ແນວນີ້ແລ

**ປະຖົມເມຄະສູດທີ ໗ ຈົບ**

# ໙. ທຸຕິຍະເມຂະສູດ

## ວ່າດ້ວຍອຸປະມາດ້ວຍກ້ອນເຟື້ອຝົນ ສູດທີ ໘

[໑໕໗] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ລົມມໍລະສຸມພັດເອົາກ້ອນເຟື້ອຝົນກ້ອນໃຫຍ່ທີ່ເກີດຂຶ້ນໃຫ້ສູນຫາຍໄປ ໃນລະຫວ່າງ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດ ອະຣິຍະມັກມີອົງ ໘ ໃຫ້ຫຼາຍຍ່ອມເຮັດບາບອະກຸສົນທຳທີ່ເກີດຂຶ້ນແລ້ວ ໆ ໃຫ້ອັນຕະຣະທານ ສະງົບໄປໃນລະຫວ່າງ

ພິກຂຸຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍຍ່ອມເຮັດບາບອະກຸສົນທຳທີ່ເກີດຂຶ້ນແລ້ວ ໆ ໃຫ້ອັນຕະຣະທານສະງົບໄປໃນລະຫວ່າງ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິ

ຯລຯ

໘. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍຍ່ອມເຮັດບາບອະກຸສົນທຳທີ່ເກີດຂຶ້ນແລ້ວ ໆ ໃຫ້ອັນຕະຣະທານສະງົບໄປໃນລະຫວ່າງ ແນວນີ້ແລ

**ທຸຕິຍະເມຄະສູດທີ ໘ ຈົບ**

# ໑໐. ນາວາສູດ

## ວ່າດ້ວຍອຸປະມາດ້ວຍເຮືອ

[໑໕໗] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເມື່ອເຮືອເດີນສະມຸດທີ່ມັດໄວ້ດ້ວຍເຄື່ອງມັດຄືຫວາຍ ຈອດຢູ່ໃນນ້ຳ ໖ ເດືອນ ພໍເຖິງລະດູໜາວ ເຂົາກໍຍົກຂຶ້ນບົກ ເຄື່ອງມັດເຫຼົ່ານັ້ນຕ້ອງລົມແລະແດດ ຖືກຝົນຕົກໃສ່ ຍ່ອມເປື່ອຍໂດກໄປໂດຍງ່າຍດາຍ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອຈະເລີນ ອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ສັງໂຍດທັງຫຼາຍ ຍ່ອມສະງົບຣາບຄາບໄປໂດຍງ່າຍດາຍ

ເມື່ອພິກຂຸຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ສັງໂຍດທັງຫຼາຍຍ່ອມສະງົບຣາບຄາບໄປໂດຍງ່າຍດາຍ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິ

ຯລຯ

໘. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ເມື່ອພິກຂຸຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ສັງໂຍດທັງຫຼາຍຍ່ອມສະງົບຣາບຄາບໄປໂດຍງ່າຍດາຍ ແນວນີ້ແລ

**ນາວາສູດທີ ໑໐ ຈົບ**

# ໑໑. ອາຄັນຕຸກະສູດ

## ວ່າດ້ວຍອຸປະມາດ້ວຍອາຄັນຕຸກະ

[໑໕໙] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ມີເຮືອນພັກຄົນເດີນທາງຢູ່ຫຼັງໜຶ່ງ ຄົນທັງຫຼາຍມາຈາກທິດຕາເວັນອອກແດ່ ມາຈາກທິດຕາເວັນຕົກແດ່ ມາຈາກທິດເໜືອແດ່ ມາຈາກທິດໃຕ້ແດ່ ເຂົ້າພັກໃນເຮືອນນັ້ນ

ຄື ກະສັດມາພັກແດ່ ພາມມາພັກແດ່ ແພດມາພັກແດ່ ສູດມາພັກແດ່ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ກໍານົດຮູ້ທໍາທີ່ບຸກຄົນຮູ້ຍິ່ງແລ້ວຄວນກໍານົດຮູ້ ຯລຯ ລະທໍາທີ່ບຸກຄົນຮູ້ຍິ່ງແລ້ວຄວນລະ ເຮັດໃຫ້ແຈ້ງທໍາທີ່ບຸກຄົນຮູ້ຍິ່ງແລ້ວຄວນເຮັດໃຫ້ແຈ້ງ ຈະເລີນທໍາທີ່ບຸກຄົນຮູ້ຍິ່ງແລ້ວຄວນຈະເລີນ

ທໍາທີ່ບຸກຄົນຮູ້ຍິ່ງແລ້ວຄວນກໍານົດຮູ້ ເປັນແນວໃດ?

ຄື ຄວນກ່າວໄດ້ວ່າ ທໍາທີ່ບຸກຄົນຮູ້ຍິ່ງແລ້ວຄວນກໍານົດຮູ້ນັ້ນ ໄດ້ແກ່ ອຸປາທານຂັນ (ກອງອັນເປັນບ່ອນຕັ້ງແຫ່ງຄວາມຍຶດໝັ້ນ) ໕ ປະການ

ອຸປາທານຂັນ ໕ ປະການ ອັນໃດແດ່ ຄື

໑. ຣູປູປາທານະຂັນ (ອຸປາທານຂັນຄືຣູບ)
ຯລຯ
໕. ວິນຍານູປາທານະຂັນ (ອຸປາທານຂັນຄືວິນຍານ)

ນີ້ຄື ທໍາທີ່ບຸກຄົນຮູ້ຍິ່ງແລ້ວຄວນກໍານົດຮູ້

ທໍາທີ່ບຸກຄົນຮູ້ຍິ່ງແລ້ວຄວນລະ ເປັນແນວໃດ?
ຄື ອະວິດຊາ ແລະ ພະວະຕັນຫາ
ນີ້ຄື ທໍາທີ່ບຸກຄົນຮູ້ຍິ່ງແລ້ວຄວນລະ

ທໍາທີ່ບຸກຄົນຮູ້ຍິ່ງແລ້ວຄວນເຮັດໃຫ້ແຈ້ງ ເປັນແນວໃດ?
ຄື ວິດຊາ ແລະ ວິມຸດຕິ
ນີ້ຄື ທໍາທີ່ບຸກຄົນຮູ້ຍິ່ງແລ້ວຄວນເຮັດໃຫ້ແຈ້ງ

ທໍາທີ່ບຸກຄົນຮູ້ຍິ່ງແລ້ວຄວນຈະເລີນ ເປັນແນວໃດ?
ຄື ສະມະຖະ ແລະ ວິປັດສະນາ
ນີ້ຄື ທໍາທີ່ບຸກຄົນຮູ້ຍິ່ງແລ້ວຄວນຈະເລີນ

ພິກຂຸເມື່ອຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ກໍານົດຮູ້ທໍາທີ່ບຸກຄົນຮູ້ຍິ່ງແລ້ວຄວນກໍານົດຮູ້ ຯລຯ ຈະເລີນທໍາທີ່ບຸກຄົນຮູ້ຍິ່ງແລ້ວຄວນຈະເລີນ ແນວໃດ?

ຄື ພິກຂຸໃນທໍາວິໄນນີ້

໑. ຈະເລີນສໍາມາທິດຖິ
ຯລຯ

໗. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ກຳນົດຮູ້ທຳທີ່ບຸກຄົນຮູ້ຍິ່ງແລ້ວຄວນກຳນົດຮູ້ ລະທຳທີ່ບຸກຄົນຮູ້ຍິ່ງແລ້ວຄວນລະ ເຮັດໃຫ້ ແຈ້ງທຳທີ່ບຸກຄົນຮູ້ຍິ່ງແລ້ວຄວນເຮັດໃຫ້ແຈ້ງ ຈະເລີນທຳທີ່ບຸກຄົນຮູ້ຍິ່ງແລ້ວຄວນຈະເລີນ ແນວນີ້ແລ

**ອາຄັນຕຸກະສູດທີ ໑໑ ຈົບ**

# ໑໔. ນະທີສູດ

## ວ່າດ້ວຍອຸປະມາດ້ວຍແມ່ນ້ຳ

[໑໖໐] ພິກຂຸທັງຫຼາຍ ປຽບຄື ແມ່ນ້ຳຄົງຄາໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ຖ້າໝູ່ມະຫາຊົນພາກັນຖືເອົາຈົກແລະກະຕ່າມາ ດ້ວຍຕັ້ງໃຈວ່າ ພວກເຮົາຈັກຊ່ອຍກັນກັ້ນແມ່ນ້ຳຄົງຄານີ້ໃຫ້ໄຫຼໄປທາງຫຼັງ ບ່າໄປທາງຫຼັງ ລົ້ນໄປທາງຫຼັງ ທ່ານທັງຫຼາຍຈັກເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ໝູ່ມະຫາຊົນນັ້ນຈະເພິ່ງກັ້ນແມ່ນ້ຳຄົງຄາໃຫ້ໄຫຼໄປທາງຫຼັງ ບ່າໄປທາງຫຼັງ ລົ້ນໄປທາງຫຼັງໄດ້ບໍ?

ບໍ່ໄດ້ ຂ້ານ້ອຍ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນແມ່ນ້ຳຄົງຄາໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ຂ້ານ້ອຍໃຜ ໆ ຈະກັ້ນແມ່ນ້ຳຄົງຄານັ້ນໃຫ້ໄຫຼໄປທາງຫຼັງ ບ່າໄປທາງຫຼັງ ລົ້ນໄປທາງຫຼັງບໍ່ແມ່ນເຮັດໄດ້ງ່າຍ ແຕ່ໝູ່ມະຫາຊົນນັ້ນ ເພິ່ງມີສ່ວນແຫ່ງຄວາມລຳບາກອິດເມື່ອຍລ່າແນ່ນອນ

ອຸປະມານີ້ແມ່ນສັນໃດ ອຸປະໄມກໍຄືກັນສັນນັ້ນ ພຣະຣາຊາ ມະຫາອຳມາດຂອງພຣະຣາຊາ ມິດ ອຳມາດ ຍາດ ສາໂລຫິດ໌ກໍຕາມ ເພິ່ງປະວາຣະນາພິກຂຸຜູ້ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍເພື່ອໃຫ້ຍິນດີຍິ່ງດ້ວຍໂພຄະຊັບທັງຫຼາຍວ່າ ມາເທີ້ນພຣະຜູ້ເປັນເຈົ້າຜູ້ຈະເລີນ ຜ້າກາສາວະເຫຼົ່ານີ້ເຮັດໃຫ້ທ່ານຮ້ອນຮົນບໍ່ແມ່ນບໍ ທ່ານຈະເປັນຄົນຫົວໂລ້ນທ່ຽວຖືກະເບື້ອງໄປເຮັດຫຍັງ ເຊີນເທີ້ນ ເຊີນທ່ານກັບມາເປັນຄະລືຫັດໃຊ້ສອຍໂພຄະຊັບແລະເຮັດບຸນເທີ້ນ

ເປັນໄປບໍ່ໄດ້ເລີຍທີ່ພິກຂຸນັ້ນຜູ້ຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້

ຫຼາຍ ຈັກບອກຄືນສິກຂາກັບມາເປັນຄະລືຫັດ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນເປັນໄປບໍ່ໄດ້ເລີຍທີ່ຈິດນັ້ນອັນນ້ອມໄປໃນວິເວກ ອຽງໄປໃນວິເວກ ໂອນໄປໃນວິເວກຕະຫຼອດການລະນານແລ້ວ ຈັກວຽນ ມາເພື່ອເປັນຄະລືຫັດ

ພິກຂຸຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ຯລຯ

໘. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປ ໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸຈະເລີນອະຣິຍະມັກມີອົງ ໘ ເຮັດອະຣິຍະມັກມີອົງ ໘ ໃຫ້ຫຼາຍແນວນີ້ແລ

(ເພິ່ງເພີ່ມຂໍ້ຄວາມໃຫ້ພິດສະດານຄືພະລະສູດສັນນັ້ນ)

**ນະທີສູດທີ ໑໒ ຈົບ**

**ພະລະກະຣະນີຍະວັກທີ ໑໒ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ພະລະສູດ
໒. ນາຄະສູດ
໕. ກຸມພະສູດ
໗. ອາກາສະສູດ
໙. ທຸຕິຍະເມຄະສູດ
໑໑. ອາຄັນຕຸກະສູດ

໔. ພີຊະສູດ
໔. ຣຸກຂະສູດ
໖. ສູກະສູດ
໘. ປະຖົມເມຄະສູດ
໑໐. ນາວາສູດ
໑໒. ນະທີສູດ

# ໑໓. ເອສະນາວັກ

## ໝວດວ່າດ້ວຍການສະແຫວງຫາ

# ໑. ເອສະນາສູດ

## ວ່າດ້ວຍການສະແຫວງຫາ

[໑໖໑] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ການສະແຫວງຫາ ໓ ປະການນີ້

ການສະແຫວງຫາ ໓ ປະການ ອັນໃດແດ່ ຄື

໑. ການສະແຫວງຫາກາມ
໒. ການສະແຫວງຫາພົບ
໓. ການສະແຫວງຫາພົມມະຈັນ

ການສະແຫວງຫາ ໓ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອຮູ້ຍິ່ງການສະແຫວງຫາທັງ ໓ ປະການນີ້

ອະຣິຍະມັກມີອົງ ໘ ອັນໃດແດ່?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນອາໄສວິເວກ
ຯລຯ
໘. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ນີ້ເພື່ອຮູ້ຍິ່ງການສະແຫວງຫາທັງ ໓ ປະການນີ້

ພິກຂຸທັງຫຼາຍ ການສະແຫວງຫາ ໓ ປະການນີ້

ການສະແຫວງຫາ ໓ ປະການ ອັນໃດແດ່ ຄື

໑. ການສະແຫວງຫາກາມ ໒. ການສະແຫວງຫາພົບ
໓. ການສະແຫວງຫາພົມມະຈັນ

ການສະແຫວງຫາ ໓ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອຮູ້ຍິ່ງການສະແຫວງຫາທັງ ໓ ປະການນີ້

ອະຣິຍະມັກມີອົງ ໘ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິ
ຯລຯ
໘. ຈະເລີນສຳມາສະມາທິອັນເປັນທຳມີການກຳຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ນີ້ເພື່ອຮູ້ຍິ່ງການສະແຫວງຫາທັງ ໓ ປະການນີ້

ພິກຂຸທັງຫຼາຍ ການສະແຫວງຫາ ໓ ປະການນີ້

ການສະແຫວງຫາ ໓ ປະການ ອັນໃດແດ່ ຄື

໑. ການສະແຫວງຫາກາມ ໒. ການສະແຫວງຫາພົບ
໓. ການສະແຫວງຫາພົມມະຈັນ

ການສະແຫວງຫາ ໓ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອຮູ້ຍິ່ງການສະແຫວງຫາທັງ ໓ ປະການນີ້

ອະຣິຍະມັກມີອົງ ໘ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິ

ຯລຯ

໗. ຈະເລີນສຳມາສະມາທິອັນຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະ ເປັນບ່ອນສຸດ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໗ ນີ້ເພື່ອຮູ້ຍິ່ງການສະແຫວງຫາທັງ ໓ ປະການນີ້

ພິກຂຸທັງຫຼາຍ ການສະແຫວງຫາ ໓ ປະການນີ້

ການສະແຫວງຫາ ໓ ປະການ ອັນໃດແດ່ ຄື

໑. ການສະແຫວງຫາກາມ

໒. ການສະແຫວງຫາພົບ

໓. ການສະແຫວງຫາພົມມະຈັນ

ການສະແຫວງຫາ ໓ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໗ ເພື່ອຮູ້ຍິ່ງການສະແຫວງຫາທັງ ໓ ປະການນີ້

ອະຣິຍະມັກມີອົງ ໗ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິ

ຯລຯ

໗. ຈະເລີນສຳມາສະມາທິອັນຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະ ເປັນບ່ອນສຸດ

ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໗ ນີ້ເພື່ອຮູ້ຍິ່ງການສະແຫວງຫາທັງ ໓ ປະການນີ້

ພິກຂຸທັງຫຼາຍ ການສະແຫວງຫາ ໓ ປະການນີ້

ການສະແຫວງຫາ ໓ ປະການ ອັນໃດແດ່ ຄື

໑. ການສະແຫວງຫາກາມ

໒. ການສະແຫວງຫາພົບ

໓. ການສະແຫວງຫາພົມມະຈັນ

ການສະແຫວງຫາ ໓ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອກໍານົດຮູ້ການສະແຫວງຫາທັງ ໓ ປະການນີ້ ຯລຯ

ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ນີ້ ຯລຯ

(ເພິ່ງເພີ່ມຂໍ້ຄວາມເພື່ອກໍານົດຮູ້ໃຫ້ພິດສະດານຄືຄວາມຮູ້ຍິ່ງສັນນັ້ນ)

ພິກຂຸທັງຫຼາຍ ການສະແຫວງຫາ ໓ ປະການນີ້

ການສະແຫວງຫາ ໓ ປະການ ອັນໃດແດ່ ຄື

໑. ການສະແຫວງຫາການ
໒. ການສະແຫວງຫາພົບ
໓. ການສະແຫວງຫາພົມມະຈັນ

ການສະແຫວງຫາ ໓ ປະການນີ້

ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອຄວາມສິ້ນໄປແຫ່ງການສະແຫວງຫາທັງ ໓ ປະການ ນີ້ ຯລຯ

ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ນີ້ ຯລຯ

(ເພິ່ງເພີ່ມຂໍ້ຄວາມເພື່ອຄວາມສິ້ນໄປໃຫ້ພິດສະດານຄືຄວາມຮູ້ຍິ່ງສັນນັ້ນ)

ພິກຂຸທັງຫຼາຍ ການສະແຫວງຫາ ໓ ປະການນີ້

ການສະແຫວງຫາ ໓ ປະການ ອັນໃດແດ່ ຄື

໑. ການສະແຫວງຫາການ
໒. ການສະແຫວງຫາພົບ
໓. ການສະແຫວງຫາພົມມະຈັນ

ການສະແຫວງຫາ ໓ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອລະການສະແຫວງຫາທັງ ໓ ປະການນີ້

ອະຣິຍະມັກມີອົງ ໘ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິ

ฯລฯ

໗. ຈະເລີນສຳມາສະມາທິອັນຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະ ເປັນບ່ອນສຸດ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ນີ້ ເພື່ອລະການສະແຫວງຫາທັງ ໓ ປະການນີ້ແລ

(ເພິ່ງເພີ່ມຂໍ້ຄວາມເພື່ອການລະໃຫ້ພິດສະດານຄືຄວາມຮູ້ຍິ່ງສັນນັ້ນ)

**ເອສະນາສູດທີ ໑ ຈົບ**

# ໘. ວິທາສູດ

## ວ່າດ້ວຍມານະ

[໑໖໘] ພິກຂຸທັງຫຼາຍ ມານະ (ຄວາມຖືໂຕ) ໓ ປະການນີ້

ມານະ ໓ ປະການ ອັນໃດແດ່ ຄື

໑. ມານະວ່າເຮົາເລີດກວ່າເຂົາ
໒. ມານະວ່າເຮົາສະເໝີເຂົາ
໓. ມານະວ່າເຮົາຕ່ຳຕ້ອຍກວ່າເຂົາ

ມານະ ໓ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະມານະທັງ ໓ ປະການນີ້

ອະຣິຍະມັກມີອົງ ໘ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິ

ฯລฯ

໘. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ๘ ນີ້ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະມານະທັງ ๓ ປະການນີ້ແລ

(ເພິ່ງເພີ່ມຂໍ້ຄວາມໃຫ້ພິດສະດານຕືເອສະນາສູດສັນນັ້ນ)

**ວິທາສູດທີ ๘ ຈົບ**

# ๓. ອາສະວະສູດ

## ວ່າດ້ວຍອາສະວະ

[໑໒໓] ພິກຂຸທັງຫຼາຍ ອາສະວະ ๓ ປະການນີ້

ອາສະວະ ๓ ປະການ ອັນໃດແດ່ ຄື

໑. ກາມາສະວະ (ອາສະວະຄືກາມ)
໒. ພະວາສະວະ (ອາສະວະຄືພົບ)
໓. ອະວິດຊາສະວະ (ອາສະວະຄືອະວິດຊາ)

ອາສະວະ ๓ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ๘ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະອາສະວະທັງ ๓ ປະການນີ້ ฯລฯ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ๘ ນີ້ ฯລฯ

**ອາສະວະສູດທີ ๓ ຈົບ**

# ๔. ພະວະສູດ

## ວ່າດ້ວຍພົບ

[໑໒໔] ພິກຂຸທັງຫຼາຍ ພົບ ๓ ປະການນີ້

ພົບ ๓ ປະການ ອັນໃດແດ່ ຄື

໑. ກາມະພົບ (ພົບທີ່ເປັນກາມາວະຈອນ)

໒. ຮູບພົບ (ພົບທີ່ເປັນຮູປາວະຈອນ)
໓. ອະຮູບພົບ (ພົບທີ່ເປັນອະຮູປະວະຈອນ)

ພົບ ໓ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະພົບທັງ ໓ ປະການນີ້ ຯລຯ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ນີ້ ຯລຯ

**ພະວະສູດທີ ໔ ຈົບ**

# ໕. ທຸກຂະຕາສູດ

## ວ່າດ້ວຍສະພາວະທຸກ

[໑໖໕] ພິກຂຸທັງຫຼາຍ ສະພາວະທຸກ ໓ ປະການນີ້

ສະພາວະທຸກ ໓ ປະການ ອັນໃດແດ່ ຄື

໑. ສະພາວະທຸກຄືທຸກ
໒. ສະພາວະທຸກຄືສັງຂານ
໓. ສະພາວະທຸກຄືຄວາມຜັນແປໄປ

ສະພາວະທຸກ ໓ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະສະພາວະທຸກທັງ ໓ ປະການນີ້ ຯລຯ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ນີ້ ຯລຯ

**ທຸກຂະຕາສູດທີ ໕ ຈົບ**

# ໖. ຂີລະສູດ

## ວ່າດ້ວຍກິເລດເຄື່ອງຕຶງຈິດຄືຕະປູ

[໑໖໖] ພິກຂຸທັງຫຼາຍ ກິເລດເຄື່ອງຕຶງຈິດຄືຕະປູ ໓ ປະການນີ້

ກິເລດເຄື່ອງຕຶງຈິດຄືຕະປູ ໓ ປະການ ອັນໃດແດ່ ຄື

໑. ກິເລດເຄື່ອງຕຶງຈິດຄືຕະປູຄື ຣາຄະ
໒. ກິເລດເຄື່ອງຕຶງຈິດຄືຕະປູຄື ໂທສະ
໓. ກິເລດເຄື່ອງຕຶງຈິດຄືຕະປູຄື ໂມຫະ

ກິເລດເຄື່ອງຕຶງຈິດຄືຕະປູ ໓ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະກິເລດເຄື່ອງຕຶງຈິດຄືຕະປູທັງ ໓ ປະການນີ້ ຯລຯ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ນີ້ ຯລຯ

**ຂີລະສູດທີ ໖ ຈົບ**

# ໗. ມະລະສູດ

## ວ່າດ້ວຍມົນທິນ

[໑໖໗] ພິກຂຸທັງຫຼາຍ ມົນທິນ ໓ ປະການນີ້

ມົນທິນ ໓ ປະການ ອັນໃດແດ່ ຄື

໑. ມົນທິນຄືຣາຄະ
໒. ມົນທິນຄືໂທສະ
໓. ມົນທິນຄືໂມຫະ

ມົນທິນ ໓ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະມົນທິນທັງ ໓ ປະການນີ້ ຯລຯ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ນີ້ ຯລຯ

**ມະລະສູດທີ ໗ ຈົບ**

# ๗. ນີຄະສູດ

## ວ່າດ້ວຍທຸກ

[໑໖໗] ພິກຂຸທັງຫຼາຍ ທຸກ ໓ ປະການນີ້

ທຸກ ໓ ປະການ ອັນໃດແດ່ ຄື

໑. ທຸກຄືຣາຄະ
໒. ທຸກຄືໂທສະ
໓. ທຸກຄືໂມຫະ

ທຸກ ໓ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະທຸກທັງ ໓ ປະການນີ້ ຯລຯ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ນີ້ ຯລຯ

**ນີຄະສູດທີ ໗ ຈົບ**

# ໘. ເວທະນາສູດ

## ວ່າດ້ວຍເວທະນາ

[໑໖໘] ພິກຂຸທັງຫຼາຍ ເວທະນາ ໓ ປະການນີ້

ເວທະນາ ໓ ປະການ ອັນໃດແດ່ ຄື

໑. ສຸກຂະເວທະນາ (ຄວາມຮູ້ສຶກສຸກ)
໒. ທຸກຂະເວທະນາ (ຄວາມຮູ້ສຶກທຸກ)
໓. ອະທຸກຂະມະສຸກຂະເວທະນາ (ຄວາມຮູ້ສຶກທີ່ບໍ່ແມ່ນສຸກບໍ່ແມ່ນທຸກ)

ເວທະນາ ໓ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະເວທະນາທັງ ໓ ປະການນີ້ ຯລຯ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ນີ້ ຯລຯ

**ເວທະນາສູດທີ ໙ ຈົບ**

# ໑໐. ຕັນຫາສູດ

## ວ່າດ້ວຍຕັນຫາ

[໑໗໐] ພິກຂຸທັງຫຼາຍ ຕັນຫາ (ຄວາມທະຍານຢາກ) ໓ ປະການນີ້

ຕັນຫາ ໓ ປະການ ອັນໃດແດ່ ຄື

໑. ກາມະຕັນຫາ (ຄວາມທະຍານຢາກໃນກາມ)
໒. ພະວະຕັນຫາ (ຄວາມທະຍານຢາກໃນພົບ)
໓. ວິພະວະຕັນຫາ (ຄວາມທະຍານຢາກໃນວິພົບ)

ຕັນຫາ ໓ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະຕັນຫາທັງ ໓ ປະການນີ້ ຯລຯ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ນີ້ ຯລຯ
ອະຣິຍະມັກມີອົງ ໘ ເປັນແນວໃດ?
ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ຯລຯ

໘. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປ ໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະຕັນຫາທັງ ໓ ປະການນີ້ ຯລຯ
ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ນີ້ ຯລຯ

**ຕັນຫາສູດທີ ໑໐ ຈົບ**

# ໑໑. ຕະສິນາສູດ

## ວ່າດ້ວຍຕະສິນາ

[໑໗໑] ພິກຂຸທັງຫຼາຍ ຕະສິນາ (ຄວາມຢາກ) ໓ ປະການນີ້

ຕະສິນາ ໓ ປະການ ອັນໃດແດ່ ຄື

໑. ກາມະຕະຊິນາ (ຄວາມຢາກໃນກາມ)
໔. ພະວະຕະສິນາ (ຄວາມຢາກໃນພົບ)
໓. ວິພະວະຕະສິນາ (ຄວາມຢາກໃນວິພົບ)

ຕະສິນາ ໓ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະຕະສິນາທັງ ໓ ປະການນີ້ ຯລຯ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນເປັນທຳມີການກຳຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ ຯລຯ
໑. ຈະເລີນສຳມາທິດຖິອັນຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະເປັນບ່ອນສຸດ ຯລຯ
໑. ຈະເລີນສຳມາທິດຖິອັນນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ ນິບພານ ຯລຯ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະຕະສິນາທັງ ໓ ປະການນີ້ ຯລຯ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ນີ້ ຯລຯ

**ຕະສິນາສູດທີ ໑໑ ຈົບ**

**ເອສະນາວັກທີ ໑໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໑໔. ໂອຄະວັກ

## ໝວດວ່າດ້ວຍໂອຄະ

# ໑. ໂອຄະສູດ

## ວ່າດ້ວຍໂອຄະ

[໑໗໔] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ໂອຄະ (ແມ່ນ້ຳ) ໔ ປະການນີ້

ໂອຄະ ໔ ປະການ ອັນໃດແດ່ ຄື

໑. ກາໂມຄະ (ໂອຄະຄືກາມ)
໒. ທິດໂຖຄະ (ໂອຄະຄືທິດຖິ)
໔. ພະໂວຄະ (ໂອຄະຄືພົບ)
໕. ອະວິດໂຊຄະ (ໂອຄະຄືອະວິດຊາ)

ໂອຄະ ໔ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະໂອຄະທັງ ໔ ປະການນີ້ ຯລຯ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ນີ້ ຯລຯ

(ເພິ່ງເພີ່ມຂໍ້ຄວາມໃຫ້ພິດສະດານຄືເອສະນາສູດສັນນັ້ນ)

**ໂອຄະສູດທີ ໑ ຈົບ**

# ໘. ໂຍຄະສູດ

## ວ່າດ້ວຍໂຍຄະ

[໑໗໖] ພິກຂຸທັງຫຼາຍ ໂຍຄະ (ສະພາວະອັນປະກອບສັດໄວ້ໃນພົບ) ໔ ປະການນີ້

ໂຍຄະ ໔ ປະການ ອັນໃດແດ່ ຄື

໑. ກາມະໂຍຄະ (ໂຍຄະຄືກາມ) ໒. ພະວະໂຍຄະ (ໂຍຄະຄືພົບ)
໓. ທິດຖິໂຍຄະ (ໂຍຄະຄືທິດຖິ) ໔. ອະວິດຊາໂຍຄະ (ໂຍຄະຄືອະວິດຊາ)

ໂຍຄະ ໔ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະໂຍຄະທັງ ໔ ປະການນີ້ ຯລຯ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ນີ້ ຯລຯ

**ໂຍຄະສູດທີ ໘ ຈົບ**

# ໙. ອຸປາທານະສູດ

## ວ່າດ້ວຍອຸປາທານ

[໑໗໘] ພິກຂຸທັງຫຼາຍ ອຸປາທານ (ຄວາມຢຶດໝັ້ນ) ໔ ປະການນີ້

ອຸປາທານ ໔ ປະການ ອັນໃດແດ່ ຄື

໑. ກາມຸປາທານ (ຄວາມຢຶດໝັ້ນໃນກາມ)
໒. ທິດຖຸປາທານ (ຄວາມຢຶດໝັ້ນໃນທິດຖິ)
໓. ສີລັບພະຕຸປາທານ (ຄວາມຢຶດໝັ້ນໃນສິນພົດ)
໔. ອັດຕະວາທຸປາທານ (ຄວາມຢຶດໝັ້ນໃນວາທະວ່າມີອັດຕາ)

ອຸປາທານ ໔ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະອຸປາທານທັງ ໔ ປະການນີ້ ຯລຯ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ๘ ນີ້ ຯລຯ

**ອຸປາທານະສູດທີ ໓ ຈົບ**

# ໔. ຄັນຖະສູດ

## ວ່າດ້ວຍຄັນຖະ

[໑໗໕] ພິກຂຸທັງຫຼາຍ ຄັນຖະ (ກິເລດເຄື່ອງມັດ) ມີ ໔ ປະການນີ້

ຄັນຖະ ໔ ປະການ ອັນໃດແດ່ ຄື

| | |
|---|---|
| ໑. ອະພິດຊາກາຍະຄັນຖະ | (ກິເລດເຄື່ອງມັດກາຍຄືອະພິດຊາ) |
| ໒. ພະຍາປາທະກາຍະຄັນຖະ | (ກິເລດເຄື່ອງມັດກາຍຄືພະຍາບາດ) |
| ໓. ສີລັບພະຕະປະຣາມາດກາຍະຄັນຖະ | (ກິເລດເຄື່ອງມັດກາຍຄືຄວາມຖືໝັ້ນສີນພິດ) |
| ໔. ອິທັງສັດຈາພິນິເວສະກາຍະຄັນຖະ | (ກິເລດເຄື່ອງມັດກາຍຄືຄວາມຢຶດໝັ້ນວ່າສິ່ງນີ້ຈິງ) |

ຄັນຖະ ໔ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ๘ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະຄັນຖະທັງ ໔ ປະການນີ້ ຯລຯ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ๘ ນີ້ ຯລຯ

**ຄັນຖະສູດທີ ໔ ຈົບ**

# ໕. ອະນຸສະຍະສູດ

## ວ່າດ້ວຍອະນຸໄສ

[໑໗໖] ພິກຂຸທັງຫຼາຍ ອະນຸໄສ (ກິເລດທີ່ນອນເນື່ອງ) ໗ ປະການນີ້

ອະນຸໄສ ໗ ປະການ ອັນໃດແດ່ ຄື

໑. ກາມະຣາຄານຸໄສ (ກິເລດທີ່ນອນເນື່ອງຄືກາມຣາຄະ)
໒. ປະຕິຄານຸໄສ (ກິເລດທີ່ນອນເນື່ອງຄືປະຕິຄະ)
໓. ທິດຖານຸໄສ (ກິເລດທີ່ນອນເນື່ອງຄືທິດຖິ)
໔. ວິຈິກິດສານຸໄສ (ກິເລດທີ່ນອນເນື່ອງຄືວິຈິກິດສາ)
໕. ມານານຸໄສ (ກິເລດທີ່ນອນເນື່ອງຄືມານະ)
໖. ພະວະຣາຄານຸໄສ (ກິເລດທີ່ນອນເນື່ອງຄືພາວະຣາຄະ)
໗. ອະວິດຊານຸໄສ (ກິເລດທີ່ນອນເນື່ອງຄືອະວິດຊາ)

ອະນຸໄສ ໗ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະອະນຸໄສທັງ ໗ ປະການນີ້ ฯลฯ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ນີ້ ฯลฯ

**ອະນຸສະຍະສູດທີ ໕ ຈົບ**

# ໖. ກາມມະຄຸນສູດ

## ວ່າດ້ວຍກາມມະຄຸນ

[໑໗໗] ພິກຂຸທັງຫຼາຍ ກາມມະຄຸນ ໕ ປະການນີ້

ກາມມະຄຸນ ໕ ປະການ ອັນໃດແດ່ ຄື

໑. ຮູບທີ່ເພິ່ງຮູ້ແຈ້ງທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ
໒. ສຽງທີ່ເພິ່ງຮູ້ແຈ້ງທາງຫູ ฯลฯ
໓. ກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ฯลฯ
໔. ຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ฯลฯ
໕. ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ກາມມະຄຸນ ໕ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະກາມມະຄຸນທັງ ໕ ປະການນີ້ ຯລຯ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ນີ້ ຯລຯ

**ກາມມະຄຸນສູດທີ ໖ ຈົບ**

# ໗. ນິວະຣະນະສູດ

## ວ່າດ້ວຍນິວອນ

[໑໗໘] ພິກຂຸທັງຫຼາຍ ນິວອນ (ສິ່ງກັ້ນຈິດບໍ່ໃຫ້ບັນລຸຄວາມດີ) ໕ ປະການນີ້

ນິວອນ ໕ ປະການ ອັນໃດແດ່ ຄື

໑. ກາມສັນທະນິວອນ (ສິ່ງກັ້ນຈິດບໍ່ໃຫ້ບັນລຸຄວາມດີຄືຄວາມພໍໃຈໃນກາມ)
໒. ພະຍາບາດນິວອນ (ສິ່ງກັ້ນຈິດບໍ່ໃຫ້ບັນລຸຄວາມດີຄືຄວາມຄິດປອງຮ້າຍ)
໓. ຖີນະມິດທະນິວອນ (ສິ່ງກັ້ນຈິດບໍ່ໃຫ້ບັນລຸຄວາມດີຄືຄວາມຫົດຫູ່ແລະງ່ວມເຫງົາ)
໔. ອຸດທັດຈະກຸກກຸດຈະນິວອນ (ສິ່ງກັ້ນຈິດບໍ່ໃຫ້ບັນລຸຄວາມດີຄືຄວາມຟຸ້ງຊ່ານແລະຮ້ອນໃຈ)
໕. ວິຈິກິດສານິວອນ (ສິ່ງກັ້ນຈິດບໍ່ໃຫ້ບັນລຸຄວາມດີຄືຄວາມລັງເລສົງໄສ)

ນິວອນ ໕ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະນິວອນທັງ ໕ ປະການນີ້ ຯລຯ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ນີ້ ຯລຯ

**ນິວະຣະນະສູດທີ ໗ ຈົບ**

# ໘. ອຸປາທານັກຂັນທະສູດ

## ວ່າດ້ວຍອຸປາທານຂັນ

[໑໗໙] ພິກຂຸທັງຫຼາຍ ອຸປາທານຂັນ (ກອງອັນເປັນບ່ອນຕັ້ງແຫ່ງຄວາມຢຶດໝັ້ນ) ໕ ປະການນີ້

ອຸປາທານຂັນ ໕ ປະການ ອັນໃດແດ່ ຄື

໑. ຣູປູປາທານະຂັນ (ອຸປາທານຂັນຄືຮູບ)
໒. ເວທະນູປາທານະຂັນ (ອຸປາທານຂັນຄືເວທະນາ)
໓. ສັນຍູປາທານະຂັນ (ອຸປາທານຂັນຄືສັນຍາ)
໔. ສັງຂາຣູປາທານະຂັນ (ອຸປາທານຂັນຄືສັງຂານ)
໕. ວິນຍານູປາທານະຂັນ (ອຸປາທານຂັນຄືວິນຍານ)

ອຸປາທານຂັນ ໕ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະອຸປາທານຂັນທັງ ໕ ປະການນີ້ ຯລຯ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ນີ້ ຯລຯ

**ອຸປາທານັກຂັນທະສູດທີ ໘ ຈົບ**

# ໙. ໂອຣໍາພາຄິຍະສູດ

## ວ່າດ້ວຍໂອຣໍາພາຄິຍະສັງໂຍດ

[໑໘໐] ພິກຂຸທັງຫຼາຍ ໂອຣໍາພາຄິຍະສັງໂຍດ (ສັງໂຍດເບື້ອງຕ່ຳ) ໕ ປະການນີ້

ໂອຣໍາພາຄິຍະສັງໂຍດ ໕ ປະການ ອັນໃດແດ່ ຄື

໑. ສັກກາຍະທິດຖິ (ຄວາມເຫັນວ່າເປັນໂຕຂອງຕົນ)
໒. ວິຈິກິດສາ (ຄວາມລັງເລສົງໄສ)
໓. ສີລັບພະຕະປະຣາມາດ (ຄວາມຖືໝັ້ນສິນພົດ)
໔. ກາມສັນທະ (ຄວາມພໍໃຈໃນກາມ)
໕. ພະຍາບາດ (ຄວາມຄິດປອງຮ້າຍ)

ໂອຣໍາພາຄິຍະສັງໂຍດ ໕ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະໂອຣໍາພາຄິຍະສັງໂຍດທັງ ໕ ປະການນີ້ ຯລຯ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ນີ້ ຯລຯ

**ໂອຣຳພາຄິຍະສູດທີ ໙ ຈົບ**

## ໑໐. ອຸດທຳພາຄິຍະສູດ

### ວ່າດ້ວຍອຸດທຳພາຄິຍະສັງໂຍດ

[໑໘໑] ພິກຂຸທັງຫຼາຍ ອຸດທຳພາຄິຍະສັງໂຍດ (ສັງໂຍດເບື້ອງສູງ) ໕ ປະການນີ້

ອຸດທຳພາຄິຍະສັງໂຍດ ໕ ປະການ ອັນໃດແດ່ ຄື

໑. ຮູບປະຣາຄະ (ຄວາມຕິດໃຈໃນອາລົມແຫ່ງຮູບຊານ)
໒. ອະຮູບປະຣາຄະ (ຄວາມຕິດໃຈໃນອາລົມແຫ່ງອະຮູບປະຊານ)
໓. ມານະ (ຄວາມຖືໂຕ)
໔. ອຸດທັດຈະ (ຄວາມຟຸ້ງຊ່ານ)
໕. ອະວິດຊາ (ຄວາມບໍ່ຮູ້ແຈ້ງ)

ອຸທະທຳພາຄິຍະສັງໂຍດ ໕ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະອຸທະທຳພາຄິຍະສັງໂຍດທັງ ໕ ປະການນີ້

ອະຣິຍະມັກມີອົງ ໘ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິອັນອາໄສວິເວກ
ຯລຯ
໘. ຈະເລີນສຳມາສະມາທິອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ນີ້ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະອຸທະທຳພາຄິຍະສັງໂຍດທັງ ໕ ປະການນີ້

ພິກຂຸທັງຫຼາຍ ອຸທະທຳພາຄິຍະສັງໂຍດ ໕ ປະການນີ້

ອຸທະທຳພາຄິຍະສັງໂຍດ ໕ ປະການ ອັນໃດແດ່ ຄື

໑. ຣູບປະຣາຄະ ໒. ອະຣູບປະຣາຄະ
໓. ມານະ ໔. ອຸດທັດຈະ
໕. ອະວິດຊາ

ອຸດທຳພາຄິຍະສັງໂຍດ ໕ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະອຸດທຳພາຄິຍະສັງໂຍດທັງ ໕ ປະການນີ້

ອະຣິຍະມັກມີອົງ ໘ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສຳມາທິດຖິ

ຯລຯ

໘. ຈະເລີນສຳມາສະມາທິອັນເປັນທຳມີການກຳຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ ຯລຯ ອັນຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະເປັນບ່ອນສຸດ ຯລຯ ອັນນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນອະຣິຍະມັກມີອົງ ໘ ນີ້ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະອຸທະທຳພາຄິຍະສັງໂຍດທັງ ໕ ປະການນີ້

**ອຸດທຳພາຄິຍະສູດທີ ໑໐ ຈົບ**

**ໂອຄະວັກທີ ໑໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ໂອຄະສູດ ໒. ໂຍຄະສູດ
໓. ອຸປາທານະສູດ ໔. ຄັນຖະສູດ
໕. ອະນຸສະຍະສູດ ໖. ກາມມະຄຸນສູດ
໗. ນິວະຣະນະສູດ ໘. ອຸປາທານັກຂັນທະສູດ
໙. ໂອຣຳພາຄິຍະສູດ ໑໐. ອຸດທຳພາຄິຍະສູດ

# ລວມວັກທີ່ມີໃນສັງຍຸດນີ້ ຄື

| | |
|---|---|
| ໑. ອະວິດຊາວັກ | ໒. ວິຫາຣະວັກ |
| ໓. ມິດສັດຕະວັກ | ໔. ປະຕິປັດຕິວັກ |
| ໕. ອັນຍະຕິດຖິຍະເປີຍຍາລະວັກ | ໖. ສຸຣິຍະເປີຍຍາລະວັກ |
| ໗. ເອກະທຳມະເປີຍຍາລະວັກ | ໘. ທຸຕິຍະເອກະທຳມະເປີຍຍາລະວັກ |
| ໙. ຄັງຄາເປີຍຍາລະວັກ | ໑໐. ທຸຕິຍະຄັງຄາເປີຍຍາລະວັກ |
| ໑໑. ອັບປະມາທະວັກ | ໑໒. ພະລະກະຣະນີຍະວັກ |
| ໑໓. ເອສະນາວັກ | ໑໔. ໂອຄະວັກ |

**ມັກຄະສັງຍຸດທີ ໑ ຈົບ**

# ໔. ໂພດຊົງຄະສັງຍຸດ

## ໑. ປັບພະຕະວັກ

### ໝວດວ່າດ້ວຍພູຫຼວງ

## ໑. ຫິມະວັນຕະສູດ

### ວ່າດ້ວຍພູຫຼວງຫິມະພານ

[໑໗໔] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພວກນາກອາໄສພູຫຼວງຫິມະພານຍ່ອມເຕີບໃຫຍ່ມີກຳລັງ ເຕີບໃຫຍ່ມີກຳລັງແລ້ວລົງສູ່ໜອງ ລົງສູ່ໜອງແລ້ວລົງສູ່ບຶງ ລົງສູ່ບຶງແລ້ວລົງສູ່ແມ່ນ້ຳນ້ອຍ ລົງສູ່ແມ່ນ້ຳນ້ອຍແລ້ວລົງສູ່ແມ່ນ້ຳໃຫຍ່ ລົງສູ່ແມ່ນ້ຳໃຫຍ່ແລ້ວລົງສູ່ມຫາສະມຸດສາຄອນ ນາກເຫຼົ່ານັ້ນ ຍ່ອມເຖິງຄວາມຈະເລີນເຕີບໃຫຍ່ທາງກາຍໃນມະຫາສະມຸດສາຄອນນັ້ນແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອອາໄສສິນ ດຳລົງຢູ່ໃນສິນ ຈະເລີນໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຮູ້) ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍ ຍ່ອມເຖິງຄວາມເປັນໃຫຍ່ໄພບູນໃນທຳທັງຫຼາຍ

ພິກຂຸເມື່ອອາໄສສິນ ດຳລົງຢູ່ໃນສິນ ຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍ ຍ່ອມເຖິງຄວາມເປັນໃຫຍ່ໄພບູນໃນທຳທັງຫຼາຍ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຮູ້ ຄືຄວາມຣະນຶກໄດ້) ອັນອາໄສວິເວກ (ຄວາມສະຫງັດ) ອາໄສວິຣາຄະ (ຄວາມຄາຍກຳໜັດ) ອາໄສນິໂຣດ (ຄວາມດັບ) ນ້ອມໄປໃນໂວດສັກຄະ (ຄວາມສະລະ)

໒. ຈະເລີນທຳມະວິຈະຍະສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຮູ້ ຄື ການເຟັ້ນທຳ) ຯລຯ

໓. ຈະເລີນວິຣິຍະສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຮູ້ ຄື ຄວາມພຽນ) ຯລຯ

໔. ຈະເລີນປິຕິສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຮູ້ ຄື ຄວາມອິ່ມໃຈ)

ຯລຯ

໕. ຈະເລີນປັດສັດທິສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ ຄື ຄວາມສະງົບກາຍສະງົບໃຈ) ຯລຯ

໖. ຈະເລີນສະມາທິສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ ຄື ຄວາມຕັ້ງຈິດໝັ້ນ) ຯລຯ

໗. ຈະເລີນອຸເປກຂາສຳໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຣູ້ ຄື ຄວາມມີໃຈເປັນກາງ) ອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸເມື່ອອາໄສສິນ ດຳລົງຢູ່ໃນສິນ ຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍ ຍ່ອມເຖິງຄວາມເປັນໃຫຍ່ໄພບູນໃນທຳທັງຫຼາຍ ແນວນີ້ແລ

**ຫິມະວັນຕະສູດທີ ໑ ຈົບ**

# ໒. ກາຍະສູດ

## ວ່າດ້ວຍອຸປະມາດ້ວຍກາຍ

[໑໘໖] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ກາຍນີ້ດຳລົງຢູ່ໄດ້ດ້ວຍອາຫານ ອາໄສອາຫານຈຶ່ງດຳລົງຢູ່ໄດ້ ຂາດອາຫານກໍດຳລົງຢູ່ບໍ່ໄດ້ ແມ່ນສັນໃດ ນິວອນ ໕ ປະການກໍຄືກັນສັນນັ້ນ ດຳລົງ ຢູ່ໄດ້ດ້ວຍອາຫານ ອາໄສອາຫານຈຶ່ງດຳລົງຢູ່ໄດ້ ຂາດອາຫານກໍດຳລົງຢູ່ບໍ່ໄດ້

## ອາຫານຂອງນິວອນ

ອັນໃດນໍ? ເປັນອາຫານທີ່ເຮັດກາມສັນທະທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດກາມສັນທະທີ່ເກີດຂຶ້ນແລ້ວໃຫ້ຈະເລີນໄພບູນຍິ່ງຂຶ້ນ

ຄື ສຸພະນິມິດ°ມີຢູ່ ການທຳມະນະສິການໂດຍບໍ່ແຍບຄາຍໃນສຸພະນິມິດນັ້ນໃຫ້ຫຼາຍ ນີ້ເປັນອາຫານທີ່ເຮັດກາມສັນທະທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດກາມສັນທະທີ່ເກີດຂຶ້ນແລ້ວໃຫ້ຈະເລີນໄພບູນຍິ່ງຂຶ້ນ

ອັນໃດນໍ? ເປັນອາຫານທີ່ເຮັດພະຍາບາດທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດພະຍາບາດທີ່ເກີດຂຶ້ນແລ້ວໃຫ້ຈະເລີນໄພບູນຍິ່ງຂຶ້ນ

ຄື ປະຕິຄະນິມິດ°ມີຢູ່ ການທຳມະນະສິການໂດຍບໍ່ແຍບຄາຍໃນປະຕິຄະນິມິດນັ້ນໃຫ້ຫຼາຍ ນີ້ເປັນອາຫານທີ່ເຮັດພະຍາບາດທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດພະຍາບາດທີ່ເກີດຂຶ້ນແລ້ວໃຫ້ຈະເລີນໄພບູນຍິ່ງຂຶ້ນ

ອັນໃດນໍ? ເປັນອາຫານທີ່ເຮັດຖີນະມິດທະທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດຖີນະມິດທະທີ່ເກີດຂຶ້ນແລ້ວໃຫ້ຈະເລີນໄພບູນຍິ່ງຂຶ້ນ

ຄື ຄວາມບໍ່ຍິນດີ ຄວາມຂີ້ຄ້ານ ຄວາມອ່ອນອຽກຂອງຮ່າງກາຍ ຄວາມເມົາອາຫານ ແລະຄວາມທີ່ຈິດຫົດຫູ່ມີຢູ່ ການທຳມະນະສິການໂດຍບໍ່ແຍບຄາຍໃນທຳເຫຼົ່ານັ້ນໃຫ້ຫຼາຍ ນີ້ເປັນອາຫານທີ່ເຮັດຖີນະມິດທະທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດຖີນະມິດທະທີ່ເກີດຂຶ້ນແລ້ວໃຫ້ຈະເລີນໄພບູນຍິ່ງຂຶ້ນ

ອັນໃດນໍ? ເປັນອາຫານທີ່ເຮັດອຸດທັດຈະກຸກກຸດຈະທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດອຸດທັດຈະກຸກກຸດຈະທີ່ເກີດຂຶ້ນແລ້ວໃຫ້ຈະເລີນໄພບູນຍິ່ງຂຶ້ນ

ຄື ຄວາມບໍ່ສະງົບຈິດມີຢູ່ ການທຳມະນະສິການໂດຍບໍ່ແຍບຄາຍໃນຄວາມບໍ່ສະງົບຈິດນັ້ນໃຫ້ຫຼາຍ ນີ້ເປັນອາຫານທີ່ເຮັດອຸດທັດຈະກຸກກຸດຈະທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດອຸດທັດຈະກຸກກຸດຈະທີ່ເກີດຂຶ້ນແລ້ວໃຫ້ຈະເລີນໄພບູນຍິ່ງຂຶ້ນ

ອັນໃດນໍ? ເປັນອາຫານທີ່ເຮັດວິຈິກິດສາທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດວິຈິກິດສາທີ່ເກີດຂຶ້ນແລ້ວໃຫ້ຈະເລີນໄພບູນຍິ່ງຂຶ້ນ

ຄື ທຳທັງຫຼາຍອັນເປັນບ່ອນຕັ້ງແຫ່ງວິຈິກິດສາມີຢູ່ ການທຳມະນະສິການໂດຍບໍ່ແຍບຄາຍໃນທຳເຫຼົ່ານັ້ນໃຫ້ຫຼາຍ ນີ້ເປັນອາຫານທີ່ເຮັດວິຈິກິດສາທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດວິຈິກິດສາທີ່ເກີດຂຶ້ນແລ້ວໃຫ້ຈະເລີນໄພບູນຍິ່ງຂຶ້ນ

ພິກຂຸທັງຫຼາຍ ກາຍນີ້ດຳລົງຢູ່ໄດ້ດ້ວຍອາຫານ ອາໄສອາຫານຈຶ່ງດຳລົງຢູ່ໄດ້ ຂາດອາຫານກໍດຳລົງຢູ່ບໍ່ໄດ້ ແມ່ນສັນໃດ ນິວອນ ໕ ປະການນີ້ກໍຄືກັນສັນນັ້ນ ດຳລົງຢູ່ໄດ້ດ້ວຍອາຫານ ອາໄສອາຫານຈຶ່ງດຳລົງຢູ່ໄດ້ ຂາດອາຫານກໍດຳລົງຢູ່ບໍ່ໄດ້

ພິກຂຸທັງຫຼາຍ ກາຍນີ້ດຳລົງຢູ່ໄດ້ດ້ວຍອາຫານ ອາໄສອາຫານຈຶ່ງດຳລົງຢູ່ໄດ້ ຂາດອາຫານກໍດຳລົງຢູ່ບໍ່ໄດ້ ແມ່ນສັນໃດ ໂພດຊົງ ໗ ປະການນີ້ກໍຄືກັນສັນນັ້ນ ດຳລົງຢູ່ໄດ້ດ້ວຍອາຫານ ອາໄສອາຫານຈຶ່ງດຳລົງຢູ່ໄດ້ ຂາດອາຫານກໍດຳລົງຢູ່ບໍ່ໄດ້

## ອາຫານຂອງໂພດຊົງ

ອັນໃດນໍ? ເປັນອາຫານທີ່ເຮັດສະຕິສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດສະຕິສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ຄື ທຳທັງຫຼາຍອັນເປັນບ່ອນຕັ້ງແຫ່ງສະຕິສຳໂພດຊົງມີຢູ່ ການທຳມະນະສິການໂດຍແຍບຄາຍໃນທຳເຫຼົ່ານັ້ນໃຫ້ຫຼາຍ ນີ້ເປັນອາຫານທີ່ເຮັດສະຕິສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດສະຕິສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ອັນໃດນໍ? ເປັນອາຫານທີ່ເຮັດທຳມະວິຈະຍະສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດທຳມະວິຈະຍະສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ຄື ທຳທັງຫຼາຍທີ່ເປັນກຸສົນແລະອະກຸສົນ ມີໂທດແລະບໍ່ມີໂທດ ຊົ່ວແລະປະນີດ ເປັນຝ່າຍດຳແລະຝ່າຍຂາວມີຢູ່ ການທຳມະນະສິການໂດຍແຍບຄາຍໃນທຳເຫຼົ່ານັ້ນໃຫ້ຫຼາຍ ນີ້ເປັນອາຫານທີ່ເຮັດທຳມະວິຈະຍະສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດທຳມະວິຈະຍະສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ອັນໃດນໍ? ເປັນອາຫານທີ່ເຮັດວິຣິຍະສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດວິຣິຍະສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ຄື ຄວາມລິເລີ່ມ ຄວາມພາກພຽນ ຄວາມບາກບັ່ນມີຢູ່ ການທຳມະນະສິການໂດຍແຍບຄາຍໃນທຳເຫຼົ່ານັ້ນໃຫ້ຫຼາຍ ນີ້ເປັນອາຫານທີ່ເຮັດວິຣິຍະສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດວິຣິຍະສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ອັນໃດນໍ? ເປັນອາຫານທີ່ເຮັດປີຕິສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດປີຕິສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ຄື ທຳທັງຫຼາຍອັນເປັນບ່ອນຕັ້ງແຫ່ງປີຕິສຳໂພດຊົງມີຢູ່ ການທຳມະນະສິການໂດຍແຍບຄາຍໃນທຳເຫຼົ່ານັ້ນໃຫ້ຫຼາຍ ນີ້ເປັນອາຫານທີ່ເຮັດປີຕິສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດປີຕິສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ອັນໃດນໍ? ເປັນອາຫານທີ່ເຮັດປັດສັດທິສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດປັດສັດທິສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ຄື ຄວາມສະງົບກາຍ ຄວາມສະງົບຈິດມີຢູ່ ການທຳມະນະສິການໂດຍແຍບຄາຍໃນທຳເຫຼົ່ານັ້ນໃຫ້ຫຼາຍ ນີ້ເປັນອາຫານທີ່ເຮັດປັດສັດທິສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດປັດສັດທິສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ອັນໃດນໍ? ເປັນອາຫານທີ່ເຮັດສະມາທິສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດສະມາທິສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ຄື ສະມະຖະນິມິດ ອັບພະຍັກຄະນິມິດມີຢູ່ ການທຳມະນະສິການໂດຍແຍບຄາຍໃນນິມິດເຫຼົ່ານັ້ນໃຫ້ຫຼາຍ ນີ້ເປັນອາຫານທີ່ເຮັດສະມາທິສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດສະມາທິສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ອັນໃດນໍ? ເປັນອາຫານທີ່ເຮັດອຸເປກຂາສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດອຸເປກຂາສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ຄື ທຳທັງຫຼາຍອັນເປັນບ່ອນຕັ້ງແຫ່ງອຸເປກຂາສຳໂພດຊົງມີຢູ່ ການທຳມະນະສິການໂດຍແຍບຄາຍໃນທຳເຫຼົ່ານັ້ນໃຫ້ຫຼາຍ ນີ້ເປັນອາຫານທີ່ເຮັດອຸເປກຂາສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດອຸເປກຂາສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ພິກຂຸທັງຫຼາຍ ກາຍນີ້ດຳລົງຢູ່ໄດ້ດ້ວຍອາຫານ ອາໄສອາຫານຈຶ່ງດຳລົງຢູ່ໄດ້ ຂາດອາຫານກໍດຳລົງຢູ່ບໍ່ໄດ້ ແມ່ນສັນໃດ ໂພດຊົງ ໗ ປະການນີ້ກໍຄືກັນສັນນັ້ນ ດຳລົງຢູ່ໄດ້ດ້ວຍອາຫານ ອາໄສອາຫານຈຶ່ງດຳລົງຢູ່ໄດ້ ຂາດອາຫານກໍດຳລົງຢູ່ບໍ່ໄດ້

**ກາຍະສູດທີ ໒ ຈົບ**

# ໓. ສີລະສູດ

## ວ່າດ້ວຍສີນ

[໑໗໔] ພິກຂຸທັງຫຼາຍ ພິກຂຸເຫຼົ່າໃດສົມບູນດ້ວຍສີນ ສະມາທິ ປັນຍາ ວິມຸດຕິ ແລະວິມຸດຕິຍານທັດສະນະ ການເຫັນ[1]ພິກຂຸເຫຼົ່ານັ້ນກໍດີ ການໄດ້ຍິນພິກຂຸເຫຼົ່ານັ້ນກໍດີ ການເຂົ້າໄປຫາພິກຂຸເຫຼົ່ານັ້ນກໍດີ ການເຂົ້າໄປນັ່ງໃກ້ພິກຂຸເຫຼົ່ານັ້ນກໍດີ ການຣະນຶກເຖິງພິກຂຸເຫຼົ່ານັ້ນກໍດີ ການບວດນຳພິກຂຸເຫຼົ່ານັ້ນກໍດີ ເຮົາກ່າວວ່າ ມີອຸປະກາຣະຫຼາຍ

ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນບຸກຄົນໄດ້ຟັງທຳຂອງພິກຂຸເຫັນປານນັ້ນ ແລ້ວຍ່ອມຫຼີກອອກດ້ວຍການຫຼີກອອກ ໒ ຢ່າງ ຄື (໑) ຫຼີກອອກທາງກາຍ (໒) ຫຼີກອອກທາງຈິດ ເຂົາຫຼີກອອກໄປຢູ່ແນວນັ້ນຍ່ອມຣະລຶກ ນຶກເຖິງທຳນັ້ນ

ສະໄໝໃດ ພິກຂຸຫຼີກອອກໄປຢູ່ແນວນັ້ນຍ່ອມຣະລຶກ ນຶກເຖິງທຳນັ້ນ ສະໄໝນັ້ນ ສະຕິສຳໂພດຊົງເປັນອັນພິກຂຸຜາຣົບແລ້ວ ພິກຂຸຊື່ວ່າຈະເລີນສະຕິສຳໂພດຊົງ ສະຕິສຳໂພດຊົງ

ຍ່ອມເຖິງຄວາມຈະເລີນເຕັມທີ່ແກ່ພິກຂຸ ພິກຂຸມີສະຕິຢູ່ແບບນັ້ນ ຍ່ອມຄັດເລືອກ ກວດກາ ພິນິດພິຈາລະນາທຳນັ້ນດ້ວຍປັນຍາ

ສະໄໝໃດ ພິກຂຸມີສະຕິຢູ່ແບບນັ້ນຍ່ອມຄັດເລືອກ ກວດກາ ພິນິດພິຈາລະນາທຳ ນັ້ນດ້ວຍປັນຍາ ສະໄໝນັ້ນ ທຳມະວິຈະຍະສຳໂພດຊົງເປັນອັນພິກຂຸຜາຣົບແລ້ວ ພິກຂຸຊື່ວ່າ ຈະເລີນທຳມະວິຈະຍະສຳໂພດຊົງ ທຳມະວິຈະຍະສຳໂພດຊົງຍ່ອມເຖິງຄວາມຈະເລີນເຕັມທີ່ແກ່ພິກຂຸ ຄວາມພຽນບໍ່ທໍ້ຖອຍຍານເປັນອັນທ່ານຜູ້ຄັດເລືອກ ກວດກາ ພິນິດພິຈາລະນາທຳນັ້ນດ້ວຍປັນຍາຜາຣົບແລ້ວ

ສະໄໝໃດ ຄວາມພຽນບໍ່ທໍ້ຖອຍຍານເປັນອັນທ່ານຜູ້ຄັດເລືອກ ກວດກາ ພິນິດພິຈາລະນາທຳນັ້ນດ້ວຍປັນຍາຜາຣົບແລ້ວ ສະໄໝນັ້ນ ວິຣິຍະສຳໂພດຊົງເປັນອັນພິກຂຸຜາຣົບແລ້ວ ພິກຂຸຊື່ວ່າຈະເລີນວິຣິຍະສຳໂພດຊົງ ວິຣິຍະສຳໂພດຊົງຍ່ອມເຖິງຄວາມຈະເລີນເຕັມທີ່ແກ່ພິກຂຸ ປີຕິບໍ່ມີອາມິດຍ່ອມເກີດແກ່ທ່ານຜູ້ໄດ້ຜາຣົບຄວາມພຽນ

ສະໄໝໃດ ປີຕິບໍ່ມີອາມິດຍ່ອມເກີດແກ່ພິກຂຸຜູ້ໄດ້ຜາຣົບຄວາມພຽນ ສະໄໝນັ້ນ ປີຕິສຳໂພດຊົງເປັນອັນພິກຂຸຜາຣົບແລ້ວ ພິກຂຸຊື່ວ່າຈະເລີນປີຕິສຳໂພດຊົງ ປີຕິສຳໂພດຊົງ ຍ່ອມເຖິງຄວາມຈະເລີນເຕັມທີ່ແກ່ພິກຂຸ ທັງກາຍທັງຈິດຂອງທ່ານຜູ້ມີໃຈມີປີຕິຍ່ອມສະງົບ

ສະໄໝໃດ ທັງກາຍທັງຈິດຂອງພິກຂຸຜູ້ມີໃຈມີປີຕິຍ່ອມສະງົບ ສະໄໝນັ້ນ ປັດສັດທິສຳໂພດຊົງ ເປັນອັນພິກຂຸຜາຣົບແລ້ວ ພິກຂຸຊື່ວ່າຈະເລີນປັດສັດທິສຳໂພດຊົງ ປັດສັດທິສຳໂພດຊົງຍ່ອມເຖິງຄວາມຈະເລີນເຕັມທີ່ແກ່ພິກຂຸ ຈິດຂອງທ່ານຜູ້ມີກາຍສະງົບ ມີສຸກຍ່ອມຕັ້ງໝັ້ນ

ສະໄໝໃດ ຈິດຂອງພິກຂຸຜູ້ມີກາຍສະງົບ ມີສຸກຍ່ອມຕັ້ງໝັ້ນ ສະໄໝນັ້ນ ສະມາທິສຳໂພດຊົງ ເປັນອັນພິກຂຸຜາຣົບແລ້ວ ພິກຂຸຊື່ວ່າ ຈະເລີນສະມາທິສຳໂພດຊົງ ສະມາທິສຳໂພດຊົງຍ່ອມເຖິງຄວາມຈະເລີນເຕັມທີ່ແກ່ພິກຂຸ ທ່ານຍ່ອມເພ່ງເບິ່ງຈິດທີ່ຕັ້ງໝັ້ນແບບນັ້ນດ້ວຍດີ

ສະໄໝໃດ ພິກຂຸຍ່ອມເພ່ງເບິ່ງຈິດທີ່ຕັ້ງໝັ້ນແບບນັ້ນດ້ວຍດີ ສະໄໝນັ້ນ ອຸເປກຂາສຳໂພດຊົງ ເປັນອັນພິກຂຸຜາຣົບແລ້ວ ພິກຂຸຊື່ວ່າຈະເລີນອຸເປກຂາສຳໂພດຊົງ ອຸເປກຂາສຳໂພດຊົງຍ່ອມເຖິງຄວາມຈະເລີນເຕັມທີ່ແກ່ພິກຂຸ

## ອານິສົງການຈະເລີນໂພດຊົງ

ພິກຂຸທັງຫຼາຍ ເມື່ອໂພດຊົງ ໗ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວແບບນີ້ ເພິ່ງຫວັງຜະລານິສົງ ໗ ປະການ

ຜະລານິສົງ ໗ ປະການ ອັນໃດແດ່ ຄື

໑. ຈະໄດ້ບັນລຸອະຣະຫັດຕະຜົນທັນທີໃນປັດຈຸບັນ
໒. ຫາກໃນປັດຈຸບັນຍັງບໍ່ໄດ້ບັນລຸ ກໍຈະໄດ້ບັນລຸໃນເວລາໃກ້ຕາຍ
໓. ຫາກໃນປັດຈຸບັນແລະໃນເວລາໃກ້ຕາຍຍັງບໍ່ໄດ້ບັນລຸ ກໍຈະໄດ້ເປັນພຣະອະນາຄາມີຜູ້ອັນຕະຣາປະຣິນິບພາຍີ ຍ້ອນໂອຣຳພາຄິຍະສັງໂຍດ (ສັງໂຍດເບື້ອງຕ່ຳ) ໕ ປະການສິ້ນໄປ
໔. ຫາກໃນປັດຈຸບັນແລະໃນເວລາໃກ້ຕາຍຍັງບໍ່ໄດ້ບັນລຸ ແລະບໍ່ໄດ້ເປັນພຣະອະນາຄາມີຜູ້ອັນຕະຣາປະຣິນິບພາຍີ ກໍຈະໄດ້ເປັນພຣະອະນາຄາມີຜູ້ ອຸປະຫັດຈະປະຣິນິບພາຍີ ຍ້ອນໂອ ຣຳພາຄິຍະສັງໂຍດ ໕ ປະການສິ້ນໄປ
໕. ຫາກໃນປັດຈຸບັນ ແລະໃນເວລາໃກ້ຕາຍຍັງບໍ່ໄດ້ບັນລຸ ບໍ່ໄດ້ເປັນພຣະອະນາຄາມີຜູ້ອັນຕະຣາປະຣິນິບພາຍີ ແລະບໍ່ໄດ້ເປັນພຣະອະນາຄາມີຜູ້ອຸປະຫັດຈະປະຣິນິບພາຍີ ກໍຈະໄດ້ເປັນພຣະອະນາຄາມີຜູ້ອະສັງຂາຣະປະຣິນິບພາຍີ ຍ້ອນໂອຣຳພາຄິຍະສັງໂຍດ ໕ ປະການສິ້ນໄປ
໖. ຫາກໃນປັດຈຸບັນແລະໃນເວລາໃກ້ຕາຍຍັງບໍ່ໄດ້ບັນລຸ ບໍ່ໄດ້ເປັນພຣະ ອະນາຄາມີຜູ້ອັນຕະຣາປະຣິນິບພາຍີ ບໍ່ໄດ້ເປັນພຣະອະນາຄາມີຜູ້ອຸປະຫັດຈະປະຣິນິບພາຍີ ແລະບໍ່ໄດ້ເປັນພຣະອະນາຄາມີຜູ້ອະສັງຂາຣະປະຣິນິບພາຍີ ກໍຈະໄດ້ເປັນພຣະອະນາຄາມີຜູ້ສະສັງຂາຣະປະຣິນິບພາຍີ ຍ້ອນໂອຣຳພາຄິຍະສັງໂຍດ ໕ ປະການສິ້ນໄປ
໗. ຫາກໃນປັດຈຸບັນແລະໃນເວລາໃກ້ຕາຍຍັງບໍ່ໄດ້ບັນລຸ ບໍ່ໄດ້ເປັນພຣະອະນາຄາມີຜູ້ອັນຕະຣາປະຣິນິບພາຍີ ບໍ່ໄດ້ເປັນພຣະອະນາຄາມີຜູ້ອຸປະຫັດຈະປະຣິນິບພາຍີ ບໍ່ໄດ້ເປັນພຣະອະນາຄາມີຜູ້ອະສັງຂາຣະປະຣິນິບພາຍີ ແລະບໍ່ໄດ້ເປັນພຣະອະນາຄາມີຜູ້ສະສັງຂາຣະປະຣິນິບພາຍີ ກໍຈະໄດ້ເປັນພຣະອະນາຄາມີຜູ້ອຸດທັງໂສໂຕອະກະນິດຖະຄາມີ ຍ້ອນໂອຣຳພາຄິຍະສັງໂຍດ ໕ ປະການສິ້ນໄປ

ພິກຂຸທັງຫຼາຍ ເມື່ອໂພດຊົງ ໗ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວແນວນີ້ ເພິ່ງຫວັງຜະລານິສົງ ໗ ປະການນີ້

**ສີລະສູດທີ ໓ ຈົບ**

# ໔. ວັດຖະສູດ

## ວ່າດ້ວຍອຸປະມາດ້ວຍຜ້າ

[໑໘໔] ສະໄໝໜຶ່ງ ທ່ານພຣະສາຣີບຸດຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດເມືອງສາວັດຖີໃນບ່ອນນັ້ນແລ ທ່ານພຣະສາຣີບຸດຮຽກພິກຂຸທັງຫຼາຍ ມາກ່າວວ່າ ຜູ້ມີອາຍຸທັງຫຼາຍ ພິກຂຸເຫຼົ່ານັ້ນຮັບຄຳແລ້ວ ທ່ານພຣະສາຣີບຸດຈຶ່ງໄດ້ກ່າວເລື້ອງນີ້ ວ່າ

ຜູ້ມີອາຍຸທັງຫຼາຍ ໂພດຊົງ ໗ ປະການນີ້

ໂພດຊົງ ໗ ປະການ ອັນໃດແດ່ ຄື

໑. ສະຕິສຳໂພດຊົງ
໒. ທຳມະວິຈະຍະສຳໂພດຊົງ
໓. ວິຣິຍະສຳໂພດຊົງ
໔. ປີຕິສຳໂພດຊົງ
໕. ປັດສັດທິສຳໂພດຊົງ
໖. ສະມາທິສຳໂພດຊົງ
໗. ອຸເປກຂາສຳໂພດຊົງ

ໂພດຊົງ ໗ ປະການນີ້

ບັນດາໂພດຊົງ ໗ ປະການນີ້ ຂ້ານ້ອຍປະສົງຈະຢູ່ດ້ວຍໂພດຊົງຂໍ້ໃດ ໆ ໃນເວລາເຊົ້າ ກໍຢູ່ດ້ວຍໂພດຊົງຂໍ້ນັ້ນ ໆ ປະສົງຈະຢູ່ດ້ວຍໂພດຊົງຂໍ້ໃດ ໆ ໃນເວລາທ່ຽງ ກໍຢູ່ດ້ວຍໂພດຊົງຂໍ້ນັ້ນ ໆ ປະສົງຈະຢູ່ດ້ວຍໂພດຊົງຂໍ້ໃດ ໆ ໃນເວລາຄ່ຳ ກໍຢູ່ດ້ວຍໂພດຊົງຂໍ້ນັ້ນ ໆ

ຖ້າສະຕິສຳໂພດຊົງຂອງຂ້ານ້ອຍມີຢູ່ ຂ້ານ້ອຍກໍຮູ້ແຈ້ງວ່າ ສະຕິສຳໂພດຊົງຂອງຂ້ານ້ອຍບໍ່ມີປະມານ ຂ້ານ້ອຍຜາຣົບດີແລ້ວ ຂ້ານ້ອຍຮູ້ແຈ້ງສະຕິສຳໂພດຊົງທີ່ດຳລົງຢູ່ວ່າດຳລົງຢູ່ ຖ້າແມ່ນສະຕິສຳໂພດຊົງຂອງຂ້ານ້ອຍເຄື່ອນໄປ ຂ້ານ້ອຍກໍຮູ້ແຈ້ງວ່າເຄື່ອນໄປ ຍ້ອນສິ່ງນີ້ເປັນປັດໄຈ ຯລຯ ຖ້າອຸເປກຂາສຳໂພດຊົງຂອງຂ້ານ້ອຍມີຢູ່ ຂ້ານ້ອຍກໍຮູ້ແຈ້ງວ່າ ອຸເປກຂາສຳໂພດຊົງຂອງຂ້ານ້ອຍບໍ່ມີປະມານ ຂ້ານ້ອຍຜາຣົບດີແລ້ວ ຂ້ານ້ອຍຮູ້ແຈ້ງອຸເປກຂາສຳໂພດຊົງທີ່ດຳລົງຢູ່ວ່າດຳລົງຢູ່ ຖ້າແມ່ນອຸເປກຂາສຳໂພດຊົງຂອງຂ້ານ້ອຍເຄື່ອນໄປ ຂ້ານ້ອຍກໍຮູ້ແຈ້ງວ່າເຄື່ອນໄປ ຍ້ອນສິ່ງນີ້ເປັນປັດໄຈ

ຕູ້ເກັບມ້ຽນຜ້າຂອງພຣະຣາຊາ ຫຼື ຂອງມະຫາອຳມາດຂອງພຣະຣາຊາບັນຈຸຜ້າສີຕ່າງ ໆ ພຣະຣາຊາ ຫຼື ມະຫາອຳມາດຂອງພຣະຣາຊາປະສົງຈະນຸ່ງຫົ່ມຜ້າຄູ່ໃດ ໆ ໃນເວລາເຊົ້າ ກໍນຸ່ງຫົ່ມຜ້າຄູ່ນັ້ນ ໆ ປະສົງຈະນຸ່ງຫົ່ມຜ້າຄູ່ໃດ ໆ ໃນເວລາທ່ຽງ ກໍນຸ່ງຫົ່ມຜ້າຄູ່ນັ້ນ ໆ ປະສົງຈະນຸ່ງ

ຫົ່ມຜ້າຄູ່ໃດ ໆ ໃນເວລາຄ່ຳ ກໍນຸ່ງຫົ່ມຜ້າຄູ່ນັ້ນ ໆ ແມ່ນສັນໃດ ບັນດາໂພດຊົງ ໗ ປະການນີ້ກໍຄືກັນສັນນັ້ນ ຂ້ານ້ອຍປະສົງຈະຢູ່ດ້ວຍໂພດຊົງຂໍ້ໃດ ໆ ໃນເວລາເຊົ້າ ກໍຢູ່ດ້ວຍໂພດຊົງຂໍ້ນັ້ນ ໆ ປະສົງຈະຢູ່ດ້ວຍໂພດຊົງຂໍ້ໃດ ໆ ໃນເວລາທ່ຽງ ກໍຢູ່ດ້ວຍໂພດຊົງຂໍ້ນັ້ນ ໆ ປະສົງຈະຢູ່ດ້ວຍໂພດຊົງຂໍ້ໃດ ໆ ໃນເວລາຄ່ຳ ກໍຢູ່ດ້ວຍໂພດຊົງຂໍ້ນັ້ນ ໆ

ຜູ້ມີອາຍຸທັງຫຼາຍ ຖ້າສະຕິສຳໂພດຊົງຂອງຂ້ານ້ອຍມີຢູ່ ຂ້ານ້ອຍກໍຮູ້ແຈ້ງວ່າ ສະຕິສຳໂພດຊົງຂອງຂ້ານ້ອຍບໍ່ມີປະມານ ຂ້ານ້ອຍຜາຣົບດີແລ້ວ ຂ້ານ້ອຍຮູ້ແຈ້ງສະຕິສຳໂພດຊົງທີ່ດຳລົງຢູ່ວ່າດຳລົງຢູ່ ຖ້າແມ່ນສະຕິສຳໂພດຊົງຂອງຂ້ານ້ອຍເຄື່ອນໄປ ຂ້ານ້ອຍກໍຮູ້ແຈ້ງວ່າເຄື່ອນໄປ ຍ້ອນສິ່ງນີ້ເປັນປັດໃຈ ฯลฯ ຖ້າອຸເປກຂາສຳໂພດຊົງຂອງຂ້ານ້ອຍມີຢູ່ ຂ້ານ້ອຍກໍຮູ້ແຈ້ງວ່າ ອຸເປກຂາສຳໂພດຊົງຂອງຂ້ານ້ອຍ ບໍ່ມີປະມານ ຂ້ານ້ອຍຜາຣົບດີແລ້ວ ຂ້ານ້ອຍຮູ້ແຈ້ງອຸເປກຂາສຳໂພດຊົງທີ່ດຳລົງຢູ່ວ່າດຳລົງຢູ່ ຖ້າແມ່ນອຸເປກຂາສຳໂພດຊົງຂອງຂ້ານ້ອຍເຄື່ອນໄປ ຂ້ານ້ອຍກໍຮູ້ແຈ້ງວ່າເຄື່ອນໄປ ຍ້ອນສິ່ງນີ້ເປັນປັດໃຈ

**ວັດຖະສູດທີ ໔ ຈົບ**

# ໕. ພິກຂຸສູດ

## ວ່າດ້ວຍພິກຂຸທູນຖາມເລື້ອງໂພດຊົງ

[໑໗໖] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ຄັ້ງນັ້ນ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ฯลฯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງຕັດວ່າ ໂພດຊົງ ໂພດຊົງ ດ້ວຍເຫດພຽງທໍ່ໃດນໍ? ພຣະອົງຈຶ່ງຕັດວ່າ ໂພດຊົງ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ທີ່ຮຽກວ່າ ໂພດຊົງ ຍ້ອນເປັນໄປເພື່ອຕັດສະຮູ້

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ฯลฯ

໗. ຈະເລີນອຸເປກຂາສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ເມື່ອທ່ານຈະເລີນໂພດຊົງ ໗ ປະການນີ້ຢູ່ ຈິດຍ່ອມລຸດພົ້ນຈາກກາມາສະວະ ພະວາສະວະ ແລະອະວິດຊາສະວະ ເມື່ອຈິດລຸດພົ້ນແລ້ວກໍຮູ້ວ່າ ລຸດພົ້ນແລ້ວ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສໍາເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນ ແນວນີ້ອີກຕໍ່ໄປ

ພິກຂຸ ທີ່ຮຽກວ່າ ໂພດຊົງ ຍ້ອນເປັນໄປເພື່ອຕັດສະຣູ້ ແນວນີ້ແລ

**ພິກຂຸສູດທີ ໕ ຈົບ**

# ໖. ກຸນທະລິຍະສູດ

## ວ່າດ້ວຍກຸນທະລິຍະປະຣິພາຊົກ

[໑໗໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ປ່າອັນຊະນະວັນ ສະຖານທີ່ພຣະຣາດຊະທານອະໄພແກ່ໝູ່ເນື້ອ ເຂດເມືອງສາເກດ ຄັ້ງນັ້ນ ກຸນທະລິຍະປະຣິພາຊົກເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ທ່ານພຣະໂຄດົມ ຂ້າພະເຈົ້າທ່ຽວໄປໃນອາຣາມ ເຂົ້າໄປຫາບໍລິສັດ ເມື່ອຂ້າພະເຈົ້າບໍຣິໂພກອາຫານເຊົ້າສໍາເລັດແລ້ວ ໃນເວລາຫຼັງອາຫານຍ່າງທ່ຽວໄປທາງອາຣາມສູ່ອາຣາມ ທາງອຸທະຍານສູ່ອຸທະຍານ ໃນບ່ອນນັ້ນ ຂ້າພະເຈົ້າເຫັນສະມະນະພາມ ພວກໜຶ່ງກໍາລັງກ່າວກະຖາເຊິ່ງມີວິທີປົດເປື້ອງວາທະເປັນອານິສົງແລະມີວິທີໂຕ້ວາທະເປັນອານິສົງ ສ່ວນທ່ານພຣະໂຄດົມມີອັນໃດເປັນອານິສົງຢູ່

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ກຸນທະລິຍະ ຕະຖາຄົດມີວິດຊາ ແລະວິມຸດຕິເປັນຜະລານິສົງ

ທ່ານພຣະໂຄດົມ ທໍາເຫຼົ່າໃດທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດວິດຊາ ແລະວິມຸດຕິໃຫ້ບໍລິບູນ?

ກຸນທະລິຍະ ໂພດຊົງ ໗ ປະການທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດວິດຊາແລະວິມຸດຕິໃຫ້ບໍລິບູນ

ທ່ານພຣະໂຄດົມ ທໍາເຫຼົ່າໃດທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໂພດຊົງ ໗ ປະການໃຫ້ບໍລິບູນ?

ກຸນທະລິຍະ ສະຕິປັດຖານ ໔ ປະການທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໂພດຊົງ ໗ ປະການໃຫ້ບໍລິບູນ

ທ່ານພຣະໂຄດົມ ທໍາເຫຼົ່າໃດທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດສະຕິປັດຖານ ໔ ປະການໃຫ້ບໍລິບູນ?

ກຸນທະລິຍະ ສຸດຈະຣິດ ໓ ປະການທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດສະຕິປັດຖານ ໔ ປະການໃຫ້ບໍລິບູນ

ທ່ານພຣະໂຄດົມ ທຳເຫຼົ່າໃດທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດສຸດຈະຣິດ ໓ ປະການໃຫ້ບໍລິບູນ?

ກຸນທະລິຍະ ອິນຊີສັງວອນທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດສຸດຈະຣິດ ໓ ປະການໃຫ້ບໍລິບູນ

ອິນຊີສັງວອນທີ່ບຸກຄົນຈະເລີນແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງເຮັດສຸດຈະຣິດ ໓ ປະການໃຫ້ບໍລິບູນ

ຄື ພິກຂຸໃນທຳວິໄນນີ້ ເຫັນຮູບທີ່ໜ້າພໍໃຈທາງຕາແລ້ວ ບໍ່ຫຼົງໄຫຼ ບໍ່ເພີດເພີນຮູບທີ່ໜ້າພໍໃຈ ບໍ່ໃຫ້ເກີດຄວາມກຳໜັດ ກາຍຂອງທ່ານກໍຄືເກົ່າ ແລະຈິດທີ່ຄົງທີ່ໃນພາຍໃນກໍໝັ້ນຄົງດີ ລຸດພົ້ນດີແລ້ວ ທ່ານເຫັນຮູບທີ່ບໍ່ໜ້າພໍໃຈທາງຕາແລ້ວ ກໍບໍ່ເກີ້ເຂີນ ມີຈິດບໍ່ຕິດຢູ່ ບໍ່ເສຍໃຈ ມີໃຈບໍ່ພະຍາບາດ ທັງກາຍຂອງທ່ານກໍຄືເກົ່າ ແລະຈິດທີ່ຄົງທີ່ໃນພາຍໃນກໍໝັ້ນຄົງດີ ລຸດພົ້ນດີແລ້ວ

ອີກປະການໜຶ່ງ ພິກຂຸຟັງສຽງທາງຫູ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ ຯລຯ ຮູ້ແຈ້ງທຳມາຣົມທີ່ໜ້າພໍໃຈທາງໃຈແລ້ວ ບໍ່ຫຼົງໄຫຼ ບໍ່ເພີດເພີນ ບໍ່ໃຫ້ເກີດຄວາມກຳໜັດ ກາຍຂອງທ່ານກໍຄືເກົ່າ ແລະຈິດທີ່ຄົງທີ່ໃນພາຍໃນກໍໝັ້ນຄົງດີ ລຸດພົ້ນດີແລ້ວ ທ່ານຮູ້ແຈ້ງທຳມາຣົມທີ່ບໍ່ໜ້າພໍໃຈທາງໃຈແລ້ວ ກໍບໍ່ເກີ້ເຂີນ ມີຈິດບໍ່ຕິດຢູ່ ບໍ່ເສຍໃຈ ມີໃຈບໍ່ພະຍາບາດ ທັງກາຍຂອງທ່ານກໍຄືເກົ່າ ແລະຈິດທີ່ຄົງທີ່ໃນພາຍໃນກໍໝັ້ນຄົງດີ ລຸດພົ້ນດີແລ້ວ

ຍ້ອນເຫດທີ່ພິກຂຸເຫັນຮູບທາງຕາແລ້ວ ມີກາຍຄືເກົ່າ ແລະມີຈິດທີ່ຄົງທີ່ໃນພາຍໃນໝັ້ນຄົງດີ ລຸດພົ້ນດີແລ້ວໃນຮູບທັງທີ່ໜ້າພໍໃຈ ແລະບໍ່ໜ້າພໍໃຈ ຟັງສຽງທາງຫູ ຯລຯ ດົມ ກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ ຯລຯ ຮູ້ແຈ້ງທຳມາຣົມ ທາງໃຈແລ້ວ ມີກາຍຄືເກົ່າ ແລະມີຈິດທີ່ຄົງທີ່ໃນພາຍໃນໝັ້ນຄົງດີ ລຸດພົ້ນດີແລ້ວໃນທຳທີ່ໜ້າພໍໃຈ ແລະບໍ່ໜ້າພໍໃຈ

ອິນຊີສັງວອນທີ່ບຸກຄົນຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ຈຶ່ງເຮັດສຸດຈະຣິດ ໓ ປະການໃຫ້ບໍລິບູນ

ສຸດຈະຣິດ ໓ ປະການນັ້ນທີ່ບຸກຄົນຈະເລີນແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງເຮັດສະຕິປັດຖານ ໔ ປະການໃຫ້ບໍລິບູນ

ຄື ພິກຂຸໃນທຳວິໄນນີ້ລະກາຍທຸດຈະຣິດ ຈະເລີນກາຍສຸດຈະຣິດ ລະວະຈີທຸດຈະຣິດ ຈະເລີນ ວະຈີສຸດຈະຣິດ ລະມະໂນທຸດຈະຣິດ ຈະເລີນມະໂນສຸດຈະຣິດ

ສຸດຈະຣິດ ໓ ປະການທີ່ບຸກຄົນຈະເລີນແບວນີ້ແລ ເຮັດໃຫ້ຫຼາຍແລ້ວແບວນີ້ ຈຶ່ງເຮັດສະຕິປັດຖານ ໔ ປະການໃຫ້ບໍລິບູນ

ສະຕິປັດຖານ ໔ ປະການທີ່ບຸກຄົນຈະເລີນແບວໃດ ເຮັດໃຫ້ຫຼາຍແລ້ວແບວໃດ ຈຶ່ງເຮັດໂພດຊົງ ໗ ປະການໃຫ້ບໍລິບູນ

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ສະຕິປັດຖານ ໔ ປະການທີ່ບຸກຄົນຈະເລີນແບວນີ້ແລ ເຮັດໃຫ້ຫຼາຍແລ້ວແບວນີ້ ຈຶ່ງເຮັດໂພດຊົງ ໗ ປະການໃຫ້ບໍລິບູນ

ໂພດຊົງ ໗ ປະການທີ່ບຸກຄົນຈະເລີນແບວໃດ ເຮັດໃຫ້ຫຼາຍແລ້ວແບວໃດ ຈຶ່ງເຮັດວິດຊາແລະວິມຸດຕິໃຫ້ບໍລິບູນ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ
ຯລຯ
໗. ຈະເລີນອຸເປກຂາສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດນ້ອມໄປໃນໂວດສັກຄະ

ໂພດຊົງ ໗ ປະການທີ່ບຸກຄົນຈະເລີນແບວນີ້ແລ ເຮັດໃຫ້ຫຼາຍແລ້ວແບວນີ້ ຈຶ່ງເຮັດວິດຊາແລະວິມຸດຕິໃຫ້ບໍລິບູນ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແບວນີ້ແລ້ວ ກຸນທະລິຍະປະຣິພາຊົກໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ຂ້າແດ່ທ່ານພຣະໂຄດົມ ພຣະພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ທ່ານພຣະໂຄດົມປະກາດທຳແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກ

ທາງແກ່ຜູ້ຫຼົງທາງ ຫຼື ເບີ່ອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ ຄົນມີຕາດີຈັກເຫັນຮູບໄດ້ ຂ້າພຣະອົງນີ້ ຂໍເຖິງທ່ານພຣະໂຄດົມພ້ອມທັງພຣະທຳ ແລະ ພຣະສົງເປັນສະຣະນະ ຂໍທ່ານພຣະໂຄດົມຈົ່ງຊົງຈຳ ຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ກຸນທະລິຍະສູດທີ ໖ ຈົບ**

# ໗. ກູຕາຄາຣະສູດ

## ວ່າດ້ວຍອຸປະມາດ້ວຍກອນຂອງເຮືອນຍອດ

[໑໗໗] ພິກຂຸທັງຫຼາຍ ກອນຂອງເຮືອນຍອດທັງໝົດລ້ວນນ້ອມໄປສູ່ຍອດ ອຽງໄປສູ່ຍອດ ໂອນໄປສູ່ຍອດ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸເມື່ອຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ฯລฯ

໗. ຈະເລີນອຸເປກຂາສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວນີ້ແລ

**ກູຕາຄາຣະສູດທີ ໗ ຈົບ**

# ໘. ອຸປະວານະສູດ

## ວ່າດ້ວຍພຣະອຸປະວານະ

[໑໗໘] ສະໄໝໜຶ່ງ ທ່ານພຣະອຸປະວານະແລະທ່ານພຣະສາຣີບຸດຢູ່ໂຄສິຕາຣາມ ເຂດ

ເມືອງໂກສຳພີ ເມື່ອໃນເວລາຄ່ຳ ທ່ານພຣະສາຣີບຸດ ອອກຈາກບ່ອນຫຼີບຫຼີກ ເຂົ້າໄປຫາທ່ານພຣະອຸປະວານະຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະອຸປະວານະດັ່ງນີ້ວ່າ ທ່ານອຸປະວານະ ຍ້ອນມະນະສິການໂດຍແຍບຄາຍສະເພາະຕົນ ພິກຂຸເພິ່ງຮູ້ບໍວ່າ ໂພດຊົງ ໗ ປະການທີ່ເຮົາຜາຣົບດີແລ້ວແນວນີ້ ຍ່ອມເປັນໄປເພື່ອຢູ່ຜາສຸກ

ທ່ານພຣະອຸປະວານະຕອບວ່າ ທ່ານສາຣີບຸດ ຍ້ອນມະນະສິການໂດຍແຍບຄາຍສະເພາະຕົນ ພິກຂຸເພິ່ງຮູ້ໄດ້ວ່າ ໂພດຊົງ ໗ ປະການທີ່ເຮົາຜາຣົບດີແລ້ວແນວນີ້ ຍ່ອມເປັນໄປເພື່ອຢູ່ຜາສຸກ

ທ່ານພຣະສາຣີບຸດກ່າວວ່າ ອາວຸໂສ ພິກຂຸຜາຣົບສະຕິສຳໂພດຊົງຢູ່ຍ່ອມຮູ້ແຈ້ງວ່າ ຈິດຂອງເຮົາລຸດພົ້ນດີແລ້ວ ຖີນະມິດທະເຮົາຖອນໄດ້ແລ້ວ ອຸດທັດຈະກຸກກຸດຈະເຮົາກຳຈັດໄດ້ແລ້ວ ຄວາມພຽນເຮົາກໍຜາຣົບແລ້ວ ເຮົາມະນະສິການຢ່າງຈິງຈັງບໍ່ທຍ່ອນຍານ ୨ລ୨ ພິກຂຸຜາຣົບອຸເປກຂາສຳໂພດຊົງຢູ່ຍ່ອມຮູ້ແຈ້ງວ່າ ຈິດຂອງເຮົາລຸດພົ້ນດີແລ້ວ ຖີນະມິດທະເຮົາຖອນໄດ້ແລ້ວ ອຸດທັດຈະກຸກກຸດຈະເຮົາກຳຈັດໄດ້ແລ້ວ ຄວາມພຽນເຮົາຜາຣົບແລ້ວ ເຮົາມະນະສິການຢ່າງຈິງຈັງບໍ່ທຍ່ອນຍານ

ທ່ານພຣະອຸປະວານະກ່າວວ່າ ທ່ານສາຣີບຸດ ຍ້ອນມະນະສິການໂດຍແຍບຄາຍສະເພາະຕົນ ພິກຂຸເພິ່ງຮູ້ໄດ້ວ່າ ໂພດຊົງ ໗ ປະການທີ່ເຮົາຜາຣົບດີແລ້ວແນວນີ້ ຍ່ອມເປັນໄປເພື່ອຢູ່ຜາສຸກດ້ວຍປະການດັ່ງນີ້

**ອຸປະວານະສູດທີ ໙ ຈົບ**

# ໑. ປະຖົມອຸບປັນນະສູດ

## ວ່າດ້ວຍເຫດເກີດໂພດຊົງ ສູດທີ ໑

[໑໙໐] ພິກຂຸທັງຫຼາຍ ໂພດຊົງ ໗ ປະການນີ້ທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ເວັ້ນຄວາມອຸບັດຂຶ້ນຂອງພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າຍ່ອມບໍ່ເກີດຂຶ້ນ

ໂພດຊົງ ໗ ປະການ ອັນໃດແດ່ ຄື

໑. ສະຕິສຳໂພດຊົງ ୨ລ୨ ໗. ອຸເປກຂາສຳໂພດຊົງ

ໂພດຊົງ ໆ ປະການນີ້ທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ເວັ້ນຄວາມອຸບັດຂຶ້ນຂອງພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ຍ່ອມບໍ່ເກີດຂຶ້ນ

**ປະຖົມອຸບປັນນະສູດທີ ໙ ຈົບ**

# ໑໐. ທຸຕິຍະອຸບປັນນະສູດ

## ວ່າດ້ວຍເຫດເກີດໂພດຊົງ ສູດທີ ໘

[໑໙໑] ພິກຂຸທັງຫຼາຍ ໂພດຊົງ ໆ ປະການນີ້ທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ເວັ້ນວິໄນຂອງພຣະສຸຄົດ ຍ່ອມບໍ່ເກີດຂຶ້ນ

ໂພດຊົງ ໆ ປະການ ອັນໃດແດ່ ຄື

໑. ສະຕິສຳໂພດຊົງ ฯລฯ ໆ. ອຸເປກຂາສຳໂພດຊົງ

ໂພດຊົງ ໆ ປະການນີ້ທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ເວັ້ນວິໄນຂອງພຣະສຸຄົດ ຍ່ອມບໍ່ເກີດຂຶ້ນ

**ທຸຕິຍະອຸບປັນນະສູດທີ ໑໐ ຈົບ**

**ປັບພະຕະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໘. ຄິລານະວັກ

## ໝວດວ່າດ້ວຍຜູ້ອາພາດ

## ໑. ປານະສູດ

### ວ່າດ້ວຍອຸປະມາດ້ວຍສັດ

[໑໗໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສັດເຫຼົ່າໃດເຫຼົ່າໜຶ່ງສຳເລັດອິລິຍາບົດ ໔ ຄື ບາງເວລາກໍຍ່າງ ບາງເວລາກໍຢືນ ບາງເວລາກໍນັ່ງ ບາງເວລາກໍນອນ ສັດເຫຼົ່ານັ້ນທັງໝົດ ລ້ວນອາໄສແຜ່ນດິນ ດຳລົງຢູ່ເທິງແຜ່ນດິນ ຈຶ່ງສຳເລັດອິລິຍາບົດ ໔ ນີ້ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ອາໄສສິນ ດຳລົງຢູ່ໃນສິນແລ້ວ ຈະເລີນໂພດຊົງ (ທຳທີ່ເປັນອົງແຫ່ງການຕັດສະຮູ້) ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍ

ພິກຂຸອາໄສສິນ ດຳລົງຢູ່ໃນສິນແລ້ວ ຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ຯລຯ

໗. ຈະເລີນອຸເປກຂາສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸອາໄສສິນ ດຳລົງຢູ່ໃນສິນແລ້ວ ຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍ ແນວນີ້ແລ

**ປານະສູດທີ ໑ ຈົບ**

## ໒. ປະຖົມສຸຣິຍູປະມະສູດ

### ວ່າດ້ວຍອຸປະມາດ້ວຍດວງອາທິດ ສູດທີ ໑

[໑໗໕] ພິກຂຸທັງຫຼາຍ ເມື່ອດວງອາທິດກຳລັງຈະອຸໄທ ຍ່ອມມີແສງອາລຸນຂຶ້ນມາກ່ອນ

ເປັນບຸບພະນິມິດ ສັນໃດ ກັນລະຍານະມິດຕະຕາ (ຄວາມເປັນຜູ້ມີມິດດີ) ກໍເປັນໂຕນໍາ ເປັນບຸບພະນິມິດເພື່ອຄວາມເກີດຂຶ້ນແຫ່ງໂພດຊົງ ໗ ປະການ ສັນນັ້ນ ພິກຂຸຜູ້ມີກັນລະຍານະມິດເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍ

ພິກຂຸຜູ້ມີກັນລະຍານະມິດຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການ ໃຫ້ຫຼາຍແນວໃດ?

ຄື ພິກຂຸໃນທໍາວິໄນນີ້

໑. ຈະເລີນສະຕິສໍາໂພດຊົງອັນອາໄສວິເວກ

ຯລຯ

໗. ຈະເລີນອຸເປກຂາສໍາໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸຜູ້ມີກັນລະຍານະມິດຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍ ແນວນີ້ແລ

**ປະຖົມສຸຣິຍູປະມະສູດທີ ໘ ຈົບ**

# ໙. ທຸຕິຍະສຸຣິຍູປະມະສູດ

## ວ່າດ້ວຍອຸປະມາດ້ວຍດວງອາທິດ ສູດທີ ໘

[໑໗໘] ພິກຂຸທັງຫຼາຍ ເມື່ອດວງອາທິດກໍາລັງຈະອຸໄທ ຍ່ອມມີແສງອາລຸນຂຶ້ນມາກ່ອນ ເປັນບຸບພະນິມິດ ສັນໃດ ໂຍນິໂສມະນະສິການ (ການມະນະສິການໂດຍແຍບຄາຍ) ກໍເປັນໂຕນໍາ ເປັນບຸບພະນິມິດເພື່ອຄວາມເກີດຂຶ້ນແຫ່ງໂພດຊົງ ໗ ປະການ ສັນນັ້ນ ພິກຂຸຜູ້ເຖິງພ້ອມດ້ວຍ ໂຍນິໂສມະນະສິການເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍ

ພິກຂຸຜູ້ເຖິງພ້ອມດ້ວຍໂຍນິໂສມະນະສິການຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍ ແນວໃດ?

ຄື ພິກຂຸໃນທໍາວິໄນນີ້

໑. ຈະເລີນສະຕິສໍາໂພດຊົງອັນອາໄສວິເວກ

ຯລຯ

ກ. ຈະເລີນອຸເປກຂາສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸຜູ້ເຖິງພ້ອມດ້ວຍໂຍນິໂສມະນະສິການຈະເລີນໂພດຊົງ ກ ປະການ ເຮັດໂພດຊົງ ກ ປະການໃຫ້ຫຼາຍ ແນວນີ້ແລ

**ທຸຕິຍະສຸຣິຍູປະມະສູດທີ ໓ ຈົບ**

# ໔. ປະຖົມຄິລານະສູດ

## ວ່າດ້ວຍຜູ້ອາພາດ ສູດທີ ໑

[໑໙໕] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ ເຫຍື່ອກະແຕ ເຂດເມືອງຣາດຊະຄຶ ສະໄໝນັ້ນ ທ່ານພຣະມະຫາກັດສະປະອາພາດ ໄດ້ຮັບທຸກ ເປັນໄຂ້ໜັກ ຢູ່ທີ່ປິບຜະລິຄູຫາ

ເມື່ອໃນເວລາຄ່ຳ ພຣະຜູ້ມີພຣະພາກເຈົ້າ ສະເດັດອອກຈາກບ່ອນຫຼີບຫຼີກ ເຂົ້າໄປຫາທ່ານພຣະມະຫາກັດສະປະເຖິງທີ່ຢູ່ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ໄດ້ຕັດຖາມທ່ານພຣະມະຫາກັດສະປະດັ່ງນີ້ ວ່າ

ກັດສະປະ ທ່ານຍັງສະບາຍດີບໍ ຍັງພໍເປັນຢູ່ໄດ້ບໍ ທຸກຂະເວທະນາທຸເລົາລົງ ບໍ່ກຳເຣີບຂຶ້ນບໍ ອາການທຸເລົາຜາກົດ ອາການກຳເຣີບບໍ່ຜາກົດບໍ?

ທ່ານພຣະມະຫາກັດສະປະທູນຕອບວ່າ ຂ້າພຣະອົງບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ທຸກຂະເວທະນາມີແຕ່ກຳເຣີບໜັກຂຶ້ນ ບໍ່ທຸເລົາລົງເລີຍ ອາການກຳເຣີບຜາກົດ ອາການທຸເລົາບໍ່ຜາກົດຂ້ານ້ອຍ

ກັດສະປະ ໂພດຊົງ ກ ປະການນີ້ເຮົາກ່າວໄວ້ຖືກຕ້ອງແລ້ວ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານ

ໂພດຊົງ ກ ປະການ ອັນໃດແດ່ ຄື

໑. ສະຕິສຳໂພດຊົງເຮົາກ່າວໄວ້ຖືກຕ້ອງແລ້ວ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານ

໗໑໗

ກ. ອຸເປກຂາສໍາໂພດຊົງເຮົາກ່າວໄວ້ຖືກຕ້ອງແລ້ວ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານ

ກັດສະປະ ໂພດຊົງ ກ ປະການນີ້ແລເຮົາກ່າວໄວ້ຖືກຕ້ອງແລ້ວ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານ

ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ໂພດຊົງດີຫຼາຍ ຂ້າແດ່ ພຣະສຸຄົດເຈົ້າ ໂພດຊົງດີຫຼາຍ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານພຣະມະຫາກັດສະປະກໍມີໃຈຍິນດີ ຊົມຊື່ນ ພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ຫາຍຂາດຈາກອາພາດນັ້ນ ແລະອາພາດນັ້ນອັນທ່ານພຣະມະຫາກັດສະປະລະໄດ້ແນວນັ້ນ

**ປະຖົມຄິລານະສູດທີ ໔ ຈົບ**

# ໕. ທຸຕິຍະຄິລານະສູດ

## ວ່າດ້ວຍຜູ້ອາພາດ ສູດທີ ໔

[໑໙໖] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ ເຫຍື່ອກະແຕ ເຂດເມືອງຣາດຊະຄຶ ສະໄໝນັ້ນ ທ່ານພຣະມະຫາໂມກຄັນລານະອາພາດ ໄດ້ຮັບທຸກເປັນໄຂ້ໜັກ ຢູ່ທີ່ພູຄິດຊະກູດ

ເມື່ອໃນເວລາຄໍ່າ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກບ່ອນຫຼີບຫຼີກ ເຂົ້າໄປຫາທ່ານພຣະມະຫາໂມກຄັນລານະເຖິງທີ່ຢູ່ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ໄດ້ຕັດຖາມທ່ານພຣະມະຫາໂມກຄັນລານະດັ່ງນີ້ວ່າ

ໂມກຄັນລານະ ທ່ານຍັງສະບາຍດີບໍ ຍັງພໍເປັນຢູ່ໄດ້ບໍ ທຸກຂະເວທະນາທຸເລົາລົງ ບໍ່ກໍາເຣີບຂຶ້ນບໍ ອາການທຸເລົາຜາກົດ ອາການກໍາເຣີບບໍ່ຜາກົດບໍ?

ທ່ານພຣະມະຫາໂມກຄັນລານະທູນຕອບວ່າ ຂ້າພຣະອົງບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ທຸກຂະເວທະນາມີແຕ່ກໍາເຣີບໜັກຂຶ້ນ ບໍ່ທຸເລົາລົງເລີຍ ອາການກໍາເຣີບຜາກົດ ອາການທຸເລົາບໍ່ຜາກົດ ຂ້ານ້ອຍ

ໂມກຄັນລານະ ໂພດຊົງ ກ ປະການນີ້ເຮົາກ່າວໄວ້ຖືກຕ້ອງແລ້ວ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານ

ໂພດຊົງ ໗ ປະການ ອັນໃດແດ່ ຄື

໑. ສະຕິສໍາໂພດຊົງເຮົາກ່າວໄວ້ຖືກຕ້ອງແລ້ວ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານ

ຯລຯ

໗. ອຸເປກຂາສໍາໂພດຊົງເຮົາກ່າວໄວ້ຖືກຕ້ອງແລ້ວ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານ

ໂມກຄັນລານະ ໂພດຊົງ ໗ ປະການນີ້ເຮົາກ່າວໄວ້ຖືກຕ້ອງແລ້ວ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານ

ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ໂພດຊົງດີຫຼາຍ ຂ້າແດ່ ພຣະສຸຄົດເຈົ້າ ໂພດຊົງດີຫຼາຍ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານພຣະມະຫາໂມກຄັນລານະກໍມີໃຈຍິນດີຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ຫາຍຂາດຈາກອາພາດນັ້ນ ແລະອາພາດນັ້ນອັນທ່ານພຣະມະຫາໂມກຄັນລານະລະໄດ້ແນວນັ້ນ

**ທຸຕິຍະຄິລານະສູດທີ ໕ ຈົບ**

# ໖. ຕະຕິຍະຄິລານະສູດ

## ວ່າດ້ວຍຜູ້ອາພາດ ສູດທີ ໖

[໑໙໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດເມືອງຣາດຊະຄຶ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າຊົງພຣະປະຊວນ ໄດ້ຮັບທຸກພຣະອາການໜັກ

ຄັ້ງນັ້ນ ທ່ານພຣະມະຫາຈຸນທະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບທ່ານພຣະມະຫາຈຸນທະດັ່ງນີ້ວ່າ ຈຸນທະ ສະເພາະທ່ານທີ່ຈະອະທິບາຍໂພດຊົງໃຫ້ແຈ່ມແຈ້ງ

ທ່ານພຣະມະຫາຈຸນທະທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ໂພດຊົງ ໗ ປະການນີ້ພຣະອົງຕັດໄວ້ຖືກຕ້ອງແລ້ວ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານ

ໂພດຊົງ ໗ ປະການ ອັນໃດແດ່ ຄື

๑. ສະຕິສຳໂພດຊົງພຣະຜູ້ມີພຣະພາກເຈົ້າຕັດໄວ້ຖືກຕ້ອງແລ້ວ ທີ່ບຸກຄົນຈະ ເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານ

ฯລฯ

໗. ອຸເປກຂາສຳໂພດຊົງພຣະຜູ້ມີພຣະພາກເຈົ້າຕັດໄວ້ຖືກຕ້ອງແລ້ວ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານ

ຂ້າແດ່ ພຣະອົງຜູ້ຈະເລີນ ໂພດຊົງ ໗ ປະການນີ້ພຣະຜູ້ມີພຣະພາກເຈົ້າຕັດໄວ້ຖືກຕ້ອງແລ້ວ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານ

ຈຸນທະ ໂພດຊົງດີຫຼາຍ ຈຸນທະ ໂພດຊົງດີຫຼາຍ

ທ່ານພຣະມະຫາຈຸນທະໄດ້ກ່າວຄຳນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າຊົງຊົມຊື່ນ ພໍພຣະຫະໄທ ຊົງຫາຍຂາດຈາກພຣະປະຊວນນັ້ນ ແລະພຣະປະຊວນນັ້ນອັນພຣະຜູ້ມີພຣະພາກເຈົ້າຊົງລະໄດ້ ແນວນັ້ນ

**ຕະຕິຍະຄິລານະສູດທີ ๖ ຈົບ**

# ໗. ປາຣັງຄະມະສູດ

## ວ່າດ້ວຍທຳທີ່ເປັນໄປເພື່ອໃຫ້ເຖິງຝັ່ງ

[๑๗๗] ພິກຂຸທັງຫຼາຍ ໂພດຊົງ ໗ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຖິງຝັ່ງນັ້ນຈາກຝັ່ງນີ້

ໂພດຊົງ ໗ ປະການ ອັນໃດແດ່ ຄື

๑. ສະຕິສຳໂພດຊົງ ฯລฯ ໗. ອຸເປກຂາສຳໂພດຊົງ

ພິກຂຸທັງຫຼາຍ ໂພດຊົງ ໗ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຖິງຝັ່ງນັ້ນຈາກຝັ່ງນີ້

ໃນໝູ່ມະນຸດ ເຫຼົ່າຊົນຜູ້ໄປເຖິງຝັ່ງນັ້ນມີຈຳນວນໜ້ອຍ

ສ່ວນໝູ່ສັດນອກນີ້ເລາະໄປຕາມຝັ່ງນີ້ທັງນັ້ນ
ສ່ວນຊົນເຫຼົ່າໃດປະພຶດຕາມທຳ
ໃນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໂດຍຖືກຕ້ອງ
ຊົນເຫຼົ່ານັ້ນຈັກຂ້າມພົ້ນວັດຕະ
ອັນເປັນບ້ວງມານທີ່ຂ້າມໄດ້ແສນຍາກ ຈັກເຖິງຝັ່ງນັ້ນ
　　ບັນດິດລະທຳດຳແລ້ວເພິ່ງຈະເລີນທຳຂາວ
ອອກຈາກທີ່ມີນ້ຳ ມາສູ່ທີ່ບໍ່ມີນ້ຳ
ລະກາມທັງຫຼາຍແລ້ວເປັນຜູ້ໝົດຄວາມກັງວົນ
ເພິ່ງປາຖະໜາຄວາມຍິນດີຍິ່ງໃນວິເວກທີ່ຍິນດີໄດ້ຍາກຍິ່ງ
　　ບັນດິດເພິ່ງຊຳຮະຕົນໃຫ້ຜ່ອງແຜ້ວ
ຈາກເຄື່ອງເສົ້າໝອງແຫ່ງຈິດທັງຫຼາຍ
ບັນດິດເຫຼົ່າໃດອົບຮົມຈິດໂດຍຖືກຕ້ອງ
ໃນອົງທຳເປັນເຄື່ອງຕັດສະຣູ້ທັງຫຼາຍ
ບໍ່ຖືໝັ້ນ ຍິນດີໃນນິບພານເປັນທີ່ສະລະຄວາມຖືໝັ້ນ
　　ບັນດິດເຫຼົ່ານັ້ນສິ້ນອາສະວະແລ້ວ
ມີຄວາມຮຸ່ງເຮືອງ ດັບເຢັນດີແລ້ວໃນໂລກ

**ປາຣັງຄະມະສູດທີ ໗ ຈົບ**

# ໘. ວິຣັດທະສູດ

## ວ່າດ້ວຍທຳທີ່ບຸກຄົນພາດ

[໑໘໗] ພິກຂຸທັງຫຼາຍ ໂພດຊົງ ໗ ປະການອັນບຸກຄົນເຫຼົ່າໃດເຫຼົ່າໜຶ່ງພາດແລ້ວ ອະຣິຍະມັກທີ່ໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງ ກໍຊື່ວ່າ ເປັນອັນບຸກຄົນເຫຼົ່ານັ້ນພາດແລ້ວ ໂພດຊົງ ໗ ປະການອັນບຸກຄົນເຫຼົ່າໃດເຫຼົ່າໜຶ່ງຜາຣົບແລ້ວ ອະຣິຍະມັກ ທີ່ໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງ ກໍຊື່ວ່າ ເປັນອັນບຸກຄົນເຫຼົ່ານັ້ນຜາຣົບແລ້ວ

ໂພດຊົງ ໗ ປະການ ອັນໃດແດ່ ຄື

໑. ສະຕິສຳໂພດຊົງ　　　ຯລຯ　　　໗. ອຸເປກຂາສຳໂພດຊົງ

ພິກຂຸທັງຫຼາຍ ໂພດຊົງ ໗ ປະການອັນບຸກຄົນເຫຼົ່າໃດເຫຼົ່າໜຶ່ງພາດແລ້ວ ອະຣິຍະມັກທີ່ໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງ ກໍຊື່ວ່າ ເປັນອັນບຸກຄົນເຫຼົ່ານັ້ນພາດແລ້ວ ສ່ວນໂພດຊົງ ໗

ປະການນີ້ອັນບຸກຄົນເຫຼົ່າໃດເຫຼົ່າໜຶ່ງພາຣົບແລ້ວ ອະຣິຍະມັກທີ່ໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງ ກໍຊື່ວ່າ ເປັນອັນບຸກຄົນເຫຼົ່ານັ້ນພາຣົບແລ້ວ

**ວິຣັດທະສູດທີ ໗ ຈົບ**

# ໘. ອະຣິຍະສູດ

## ວ່າດ້ວຍທຳທີ່ເປັນອະຣິຍະ

[໔໐໐] ພິກຂຸທັງຫຼາຍ ໂພດຊົງ ໗ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ເປັນອະຣິຍະ ເປັນນິຍະຍານິກະທຳ ນຳອອກໄປເພື່ອໃຫ້ສິ້ນທຸກໂດຍຖືກຕ້ອງແກ່ຜູ້ພໍ່າເພັງ

ໂພດຊົງ ໗ ປະການນັ້ນ

ໂພດຊົງ ໗ ປະການ ອັນໃດແດ່ ຄື

໑. ສະຕິສຳໂພດຊົງ ຯລຯ ໗. ອຸເປກຂາສຳໂພດຊົງ

ພິກຂຸທັງຫຼາຍ ໂພດຊົງ ໗ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ເປັນອະຣິຍະ ເປັນນິຍະຍານິກະທຳ ນຳອອກໄປເພື່ອໃຫ້ສິ້ນທຸກໂດຍຖືກຕ້ອງແກ່ຜູ້ພໍ່າເພັງໂພດຊົງ ໗ ປະການນັ້ນ

**ອະຣິຍະສູດທີ ໘ ຈົບ**

# ໑໐. ນິບພິທາສູດ

## ວ່າດ້ວຍທຳທີ່ເປັນໄປເພື່ອຄວາມເບື່ອໜ່າຍ

[໔໐໑] ພິກຂຸທັງຫຼາຍ ໂພດຊົງ ໗ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມເບື່ອໜ່າຍຢ່າງທີ່ສຸດ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານ

ໂພດຊົງ ໗ ປະການ ອັນໃດແດ່ ຄື

໑. ສະຕິສຳໂພດຊົງ ຯລຯ ໗. ອຸເປກຂາສຳໂພດຊົງ

ພິກຂຸທັງຫຼາຍ ໂພດຊົງ ໗ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມເບື່ອໜ່າຍຢ່າງທີ່ສຸດ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ

**ນິບພິທາສູດທີ ໑໐ ຈົບ**

**ຄິລານະວັກທີ ໘ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໙. ອຸທາຍິວັກ

## ໝວດວ່າດ້ວຍພຣະອຸທາຍີ

# ໑. ໂພທາຍະສູດ

## ວ່າດ້ວຍທຳທີ່ເປັນໄປເພື່ອຕັດສະຮູ້

[໔໐໔] ຄັ້ງນັ້ນ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ພຣະອົງຕັດວ່າ ໂພດຊົງ ໂພດຊົງ ດ້ວຍເຫດພຽງທໍ່ໃດນໍ ຈຶ່ງຕັດວ່າ ໂພດຊົງ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ເຮົາຮຽກວ່າ ໂພດຊົງ ຍ້ອນເປັນໄປເພື່ອຕັດສະຮູ້

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ຯລຯ

໗. ຈະເລີນອຸເປກຂາສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສ

ນິໂຣທ ນ້ອມໄປໃນໂວດສັກຄະ

ພິກຂຸ ເຮົາຮຽກວ່າ ໂພດຊົງ ຍ້ອນເປັນໄປເພື່ອຕັດສະຣູ້

**ໂພທາຍະສູດທີ ໑ ຈົບ**

# ໘. ໂພດຊັງຄະເທສະນາສູດ

## ວ່າດ້ວຍການສະແດງໂພດຊົງ

[໘໐໓] ພິກຂຸທັງຫຼາຍ ເຮົາຈັກສະແດງໂພດຊົງ ໗ ປະການແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ໂພດຊົງ ໗ ປະການ ອັນໃດແດ່ ຄື

໑. ສະຕິສຳໂພດຊົງ ຯລຯ ໗. ອຸເປກຂາສຳໂພດຊົງ

ພິກຂຸທັງຫຼາຍ ໂພດຊົງ ໗ ປະການນີ້ແລ

**ໂພດຊັງຄະເທສະນາສູດທີ ໘ ຈົບ**

# ໙. ຖານິຍະສູດ

## ວ່າດ້ວຍທຳອັນເປັນບ່ອນຕັ້ງແຫ່ງນິວອນ

[໘໐໔] ພິກຂຸທັງຫຼາຍ ກາມສັນທະ (ຄວາມພໍໃຈໃນກາມ) ທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວຍ່ອມເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ ຍ້ອນເຮັດມະນະສິການ ເຖິງທຳອັນເປັນບ່ອນຕັ້ງແຫ່ງກາມຣາຄະໃຫ້ຫຼາຍ ພະຍາບາດ (ຄວາມຄິດປອງຮ້າຍ) ທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວຍ່ອມເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ ຍ້ອນເຮັດມະນະສິການເຖິງທຳອັນເປັນບ່ອນຕັ້ງແຫ່ງພະຍາບາດໃຫ້ຫຼາຍ ຖີນະມິດທະທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ

ແລະທີ່ເກີດຂຶ້ນແລ້ວຍ່ອມເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ ຍ້ອນເຮັດມະນະສິການເຖິງທຳອັນເປັນບ່ອນຕັ້ງແຫ່ງຖີນະມິດທະໃຫ້ຫຼາຍ ອຸດທັດຈະກຸກກຸດຈະ (ຄວາມຟຸ້ງຊ່ານແລະຮ້ອນໃຈ) ທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວຍ່ອມເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ ຍ້ອນເຮັດມະນະສິການເຖິງທຳອັນເປັນບ່ອນຕັ້ງແຫ່ງອຸດທັດຈະກຸກກຸດຈະໃຫ້ຫຼາຍ ວິຈິກິດສາ (ຄວາມລັງເລສົງໄສ) ທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວຍ່ອມເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ ຍ້ອນເຮັດມະນະສິການເຖິງທຳອັນເປັນບ່ອນຕັ້ງແຫ່ງວິຈິກິດສາໃຫ້ຫຼາຍ

ພິກຂຸທັງຫຼາຍ ສະຕິສຳໂພດຊົງທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວຍ່ອມເຖິງຄວາມຈະເລີນເຕັມທີ່ ຍ້ອນເຮັດມະນະສິການເຖິງທຳອັນເປັນບ່ອນຕັ້ງແຫ່ງສະຕິສຳໂພດຊົງໃຫ້ຫຼາຍ ຯລຯ

ອຸເປກຂາສຳໂພດຊົງທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວຍ່ອມເຖິງຄວາມຈະເລີນເຕັມທີ່ ຍ້ອນເຮັດມະນະສິການເຖິງທຳອັນເປັນບ່ອນຕັ້ງແຫ່ງອຸເປກຂາສຳໂພດຊົງໃຫ້ຫຼາຍ

**ຖານິຍະສູດທີ ໓ ຈົບ**

# ໔. ອະໂຍນິໂສມະນະສິການສູດ

## ວ່າດ້ວຍການມະນະສິການໂດຍບໍ່ແຍບຄາຍ

[໔໐໕] ພິກຂຸທັງຫຼາຍ ເມື່ອບຸກຄົນມະນະສິການໂດຍບໍ່ແຍບຄາຍ ກາມສັນທະທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວຍ່ອມເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ ພະຍາບາດທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວຍ່ອມເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ

ຖີນະມິດທະທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ແລະ ທີ່ເກີດຂຶ້ນແລ້ວຍ່ອມເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ ອຸດທັດຈະກຸກກຸດຈະທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວຍ່ອມເປັນໄປເພື່ອຄວາມຈະເລີນ ໄພບູນຍິ່ງຂຶ້ນ ວິຈິກິດສາທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວຍ່ອມເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ

ສະຕິສຳໂພດຊົງທີ່ຍັງບໍ່ເກີດຍ່ອມບໍ່ເກີດຂຶ້ນ ແລະ ທີ່ເກີດຂຶ້ນແລ້ວຍ່ອມດັບໄປ

ຯລຯ

ອຸເປກຂາສຳໂພດຊົງທີ່ຍັງບໍ່ເກີດຍ່ອມບໍ່ເກີດຂຶ້ນ ແລະ ທີ່ເກີດຂຶ້ນແລ້ວຍ່ອມດັບໄປ

ພິກຂຸທັງຫຼາຍ ແຕ່ເມື່ອບຸກຄົນມະນະສິການໂດຍແຍບຄາຍ ກາມສັນທະທີ່ຍັງບໍ່ເກີດ ຍ່ອມບໍ່ເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວ ເຂົາກໍລະໄດ້ ພະຍາບາດທີ່ຍັງບໍ່ເກີດ ຍ່ອມບໍ່ເກີດຂຶ້ນ ແລະທີ່ເກີດ

ຂຶ້ນແລ້ວ ເຂົາກໍລະໄດ້ ຖີນະມິດທະທີ່ຍັງບໍ່ເກີດ ຍ່ອມບໍ່ເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວ ເຂົາກໍລະໄດ້ ອຸດທັດຈະກຸກກຸດຈະທີ່ຍັງບໍ່ເກີດ ຍ່ອມບໍ່ເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວ ເຂົາກໍລະໄດ້ ວິຈິກິດສາທີ່ຍັງບໍ່ເກີດ ຍ່ອມບໍ່ເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວ ເຂົາກໍລະໄດ້ ສະຕິສຳໂພດຊົງ ທີ່ຍັງບໍ່ເກີດ ຍ່ອມເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວຍ່ອມເຖິງຄວາມຈະເລີນເຕັມທີ່ ຯລຯ

ອຸເປກຂາສຳໂພດຊົງທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວຍ່ອມເຖິງຄວາມຈະເລີນເຕັມທີ່

**ອະໂຍນິໂສມະນະສິການສູດທີ ໔ ຈົບ**

# ໕. ອະປະຣິຫານິຍະສູດ

## ວ່າດ້ວຍອະປະຣິຫານິຍະທຳ

[໘໐໖] ພິກຂຸທັງຫຼາຍ ເຮົາຈັກສະແດງອະປະຣິຫານິຍະທຳ (ທຳອັນບໍ່ເປັນບ່ອນຕັ້ງແຫ່ງຄວາມເສື່ອມ) ໗ ປະການແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ອະປະຣິຫານິຍະທຳ ໗ ປະການ ເປັນແນວໃດ?
ຄື ໂພດຊົງ ໗ ປະການ
ໂພດຊົງ ໗ ປະການ ອັນໃດແດ່ ຄື

໑. ສະຕິສຳໂພດຊົງ ຯລຯ ໗. ອຸເປກຂາສຳໂພດຊົງ

ພິກຂຸທັງຫຼາຍ ອະປະຣິຫານິຍະທຳ ໗ ປະການນີ້ແລ

**ອປະຣິຫານິຍະສູດທີ ໕ ຈົບ**

# ໖. ຕັນຫັກຂະຍະສູດ

## ວ່າດ້ວຍມັກແລະປະຕິປະທາເພື່ອຄວາມສິ້ນຕັນຫາ

[໘໐໗] ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງຈະເລີນມັກ (ແລະ) ປະຕິປະທາທີ່ເປັນໄປເພື່ອຄວາມສິ້ນຕັນຫາ

ມັກ ເປັນແນວໃດ? ປະຕິປະທາທີ່ເປັນໄປເພື່ອຄວາມສິ້ນຕັນຫາ ເປັນແນວໃດ?
ຄື ໂພດຊົງ ໗ ປະການ

ໂພດຊົງ ໗ ປະການ ອັນໃດແດ່ ຄື

໑. ສະຕິສໍາໂພດຊົງ ຯລຯ ໗. ອຸເປກຂາສໍາໂພດຊົງ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະອຸທາຍີໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ໂພດຊົງ ໗ ປະການທີ່ບຸກຄົນຈະເລີນແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງເປັນໄປເພື່ອຄວາມສິ້ນຕັນຫາ

ອຸທາຍີ ພິກຂຸໃນທໍາວິໄນນີ້

໑. ຈະເລີນສະຕິສໍາໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ ອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີຄວາມບຽດບຽນ ເມື່ອທ່ານຈະເລີນສະຕິສໍາໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ ອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີຄວາມບຽດບຽນ ຍ່ອມລະຕັນຫາໄດ້ ຍ້ອນລະຕັນຫາໄດ້ຈຶ່ງລະກໍາໄດ້ ຍ້ອນລະກໍາໄດ້ ຈຶ່ງລະທຸກ໌ໄດ້

ຯລຯ

໗. ຈະເລີນອຸເປກຂາສໍາໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ ອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີຄວາມບຽດບຽນ ເມື່ອທ່ານຈະເລີນອຸເປກຂາສໍາໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ ອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີຄວາມບຽດບຽນ ຍ່ອມລະຕັນຫາໄດ້ ຍ້ອນລະຕັນຫາໄດ້ຈຶ່ງລະກໍາໄດ້ ຍ້ອນລະກໍາໄດ້ ຈຶ່ງລະທຸກໄດ້

ອຸທາຍີ ຍ້ອນສິ້ນຕັນຫາຈຶ່ງສິ້ນກໍາ ຍ້ອນສິ້ນກໍາຈຶ່ງສິ້ນທຸກ ດ້ວຍປະການດັ່ງນີ້

**ຕັນຫັກຂະຍະສູດທີ ໖ ຈົບ**

# ໗. ຕັນຫານິໂຣທະສູດ

## ວ່າດ້ວຍມັກແລະປະຕິປະທາເພື່ອຄວາມດັບຕັນຫາ

[໔໐໗] ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງຈະເລີນມັກ (ແລະ) ປະຕິປະທາທີ່ເປັນໄປເພື່ອຄວາມດັບຕັນຫາ

ມັກ ເປັນແນວໃດ? ປະຕິປະທາທີ່ເປັນໄປເພື່ອຄວາມດັບຕັນຫາ ເປັນແນວໃດ?
ຄື ໂພດຊົງ ໗ ປະການ
ໂພດຊົງ ໗ ປະການ ອັນໃດແດ່ ຄື

໑. ສະຕິສຳໂພດຊົງ ຯລຯ ໗. ອຸເປກຂາສຳໂພດຊົງ

ໂພດຊົງ ໗ ປະການທີ່ບຸກຄົນຈະເລີນແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງເປັນໄປເພື່ອຄວາມດັບຕັນຫາ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ
ຯລຯ
໗. ຈະເລີນອຸເປກຂາສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ໂພດຊົງ ໗ ປະການທີ່ບຸກຄົນຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ຈຶ່ງເປັນໄປເພື່ອຄວາມດັບຕັນຫາ

**ຕັນຫານິໂຣທະສູດທີ ໗ ຈົບ**

# ໘. ນິບເພທະພາຄິຍະສູດ

## ວ່າດ້ວຍທາງອັນເປັນສ່ວນແຫ່ງການທຳລາຍກິເລດ

[໔໐໙] ພິກຂຸທັງຫຼາຍ ເຮົາຈັກສະແດງທາງອັນເປັນສ່ວນແຫ່ງການທຳລາຍກິເລດແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທາງອັນເປັນສ່ວນແຫ່ງການທຳລາຍກິເລດ ເປັນແນວໃດ?
ຄື ໂພດຊົງ ໗ ປະການ
ໂພດຊົງ ໗ ປະການ ອັນໃດແດ່ ຄື

໑. ສະຕິສຳໂພດຊົງ ຯລຯ ໗. ອຸເປກຂາສຳໂພດຊົງ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະອຸທາຍີໄດ້ທູນຖາມພຣະຜູ້ມີພຣະ

ພາກເຈົ້າ ດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ໂພດຊົງ ໗ ປະການທີ່ບຸກຄົນຈະເລີນແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງເປັນໄປເພື່ອຄວາມຕັດສະຣູ້

ອຸທາຍີ ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ ອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີຄວາມບຽດບຽນ ທ່ານມີຈິດອັນສະຕິສຳ ໂພດຊົງໃຫ້ຈະເລີນແລ້ວ ແຫວກ ທຳລາຍກອງໂລພະທີ່ບໍ່ເຄີຍແຫວກອອກ ທຳລາຍໄດ້ ແຫວກ ທຳລາຍກອງໂທສະທີ່ບໍ່ເຄີຍແຫວກອອກ ທຳລາຍໄດ້ ແຫວກ ທຳລາຍກອງໂມຫະທີ່ບໍ່ເຄີຍແຫວກອອກ ທຳລາຍໄດ້

ຯລຯ

໗. ຈະເລີນອຸເປກຂາສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ ອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີຄວາມບຽດບຽນ ທ່ານມີຈິດອັນອຸເປກຂາສຳໂພດຊົງໃຫ້ຈະເລີນແລ້ວ ແຫວກ ທຳລາຍກອງໂລພະທີ່ບໍ່ເຄີຍແຫວກອອກ ທຳລາຍໄດ້ ແຫວກ ທຳລາຍກອງໂທສະທີ່ບໍ່ເຄີຍແຫວກອອກ ທຳລາຍໄດ້ ແຫວກ ທຳລາຍກອງໂມຫະທີ່ບໍ່ເຄີຍແຫວກອອກ ທຳລາຍໄດ້

ອຸທາຍີ ໂພດຊົງ ໗ ປະການທີ່ບຸກຄົນຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ຈຶ່ງເປັນໄປເພື່ອຄວາມທຳລາຍກິເລດ

**ນິບເພທະພາຄິຍະສູດທີ ໗ ຈົບ**

# ໘. ເອກະທຳມະສູດ

## ວ່າດ້ວຍທຳອັນເປັນເອກ

[໒໑໐] ພິກຂຸທັງຫຼາຍ ເຮົາບໍ່ພິຈາລະນາເຫັນທຳອື່ນແມ່ນແນວໜຶ່ງ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຈຶ່ງເປັນໄປເພື່ອລະທຳທີ່ເກື້ອກູນແກ່ສັງໂຍດຄືໂພດຊົງ ໗ ປະການນີ້ເລີຍ

ໂພດຊົງ ໗ ປະການ ອັນໃດແດ່ ຄື

໑. ສະຕິສຳໂພດຊົງ ຯລຯ ໗. ອຸເປກຂາສຳໂພດຊົງ

ໂພດຊົງ ໆ ປະການທີ່ບຸກຄົນຈະເລີນແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງເປັນໄປເພື່ອລະທຳທີ່ເກື້ອກູນແກ່ສັງໂຍດ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ຯລຯ

໗. ຈະເລີນອຸເປກຂາສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ໂພດຊົງ ໆ ປະການທີ່ບຸກຄົນຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ຈຶ່ງເປັນໄປເພື່ອລະທຳທີ່ເກື້ອກູນແກ່ສັງໂຍດ

ທຳທີ່ເກື້ອກູນແກ່ສັງໂຍດ ເປັນແນວໃດ?

ຄື ຈັກຂຸ (ຕາ) ເປັນທຳທີ່ເກື້ອກູນແກ່ສັງໂຍດ ເຄື່ອງມັດຄືສັງໂຍດ ຄວາມຖືໝັ້ນ ຍ່ອມເກີດຂຶ້ນທີ່ຈັກຂຸນີ້ ໂສຕະ (ຫູ) ຯລຯ ຄານະ (ດັງ) ຯລຯ ຊິວຫາ (ລີ້ນ) ເປັນທຳທີ່ເກື້ອກູນແກ່ສັງໂຍດ ເຄື່ອງມັດຄືສັງໂຍດ ຄວາມຖືໝັ້ນ ຍ່ອມເກີດຂຶ້ນທີ່ໂສຕະ ຯລຯ ຄານະ ຯລຯ ຊິວຫານີ້ ຯລຯ ມະໂນ (ໃຈ) ເປັນທຳທີ່ເກື້ອກູນແກ່ສັງໂຍດ ເຄື່ອງມັດຄືສັງໂຍດ ຄວາມຖືໝັ້ນ ຍ່ອມເກີດຂຶ້ນທີ່ມະໂນນີ້

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ເກື້ອກູນແກ່ສັງໂຍດ

**ເອກະທຳມະສູດທີ ៩ ຈົບ**

# ໑໐. ອຸທາຍິສູດ

## ວ່າດ້ວຍພຣະອຸທາຍິ

[໔໑໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນິຄົມຂອງຊາວສຸມພະຊີ່ ເສຕະກະແຄວ້ນສຸມພະ ຄັ້ງນັ້ນແລ ທ່ານພຣະອຸທາຍິເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ໜ້າອັດສະຈັນແທ້ ບໍ່ເຄີຍຜາກົດ ທີ່ຂ້າພຣະອົງມີຄວາມຮັກ ຄວາມເຄົາລົບ ຄວາມລະອາຍ ແລະຄວາມເກງກົວໃນພຣະຜູ້ມີພຣະພາກເຈົ້າຫຼາຍເຫຼືອເກີນ

ຍ້ອນແຕ່ກ່ອນ ຂ້າພຣະອົງເປັນຄະລືຫັດຢູ່ຄອງເຮືອນ ບໍ່ຄຸ້ນເຄີຍກັບພຣະທຳ ບໍ່ຄຸ້ນເຄີຍກັບພຣະສົງ ຂ້າພຣະອົງນັ້ນເມື່ອມີຄວາມຮັກ ຄວາມເຄົາລົບ ຄວາມລະອາຍ ແລະຄວາມເກງກົວໃນພຣະຜູ້ມີພຣະພາກເຈົ້າ ຈຶ່ງອອກຈາກເຮືອນບວດເປັນບັນພະຊິດ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳແກ່ຂ້າພຣະອົງວ່າ ຮູບເປັນດັ່ງນີ້ ຄວາມເກີດແຫ່ງຮູບເປັນດັ່ງນີ້ ຄວາມດັບແຫ່ງຮູບເປັນດັ່ງນີ້ ເວທະນາເປັນດັ່ງນີ້ ฯລฯ ສັນຍາເປັນດັ່ງນີ້ ฯລฯ ສັງຂານເປັນດັ່ງນີ້ ฯລฯ ວິນຍານເປັນດັ່ງນີ້ ຄວາມເກີດແຫ່ງວິນຍານເປັນດັ່ງນີ້ ຄວາມດັບແຫ່ງວິນຍານເປັນດັ່ງນີ້

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຢູ່ໃນເຮືອນວ່າງ ພິຈາລະນາຄວາມເກີດແລະຄວາມເສື່ອມແຫ່ງອຸປາທານຂັນ ໕ ປະການນີ້ ໄດ້ຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ນີ້ທຸກຂະສະມຸໄທ (ເຫດເກີດທຸກ) ນີ້ທຸກຂະນິໂຣທະ (ຄວາມດັບທຸກ) ນີ້ທຸກຂະນິໂຣທະຄາມີນີປະຕິປະທາ (ຂໍ້ປະຕິບັດທີ່ໃຫ້ເຖິງຄວາມດັບທຸກ) ຂ້າແດ່ ພຣະອົງຜູ້ຈະເລີນ ທຳ໌ທີ່ຂ້າພຣະອົງບັນລຸແລ້ວແລະມັກ໌ທີ່ຂ້າພຣະອົງໄດ້ແລ້ວ ທີ່ຂ້າພຣະອົງຈະເລີນເຮັດໃຫ້ຫຼາຍແລ້ວນັ້ນ ຈັກນຳຂ້າພຣະອົງຜູ້ຢູ່ເພື່ອຄວາມເປັນແນວນັ້ນໄປໂດຍປະການທີ່ຈັກຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ຂ້າແດ່ ພຣະອົງຜູ້ຈະເລີນ ສະຕິສຳໂພດຊົງທີ່ຂ້າພຣະອົງໄດ້ແລ້ວ ທີ່ຂ້າພຣະອົງຈະເລີນເຮັດໃຫ້ຫຼາຍແລ້ວນັ້ນ ຈັກນຳຂ້າພຣະອົງຜູ້ຢູ່ເພື່ອຄວາມເປັນແນວນັ້ນໄປໂດຍປະການທີ່ຈັກຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ฯລฯ ຂ້າແດ່ ພຣະອົງຜູ້ຈະເລີນ ອຸເປກຂາສຳໂພດຊົງທີ່ຂ້າພຣະອົງໄດ້ແລ້ວ ທີ່ຂ້າພຣະອົງຈະເລີນ ເຮັດໃຫ້ຫຼາຍແລ້ວນັ້ນ ຈັກນຳຂ້າພຣະອົງຜູ້ຢູ່ເພື່ອຄວາມເປັນແນວນັ້ນໄປໂດຍປະການທີ່ຈັກຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ຂ້າແດ່ ພຣະອົງຜູ້ຈະເລີນ ມັກທີ່ຂ້າພຣະອົງໄດ້ແລ້ວ ທີ່ຂ້າພຣະອົງຈະເລີນ ເຮັດໃຫ້ຫຼາຍແລ້ວນັ້ນ ຈັກນຳຂ້າພຣະອົງຜູ້ ຢູ່ເພື່ອຄວາມເປັນແນວນັ້ນໄປໂດຍປະການທີ່ຈັກຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ດີແລ້ວ ດີແລ້ວ ອຸທາຍີ ມັກທີ່ທ່ານໄດ້ແລ້ວ ທີ່ທ່ານຈະເລີນ ເຮັດໃຫ້ຫຼາຍແລ້ວນັ້ນ ຈັກນຳທ່ານຜູ້ຢູ່ເພື່ອຄວາມເປັນແນວນັ້ນໄປໂດຍປະການທີ່ຈັກຮູ້ແຈ້ງວ່າ ຊາດ ໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ອຸທາຍີສູດທີ ໑໐ ຈົບ**

**ອຸທາຍີວັກທີ ໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໒. ນີວະຣະນະວັກ

### ໝວດວ່າດ້ວຍນີວອນ

## ໑. ປະຖົມກຸສະລະສູດ

### ວ່າດ້ວຍທຳທີ່ເປັນກຸສົນ ສູດທີ 1

[໔໑໘] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ທຳທັງຫຼາຍທີ່ເປັນກຸສົນ ເປັນສ່ວນກຸສົນ ເປັນຝ່າຍກຸສົນ ທັງໝົດມີຄວາມບໍ່ຜະໝາດເປັນມູນ ລວມລົງໃນຄວາມບໍ່ຜະໝາດ ຄວາມບໍ່ຜະໝາດບັນດິດກ່າວວ່າເລີດກວ່າທຳເຫຼົ່ານັ້ນ ພິກຂຸຜູ້ບໍ່ຜະໝາດເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການ ໃຫ້ຫຼາຍ

ພິກຂຸຜູ້ບໍ່ຜະໝາດຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ຯລຯ

໗. ຈະເລີນອຸເປກຂາສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸຜູ້ບໍ່ຜະໝາດຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍ ແນວນີ້ແລ

**ປະຖົມກຸສະລະສູດທີ ໑ ຈົບ**

# ໘. ທຸຕິຍະກຸສະລະສູດ

## ວ່າດ້ວຍທຳທີ່ເປັນກຸສົນ ສູດທີ ໘

[໘໑໖] ພິກຂຸທັງຫຼາຍ ທຳທັງຫຼາຍທີ່ເປັນກຸສົນ ເປັນສ່ວນກຸສົນ ເປັນຝ່າຍກຸສົນ ທັງໝົດມີໂຍນິໂສມະນະສິການ (ການມະນະສິການໂດຍແຍບຄາຍ) ເປັນມູນ ລວມລົງໃນ ໂຍນິໂສມະນະສິການ ໂຍນິໂສມະນະສິການບັນດິດກ່າວວ່າເລີດກວ່າທຳເຫຼົ່ານັ້ນ ພິກຂຸຜູ້ເຖິງພ້ອມດ້ວຍໂຍນິໂສມະນະສິການ ເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍ

ພິກຂຸຜູ້ເຖິງພ້ອມດ້ວຍໂຍນິໂສມະນະສິການຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ຯລຯ

໗. ຈະເລີນອຸເປກຂາສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸຜູ້ເຖິງພ້ອມດ້ວຍໂຍນິໂສມະນະສິການ ຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍ ແນວນີ້ແລ

**ທຸຕິຍະກຸສະລະສູດທີ ໘ ຈົບ**

# ໙. ອຸປັກກິເລດສູດ

## ວ່າດ້ວຍຄວາມເສົ້າໝອງແຫ່ງຈິດ

[໘໑໘] ພິກຂຸທັງຫຼາຍ ສິ່ງເສົ້າໝອງແຫ່ງຄຳ ໕ ປະການນີ້ເປັນເຫດໃຫ້ຄຳ ເສົ້າໝອງ ບໍ່ອ່ອນ ໃຊ້ການບໍ່ໄດ້ ບໍ່ຜຸດຜ່ອງ ແຕກງ່າຍ ໃຊ້ງານບໍ່ໄດ້ດີ

ສິ່ງເສົ້າໝອງແຫ່ງຄຳ ໕ ປະການ ອັນໃດແດ່ ຄື

໑. ເຫຼັກ ເປັນສິ່ງເສົ້າໝອງແຫ່ງຄຳ ເປັນເຫດໃຫ້ຄຳເສົ້າໝອງ ບໍ່ອ່ອນ ໃຊ້ການບໍ່ໄດ້ ບໍ່ຜຸດຜ່ອງ ແຕກງ່າຍ ໃຊ້ງານບໍ່ໄດ້ດີ

໒. ໂລຫະ ເປັນສິ່ງເສົ້າໝອງແຫ່ງຄຳ ฯລฯ

໓. ດີບຸກ ເປັນສິ່ງເສົ້າໝອງແຫ່ງຄຳ ฯລฯ

໔. ຊືນ ເປັນສິ່ງເສົ້າໝອງແຫ່ງຄຳ ฯລฯ

໕. ເງິນ ເປັນສິ່ງເສົ້າໝອງແຫ່ງຄຳ ເປັນເຫດໃຫ້ຄຳເສົ້າໝອງ ບໍ່ອ່ອນ ໃຊ້ການບໍ່ໄດ້ ບໍ່ຜຸດຜ່ອງ ແຕກງ່າຍ ໃຊ້ງານບໍ່ໄດ້ດີ

ສິ່ງເສົ້າໝອງແຫ່ງຄຳ ໕ ປະການນີ້ເປັນເຫດໃຫ້ຄຳເສົ້າໝອງ ບໍ່ອ່ອນ ໃຊ້ການບໍ່ໄດ້ ບໍ່ຜຸດຜ່ອງ ແຕກງ່າຍ ໃຊ້ງານບໍ່ໄດ້ດີ

ຄວາມເສົ້າໝອງແຫ່ງຈິດ ໕ ປະການນີ້ກໍຄືກັນ ເປັນເຫດໃຫ້ຈິດເສົ້າໝອງ ບໍ່ອ່ອນ ບໍ່ເໝາະແກ່ການໃຊ້ງານ ບໍ່ຜຸດຜ່ອງ ຟຸ້ງຊ່ານ ບໍ່ຕັ້ງໝັ້ນດີເພື່ອຄວາມສິ້ນອາສະວະ

ຄວາມເສົ້າໝອງແຫ່ງຈິດ ໕ ປະການ ອັນໃດແດ່ ຄື

໑. ກາມສັນທະເປັນຄວາມເສົ້າໝອງແຫ່ງຈິດ ເປັນເຫດໃຫ້ຈິດເສົ້າໝອງ ບໍ່ອ່ອນ ບໍ່ເໝາະແກ່ການໃຊ້ງານ ບໍ່ຜຸດຜ່ອງ ຟຸ້ງຊ່ານ ບໍ່ຕັ້ງໝັ້ນດີ ເພື່ອຄວາມສິ້ນອາສະວະ

໒. ພະຍາບາດເປັນຄວາມເສົ້າໝອງແຫ່ງຈິດ ເປັນເຫດໃຫ້ຈິດເສົ້າໝອງ ບໍ່ອ່ອນ ບໍ່ເໝາະແກ່ການໃຊ້ງານ ບໍ່ຜຸດຜ່ອງ ຟຸ້ງຊ່ານ ບໍ່ຕັ້ງໝັ້ນດີ ເພື່ອຄວາມສິ້ນອາສະວະ ฯລฯ

ພິກຂຸທັງຫຼາຍ ຄວາມເສົ້າໝອງແຫ່ງຈິດ ໕ ປະການນີ້ ເປັນເຫດໃຫ້ຈິດເສົ້າໝອງ ບໍ່ອ່ອນ ບໍ່ເໝາະແກ່ການໃຊ້ງານ ບໍ່ຜຸດຜ່ອງ ຟຸ້ງຊ່ານ ບໍ່ຕັ້ງໝັ້ນດີ ເພື່ອຄວາມສິ້ນອາສະວະ

**ອຸປັກກິເລດສູດທີ ໓ ຈົບ**

# ໔. ອະນຸປັກກິເລສະສູດ

## ວ່າດ້ວຍທຳທີ່ບໍ່ເປັນຄວາມເສົ້າໝອງແຫ່ງຈິດ

[໒໑໕] ພິກຂຸທັງຫຼາຍ ໂພດຊົງ ໗ ປະການນີ້ບໍ່ເປັນນິວອນເຄື່ອງກາງກັ້ນ ບໍ່ເປັນຄວາມເສົ້າໝອງແຫ່ງຈິດ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງຜົນແຫ່ງວິດຊາ ແລະວິມຸດຕິ

ໂພດຊົງ ໗ ປະການ ອັນໃດແດ່ ຄື

໑. ສະຕິສຳໂພດຊົງບໍ່ເປັນນິວອນເຄື່ອງກາງກັ້ນ ບໍ່ເປັນຄວາມເສົ້າໝອງ ແຫ່ງຈິດ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງຜົນແຫ່ງວິດຊາແລະວິມຸດຕິ ຯລຯ

໗. ອຸເປກຂາສຳໂພດຊົງບໍ່ເປັນນິວອນເຄື່ອງກາງກັ້ນ ບໍ່ເປັນຄວາມເສົ້າໝອງແຫ່ງຈິດທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງຜົນແຫ່ງວິດຊາແລະວິມຸດຕິ

ພິກຂຸທັງຫຼາຍ ໂພດຊົງ ໗ ປະການນີ້ ບໍ່ເປັນນິວອນເຄື່ອງກາງກັ້ນ ບໍ່ເປັນຄວາມເສົ້າໝອງແຫ່ງຈິດ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງຜົນແຫ່ງວິດຊາ ແລະວິມຸດຕິ

**ອະນຸປັກກິເລສະສູດທີ ໔ ຈົບ**

# ໕. ອະໂຍນິໂສມະນະສິກາຣະສູດ

## ວ່າດ້ວຍການມະນະສິການໂດຍບໍ່ແຍບຄາຍ

[໔໑໖] ພິກຂຸທັງຫຼາຍ ເມື່ອພິກຂຸມະນະສິການໂດຍບໍ່ແຍບຄາຍ ກາມສັນທະທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວຍ່ອມເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ ພະຍາບາດທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວຍ່ອມເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ

ຖີນະມິດທະທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວຍ່ອມເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ ອຸດທັດຈະກຸກກຸດຈະທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວຍ່ອມເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ ວິຈິກິດສາທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວຍ່ອມເປັນໄປເພື່ອຄວາມຈະເລີນໄພບູນຍິ່ງຂຶ້ນ

**ອະໂຍນິໂສມະນະສິກາຣະສູດທີ ໕ ຈົບ**

# ໖. ໂຍນິໂສມະນະສິກາຣະສູດ

## ວ່າດ້ວຍການມະນະສິການໂດຍແຍບຄາຍ

[໔໑໗] ພິກຂຸທັງຫຼາຍ ອັນໜຶ່ງ ເມື່ອພິກຂຸມະນະສິການໂດຍແຍບຄາຍ ສະຕິສຳໂພດຊົງທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວຍ່ອມເຖິງຄວາມຈະເລີນເຕັມທີ່ ຯລຯ

ອຸເປກຂາສຳໂພດຊົງທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ແລະທີ່ເກີດຂຶ້ນແລ້ວຍ່ອມເຖິງຄວາມຈະເລີນເຕັມທີ່

**ໂຍນິໂສມະນະສິກາຣະສູດທີ ໖ ຈົບ**

# ໗. ອຸດທິສູດ

## ວ່າດ້ວຍທຳທີ່ເປັນໄປເພື່ອຄວາມຈະເລີນ

[໔໑໗] ພິກຂຸທັງຫຼາຍ ໂພດຊົງ ໗ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມຈະເລີນ ບໍ່ເສື່ອມ

ໂພດຊົງ ໗ ປະການ ອັນໃດແດ່ ຄື

໑. ສະຕິສຳໂພດຊົງ ෴ ໗. ອຸເປກຂາສຳໂພດຊົງ

ພິກຂຸທັງຫຼາຍ ໂພດຊົງ ໗ ປະການນີ້ແລທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມຈະເລີນ ບໍ່ເສື່ອມ

**ອຸດທິສູດທີ ໗ ຈົບ**

# ໘. ອາວະຣະນະນີວະຣະນະສູດ

## ວ່າດ້ວຍນິວອນເຄື່ອງກາງກັ້ນ

[໔໑໘] ພິກຂຸທັງຫຼາຍ ນິວອນເຄື່ອງກາງກັ້ນ ໕ ປະການນີ້ ເປັນຄວາມເສົ້າໝອງແຫ່ງຈິດ ບັ່ນທອນກຳລັງປັນຍາ

ນິວອນເຄື່ອງກາງກັ້ນ ໕ ປະການ ອັນໃດແດ່ ຄື

໑. ກາມສັນທະເປັນນິວອນເຄື່ອງກາງກັ້ນ ເປັນຄວາມເສົ້າໝອງແຫ່ງຈິດ ບັ່ນທອນກຳລັງປັນຍາ
໒. ພະຍາບາດເປັນນິວອນເຄື່ອງກາງກັ້ນ ເປັນຄວາມເສົ້າໝອງແຫ່ງຈິດ ບັ່ນທອນກຳລັງປັນຍາ
໓. ຖີນະມິດທະເປັນນິວອນເຄື່ອງກາງກັ້ນ ເປັນຄວາມເສົ້າໝອງແຫ່ງຈິດ ບັ່ນທອນກຳລັງປັນຍາ

໔. ອຸດທັດຈະກຸກກຸດຈະເປັນນິວອນເຄື່ອງກາງກັ້ນ ເປັນຄວາມເສົ້າໝອງແຫ່ງຈິດ ບັ່ນທອນກຳລັງປັນຍາ
໕. ວິຈິກິດສາເປັນນິວອນເຄື່ອງກາງກັ້ນ ເປັນຄວາມເສົ້າໝອງແຫ່ງຈິດ ບັ່ນທອນກຳລັງປັນຍາ

ນິວອນເຄື່ອງກາງກັ້ນ ໕ ປະການນີ້ ເປັນຄວາມເສົ້າໝອງແຫ່ງຈິດ ບັ່ນທອນກຳລັງປັນຍາ

ພິກຂຸທັງຫຼາຍ ໂພດຊົງ ໗ ປະການນີ້ບໍ່ເປັນນິວອນເຄື່ອງກາງກັ້ນ ບໍ່ເປັນຄວາມເສົ້າໝອງແຫ່ງຈິດ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງຜົນແຫ່ງວິດຊາແລະວິມຸດຕິ

ໂພດຊົງ ໗ ປະການ ອັນໃດແດ່ ຄື

໑. ສະຕິສຳໂພດຊົງບໍ່ເປັນນິວອນເຄື່ອງກາງກັ້ນ ບໍ່ເປັນຄວາມເສົ້າໝອງ ແຫ່ງຈິດທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງຜົນແຫ່ງວິດຊາແລະວິມຸດຕິ

ຯລຯ

໗. ອຸເປກຂາສຳໂພດຊົງບໍ່ເປັນນິວອນເຄື່ອງກາງກັ້ນ ບໍ່ເປັນຄວາມເສົ້າໝອງແຫ່ງຈິດທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງຜົນແຫ່ງວິດຊາແລະວິມຸດຕິ

ໂພດຊົງ ໗ ປະການນີ້ບໍ່ເປັນນິວອນເຄື່ອງກາງກັ້ນ ບໍ່ເປັນຄວາມເສົ້າໝອງແຫ່ງຈິດ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງຜົນແຫ່ງວິດຊາ ແລະວິມຸດຕິ

ພິກຂຸທັງຫຼາຍ ສະໄໝໃດ ອະຣິຍະສາວົກຕັ້ງໃຈ ໃຝ່ໃຈ ສັງລວມໃຈ ງ່ຽງໂສດສະດັບທຳ ສະໄໝນັ້ນ ນິວອນ ໕ ປະການຍ່ອມບໍ່ມີແກ່ທ່ານ ໂພດຊົງ ໗ ປະການຍ່ອມເຖິງຄວາມຈະເລີນເຕັມທີ່

ນິວອນ ໕ ປະການຍ່ອມບໍ່ມີແກ່ທ່ານໃນສະໄໝນັ້ນ ອັນໃດແດ່ ຄື

໑. ກາມສັນທະນິວອນຍ່ອມບໍ່ມີໃນສະໄໝນັ້ນ
໒. ພະຍາບາດນິວອນຍ່ອມບໍ່ມີໃນສະໄໝນັ້ນ
໓. ຖີນະມິດທະນິວອນຍ່ອມບໍ່ມີໃນສະໄໝນັ້ນ
໔. ອຸດທັດຈະກຸກກຸດຈະນິວອນຍ່ອມບໍ່ມີໃນສະໄໝນັ້ນ
໕. ວິຈິກິດສານິວອນຍ່ອມບໍ່ມີໃນສະໄໝນັ້ນ

ນິວອນ ໕ ປະການຍ່ອມບໍ່ມີແກ່ທ່ານໃນສະໄໝນັ້ນ
ໂພດຊົງ ໗ ປະການຍ່ອມເຖິງຄວາມຈະເລີນເຕັມທີ່ໃນສະໄໝນັ້ນ ອັນໃດແດ່ ຄື

໑. ສະຕິສຳໂພດຊົງຍ່ອມເຖິງຄວາມຈະເລີນເຕັມທີ່ໃນສະໄໝນັ້ນ
ຯລຯ
໗. ອຸເປກຂາສຳໂພດຊົງຍ່ອມເຖິງຄວາມຈະເລີນເຕັມທີ່ໃນສະໄໝນັ້ນ

ໂພດຊົງ ໗ ປະການນີ້ຍ່ອມເຖິງຄວາມຈະເລີນເຕັມທີ່ໃນສະໄໝນັ້ນ

ພິກຂຸທັງຫຼາຍ ສະໄໝໃດ ອະຣິຍະສາວົກຕັ້ງໃຈ ໃຝ່ໃຈ ສັງລວມໃຈ ງ່ຽງໂສດສະດັບທຳ ສະໄໝນັ້ນ ນິວອນ ໕ ປະການຍ່ອມບໍ່ມີແກ່ທ່ານ ໂພດຊົງ ໗ ປະການນີ້ຍ່ອມເຖິງ ຄວາມຈະເລີນເຕັມທີ່

**ອາວະຣະນະນີວະຣະນະສູດທີ ໗ ຈົບ**

# ໘. ຣຸກຂະສູດ

## ວ່າດ້ວຍອຸປະມາດ້ວຍຕົ້ນໄມ້

[໔໘໐] ພິກຂຸທັງຫຼາຍ ຕົ້ນໄມ້ໃຫຍ່ທີ່ມີກາຝາກກໍໃຫຍ່ຂຶ້ນເກາະປົກຄຸມເປັນເຫດໃຫ້ລົ້ມລະເນລະນາດ ຕົ້ນໄມ້ໃຫຍ່ເຫຼົ່ານັ້ນ ທີ່ມີກາຝາກກໍໃຫຍ່ຂຶ້ນເກາະປົກຄຸມເປັນເຫດໃຫ້ລົ້ມລະເນລະນາດ ໄດ້ແກ່ຕົ້ນອັນໃດແດ່ ຄື

ຕົ້ນໂພ ຕົ້ນໄຮ ຕົ້ນລຽບ ຕົ້ນໝາກເດື່ອ ຕົ້ນກັດສະກະ ຕົ້ນໝາກຂວິດ ຕົ້ນໄມ້ໃຫຍ່ເຫຼົ່ານີ້ ທີ່ມີກາຝາກກໍໃຫຍ່ຂຶ້ນເກາະປົກຄຸມເປັນເຫດໃຫ້ລົ້ມຫັກລົງ ສັນໃດ ກຸນລະບຸດລາງຄົນໃນໂລກນີ້ ກໍຄືກັນສັນນັ້ນ ລະກາມເຊັ່ນໃດ ອອກຈາກເຮືອນບວດເປັນບັນພະຊິດ ເຂົາຍ່ອມຖືກກາມເຊັ່ນນັ້ນ ຫຼື ສິ່ງທີ່ຊົ່ວກວ່ານັ້ນ ເຮັດໃຫ້ຫັກລົ້ມລົງ

ພິກຂຸທັງຫຼາຍ ນິວອນເຄື່ອງກາງກັ້ນ ໕ ປະການນີ້ຄອບງຳຈິດແລ້ວ ບັ່ນທອນກຳລັງປັນຍາ ນິວອນເຄື່ອງກາງກັ້ນ ໕ ປະການ ອັນໃດແດ່ ຄື

໑. ກາມສັນທະເປັນນິວອນເຄື່ອງກາງກັ້ນ ຄອບງຳຈິດແລ້ວ ທອນກຳລັງ ປັນຍາ
໒. ພະຍາບາດເປັນນິວອນເຄື່ອງກາງກັ້ນ ຄອບງຳຈິດແລ້ວ ທອນກຳລັງ ປັນຍາ
໓. ຖີນະມິດທະເປັນນິວອນເຄື່ອງກາງກັ້ນ ຄອບງຳຈິດແລ້ວ ທອນກຳລັງ ປັນຍາ
໔. ອຸດທັດຈະກຸກກຸດຈະເປັນນິວອນເຄື່ອງກາງກັ້ນ ຄອບງຳຈິດແລ້ວ ບັ່ນທອນກຳລັງປັນຍາ

໕. ວິຈິກິດສາເປັນນິວອນເຄື່ອງກາງກັ້ນ ຄອບງຳຈິດແລ້ວ ທອນກຳລັງ ປັນຍາ

ນິວອນເຄື່ອງກາງກັ້ນ ໕ ປະການນີ້ຄອບງຳຈິດແລ້ວ ບັ່ນທອນກຳລັງປັນຍາ

ພິກຂຸທັງຫຼາຍ ໂພດຊົງ ໗ ປະການນີ້ບໍ່ເປັນນິວອນເຄື່ອງກາງກັ້ນ ບໍ່ຄອບງຳຈິດ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງຜົນແຫ່ງວິດຊາ ແລະວິມຸດຕິ

ໂພດຊົງ ໗ ປະການ ອັນໃດແດ່ ຄື

໑. ສະຕິສຳໂພດຊົງບໍ່ເປັນນິວອນເຄື່ອງກາງກັ້ນ ບໍ່ຄອບງຳຈິດ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງຜົນແຫ່ງວິດຊາແລະວິມຸດຕິ

ຯລຯ

໗. ອຸເປກຂາສຳໂພດຊົງບໍ່ເປັນນິວອນເຄື່ອງກາງກັ້ນ ບໍ່ຄອບງຳຈິດ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງຜົນແຫ່ງວິດຊາແລະວິມຸດຕິ

ພິກຂຸທັງຫຼາຍ ໂພດຊົງ ໗ ປະການນີ້ບໍ່ເປັນນິວອນເຄື່ອງກາງກັ້ນ ບໍ່ຄອບງຳຈິດ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງຜົນແຫ່ງວິດຊາແລະວິມຸດຕິ

**ຣຸກຂະສູດທີ ໙ ຈົບ**

# ໑໐. ນີວະຣະນະສູດ

## ວ່າດ້ວຍນິວອນ

[໔໔໑] ພິກຂຸທັງຫຼາຍ ນິວອນ ໕ ປະການນີ້ເຮັດໃຫ້ເປັນຄືຄົນຕາບອດ ເປັນຄືຄົນບໍ່ມີດວງຕາ ເຮັດໃຫ້ບໍ່ຮູ້ອັນໃດ ມີປັນຍາມືດບອດ ເປັນໄປໃນຝ່າຍຄວາມຄັບແຄ້ນ ບໍ່ເປັນໄປເພື່ອນິບພານ

ນິວອນ ໕ ປະການ ອັນໃດແດ່ ຄື

໑. ກາມສັນທະນິວອນເຮັດໃຫ້ເປັນຄືຄົນຕາບອດ ເປັນຄືຄົນບໍ່ມີດວງຕາ ເຮັດໃຫ້ບໍ່ຮູ້ອັນໃດ ມີປັນຍາມືດບອດ ເປັນໄປໃນຝ່າຍຄວາມຄັບແຄ້ນ ບໍ່ເປັນໄປເພື່ອນິບພານ
໒. ພະຍາບາດນິວອນເຮັດໃຫ້ເປັນຄືຄົນຕາບອດ ຯລຯ

໓. ຖີນະມິດທະນິວອນເຮັດໃຫ້ເປັນຄືຄົນຕາບອດ ຯລຯ
໔. ອຸດທັດຈະກຸກກຸດຈະນິວອນເຮັດໃຫ້ເປັນຄືຄົນຕາບອດ ຯລຯ
໕. ວິຈິກິດສານິວອນເຮັດໃຫ້ເປັນຄືຄົນຕາບອດ ເປັນຄືຄົນບໍ່ມີດວງຕາ ເຮັດໃຫ້ບໍ່ຮູ້ອັນໃດ ມີປັນຍາມືດບອດ ເປັນໄປໃນຝ່າຍຄວາມຄັບແຄ້ນ ບໍ່ເປັນໄປເພື່ອນິບພານ

ນິວອນ ໕ ປະການນີ້

ພິກຂຸທັງຫຼາຍ ໂພດຊົງ ໗ ປະການນີ້ ເຮັດໃຫ້ເປັນຄືຄົນມີດວງຕາ ເຮັດໃຫ້ຮູ້ ຈະເລີນປັນຍາ ບໍ່ເປັນໄປໃນຝ່າຍຄວາມຄັບແຄ້ນ ເປັນໄປເພື່ອນິບພານ

ໂພດຊົງ ໗ ປະການ ອັນໃດແດ່ ຄື

໑. ສະຕິສຳໂພດຊົງເຮັດໃຫ້ເປັນຄືຄົນມີດວງຕາ ເຮັດໃຫ້ຮູ້ ຈະເລີນປັນຍາ ບໍ່ເປັນໄປໃນຝ່າຍຄວາມຄັບແຄ້ນ ເປັນໄປເພື່ອນິບພານ

ຯລຯ

໗. ອຸເປກຂາສຳໂພດຊົງເຮັດໃຫ້ເປັນຄືຄົນມີດວງຕາ ເຮັດໃຫ້ຮູ້ ຈະເລີນ ປັນຍາ ບໍ່ເປັນໄປໃນຝ່າຍຄວາມຄັບແຄ້ນ ເປັນໄປເພື່ອນິບພານ

ພິກຂຸທັງຫຼາຍ ໂພດຊົງ ໗ ປະການນີ້ເຮັດໃຫ້ເປັນຄືຄົນມີດວງຕາ ເຮັດໃຫ້ຮູ້ ຈະເລີນປັນຍາ ບໍ່ເປັນໄປໃນຝ່າຍຄວາມຄັບແຄ້ນ ເປັນໄປເພື່ອນິບພານ

**ນີວະຣະນະສູດທີ ໑໐ ຈົບ**

**ນີວະຣະນະວັກທີ ໔ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື

# ໕. ຈັກກະວັດຕິວັກ

## ໝວດວ່າດ້ວຍພຣະເຈົ້າຈັກກະພັດ

# ໑. ວິທາສູດ

## ວ່າດ້ວຍມານະ

[໔໔໔] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສະມະນະຫຼືພາມທັງປວງທີ່ລະມານະ (ຄວາມຖືໂຕ) ໓ ປະການໃນອະດີດໄດ້ກໍຍ້ອນໂພດຊົງ ໗ ປະການທີ່ສະມະນະຫຼືພາມທັງປວງຈະເລີນ ເຮັດໃຫ້ຫຼາຍແລ້ວ ສະມະນະຫຼືພາມທັງປວງທີ່ຈັກລະມານະ ໓ ປະການໃນອະນາຄົດໄດ້ກໍຍ້ອນໂພດຊົງ ໗ ປະການທີ່ສະມະນະຫຼືພາມທັງປວງຈະເລີນ ເຮັດໃຫ້ຫຼາຍແລ້ວ ສະມະນະຫຼືພາມທັງປວງທີ່ລະມານະ ໓ ປະການໄດ້ໃນປັດຈຸບັນກໍຍ້ອນໂພດຊົງ ໗ ປະການທີ່ສະມະນະຫຼືພາມທັງປວງຈະເລີນ ເຮັດໃຫ້ຫຼາຍແລ້ວ

ໂພດຊົງ ໗ ປະການ ອັນໃດແດ່ ຄື

໑. ສະຕິສໍາໂພດຊົງ ຯລຯ ໗. ອຸເປກຂາສໍາໂພດຊົງ

ພິກຂຸທັງຫຼາຍ ສະມະນະຫຼືພາມທັງປວງທີ່ລະມານະ ໓ ປະການໃນອະດີດໄດ້ ຯລຯ ຈັກລະ ຯລຯ ລະມານະ ໓ ປະການໃນປັດຈຸບັນໄດ້ກໍຍ້ອນໂພດຊົງ ໗ ປະການນີ້ ທີ່ສະມະນະຫຼືພາມທັງປວງຈະເລີນ ເຮັດໃຫ້ຫຼາຍແລ້ວ

**ວິທາສູດທີ ໑ ຈົບ**

# ໒. ຈັກກະວັດຕິສູດ

## ວ່າດ້ວຍພຣະເຈົ້າຈັກກະພັດ

[໔໔໓] ພິກຂຸທັງຫຼາຍ ຍ້ອນພຣະເຈົ້າຈັກກະພັດຜາກົດ ແກ້ວ ໗ ປະການຈຶ່ງຜາກົດ

ແກ້ວ ໗ ປະການ ອັນໃດແດ່ ຄື

| | |
|---|---|
| ๑. ຈັກແກ້ວ | ๔. ຊ້າງແກ້ວ |
| ๒. ມ້າແກ້ວ | ๔. ມະນີແກ້ວ |
| ๕. ນາງແກ້ວ | ๗. ຄະຫະບໍດີແກ້ວ |

## ๗. ປະຣິນາຍົກແກ້ວ

ຍ້ອນພຣະເຈົ້າຈັກກະພັດຜາກົດ ແກ້ວ ๗ ປະການນີ້ຈຶ່ງຜາກົດ

ຍ້ອນຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າຜາກົດ ແກ້ວຄືໂພດຊົງ ๗ ປະການຈຶ່ງຜາກົດ

ແກ້ວຄືໂພດຊົງ ๗ ປະການ ອັນໃດແດ່ ຄື

๑. ແກ້ວຄືສະຕິສຳໂພດຊົງ ฯลฯ ๗. ແກ້ວຄືອຸເປກຂາສຳໂພດຊົງ

ພິກຂຸທັງຫຼາຍ ຍ້ອນຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າຜາກົດ ແກ້ວຄື

ໂພດຊົງ ๗ ປະການນີ້ຈຶ່ງຜາກົດ

**ຈັກກະວັດຕິສູດທີ ๘ ຈົບ**

# ๒. ມາຣະສູດ

## ວ່າດ້ວຍມານ

[๘๘๔] ພິກຂຸທັງຫຼາຍ ເຮົາຈັກສະແດງທາງສຳລັບຍ່ຳຍີມານແລະກອງທັບມານແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ທາງສຳລັບຍ່ຳຍີມານແລະກອງທັບມານ ເປັນແນວໃດ?

ຄື ໂພດຊົງ ๗ ປະການ

ໂພດຊົງ ๗ ປະການ ອັນໃດແດ່ ຄື

๑. ສະຕິສຳໂພດຊົງ ฯลฯ ๗. ອຸເປກຂາສຳໂພດຊົງ

ພິກຂຸທັງຫຼາຍ ນີ້ແລ ຄືທາງສຳລັບຍ່ຳຍີມານແລະກອງທັບມານ

**ມາຣະສູດທີ ๒ ຈົບ**

# ໔. ທຸບປັນຍະສູດ

## ວ່າດ້ວຍເຫດໃຫ້ຄົນມີປັນຍາຊາມ

[໘໘໕] ຄັ້ງນັ້ນ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນພຣະອົງ ຕັດວ່າ ມີປັນຍາຊາມ ເປັນຄົນປຶກ ມີປັນຍາຊາມ ເປັນຄົນປຶກ ດ້ວຍເຫດພຽງທໍ່ໃດນໍ ພຣະອົງຈຶ່ງຕັດວ່າ ມີປັນຍາຊາມ ເປັນຄົນປຶກ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ເຮົາກ່າວວ່າ ມີປັນຍາຊາມ ເປັນຄົນປຶກ ກໍຍ້ອນໂພດຊົງ ໗ ປະການທີ່ບຸກຄົນນັ້ນ ບໍ່ຈະເລີນ ບໍ່ເຮັດໃຫ້ຫຼາຍແລ້ວ

ໂພດຊົງ ໗ ປະການ ອັນໃດແດ່ ຄື

໑. ສະຕິສຳໂພດຊົງ ຯລຯ ໗. ອຸເປກຂາສຳໂພດຊົງ

ພິກຂຸ ເຮົາກ່າວວ່າ ມີປັນຍາຊາມ ເປັນຄົນປຶກ ກໍຍ້ອນໂພດຊົງ ໗ ປະການນີ້ ອັນບຸກຄົນນັ້ນບໍ່ຈະເລີນ ບໍ່ເຮັດໃຫ້ຫຼາຍແລ້ວ

**ທຸບປັນຍະສູດທີ ໔ ຈົບ**

# ໕. ປັນຍະວັນຕະສູດ

## ວ່າດ້ວຍເຫດໃຫ້ຄົນມີປັນຍາ

[໘໘໖] ພິກຂຸທູນຖາມວ່າ ຂ້າແດ່ພຣະອົງຜູ້ຈະເລີນ ພຣະອົງຕັດວ່າ ມີປັນຍາ ບໍ່ເປັນຄົນປຶກ ມີປັນຍາ ບໍ່ເປັນຄົນປຶກ ດ້ວຍເຫດພຽງທໍ່ໃດນໍ ພຣະອົງຈຶ່ງຕັດວ່າ ມີປັນຍາ ບໍ່ເປັນຄົນປຶກ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ເຮົາກ່າວວ່າ ມີປັນຍາ ບໍ່ເປັນຄົນປຶກ ກໍຍ້ອນໂພດຊົງ ໗ ປະການທີ່ບຸກຄົນນັ້ນຈະເລີນ ເຮັດໃຫ້ຫຼາຍແລ້ວ

ໂພດຊົງ ໗ ປະການ ອັນໃດແດ່ ຄື

໑. ສະຕິສຳໂພດຊົງ ຯລຯ ໗. ອຸເປກຂາສຳໂພດຊົງ

ພິກຂຸ ເຮົາກ່າວວ່າ ມີປັນຍາ ບໍ່ເປັນຄົນປືກ ກໍຍ້ອນໂພດຊົງ ໗ ປະການນີ້ ທີ່ບຸກຄົນນັ້ນຈະເລີນ ເຮັດໃຫ້ຫຼາຍແລ້ວ

**ປັນຍະວັນຕະສູດທີ ໕ ຈົບ**

# ໖. ທະລິດທະສູດ

## ວ່າດ້ວຍເຫດໃຫ້ເປັນຄົນຈົນ

[໔໔໗] ເລື້ອງເກີດຂື້ນທີ່ເມືອງສາວັດຖີ

ຂ້າແດ່ພຣະອົງຜູ້ຈະເລີນ ພຣະອົງຕັດວ່າ ຄົນຈົນ ຄົນຈົນ ດ້ວຍເຫດພຽງທໍ່ໃດນໍ ພຣະອົງຈຶ່ງ ຕັດວ່າ ຄົນຈົນ ຂ້ານ້ອຍ

ພິກຂຸ ເຮົາກ່າວວ່າ ຄົນຈົນ ກໍຍ້ອນໂພດຊົງ ໗ ປະການທີ່ບຸກຄົນນັ້ນບໍ່ຈະເລີນ ບໍ່ເຮັດໃຫ້ຫຼາຍແລ້ວ

ໂພດຊົງ ໗ ປະການ ອັນໃດແດ່ ຄື

໑. ສະຕິສໍາໂພດຊົງ ຯລຯ ໗. ອຸເປກຂາສໍາໂພດຊົງ

ພິກຂຸ ເຮົາກ່າວວ່າ ຄົນຈົນ ກໍຍ້ອນໂພດຊົງ ໗ ປະການນີ້ທີ່ບຸກຄົນນັ້ນບໍ່ຈະເລີນ ບໍ່ເຮັດໃຫ້ຫຼາຍແລ້ວ

**ທະລິດທະສູດທີ ໖ ຈົບ**

# ໗. ອະທະລິດທະສູດ

## ວ່າດ້ວຍເຫດໃຫ້ເປັນຄົນບໍ່ຈົນ

[໔໔໘] ເລື້ອງເກີດຂື້ນທີ່ເມືອງສາວັດຖີ

ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງຕັດວ່າ ຄົນບໍ່ຈົນ ຄົນບໍ່ຈົນ ດ້ວຍເຫດພຽງທໍ່ໃດນໍ ພຣະອົງຈຶ່ງຕັດວ່າ ຄົນບໍ່ຈົນ ຂ້ານ້ອຍ

ພິກຂຸ ເຮົາກ່າວວ່າ ຄົນບໍ່ຈົນ ກໍຍ້ອນໂພດຊົງ ໗ ປະການທີ່ບຸກຄົນນັ້ນຈະເລີນ ເຮັດໃຫ້ຫຼາຍແລ້ວ

ໂພດຊົງ ໗ ປະການ ອັນໃດແດ່ ຄື

໑. ສະຕິສຳໂພດຊົງ ຯລຯ ໗. ອຸເປກຂາສຳໂພດຊົງ

ພິກຂຸ ເຮົາກ່າວວ່າ ຄົນບໍ່ຈົບ ກໍຍ້ອນໂພດຊົງ ໗ ປະການນີ້ທີ່ບຸກຄົນນັ້ນຈະເລີນ ເຮັດໃຫ້ຫຼາຍແລ້ວ

**ອະທະລິດທະສູດທີ ໗ ຈົບ**

## ໘. ອາທິດຈະສູດ

### ວ່າດ້ວຍອຸປະມາດ້ວຍດວງອາທິດ

[໔໔໙] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເມື່ອດວງອາທິດກຳລັງຈະອຸໄທ ຍ່ອມມີແສງອາລຸນຂຶ້ນມາກ່ອນ ເປັນບຸບພະນິມິດ ສັນໃດ ກັນລະຍານະມິດຕະຕາ (ຄວາມເປັນຜູ້ມີມິດດີ) ກໍເປັນໂຕນຳ ເປັນບຸບພະນິມິດເພື່ອຄວາມເກີດຂຶ້ນແຫ່ງໂພດຊົງ ໗ ປະການ ສັນນັ້ນ

ພິກຂຸຜູ້ມີກັນລະຍານະມິດ (ມິດດີ) ເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍ

ພິກຂຸຜູ້ມີກັນລະຍານະມິດຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງອັນອາໄສວິເວກ
   ຯລຯ
໗. ຈະເລີນອຸເປກຂາສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸຜູ້ມີກັນລະຍານະມິດຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍ ແນວນີ້ແລ

**ອາທິດຈະສູດທີ ໘ ຈົບ**

# ໙. ອັດຊັດຕິກັງຄະສູດ

## ວ່າດ້ວຍເຫດພາຍໃນໃຫ້ໂພດຊົງເກີດ

[໔໘໐] ພິກຂຸທັງຫຼາຍ ເຮົາບໍ່ພິຈາລະນາເຫັນເຫດອື່ນແມ່ນແນວໜຶ່ງທີ່ເປັນເຫດພາຍໃນໃຫ້ໂພດຊົງ ໗ ປະການເກີດຂຶ້ນຄືໂຍນິໂສມະນະສິການ

ພິກຂຸຜູ້ເຖິງພ້ອມດ້ວຍໂຍນິໂສມະນະສິການເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍ

ພິກຂຸຜູ້ເຖິງພ້ອມດ້ວຍໂຍນິໂສມະນະສິການຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງອັນອາໄສວິເວກ

ຯລຯ

໗. ຈະເລີນອຸເປກຂາສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸຜູ້ເຖິງພ້ອມດ້ວຍໂຍນິໂສມະນະສິການ ຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍ ແນວນີ້ແລ

**ອັດຊັດຕິກັງຄະສູດທີ ໙ ຈົບ**

# ໑໐. ພາຫິຣັງຄະສູດ

## ວ່າດ້ວຍເຫດພາຍນອກໃຫ້ໂພດຊົງເກີດ

[໔໘໑] ພິກຂຸທັງຫຼາຍ ເຮົາບໍ່ພິຈາລະນາເຫັນເຫດອື່ນແມ່ນແນວໜຶ່ງທີ່ເປັນເຫດພາຍນອກໃຫ້ໂພດຊົງ ໗ ປະການເກີດຂຶ້ນຄືກັນລະຍານະມິດຕະຕາ

ພິກຂຸຜູ້ມີກັນລະຍານະມິດ ເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍ

ພິກຂຸຜູ້ມີກັນລະຍານະມິດຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການ ໃຫ້ຫຼາຍ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງອັນອາໄສວິເວກ
ຯລຯ
໗. ຈະເລີນອຸເປກຂາສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸຜູ້ມີກັນລະຍານະມິດຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍ ແນວນີ້ແລ

**ພາຫິຣັງຄະສູດທີ ໑໐ ຈົບ**

**ຈັກກະວັດຕິວັກທີ ໕ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ວິທາສູດ
໒. ມາຣະສູດ
໓. ປັນຍະວັນຕະສູດ
໔. ອະທະລິດທະສູດ
໕. ອັດຊັດຕິກັງຄະສູດ
໖. ຈັກກະວັດຕິສູດ
໗. ທຸບປັນຍະສູດ
໘. ທະລິດທະສູດ
໙. ອາທິດຈະສູດ
໑໐. ພາຫິຣັງຄະສູດ

# ໒. ໂພດຊັງຄະສາກັດສະວັກ

## ໝວດວ່າດ້ວຍການສົນທະນາເລື້ອງໂພດຊົງ

## ໑. ອາຫາຣະສູດ

### ວ່າດ້ວຍອາຫານຂອງນິວອນແລະໂພດຊົງ

[໔໓໔] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງອາຫານແລະສິ່ງບໍ່ແມ່ນອາຫານ ຂອງນິວອນ ໕ ປະການແລະໂພດຊົງ ໗ ປະການແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

## ອາຫານຂອງນິວອນ

ອັນໃດນໍ? ເປັນອາຫານທີ່ເຮັດກາມສັນທະທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດກາມສັນທະ ທີ່ເກີດຂຶ້ນແລ້ວໃຫ້ຈະເລີນໄພບູນຍິ່ງຂຶ້ນ

ຄື ສຸພະນິມິດມີຢູ່ ການທຳມະນະສິການໂດຍບໍ່ແຍບຄາຍໃນສຸພະນິມິດນັ້ນໃຫ້ຫຼາຍ ນີ້ເປັນອາຫານທີ່ເຮັດກາມສັນທະທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດກາມສັນທະທີ່ເກີດຂຶ້ນແລ້ວໃຫ້ຈະເລີນໄພບູນຍິ່ງຂຶ້ນ

ອັນໃດນໍ? ເປັນອາຫານທີ່ເຮັດພະຍາບາດທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດພະຍາບາດທີ່ເກີດຂຶ້ນແລ້ວໃຫ້ຈະເລີນໄພບູນຍິ່ງຂຶ້ນ

ຄື ປະຕິຄະນິມິດມີຢູ່ ການທຳມະນະສິການໂດຍບໍ່ແຍບຄາຍໃນປະຕິຄະນິມິດນັ້ນໃຫ້ຫຼາຍ ນີ້ເປັນອາຫານທີ່ເຮັດພະຍາບາດທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດພະຍາບາດທີ່ເກີດຂຶ້ນແລ້ວໃຫ້ຈະເລີນໄພບູນຍິ່ງຂຶ້ນ

ອັນໃດນໍ? ເປັນອາຫານທີ່ເຮັດຖີນະມິດທະທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດຖີນະມິດທະທີ່ເກີດຂຶ້ນແລ້ວໃຫ້ຈະເລີນໄພບູນຍິ່ງຂຶ້ນ

ຄື ຄວາມບໍ່ຍິນດີ ຄວາມຂີ້ຄ້ານ ຄວາມອ່ອນອຽກຂອງຮ່າງກາຍ ຄວາມເມົາອາຫານແລະຄວາມທີ່ຈິດຫົດຫູ່ມີຢູ່ ການເຮັດມະນະສິການໂດຍບໍ່ແຍບຄາຍໃນທຳເຫຼົ່ານັ້ນ ໃຫ້ຫຼາຍ ນີ້ເປັນອາຫານທີ່ເຮັດຖີນະມິດທະທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດຖີນະມິດທະທີ່ເກີດຂຶ້ນແລ້ວໃຫ້ຈະເລີນໄພບູນຍິ່ງຂຶ້ນ

ອັນໃດນໍ? ເປັນອາຫານທີ່ເຮັດອຸດທັດຈະກຸກກຸດຈະທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດອຸດທັດຈະກຸກກຸດຈະທີ່ເກີດຂຶ້ນແລ້ວໃຫ້ຈະເລີນໄພບູນຍິ່ງຂຶ້ນ

ຄື ຄວາມບໍ່ສະງົບຈິດມີຢູ່ ການເຮັດມະນະສິການໂດຍບໍ່ແຍບຄາຍໃນຄວາມບໍ່ສະງົບ ຈິດນັ້ນໃຫ້ຫຼາຍ ນີ້ເປັນອາຫານທີ່ເຮັດອຸດທັດຈະກຸກກຸດຈະທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດອຸດທັດຈະກຸກກຸດຈະທີ່ເກີດຂຶ້ນແລ້ວໃຫ້ຈະເລີນໄພບູນຍິ່ງຂຶ້ນ

ອັນໃດນໍ? ເປັນອາຫານທີ່ເຮັດວິຈິກິດສາທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດວິຈິກິດສາທີ່ເກີດຂຶ້ນແລ້ວໃຫ້ຈະເລີນໄພບູນຍິ່ງຂຶ້ນ

ຄື ທຳທັງຫຼາຍອັນເປັນບ່ອນຕັ້ງແຫ່ງວິຈິກິດສາມີຢູ່ ການເຮັດມະນະສິການໂດຍບໍ່ແຍບຄາຍໃນທຳເຫຼົ່ານັ້ນໃຫ້ຫຼາຍ ນີ້ເປັນອາຫານທີ່ເຮັດວິຈິກິດສາທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດວິຈິ ກິດສາທີ່ເກີດຂຶ້ນແລ້ວໃຫ້ຈະເລີນໄພບູນຍິ່ງຂຶ້ນ

## ອາຫານຂອງໂພດຊົງ

ອັນໃດນໍ? ເປັນອາຫານທີ່ເຮັດສະຕິສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດສະຕິສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ຄື ທຳທັງຫຼາຍອັນເປັນບ່ອນຕັ້ງແຫ່ງສະຕິສຳໂພດຊົງມີຢູ່ ການເຮັດມະນະສິການໂດຍແຍບຄາຍໃນທຳເຫຼົ່ານັ້ນໃຫ້ຫຼາຍ ນີ້ເປັນອາຫານທີ່ເຮັດສະຕິສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດສະຕິສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ອັນໃດນໍ? ເປັນອາຫານທີ່ເຮັດທຳມະວິຈະຍະສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດທຳມະວິຈະຍະສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ຄື ທຳທັງຫຼາຍທີ່ເປັນກຸສົນແລະອະກຸສົນ ມີໂທດແລະບໍ່ມີໂທດ ຊົ່ວແລະປະນີດ ເປັນຝ່າຍດຳ ແລະຝ່າຍຂາວມີຢູ່ ການເຮັດມະນະສິການໂດຍແຍບຄາຍໃນທຳເຫຼົ່ານັ້ນໃຫ້ຫຼາຍ ນີ້ເປັນອາຫານທີ່ເຮັດທຳມະວິຈະຍະສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດທຳມະວິຈະຍະສຳໂພດຊົງ ທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ອັນໃດນໍ? ເປັນອາຫານທີ່ເຮັດວິຣິຍະສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດວິຣິຍະສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ຄື ຄວາມລິເລີ່ມ ຄວາມພາກພຽນ ຄວາມບາກບັ່ນມີຢູ່ ການເຮັດມະນະສິການໂດຍແຍບຄາຍໃນທຳເຫຼົ່ານັ້ນໃຫ້ຫຼາຍ ນີ້ເປັນອາຫານທີ່ເຮັດວິຣິຍະສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດວິຣິຍະສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ອັນໃດນໍ? ເປັນອາຫານທີ່ເຮັດປິຕິສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດປິຕິສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ຄື ທຳທັງຫຼາຍອັນເປັນບ່ອນຕັ້ງແຫ່ງປິຕິສຳໂພດຊົງມີຢູ່ ການເຮັດມະນະສິການໂດຍແຍບຄາຍໃນທຳເຫຼົ່ານັ້ນໃຫ້ຫຼາຍ ນີ້ເປັນອາຫານທີ່ເຮັດປິຕິສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດປິຕິສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ອັນໃດນໍ? ເປັນອາຫານທີ່ເຮັດປັດສັດທິສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດປັດສັດທິສຳ ໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ຄື ຄວາມສະງົບກາຍ ຄວາມສະງົບຈິດມີຢູ່ ການເຮັດມະນະສິການໂດຍແຍບຄາຍໃນທຳເຫຼົ່ານັ້ນໃຫ້ຫຼາຍ ນີ້ເປັນອາຫານທີ່ເຮັດປັດສັດທິສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດປັດສັດ

ທິສຳ ໂພດຊົງ ທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ອັນໃດນໍ? ເປັນອາຫານທີ່ເຮັດສະມາທິສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດສະມາທິສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ຄື ສະມາທິນິມິດ ອັບພະຍັກຄະນິມິດມີຢູ່ ການເຮັດມະນະສິການໂດຍແຍບຄາຍໃນນິມິດເຫຼົ່ານັ້ນໃຫ້ຫຼາຍ ນີ້ເປັນອາຫານທີ່ເຮັດສະມາທິສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດສະມາທິສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ອັນໃດນໍ? ເປັນອາຫານທີ່ເຮັດອຸເປກຂາສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດອຸເປກຂາສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ຄື ທຳທັງຫຼາຍອັນເປັນບ່ອນຕັ້ງແຫ່ງອຸເປກຂາສຳໂພດຊົງມີຢູ່ ການເຮັດມະນະສິການໂດຍແຍບຄາຍໃນທຳເຫຼົ່ານັ້ນໃຫ້ຫຼາຍ ນີ້ເປັນອາຫານທີ່ເຮັດອຸເປກຂາສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດອຸເປກຂາສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

## ສິ່ງທີ່ບໍ່ແມ່ນອາຫານຂອງນິວອນ

ອັນໃດນໍ? ບໍ່ເປັນອາຫານທີ່ເຮັດກາມສັນທະທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດກາມສັນທະທີ່ເກີດຂຶ້ນແລ້ວໃຫ້ຈະເລີນໄພບູນຍິ່ງຂຶ້ນ

ຄື ອະສຸພະນິມິດມີຢູ່ ການເຮັດມະນະສິການໂດຍແຍບຄາຍໃນອະສຸພະນິມິດນັ້ນໃຫ້ຫຼາຍ ນີ້ບໍ່ເປັນອາຫານທີ່ເຮັດກາມສັນທະທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດກາມສັນທະທີ່ເກີດຂຶ້ນແລ້ວໃຫ້ຈະເລີນໄພບູນຍິ່ງຂຶ້ນ

ອັນໃດນໍ? ບໍ່ເປັນອາຫານທີ່ເຮັດພະຍາບາດທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດພະຍາບາດທີ່ເກີດຂຶ້ນແລ້ວໃຫ້ຈະເລີນໄພບູນຍິ່ງຂຶ້ນ

ຄື ເມດຕາເຈໂຕວິມຸດຕິມີຢູ່ ການເຮັດມະນະສິການໂດຍແຍບຄາຍໃນເມດຕາເຈໂຕວິມຸດຕິນັ້ນໃຫ້ຫຼາຍ ນີ້ບໍ່ເປັນອາຫານທີ່ເຮັດພະຍາບາດທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດພະຍາບາດທີ່ເກີດຂຶ້ນແລ້ວໃຫ້ຈະເລີນໄພບູນຍິ່ງຂຶ້ນ

ອັນໃດນໍ? ບໍ່ເປັນອາຫານທີ່ເຮັດຖີນິມິດທະທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດຖີນມິດທະທີ່ເກີດຂຶ້ນແລ້ວໃຫ້ຈະເລີນໄພບູນຍິ່ງຂຶ້ນ

ຄື ຄວາມລິເລີ່ມ ຄວາມພາກພຽນ ຄວາມບາກບັ່ນມີຢູ່ ການເຮັດມະນະສິການໂດຍແຍບ

ຄາຍໃນທຳເຫຼົ່ານັ້ນໃຫ້ຫຼາຍ ນີ້ບໍ່ເປັນອາຫານທີ່ເຮັດຖີນະມິດທະທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດຖີນະມິດທະທີ່ເກີດຂຶ້ນແລ້ວໃຫ້ຈະເລີນໄພບູນຍິ່ງຂຶ້ນ

ອັນໃດນໍ? ບໍ່ເປັນອາຫານທີ່ເຮັດອຸດທັດຈະກຸກກຸດຈະທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດອຸດທັດຈະກຸກກຸດຈະທີ່ເກີດຂຶ້ນແລ້ວໃຫ້ຈະເລີນໄພບູນຍິ່ງຂຶ້ນ

ຄື ຄວາມສະງົບຈິດມີຢູ່ ການເຮັດມະນະສິການໂດຍແຍບຄາຍໃນຄວາມສະງົບຈິດນັ້ນໃຫ້ຫຼາຍ ນີ້ບໍ່ເປັນອາຫານທີ່ເຮັດອຸດທັດຈະກຸກກຸດຈະທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດອຸດທັດຈະກຸກກຸດຈະທີ່ເກີດຂຶ້ນແລ້ວໃຫ້ຈະເລີນໄພບູນຍິ່ງຂຶ້ນ

ອັນໃດນໍ? ບໍ່ເປັນອາຫານທີ່ເຮັດວິຈິກິດສາທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດວິຈິກິດສາທີ່ເກີດຂຶ້ນແລ້ວ ໃຫ້ຈະເລີນໄພບູນຍິ່ງຂຶ້ນ

ຄື ທຳທັງຫຼາຍທີ່ເປັນກຸສົນແລະອະກຸສົນ ມີໂທດແລະບໍ່ມີໂທດ ຊົ່ວແລະປະນີດ ເປັນຝ່າຍດຳ ແລະຝ່າຍຂາວມີຢູ່ ການເຮັດມະນະສິການໂດຍແຍບຄາຍໃນທຳເຫຼົ່ານັ້ນໃຫ້ຫຼາຍ ນີ້ບໍ່ເປັນອາຫານທີ່ເຮັດວິຈິກິດສາທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດວິຈິກິດສາທີ່ເກີດຂຶ້ນແລ້ວ ໃຫ້ຈະເລີນໄພບູນຍິ່ງຂຶ້ນ

## ສິ່ງທີ່ບໍ່ແມ່ນອາຫານຂອງໂພດຊົງ

ອັນໃດນໍ? ບໍ່ເປັນອາຫານທີ່ເຮັດສະຕິສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດສະຕິສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ຄື ທຳທັງຫຼາຍອັນເປັນບ່ອນຕັ້ງແຫ່ງສະຕິສຳໂພດຊົງມີຢູ່ ການບໍ່ເຮັດມະນະສິການ ໃນທຳເຫຼົ່ານັ້ນໃຫ້ຫຼາຍ ນີ້ບໍ່ເປັນອາຫານທີ່ເຮັດສະຕິສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດສະຕິສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ອັນໃດນໍ? ບໍ່ເປັນອາຫານທີ່ເຮັດທຳມະວິຈະຍະສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດທຳມະວິຈະຍະສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ຄື ທຳທັງຫຼາຍທີ່ເປັນກຸສົນແລະອະກຸສົນ ມີໂທດແລະບໍ່ມີໂທດ ຊົ່ວແລະປະນີດ ເປັນຝ່າຍດຳ ແລະຝ່າຍຂາວມີຢູ່ ການບໍ່ເຮັດມະນະສິການໃນທຳເຫຼົ່ານັ້ນໃຫ້ຫຼາຍ ນີ້ບໍ່ເປັນອາຫານທີ່ເຮັດທຳມະວິຈະຍະສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດທຳມະວິຈະຍະສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ອັນໃດນໍ? ບໍ່ເປັນອາຫານທີ່ເຮັດວິຣິຍະສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດວິຣິຍະ

ສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ຄື ຄວາມລິເລີ່ມ ຄວາມພາກພຽນ ຄວາມບາກບັ່ນມີຢູ່ ການບໍ່ເຮັດມະນະສິການໃນທຳເຫຼົ່ານັ້ນໃຫ້ຫຼາຍ ນີ້ບໍ່ເປັນອາຫານທີ່ເຮັດວິຣິຍະສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼືເຮັດວິຣິຍະສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ອັນໃດນໍ? ບໍ່ເປັນອາຫານທີ່ເຮັດປີຕິສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດປີຕິສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ຄື ທຳທັງຫຼາຍອັນເປັນບ່ອນຕັ້ງແຫ່ງປີຕິສຳໂພດຊົງມີຢູ່ ການບໍ່ເຮັດມະນະສິການ ໃນທຳເຫຼົ່ານັ້ນໃຫ້ຫຼາຍ ນີ້ບໍ່ເປັນອາຫານທີ່ເຮັດປີຕິສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດປີຕິສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ອັນໃດນໍ? ບໍ່ເປັນອາຫານທີ່ເຮັດປັດສັດທິສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດປັດສັດທິສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ຄື ຄວາມສະງົບກາຍ ຄວາມສະງົບຈິດມີຢູ່ ການບໍ່ເຮັດມະນະສິການໃນທຳເຫຼົ່ານັ້ນ ໃຫ້ຫຼາຍ ນີ້ບໍ່ເປັນອາຫານທີ່ເຮັດປັດສັດທິສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດປັດສັດທິສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ອັນໃດນໍ? ບໍ່ເປັນອາຫານທີ່ເຮັດສະມາທິສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດສະມາທິສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ຄື ສະມາທິນິມິດ ອັບພະຍັກຄະນິມິດມີຢູ່ ການບໍ່ເຮັດມະນະສິການໃນນິມິດເຫຼົ່ານັ້ນໃຫ້ຫຼາຍ ນີ້ ບໍ່ເປັນອາຫານທີ່ເຮັດສະມາທິສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດສະມາທິສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ອັນໃດນໍ? ບໍ່ເປັນອາຫານທີ່ເຮັດອຸເປກຂາສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດອຸເປກຂາສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

ຄື ທຳທັງຫຼາຍອັນເປັນບ່ອນຕັ້ງແຫ່ງອຸເປກຂາສຳໂພດຊົງມີຢູ່ ການບໍ່ເຮັດມະນະສິການໃນທຳເຫຼົ່ານັ້ນໃຫ້ຫຼາຍ ນີ້ບໍ່ເປັນອາຫານທີ່ເຮັດອຸເປກຂາສຳໂພດຊົງທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຫຼື ເຮັດອຸເປກຂາສຳໂພດຊົງທີ່ເກີດຂຶ້ນແລ້ວໃຫ້ຈະເລີນເຕັມທີ່

**ອາຫາຣະສູດທີ ໑ ຈົບ**

# ໘. ປະຣິຍາຍະສູດ

## ວ່າດ້ວຍເຫດທີ່ນິວອນແລະໂພດຊົງອາໄສ

[໘໓໘] ເມື່ອໃນເວລາເຊົ້າ ພິກຂຸຫຼາຍຮູບຄອງອັນຕະຣະວາສົກ ຖືບາດແລະຈີວອນ ເຂົ້າໄປບິນທະບາດຍັງເມືອງສາວັດຖີ ໄດ້ມີຄວາມຄິດແນວນີ້ວ່າ ການທ່ຽວໄປບິນທະບາດ ຍັງເມືອງສາວັດຖີຍັງເຊົ້າໂພດ ທາງທີ່ດີ ເຮົາທັງຫຼາຍຄວນຈະເຂົ້າໄປສູ່ອາຮາມຂອງພວກ ອັນຍະເດຍຣະຖີປະຣິພາຊົກ

ຄັ້ງນັ້ນແລ ພິກຂຸເຫຼົ່ານັ້ນຈຶ່ງເຂົ້າໄປສູ່ອາຮາມຂອງພວກອັນຍະເດຍຣະຖີປະຣິພາຊົກ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ພວກອັນຍະເດຍຣະຖີປະຣິພາຊົກໄດ້ກ່າວກັບພິກຂຸເຫຼົ່ານັ້ນດັ່ງນີ້ວ່າ

ຜູ້ມີອາຍຸທັງຫຼາຍ ພຣະສະມະນະໂຄດົມສະແດງທຳແກ່ສາວົກທັງຫຼາຍແນວນີ້ ວ່າ

ມາເທີ້ນ ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງລະນິວອນ ໕ ປະການອັນເປັນຄວາມເສົ້າໝອງແຫ່ງຈິດ ບັ່ນທອນກຳລັງປັນຍາແລ້ວຈະເລີນໂພດຊົງ ໗ ປະການຕາມຄວາມເປັນຈິງເທີ້ນ ແມ່ນແຕ່ເຮົາທັງຫຼາຍກໍສະແດງທຳແກ່ສາວົກທັງຫຼາຍແນວນີ້ວ່າ ມາເທີ້ນ ຜູ້ມີອາຍຸທັງຫຼາຍ ທ່ານທັງຫຼາຍຈົ່ງລະນິວອນ ໕ ປະການອັນເປັນຄວາມເສົ້າໝອງແຫ່ງຈິດ ບັ່ນທອນກຳລັງປັນຍາແລ້ວຈະເລີນໂພດຊົງ ໗ ປະການຕາມຄວາມເປັນຈິງເທີ້ນ ຜູ້ມີອາຍຸທັງຫຼາຍ

ໃນທຳມະເທດສະໜາຫຼືອະນຸສາສະນີນີ້ ຄື ທຳມະເທດສະໜາຂອງພຣະສະມະນະໂຄດົມກັບທຳມະເທດສະໜາຂອງພວກເຮົາ ຫຼືອະນຸສາສະນີຂອງພຣະສະມະນະໂຄດົມກັບອະນຸສາສະນີຂອງພວກເຮົາຈະຜິດແຜກແຕກຕ່າງກັນແນວໃດ

ຄັ້ງນັ້ນ ພິກຂຸເຫຼົ່ານັ້ນບໍ່ຍິນດີ ບໍ່ຄັດຄ້ານພາສິດຂອງອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນ ລຸກຈາກອາສະນະຈາກໄປດ້ວຍຄິດວ່າ ເຮົາທັງຫຼາຍຈັກຮູ້ແຈ້ງເນື້ອຄວາມແຫ່ງພາສິດ ນີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ

ພິກຂຸເຫຼົ່ານັ້ນ ເມື່ອທ່ຽວໄປບິນທະບາດຍັງເມືອງສາວັດຖີ ກັບຈາກບິນທະບາດ ພາຍຫຼັງສັນພັດຕາຫານສຳເລັດແລ້ວ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອເຊົ້ານີ້ ຂ້າພຣະອົງທັງຫຼາຍຄອງອັນຕະຣະວາສົກ ຖືບາດ

ແລະຈີວອນເຂົ້າໄປບິນທະບາດຍັງເມືອງສາວັດຖີ ໄດ້ມີຄວາມຄິດແບບນີ້ວ່າ ການທ່ຽວໄປບິນທະບາດຍັງເມືອງສາວັດຖີຍັງເຊົ້າໂພດ ທາງທີ່ດີ ເຮົາທັງຫຼາຍຄວນຈະເຂົ້າໄປສູ່ອາຮາມຂອງພວກອັນຍະເດຍຣະຖີປະຣິພາຊົກ

ຄັ້ງນັ້ນແລ ຂ້າພຣະອົງທັງຫຼາຍ ຈຶ່ງໄດ້ເຂົ້າໄປສູ່ອາຮາມຂອງພວກອັນຍະເດຍຣະຖີປະຣິພາຊົກໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ພວກອັນຍະເດຍຣະຖີປະຣິພາຊົກໄດ້ກ່າວກັບຂ້າພຣະອົງທັງຫຼາຍດັ່ງນີ້ ວ່າ

ຜູ້ມີອາຍຸທັງຫຼາຍ ພຣະສະມະນະໂຄດົມສະແດງທຳແກ່ສາວົກທັງຫຼາຍແບບນີ້ ວ່າ

ມາເທີ້ນ ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງລະນິວອນ ໕ ປະການອັນເປັນຄວາມເສົ້າໝອງແຫ່ງຈິດ ບັ່ນທອນກຳລັງປັນຍາແລ້ວຈະເລີນໂພດຊົງ ໗ ປະການຕາມຄວາມເປັນຈິງເທີ້ນ ແມ່ນແຕ່ເຮົາທັງຫຼາຍກໍສະແດງທຳແກ່ສາວົກທັງຫຼາຍແບບນີ້ວ່າ ມາເທີ້ນ ຜູ້ມີອາຍຸທັງຫຼາຍ ທ່ານທັງຫຼາຍຈົ່ງລະນິວອນ ໕ ປະການອັນເປັນຄວາມເສົ້າໝອງແຫ່ງຈິດ ບັ່ນທອນກຳລັງປັນຍາແລ້ວຈະເລີນໂພດຊົງ ໗ ປະການຕາມຄວາມເປັນຈິງເທີ້ນ ຜູ້ມີອາຍຸທັງຫຼາຍ ໃນທຳມະເທດສະໜາຫຼືອະນຸສາສະນີນີ້ ຄື ທຳມະເທດສະໜາຂອງພຣະສະມະນະໂຄດົມກັບທຳເທດສະໜາຂອງພວກເຮົາ ຫຼື ອະນຸສາສະນີຂອງພຣະສະມະນະໂຄດົມກັບອະນຸສາສະນີຂອງພວກເຮົາຈະຜິດແຜກແຕກຕ່າງກັນແບບໃດ

ຂ້າແດ່ ພຣະອົງຜູ້ຈະເລີນ ຄັ້ງນັ້ນ ຂ້າພຣະອົງທັງຫຼາຍບໍ່ຍິນດີ ບໍ່ຄັດຄ້ານພາສິດຂອງອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນ ລຸກຈາກອາສະນະຈາກໄປດ້ວຍຄິດວ່າ ເຮົາທັງຫຼາຍຈັກຮູ້ແຈ້ງເນື້ອຄວາມແຫ່ງພາສິດນີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພວກອັນຍະເດຍຣະຖີປະຣິພາຊົກມີວາທະແບບນີ້ ທ່ານທັງຫຼາຍຄວນຖາມແບບນີ້ວ່າ ຜູ້ມີອາຍຸທັງຫຼາຍ ກໍເຫດທີ່ນິວອນ ໕ ປະການ ອາໄສກາຍເປັນ ໑໐ ປະການ ແລະເຫດທີ່ໂພດຊົງ ໗ ປະການ ອາໄສກາຍເປັນ ໑໔ ປະການມີຢູ່ບໍ ພວກອັນຍະເດຍຣະຖີປະຣິພາຊົກຖືກຖາມແບບນີ້ແລ້ວຈັກບໍ່ສາມາດຕອບໄດ້ ຈັກເຖິງຄວາມລຳບາກຢ່າງຍິ່ງ ຂໍ້ນັ້ນຍ້ອນເຫດໃດ ຍ້ອນພວກອັນຍະເດຍຣະຖີປະຣິພາຊົກຖືກຖາມໃນສິ່ງອັນບໍ່ແມ່ນວິໄສ

ພິກຂຸທັງຫຼາຍ ໃນໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ເຮົາຍັງບໍ່ເຫັນບຸກຄົນທີ່ຈະເຮັດຈິດໃຫ້ຍິນດີໄດ້ດ້ວຍການຕອບບັນຫາເຫຼົ່ານີ້ ເວັ້ນຕະຖາຄົດຫຼືສາວົກຂອງຕະຖາຄົດ ຫຼື ຜູ້ທີ່ຟັງຈາກຄຳສອນຂອງຕະຖາຄົດນີ້

ເຫດທີ່ນິວອນ ໕ ປະການອາໄສກາຍເປັນ ໑໐ ປະການ ເປັນແນວໃດ?

ຄື ແມ່ນກາມສັນທະໃນພາຍໃນກໍເປັນນິວອນ ແມ່ນກາມສັນທະໃນພາຍນອກກໍເປັນນິວອນ ຄຳວ່າ ກາມສັນທະນິວອນ ຍ່ອມມາສູ່ອຸດເທດນີ້ ແມ່ນດ້ວຍເຫດນີ້ ກາມສັນທະນິວອນນັ້ນຈຶ່ງເປັນ ໒ ປະການ

ແມ່ນພະຍາບາດໃນພາຍໃນກໍເປັນນິວອນ ແມ່ນພະຍາບາດໃນພາຍນອກກໍເປັນນິວອນ

ຄຳວ່າ ພະຍາບາດນິວອນ ຍ່ອມໄປສູ່ອຸດເທດນີ້ ແມ່ນດ້ວຍເຫດນີ້ ພະຍາບາດນິວອນນັ້ນຈຶ່ງເປັນ ໒ ປະການ

ແມ່ນຖີນະກໍເປັນນິວອນ ແມ່ນມິດທະກໍເປັນນິວອນ ຄຳວ່າ ຖີນະມິດທະນິວອນ ຍ່ອມໄປສູ່ອຸດເທດນີ້ ແມ່ນດ້ວຍເຫດນີ້ ຖີນະມິດທະນິວອນນັ້ນຈຶ່ງເປັນ ໒ ປະການ

ແມ່ນອຸດທັດຈະກໍເປັນນິວອນ ແມ່ນກຸກກຸດຈະກໍເປັນນິວອນ ຄຳວ່າ ອຸດທັດຈະກຸກກຸດຈະນິວອນ ຍ່ອມໄປສູ່ອຸດເທດນີ້ ແມ່ນດ້ວຍເຫດນີ້ ອຸດທັດຈະກຸກກຸດຈະນິວອນນັ້ນຈຶ່ງເປັນ ໒ ປະການ

ແມ່ນວິຈິກິດສາໃນທຳທັງຫຼາຍໃນພາຍໃນກໍເປັນນິວອນ ແມ່ນວິຈິກິດສາໃນທຳທັງຫຼາຍໃນພາຍນອກ໕ກໍເປັນນິວອນ ຄຳວ່າ ວິຈິກິດສານິວອນ ຍ່ອມໄປສູ່ອຸດເທດນີ້ ແມ່ນດ້ວຍເຫດນີ້ ວິຈິກິດສານິວອນນັ້ນຈຶ່ງເປັນ ໒ ປະການ

ພິກຂຸທັງຫຼາຍ ເຫດນີ້ແລ ທີ່ນິວອນ ໕ ປະການອາໄສກາຍເປັນ ໑໐ ປະການ

ເຫດທີ່ໂພດຊົງ ໗ ປະການອາໄສກາຍເປັນ ໑໔ ປະການ ເປັນແນວໃດ?

ຄື ແມ່ນສະຕິໃນທຳທັງຫຼາຍໃນພາຍໃນກໍເປັນສະຕິສຳໂພດຊົງ ແມ່ນສະຕິໃນທຳທັງຫຼາຍໃນພາຍນອກກໍເປັນສະຕິສຳໂພດຊົງ ຄຳວ່າ ສະຕິສຳໂພດຊົງ ຍ່ອມໄປສູ່ອຸດເທດນີ້ ແມ່ນດ້ວຍເຫດນີ້ ສະຕິສຳໂພດຊົງນັ້ນຈຶ່ງເປັນ ໒ ປະການ

ແມ່ນທຳທີ່ບຸກຄົນຄັດເລືອກກວດສອບພິນິດພິຈາລະນາໃນທຳທັງຫຼາຍ ໃນພາຍໃນດ້ວຍປັນຍາກໍເປັນທຳມະວິຈະຍະສຳໂພດຊົງ ແມ່ນທຳທີ່ບຸກຄົນຄັດເລືອກກວດສອບພິນິດ ພິຈາລະນາໃນທຳທັງຫຼາຍໃນພາຍນອກດ້ວຍປັນຍາກໍເປັນທຳມະວິຈະຍະສຳໂພດຊົງ ຄຳວ່າ ທຳມະວິຈະຍະສຳໂພດຊົງ ຍ່ອມໄປສູ່ອຸດເທດນີ້ ແມ່ນດ້ວຍເຫດນີ້ ທຳມະວິຈະຍະສຳໂພດຊົງນັ້ນຈຶ່ງເປັນ ໒ ປະການ

ແມ່ນຄວາມພຽນທາງກາຍກໍເປັນວິຣິຍະສຳໂພດຊົງ ແມ່ນຄວາມພຽນທາງຈິດກໍເປັນວິຣິຍະສຳໂພດຊົງ ຄຳວ່າ ວິຣິຍະສຳໂພດຊົງ ຍ່ອມໄປສູ່ອຸດເທດນີ້ ແມ່ນດ້ວຍເຫດນີ້

ວິຣິຍະສຳໂພດຊົງນັ້ນຈຶ່ງເປັນ ໒ ປະການ

ແມ່ນປີຕິທີ່ມີວິຕົກວິຈານກໍເປັນປີຕິສຳໂພດຊົງ ແມ່ນປີຕິທີ່ບໍ່ມີວິຕົກວິຈານກໍເປັນປີຕິສຳໂພດຊົງ ຄຳວ່າ ປີຕິສຳໂພດຊົງ ຍ່ອມມາສູ່ອຸດເທດນີ້ ແມ່ນດ້ວຍເຫດນີ້ ປີຕິສຳໂພດຊົງນັ້ນຈຶ່ງເປັນ ໒ ປະການ

ແມ່ນກາຍະປັດສັດທິກໍເປັນປັດສັດທິສຳໂພດຊົງ ແມ່ນຈິດຕະປັດສັດທິກໍເປັນປັດສັດທິສຳໂພດຊົງ ຄຳວ່າ ປັດສັດທິສຳໂພດຊົງ ຍ່ອມໄປສູ່ອຸດເທດນີ້ ແມ່ນດ້ວຍເຫດນີ້ ປັດສັດທິສຳໂພດຊົງນັ້ນຈຶ່ງເປັນ ໒ ປະການ

ແມ່ນສະມາທິທີ່ມີວິຕົກວິຈານກໍເປັນສະມາທິສຳໂພດຊົງ ແມ່ນສະມາທິທີ່ບໍ່ມີວິຕົກວິຈານກໍເປັນສະມາທິສຳໂພດຊົງ ຄຳວ່າ ສະມາທິສຳໂພດຊົງ ຍ່ອມໄປສູ່ອຸດເທດນີ້ ແມ່ນດ້ວຍເຫດນີ້ ສະມາທິສຳໂພດຊົງນັ້ນຈຶ່ງເປັນ ໒ ປະການ

ແມ່ນອຸເປກຂາໃນທຳທັງຫຼາຍໃນພາຍໃນກໍເປັນອຸເປກຂາສຳໂພດຊົງ ແມ່ນອຸເປກຂາໃນທຳທັງຫຼາຍໃນພາຍນອກກໍເປັນອຸເປກຂາສຳໂພດຊົງ ຄຳວ່າ ອຸເປກຂາສຳໂພດຊົງ ຍ່ອມໄປສູ່ອຸດເທດນີ້ ແມ່ນດ້ວຍເຫດນີ້ ອຸເປກຂາສຳໂພດຊົງນັ້ນຈຶ່ງເປັນ ໒ ປະການ

ພິກຂຸທັງຫຼາຍ ເຫດນີ້ແລທີ່ໂພດຊົງ ໗ ປະການອາໄສກາຍເປັນ ໑໔ ປະການ

**ປະຣິຍາຍະສູດທີ ໒ ຈົບ**

# ໓. ອັກຄິສູດ

## ວ່າດ້ວຍອຸປະມາດ້ວຍໄຟ

[໒໓໔] ເມື່ອໃນເວລາເຊົ້າ ພິກຂຸຫຼາຍຮູບຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປບິນທະບາດຍັງເມືອງສາວັດຖີ (ເນື້ອຫາຕໍ່ໄປຄືກັນກັບປະຣິຍາຍະສູດ)

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພວກອັນຍະເດຍຣະຖີປະຣິພາຊົກມີວາທະແນວນີ້ ທ່ານທັງຫຼາຍຄວນຖາມແນວນີ້ວ່າ ຜູ້ມີອາຍຸທັງຫຼາຍ ສະໄໝໃດ ຈິດທໍດຫູ່ ສະໄໝນັ້ນ ບໍ່ເປັນເວລາເພື່ອຈະເລີນໂພດຊົງເຫຼົ່າໃດ ເປັນເວລາເພື່ອຈະເລີນໂພດຊົງເຫຼົ່າໃດ ອັນໜຶ່ງ ສະໄໝໃດ ຈິດຟຸ້ງຊ່ານ ສະໄໝນັ້ນ ບໍ່ເປັນເວລາເພື່ອຈະເລີນໂພດຊົງເຫຼົ່າໃດ ເປັນເວລາເພື່ອຈະເລີນໂພດຊົງເຫຼົ່າໃດ?

ພິກຂຸທັງຫຼາຍ ພວກອັນຍະເດຍຣະຖີປະຣິພາຊົກຖືກຖາມແນວນີ້ແລ້ວຈັກບໍ່ສາມາດຕອບ

ໃຫ້ບໍລິບູນໄດ້ ຈັກເຖິງຄວາມລໍາບາກຢ່າງຍິ່ງ ຂໍ້ນັ້ນຍ້ອນເຫດໃດ ຍ້ອນພວກອັນຍະເດຍຣະຖີປະ ຣິພາຊົກຖືກຖາມໃນສິ່ງອັນບໍ່ແມ່ນວິໄສ

ພິກຂຸທັງຫຼາຍ ໃນໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງ ສະມະນະພາມ ເທວະດາແລະມະນຸດ ເຮົາຍັງບໍ່ເຫັນບຸກຄົນທີ່ຈະຍັງຈິດໃຫ້ຍິນດີໄດ້ດ້ວຍການ ຕອບບັນຫາເຫຼົ່ານີ້ ເວັ້ນຕະຖາຄົດ ຫຼື ສາວົກຂອງຕະຖາຄົດ ຫຼື ຜູ້ທີ່ຟັງຈາກຄໍາສອນຂອງຕະຖາ ຄົດນີ້

ພິກຂຸທັງຫຼາຍ ສະໄໝໃດ ຈິດຫົດຫູ່ ສະໄໝນັ້ນ ບໍ່ເປັນເວລາເພື່ອຈະເລີນປັດສັດທິສໍາໂພດ ຊົງ ບໍ່ເປັນເວລາເພື່ອຈະເລີນສະມາທິສໍາໂພດຊົງ ບໍ່ເປັນເວລາເພື່ອຈະເລີນອຸເປກຂາສໍາໂພດຊົງ ຂໍ້ ນັ້ນຍ້ອນເຫດໃດ ຍ້ອນຈິດຫົດຫູ່ ຈິດທີ່ຫົດຫູ່ນັ້ນຍາກທີ່ຈະໃຫ້ຟື້ນຂຶ້ນດ້ວຍ ທໍາເຫຼົ່ານັ້ນ

ພິກຂຸທັງຫຼາຍ ປຽບຄື ບຸຣຸດຕ້ອງການຈະໃຫ້ໄຟກອງນ້ອຍລຸກຮຸ່ງ ຈຶ່ງໃສ່ຫຍ້າສົດ ມູນງົວ ປຽກ ໄມ້ດິບ ພົມນໍ້າແລະໂຮຍຝຸ່ນລົງໃນໄຟນັ້ນ ເຂົາສາມາດຈະໃຫ້ໄຟກອງນ້ອຍລຸກຮຸ່ງໄດ້ບໍ?

ບໍ່ໄດ້ ຂ້ານ້ອຍ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ສະໄໝໃດ ຈິດຫົດຫູ່ ສະໄໝນັ້ນ ບໍ່ ເປັນເວລາເພື່ອຈະເລີນປັດສັດທິສໍາໂພດຊົງ ບໍ່ເປັນເວລາເພື່ອຈະເລີນສະມາທິສໍາໂພດຊົງ ບໍ່ເປັນ ເວລາເພື່ອຈະເລີນອຸເປກຂາສໍາໂພດຊົງ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຈິດຫົດຫູ່ ຈິດທີ່ ຫົດຫູ່ນັ້ນ ຍາກທີ່ຈະໃຫ້ຟື້ນຂຶ້ນດ້ວຍທໍາເຫຼົ່ານັ້ນ

ແຕ່ສະໄໝໃດ ຈິດຫົດຫູ່ ສະໄໝນັ້ນ ເປັນເວລາເພື່ອຈະເລີນທໍາມະວິຈະຍະສໍາໂພດຊົງ ເປັນເວລາເພື່ອຈະເລີນວິຣິຍະສໍາໂພດຊົງ ເປັນເວລາເພື່ອຈະເລີນປິຕິສໍາໂພດຊົງ ຂໍ້ນັ້ນຍ້ອນເຫດ ໃດ ຍ້ອນຈິດຫົດຫູ່ ຈິດທີ່ຫົດຫູ່ນັ້ນງ່າຍທີ່ຈະໃຫ້ຟື້ນຂຶ້ນດ້ວຍທໍາເຫຼົ່ານັ້ນ

ພິກຂຸທັງຫຼາຍ ປຽບຄື ບຸຣຸດຕ້ອງການຈະໃຫ້ໄຟກອງນ້ອຍລຸກຮຸ່ງ ຈຶ່ງໃສ່ຫຍ້າແຫ້ງ ມູນ ງົວແຫ້ງ ໄມ້ແຫ້ງ ເປົ່າລົມແລະບໍ່ໂຮຍຝຸ່ນລົງໃນໄຟນັ້ນ ເຂົາສາມາດຈະໃຫ້ໄຟກອງນ້ອຍລຸກຮຸ່ງ ໄດ້ບໍ?

ໄດ້ ຂ້ານ້ອຍ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ສະໄໝໃດ ຈິດຫົດຫູ່ ສະໄໝນັ້ນ ເປັນເວລາເພື່ອຈະເລີນທໍາມະວິຈະຍະສໍາໂພດຊົງ ເປັນເວລາເພື່ອຈະເລີນວິຣິຍະສໍາໂພດຊົງ ເປັນເວລາເພື່ອຈະເລີນປິຕິສໍາໂພດຊົງ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຈິດຫົດຫູ່ ຈິດທີ່ຫົດຫູ່ນັ້ນງ່າຍທີ່ ຈະໃຫ້ຟື້ນຂຶ້ນດ້ວຍທໍາເຫຼົ່ານັ້ນ

ພິກຂຸທັງຫຼາຍ ສະໄໝໃດ ຈິດຟຸ້ງຊ່ານ ສະໄໝນັ້ນ ບໍ່ເປັນເວລາເພື່ອຈະເລີນທຳມະວິຈະຍະສຳໂພດຊົງ ບໍ່ເປັນເວລາເພື່ອຈະເລີນວິຣິຍະສຳໂພດຊົງ ບໍ່ເປັນເວລາເພື່ອຈະເລີນປີຕິສຳໂພດຊົງ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຈິດຟຸ້ງຊ່ານ ຈິດທີ່ຟຸ້ງຊ່ານນັ້ນຍາກທີ່ຈະໃຫ້ສະງົບດ້ວຍທຳເຫຼົ່ານັ້ນ

ພິກຂຸທັງຫຼາຍ ປຽບຄື ບຸຣຸດຕ້ອງການຈະດັບໄຟກອງໃຫຍ່ ຈຶ່ງໃສ່ຫຍ້າແຫ້ງ ມູນງົວແຫ້ງ ໄມ້ແຫ້ງ ເປົ່າລົມ ແລະບໍ່ໂຮຍຝຸ່ນລົງໃນກອງໄຟນັ້ນ ເຂົາສາມາດຈະດັບໄຟກອງໃຫຍ່ໄດ້ບໍ່?

ບໍ່ໄດ້ ຂ້ານ້ອຍ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ສະໄໝໃດ ຈິດຟຸ້ງຊ່ານ ສະໄໝນັ້ນ ບໍ່ເປັນເວລາເພື່ອຈະເລີນທຳມະວິຈະຍະສຳໂພດຊົງ ບໍ່ເປັນເວລາເພື່ອຈະເລີນວິຣິຍະສຳໂພດຊົງ ບໍ່ເປັນເວລາເພື່ອຈະເລີນປີຕິສຳໂພດຊົງ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຈິດຟຸ້ງຊ່ານ ຈິດທີ່ຟຸ້ງຊ່ານນັ້ນຍາກທີ່ຈະໃຫ້ສະງົບດ້ວຍທຳເຫຼົ່ານັ້ນ

ແຕ່ສະໄໝໃດ ຈິດຟຸ້ງຊ່ານ ສະໄໝນັ້ນ ເປັນເວລາເພື່ອຈະເລີນປັດສັດທິສຳໂພດຊົງ ເປັນເວລາເພື່ອຈະເລີນສະມາທິສຳໂພດຊົງ ເປັນເວລາເພື່ອຈະເລີນອຸເປກຂາສຳໂພດຊົງ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຈິດຟຸ້ງຊ່ານ ຈິດທີ່ຟຸ້ງຊ່ານນັ້ນງ່າຍທີ່ຈະໃຫ້ສະງົບດ້ວຍທຳເຫຼົ່ານັ້ນ

ພິກຂຸທັງຫຼາຍ ປຽບຄືບຸຣຸດຕ້ອງການຈະດັບໄຟກອງໃຫຍ່ ຈຶ່ງໃສ່ຫຍ້າສົດ ມູນງົວປຽກ ພົມນ້ຳ ແລະໂຮຍຝຸ່ນລົງໃນກອງໄຟນັ້ນ ເຂົາສາມາດຈະດັບໄຟກອງໃຫຍ່ໄດ້ບໍ?

ໄດ້ ຂ້ານ້ອຍ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ສະໄໝໃດ ຈິດຟຸ້ງຊ່ານ ສະໄໝນັ້ນ ເປັນເວລາເພື່ອຈະເລີນປັດສັດທິສຳໂພດຊົງ ເປັນເວລາເພື່ອຈະເລີນສະມາທິສຳໂພດຊົງ ເປັນເວລາເພື່ອຈະເລີນອຸເປກຂາສຳໂພດຊົງ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນຈິດຟຸ້ງຊ່ານ ຈິດທີ່ ຟຸ້ງຊ່ານນັ້ນງ່າຍທີ່ຈະໃຫ້ສະງົບດ້ວຍທຳເຫຼົ່ານັ້ນ ແລະ ເຮົາກ່າວສະຕິວ່າຈືຕ້ອງປະສົງໃນທີ່ທຸກສະຖານ

**ອັກຄິສູດທີ ໖ ຈົບ**

## ໔. ເມດຕາສະຫະຄະຕະສູດ

### ວ່າດ້ວຍຈິດມີເມດຕາ

[໔໓໕] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນິຄົມຂອງຊາວໂກລິຍະ ຊື່ຫະລິດທະ

ວະສະນະ ແຄວັນໂກລິຍະ ເມື່ອໃນເວລາເຊົ້າ ພິກຂຸຫຼາຍອົງຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປບິນທະບາດຍັງທະລິດທະວະສະນະນິຄົມ ໄດ້ມີຄວາມຄິດແນວນີ້ວ່າ ການທ່ຽວໄປບິນທະບາດໃນທະລິດທະວະສະນະນິຄົມຍັງເຊົ້າໂພດ ທາງທີ່ດີ ເຮົາທັງຫຼາຍຄວນຈະເຂົ້າໄປສູ່ອາຮາມຂອງພວກອັນຍະເດຍຣະຖີປະຣິພາຊົກ

ຄັ້ງນັ້ນແລ ພິກຂຸເຫຼົ່ານັ້ນ ຈຶ່ງເຂົ້າໄປສູ່ອາຮາມຂອງພວກອັນຍະເດຍຣະຖີປະຣິພາຊົກໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນພວກ ອັນຍະເດຍຣະຖີປະຣິພາຊົກໄດ້ກ່າວກັບພິກຂຸເຫຼົ່ານັ້ນດັ່ງນີ້ວ່າ ຜູ້ມີອາຍຸທັງຫຼາຍ ພຣະສະມະນະໂຄດົມສະແດງທຳແກ່ສາວົກທັງຫຼາຍແນວນີ້ວ່າ ມາເທີ້ນ ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງລະນິວອນ ໕ ປະການອັນເປັນຄວາມເສົ້າໝອງແຫ່ງຈິດ ບັ່ນທອນກຳລັງປັນຍາແລ້ວ ມີເມດຕາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ໑ ທິດເບື້ອງລຸ່ມ໒ ທິດສຽງ໓ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າ ໃນທີ່ທຸກສະຖານດ້ວຍເມດຕາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີ ຄວາມບຽດບຽນຢູ່ມີກະລຸນາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລ່າງ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນທີ່ທຸກສະຖານດ້ວຍກະລຸນາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ມີມຸທິຕາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລ່າງ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນທີ່ທຸກສະຖານດ້ວຍມຸທິຕາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ມີອຸເປກຂາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລ່າງ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນທີ່ທຸກສະຖານດ້ວຍອຸເປກຂາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ແມ່ນວ່າເຮົາທັງຫຼາຍ ກໍສະແດງທຳແກ່ສາວົກທັງຫຼາຍແນວນີ້ວ່າ ມາເທີ້ນ ຜູ້ມີອາຍຸທັງຫຼາຍ ທ່ານທັງຫຼາຍຈົ່ງລະນິວອນ ໕ ປະການອັນເປັນຄວາມເສົ້າໝອງແຫ່ງຈິດ ບັ່ນທອນກຳລັງປັນຍາແລ້ວ ມີເມດຕາຈິດແຜ່ໄປຕະຫຼອດທິດທີ່ ໑ ຯລຯ ມີກະລຸນາຈິດ ຯລຯ ມີມຸທິຕາຈິດ ຯລຯ ມີອຸເປກຂາຈິດແຜ່ໄປຕະຫຼອດທິດທີ່ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລ່າງ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນທີ່ທຸກສະຖານດ້ວຍອຸເປກຂາຈິດອັນເຕັມປ່ຽມ ເປັນມະ-ຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ຜູ້ມີອາຍຸທັງຫຼາຍ ໃນທຳມະເທດສະໜາຫຼືອະນຸສາສະນີນີ້ ຄື ທຳມະເທດສະໜາຂອງພຣະສະມະນະໂຄດົມກັບທຳມະເທດສະໜາຂອງພວກເຮົາ ຫຼື ອະນຸສາສະນີຂອງພຣະສະມະນະໂຄດົມ ກັບອະນຸສາສະນີຂອງພວກເຮົາຈະຜິດແຜກແຕກຕ່າງກັນ ແນວໃດ?

ຄັ້ງນັ້ນ ພິກຂຸເຫຼົ່ານັ້ນບໍ່ຍິນດີ ບໍ່ຄັດຄ້ານພາສິດຂອງອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນ ລຸກຈາກອາສະນະຈາກໄປດ້ວຍຄິດວ່າ ເຮົາທັງຫຼາຍ ຈັກຮູ້ແຈ້ງເນື້ອຄວາມແຫ່ງພາສິດນີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ

ພິກຂຸເຫຼົ່ານັ້ນ ເມື່ອທ່ຽວໄປບິນທະບາດໃນກະລິທທະວະສະນະນິຄົມ ກັບຈາກບິນທະບາດພາຍຫຼັງສັນພັດຕາຫານສຳເລັດແລ້ວ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍ ອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອເຊົ້ານີ້ ຂ້າພຣະອົງທັງຫຼາຍຄອງອັນຕະຣະວາສົກ ຖືບາດ ແລະຈີວອນເຂົ້າໄປບິນທະບາດໃນກະລິທທະວະສະນະນິຄົມ ໄດ້ມີຄວາມຄິດແນວນີ້ວ່າ ການທ່ຽວໄປບິນທະບາດໃນກະລິທທະວະສະນະນິຄົມຍັງເຊົ້າໂພດ ທາງທີ່ດີ ເຮົາທັງຫຼາຍຄວນຈະເຂົ້າໄປສູ່ອາຮາມຂອງພວກອັນຍະເດຍຣະຖີປະຣິພາຊົກ

ຄັ້ງນັ້ນແລ ຂ້າພຣະອົງທັງຫຼາຍຈຶ່ງໄດ້ເຂົ້າໄປສູ່ອາຮາມຂອງພວກອັນຍະເດຍຣະຖີປະຣິພາຊົກ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ພວກອັນຍະເດຍຣະຖີປະຣິພາຊົກໄດ້ກ່າວກັບຂ້າພຣະອົງທັງຫຼາຍດັ່ງນີ້ວ່າ ຜູ້ມີອາຍຸທັງຫຼາຍ ພຣະສະມະນະໂຄດົມສະແດງທຳແກ່ສາວົກທັງຫຼາຍແນວນີ້ວ່າ ມາເທີ້ນ ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງລະນິວອນ ໕ ປະການອັນເປັນຄວາມເສົ້າໝອງ ແຫ່ງຈິດ ບັ່ນທອນກຳລັງປັນຍາແລ້ວ ມີເມດຕາຈິດແຜ່ໄປຕະຫຼອດທິດທີ່ ໑ ຯລຯ ຯລຯ ມີກະລຸນາຈິດ ຯລຯ ມີມຸທິຕາຈິດ ຯລຯ ມີອຸເປກຂາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລ່າງ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ ເຫຼົ່າໃນທີ່ທຸກສະຖານດ້ວຍອຸເປກຂາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່

ແມ່ນແຕ່ເຮົາທັງຫຼາຍກໍສະແດງທຳແກ່ສາວົກທັງຫຼາຍແນວນີ້ວ່າ ມາເທີ້ນ ຜູ້ມີອາຍຸທັງຫຼາຍ ທ່ານທັງຫຼາຍຈົ່ງລະນິວອນ ໕ ປະການອັນເປັນຄວາມເສົ້າໝອງແຫ່ງຈິດ ບັ່ນທອນກຳລັງປັນຍາແລ້ວ ມີເມດຕາຈິດແຜ່ໄປຕະຫຼອດທິດທີ່ ໑ ຯລຯ ຯລຯ ມີກະລຸນາຈິດ ຯລຯ ມີມຸທິຕາຈິດ ຯລຯ ມີອຸເປກຂາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລ່າງ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນທີ່ທຸກສະຖານດ້ວຍອຸເປກຂາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ຜູ້ມີອາຍຸທັງຫຼາຍ ໃນທຳມະເທດສະໜາຫຼືອະນຸສາສະນີນີ້ ຄື ທຳມະເທດສະໜາຂອງພຣະສະມະນະໂຄດົມກັບທຳມະເທດສະໜາຂອງພວກເຮົາ ຫຼືອະນຸສາສະນີຂອງພຣະສະມະນະໂຄດົມກັບອະນຸສາສະນີຂອງພວກເຮົາຈະຜິດແຜກແຕກຕ່າງກັນແນວໃດ?

ຂ້າແດ່ ພຣະອົງຜູ້ຈະເລີນ ຄັ້ງນັ້ນ ຂ້າພຣະອົງທັງຫຼາຍບໍ່ຍິນດີ ບໍ່ຄັດຄ້ານພາສິດ ຂອງອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນ ລຸກຈາກອາສະນະຈາກໄປດ້ວຍຄິດວ່າ ເຮົາທັງຫຼາຍຈັກຮູ້ແຈ້ງເນື້ອຄວາມແຫ່ງພາສິດນີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ

## ມຸດຕິມີອັນໃດເປັນຄະຕິ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພວກອັນຍະເດຍຣະຖີປະຣິພາຊົກມີວາທະແນວນີ້ ທ່ານທັງຫຼາຍຄວນຖາມແນວນີ້ວ່າ ຜູ້ມີອາຍຸທັງຫຼາຍ ເມດຕາເຈໂຕວິມຸດຕິທີ່ບຸກຄົນຈະເລີນແລ້ວແນວໃດ ມີອັນໃດເປັນຄະຕິ ມີອັນໃດເປັນຢ່າງຍິ່ງ ມີອັນໃດເປັນຜົນ ມີອັນໃດເປັນບ່ອນສຸດ ອັນໜຶ່ງ ກະລຸນາເຈໂຕວິມຸດຕິທີ່ບຸກຄົນຈະເລີນແລ້ວແນວໃດ ມີອັນໃດເປັນຄະຕິ ມີອັນໃດເປັນຢ່າງຍິ່ງ ມີອັນໃດເປັນຜົນ ມີອັນໃດເປັນບ່ອນສຸດ ອັນໜຶ່ງ ມຸທິຕາເຈໂຕວິມຸດຕິທີ່ບຸກຄົນຈະເລີນແລ້ວແນວໃດ ມີອັນໃດເປັນຄະຕິ ມີອັນໃດເປັນຢ່າງຍິ່ງ ມີອັນໃດເປັນຜົນ ມີອັນໃດເປັນບ່ອນສຸດ ອັນໜຶ່ງ ອຸເປກຂາເຈໂຕວິມຸດຕິທີ່ບຸກຄົນຈະເລີນແລ້ວແນວໃດ ມີອັນໃດເປັນຄະຕິ ມີອັນໃດເປັນຢ່າງຍິ່ງ ມີອັນໃດເປັນຜົນ ມີອັນໃດເປັນບ່ອນສຸດ ພວກອັນຍະເດຍຣະຖີປະຣິພາຊົກຖືກຖາມແນວນີ້ແລ້ວຈັກບໍ່ສາມາດຕອບໄດ້ ຈັກເຖິງຄວາມລຳບາກຢ່າງຍິ່ງ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນພວກອັນຍະເດຍຣະຖີປະຣິພາຊົກຖືກຖາມໃນສິ່ງອັນບໍ່ແມ່ນວິໄສ

ພິກຂຸທັງຫຼາຍ ໃນໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ເຮົາຍັງບໍ່ເຫັນບຸກຄົນທີ່ຈະເຮັດຈິດໃຫ້ຍິນດີໄດ້ ດ້ວຍການຕອບບັນຫາເຫຼົ່ານີ້ ເວັ້ນຕະຖາຄົດຫຼືສາວົກຂອງຕະຖາຄົດ ຫຼື ຜູ້ທີ່ຟັງຈາກຄຳສອນຂອງຕະຖາຄົດນີ້

ເມດຕາເຈໂຕວິມຸດຕິທີ່ບຸກຄົນຈະເລີນແລ້ວແນວໃດ ມີອັນໃດເປັນຄະຕິ ມີອັນໃດເປັນຢ່າງຍິ່ງ ມີອັນໃດເປັນຜົນ ມີອັນໃດເປັນບ່ອນສຸດ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງທີ່ປະກອບດ້ວຍເມດຕາ

ฯລฯ

໗. ຈະເລີນອຸເປກຂາສຳໂພດຊົງທີ່ປະກອບດ້ວຍເມດຕາ ອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ຫາກທ່ານຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ວ່າປະຕິກູນໃນສິ່ງບໍ່ປະຕິກູນຢູ່ ກໍມີຄວາມໝາຍຮູ້ວ່າປະຕິກູນໃນສິ່ງບໍ່ປະຕິກູນນັ້ນຢູ່

ຫາກທ່ານຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ວ່າບໍ່ປະຕິກູນໃນສິ່ງປະຕິກູນຢູ່ ກໍມີຄວາມໝາຍຮູ້ວ່າບໍ່ປະຕິກູນໃນສິ່ງປະຕິກູນນັ້ນຢູ່

ຫາກທ່ານຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ວ່າປະຕິກູນໃນສິ່ງບໍ່ປະຕິກູນ ແລະ ສິ່ງປະຕິກູນຢູ່ ກໍມີຄວາມໝາຍຮູ້ວ່າປະຕິກູນໃນສິ່ງບໍ່ປະຕິກູນ ແລະສິ່ງປະຕິກູນນັ້ນຢູ່

ຫາກທ່ານຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ວ່າບໍ່ປະຕິກູນໃນສິ່ງປະຕິກູນແລະບໍ່ປະຕິກູນຢູ່ ກໍມີຄວາມໝາຍຮູ້ວ່າບໍ່ປະຕິກູນໃນສິ່ງປະຕິກູນ ແລະບໍ່ປະຕິກູນນັ້ນຢູ່

ຫາກທ່ານຫວັງວ່າ ເຮົາເພິ່ງເວັ້ນສິ່ງທັງ ໒ ນັ້ນ ຄື ສິ່ງບໍ່ປະຕິກູນແລະສິ່ງປະຕິກູນແລ້ວເປັນຜູ້ ມີອຸເປກຂາ ມີສະຕິສຳປະຊັນຍະຢູ່ ກໍເປັນຜູ້ມີອຸເປກຂາ ມີສະຕິສຳປະຊັນຍະໃນສິ່ງທັງ ໒ ນັ້ນຢູ່ ຫຼື ເຂົ້າເຖິງສຸພະວິໂມກຢູ່

ພິກຂຸທັງຫຼາຍ ເຮົາກ່າວເມດຕາເຈໂຕວິມຸດຕິວ່າມີສຸພະວິໂມກເປັນຢ່າງຍິ່ງສຳລັບພິກຂຸຜູ້ມີປັນຍາອັນເປັນໂລກິຍະຍັງບໍ່ຮູ້ແຈ້ງວິມຸດຕິຢູ່ຍອດຍັ້ງມໃນທຳວິໄນນີ້

ກະລຸນາເຈໂຕວິມຸດຕິທີ່ບຸກຄົນຈະເລີນແລ້ວແນວໃດ ມີອັນໃດເປັນຄະຕິ ມີອັນໃດເປັນຢ່າງຍິ່ງ ມີອັນໃດເປັນຜົນ ມີອັນໃດເປັນບ່ອນສຸດ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງທີ່ປະກອບດ້ວຍກະລຸນາ

ຯລຯ

໗. ຈະເລີນອຸເປກຂາສຳໂພດຊົງທີ່ປະກອບດ້ວຍກະລຸນາ ອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ຫາກທ່ານຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ວ່າປະຕິກູນໃນສິ່ງບໍ່ປະຕິກູນຢູ່ ກໍມີຄວາມໝາຍຮູ້ວ່າປະຕິກູນໃນສິ່ງບໍ່ປະຕິກູນນັ້ນຢູ່ ຯລຯ

ຫາກທ່ານຫວັງວ່າ ເຮົາເພິ່ງເວັ້ນສິ່ງທັງ ໒ ນັ້ນ ຄື ສິ່ງບໍ່ປະຕິກູນ ແລະສິ່ງປະຕິກູນແລ້ວເປັນຜູ້ມີອຸເປກຂາ ມີສະຕິສຳປະຊັນຍະຢູ່ ກໍເປັນຜູ້ມີອຸເປກຂາ ມີສະຕິສຳປະຊັນຍະໃນສິ່ງທັງ ໒ ນັ້ນຢູ່ ຫຼື ບັນລຸອາກາສານັນຈາຍະຕະນະຊານຢູ່ໂດຍກຳນົດວ່າ ອາກາດຫາບ່ອນສຸດບໍ່ໄດ້ ຍ້ອນລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາໂດຍປະການທັງປວງ

ພິກຂຸທັງຫຼາຍ ເຮົາກ່າວກະລຸນາເຈໂຕວິມຸດຕິວ່າ ມີອາກາສານັນຈາຍະຕະນະຊານເປັນຢ່າງຍິ່ງ ສຳລັບພິກຂຸຜູ້ມີປັນຍາອັນເປັນໂລກິຍະຍັງບໍ່ຮູ້ແຈ້ງວິມຸດຕິຢູ່ຍອດຍັ້ງມໃນທຳວິໄນນີ້

ມຸທິຕາເຈໂຕວິມຸດຕິທີ່ບຸກຄົນຈະເລີນແລ້ວແນວໃດ ມີອັນໃດເປັນຄະຕິ ມີອັນໃດເປັນຢ່າງຍິ່ງ ມີອັນໃດເປັນຜົນ ມີອັນໃດເປັນບ່ອນສຸດ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງທີ່ປະກອບດ້ວຍມຸທິຕາ

ຯລຯ

໗. ຈະເລີນອຸເປກຂາສຳໂພດຊົງທີ່ປະກອບດ້ວຍມຸທິຕາ ອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ຫາກທ່ານຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ວ່າປະຕິກູນໃນສິ່ງບໍ່ປະຕິກູນຢູ່ ກໍມີຄວາມໝາຍຮູ້ວ່າປະຕິກູນໃນສິ່ງບໍ່ປະຕິກູນນັ້ນຢູ່ ຯລຯ

ຫາກທ່ານຫວັງວ່າ ເຮົາເພິ່ງເວັ້ນສິ່ງທັງ ໒ ນັ້ນ ຄື ສິ່ງບໍ່ປະຕິກູນແລະສິ່ງປະຕິກູນແລ້ວເປັນຜູ້ມີອຸເປກຂາ ມີສະຕິສຳປະຊັນຍະຢູ່ ກໍເປັນຜູ້ມີອຸເປກຂາ ມີສະຕິສຳປະຊັນຍະໃນສິ່ງທັງ ໒ ນັ້ນຢູ່ ຫຼືບັນລຸວິນຍານັນຈາຍະຕະນະຊານຢູ່ໂດຍກຳນົດວ່າ ວິນຍານຫາບ່ອນສຸດບໍ່ໄດ້ ຍ້ອນລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ

ພິກຂຸທັງຫຼາຍ ເຮົາກ່າວມຸທິຕາເຈໂຕວິມຸດຕິວ່າ ມີວິນຍານັນຈາຍະຕະນະຊານເປັນຢ່າງຍິ່ງ ສຳລັບພິກຂຸຜູ້ມີປັນຍາອັນເປັນໂລກິຍະຍັງບໍ່ຮູ້ແຈ້ງວິມຸດຕິຢູ່ຍອດຍັ້ງມໃນທຳວິໄນນີ້

ອຸເປກຂາເຈໂຕວິມຸດຕິທີ່ບຸກຄົນຈະເລີນແລ້ວແນວໃດ ມີອັນໃດເປັນຄະຕິ ມີອັນໃດເປັນຢ່າງຍິ່ງ ມີອັນໃດເປັນຜົນ ມີອັນໃດເປັນບ່ອນສຸດ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງທີ່ປະກອບດ້ວຍອຸເປກຂາ ອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ຯລຯ

໗. ຈະເລີນອຸເປກຂາສຳໂພດຊົງທີ່ປະກອບດ້ວຍອຸເປກຂາ ອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ຫາກທ່ານຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ວ່າປະຕິກູນໃນສິ່ງບໍ່ປະຕິກູນຢູ່ ກໍມີຄວາມໝາຍຮູ້ວ່າປະຕິກູນໃນສິ່ງບໍ່ປະຕິກູນນັ້ນຢູ່

ຫາກທ່ານຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ວ່າບໍ່ປະຕິກູນໃນສິ່ງປະຕິກູນຢູ່ ກໍມີຄວາມໝາຍຮູ້ວ່າບໍ່ປະຕິກູນໃນສິ່ງປະຕິກູນນັ້ນຢູ່

ຫາກທ່ານຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ວ່າປະຕິກູນໃນສິ່ງບໍ່ປະຕິກູນ ແລະສິ່ງປະຕິກູນຢູ່ ກໍມີຄວາມໝາຍຮູ້ວ່າປະຕິກູນໃນສິ່ງບໍ່ປະຕິກູນແລະສິ່ງປະຕິກູນນັ້ນຢູ່

ຫາກທ່ານຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ວ່າບໍ່ປະຕິກູນໃນສິ່ງປະຕິກູນ ແລະສິ່ງບໍ່ປະຕິກູນຢູ່ ກໍມີຄວາມໝາຍຮູ້ວ່າບໍ່ປະຕິກູນໃນສິ່ງປະຕິກູນແລະສິ່ງບໍ່ປະຕິກູນນັ້ນຢູ່

ຫາກທ່ານຫວັງວ່າ ເຮົາເພິ່ງເວັ້ນສິ່ງທັງ ໔ ນັ້ນ ຄື ສິ່ງບໍ່ປະຕິກູນ ແລະສິ່ງປະຕິກູນແລ້ວ ເປັນຜູ້ມີອຸເປກຂາ ມີສະຕິສຳປະຊັນຍະຢູ່ ກໍເປັນຜູ້ມີອຸເປກຂາ ມີສະຕິສຳປະຊັນຍະໃນສິ່ງທັງ ໔ ນັ້ນຢູ່ ຫຼືບັນລຸອາກິນຈັນຍາຍະຕະນະຊານຢູ່ໂດຍກຳນົດວ່າ ບໍ່ມີອັນໃດ ຍ້ອນລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ

ພິກຂຸທັງຫຼາຍ ເຮົາກ່າວອຸເປກຂາເຈໂຕວິມຸດຕິວ່າມີອາກິນຈັນຍາຍະຕະນະຊານເປັນ ຢ່າງຍິ່ງສຳລັບພິກຂຸຜູ້ມີປັນຍາອັນເປັນໂລກິຍະຍັງບໍ່ຮູ້ແຈ້ງວິມຸດຕິຢູ່ຍອດຢ້ຽມໃນທຳວິໄນນີ້

**ເມດຕາສະຫະຄະຕະສູດທີ ໔ ຈົບ**

# ໕. ສັງຄາຣະວະສູດ

## ວ່າດ້ວຍສັງຄາຣະວະພາມ

[໔໓໖] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ຄັ້ງນັ້ນ ສັງຄາຣະວະພາມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ອັນໃດເປັນເຫດເປັນປັດໄຈໃຫ້ມົນ ແມ່ນທີ່ສາທະຍາຍມາເປັນເວລາດົນກໍບໍ່ແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ບໍ່ໄດ້ສາທະຍາຍເລີຍ ອັນໜຶ່ງ ອັນໃດ ເປັນເຫດເປັນປັດໄຈໃຫ້ມົນແມ່ນທີ່ບໍ່ໄດ້ສາທະຍາຍມາເປັນເວລາດົນກໍແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ສາທະຍາຍເລີຍ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພາມ

໑. ສະໄໝໃດ ບຸກຄົນມີຈິດຖືກກາມຣາຄະຕຸ້ມສຸມ ຖືກກາມຣາຄະຄອບງຳຢູ່ ແລະບໍ່ຮູ້ແຈ້ງທຳເຄື່ອງສະບັດອອກຈາກກາມຣາຄະທີ່ເກີດຂຶ້ນແລ້ວຕາມຄວາມເປັນຈິງ ສະໄໝນັ້ນ ບຸກຄົນບໍ່ຮູ້ ບໍ່ເຫັນແມ່ນປະໂຫຍດຕົນ ປະໂຫຍດຜູ້ອື່ນ ແລະປະໂຫຍດທັງສອງຕາມຄວາມເປັນຈິງ ມົນແມ່ນທີ່ສາທະຍາຍມາເປັນເວລາດົນກໍບໍ່ແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ບໍ່ໄດ້ສາທະຍາຍເລີຍ

ພາຊະນະນ້ຳເຊິ່ງຜະສົມດ້ວຍຄັ່ງ ຂີ້ມີ້ນ ສີຂຽວ ຫຼື ສີເຫຼືອງອ່ອນ ຄົນມີຕາດີແນມເບິ່ງເງົາໜ້າຂອງຕົນໃນພາຊະນະນ້ຳນັ້ນ ບໍ່ເພິ່ງຮູ້ ບໍ່ເພິ່ງເຫັນຕາມຄວາມເປັນຈິງ ແມ່ນສັນໃດ

ສະໄໝໃດ ບຸກຄົນມີຈິດຖືກກາມຣາຄະຕຸ້ມສຸມ ຖືກກາມຣາຄະຄອບງຳຢູ່ ແລະບໍ່ຮູ້ແຈ້ງທຳເຄື່ອງສະບັດອອກຈາກກາມຣາຄະທີ່ເກີດຂື້ນແລ້ວຕາມຄວາມເປັນຈິງ ສະໄໝນັ້ນ ບຸກຄົນບໍ່ຮູ້ບໍ່ເຫັນແມ່ນປະໂຫຍດຕົນ ປະໂຫຍດຜູ້ອື່ນ ແລະປະໂຫຍດທັງສອງຕາມຄວາມເປັນຈິງ ມົນແມ່ນທີ່ສາທະຍາຍມາເປັນເວລາດົນກໍບໍ່ແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ບໍ່ໄດ້ສາທະຍາຍເລີຍ ຄືກັນສັນນັ້ນ

໔. ສະໄໝໃດ ບຸກຄົນມີຈິດຖືກພະຍາບາດຕຸ້ມສຸມ ຖືກພະຍາບາດຄອບງຳຢູ່ ແລະບໍ່ຮູ້ແຈ້ງທຳເຄື່ອງສະບັດອອກຈາກພະຍາບາດທີ່ເກີດຂື້ນແລ້ວຕາມຄວາມເປັນຈິງ ສະໄໝນັ້ນ ບຸກຄົນບໍ່ຮູ້ ບໍ່ເຫັນແມ່ນປະໂຫຍດຕົນ ປະໂຫຍດຜູ້ອື່ນ ແລະປະໂຫຍດທັງສອງຕາມຄວາມເປັນຈິງ ມົນແມ່ນທີ່ສາທະຍາຍມາເປັນເວລາດົນກໍບໍ່ແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ບໍ່ໄດ້ສາທະຍາຍເລີຍ

ພາຊະນະນ້ຳຮ້ອນຍ້ອນໄຟຮ້ອນຟົດເປັນອາຍ ຄົນມີຕາດີແນມເບິ່ງເງົາໜ້າຂອງຕົນໃນພາຊະນະນ້ຳນັ້ນບໍ່ເພິ່ງຮູ້ ບໍ່ເພິ່ງເຫັນຕາມຄວາມເປັນຈິງ ແມ່ນສັນໃດ

ສະໄໝໃດ ບຸກຄົນມີຈິດຖືກພະຍາບາດຕຸ້ມສຸມ ຖືກພະຍາບາດຄອບງຳຢູ່ ແລະບໍ່ຮູ້ແຈ້ງທຳເຄື່ອງສະບັດອອກຈາກພະຍາບາດທີ່ເກີດຂື້ນແລ້ວຕາມຄວາມເປັນຈິງ ສະໄໝນັ້ນ ບຸກຄົນບໍ່ຮູ້ບໍ່ເຫັນແມ່ນປະໂຫຍດຕົນ ປະໂຫຍດຜູ້ອື່ນ ແລະປະໂຫຍດທັງສອງຕາມຄວາມເປັນຈິງ ມົນແມ່ນທີ່ສາທະຍາຍມາເປັນເວລາດົນກໍບໍ່ແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ບໍ່ໄດ້ ສາທະຍາຍເລີຍ ຄືກັນສັນນັ້ນ

໕. ສະໄໝໃດ ບຸກຄົນມີຈິດຖືກຖີນະມິດທະຕຸ້ມສຸມ ຖືກຖີນະມິດທະຄອບງຳຢູ່ ແລະບໍ່ຮູ້ແຈ້ງທຳເຄື່ອງສະບັດອອກຈາກຖີນະມິດທະທີ່ເກີດຂື້ນແລ້ວຕາມຄວາມເປັນຈິງ ສະໄໝນັ້ນ ບຸກຄົນບໍ່ຮູ້ ບໍ່ເຫັນແມ່ນປະໂຫຍດຕົນ ປະໂຫຍດຜູ້ອື່ນ ແລະປະໂຫຍດທັງສອງຕາມຄວາມເປັນຈິງ ມົນແມ່ນ ທີ່ສາທະຍາຍມາເປັນເວລາດົນກໍບໍ່ແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ບໍ່ໄດ້ສາທະຍາຍເລີຍ

ພາຊະນະນ້ຳຖືກສາຫຮ່າຍ ແລະແໜປົກຄຸມໄວ້ ຄົນມີຕາດີແນມເບິ່ງເງົາໜ້າຂອງຕົນໃນພາຊະນະນ້ຳນັ້ນບໍ່ເພິ່ງຮູ້ ບໍ່ເພິ່ງເຫັນຕາມຄວາມເປັນຈິງ ແມ່ນສັນໃດ

ສະໄໝໃດ ບຸກຄົນມີຈິດຖືກຖີນະມິດທະຕຸ້ມສຸມ ຖືກຖີນະມິດທະຄອບງຳຢູ່ ແລະບໍ່ຮູ້ແຈ້ງ

ທຳເຄື່ອງສະບັດອອກຈາກຖີນະມິດທະທີ່ເກີດຂຶ້ນແລ້ວຕາມຄວາມເປັນຈິງ ສະໄໝນັ້ນ ບຸກຄົນບໍ່ຮູ້ ບໍ່ເຫັນແມ່ນປະໂຫຍດຕົນ ປະໂຫຍດຜູ້ອື່ນ ແລະ ປະໂຫຍດທັງສອງຕາມຄວາມເປັນຈິງ ມົນແມ່ນທີ່ສາທະຍາຍມາເປັນເວລາດົນກໍບໍ່ແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ບໍ່ໄດ້ສາທະຍາຍເລີຍ ຄືກັນສັນນັ້ນ

໔. ສະໄໝໃດ ບຸກຄົນມີຈິດຖືກອຸດທັດຈະກຸກກຸດຈະຕຸ້ມສຸມ ຖືກອຸດທັດຈະກຸກກຸດຈະຄອບງຳຢູ່ ແລະບໍ່ຮູ້ແຈ້ງທຳເຄື່ອງສະບັດອອກຈາກອຸດທັດຈະກຸກກຸດຈະທີ່ເກີດຂຶ້ນແລ້ວຕາມຄວາມເປັນຈິງ ສະໄໝນັ້ນ ບຸກຄົນບໍ່ຮູ້ ບໍ່ເຫັນແມ່ນປະໂຫຍດຕົນ ປະໂຫຍດຜູ້ອື່ນ ແລະປະໂຫຍດທັງສອງ ຕາມຄວາມເປັນຈິງ ມົນແມ່ນທີ່ສາທະຍາຍມາເປັນເວລາດົນກໍບໍ່ແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ບໍ່ໄດ້ສາທະຍາຍເລີຍ

ພາຊະນະນ້ຳຖືກລົມພັດ ໄຫວ ວົນ ເປັນຄື້ນ ຄົນມີຕາດີແນມເບິ່ງເງົາໜ້າຂອງຕົນໃນພາຊະນະນ້ຳນັ້ນ ບໍ່ເພິ່ງຮູ້ ບໍ່ເພິ່ງເຫັນຕາມຄວາມເປັນຈິງ ແມ່ນສັນໃດ

ສະໄໝໃດ ບຸກຄົນມີຈິດຖືກອຸດທັດຈະກຸກກຸດຈະຕຸ້ມສຸມ ຖືກອຸດທັດຈະກຸກກຸດຈະຄອບງຳຢູ່ ແລະບໍ່ຮູ້ແຈ້ງທຳເຄື່ອງສະບັດອອກຈາກອຸດທັດຈະກຸກກຸດຈະທີ່ເກີດຂຶ້ນແລ້ວຕາມຄວາມເປັນຈິງ ສະໄໝນັ້ນ ບຸກຄົນບໍ່ຮູ້ ບໍ່ເຫັນແມ່ນປະໂຫຍດຕົນ ປະໂຫຍດຜູ້ອື່ນ ແລະປະໂຫຍດທັງສອງຕາມຄວາມເປັນຈິງ ມົນແມ່ນທີ່ສາທະຍາຍມາເປັນເວລາດົນກໍບໍ່ແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ບໍ່ໄດ້ສາທະຍາຍເລີຍ ຄືກັນສັນນັ້ນ

໕. ສະໄໝໃດ ບຸກຄົນມີຈິດຖືກວິຈິກິດສາຕຸ້ມສຸມ ຖືກວິຈິກິດສາຄອບງຳຢູ່ ແລະບໍ່ຮູ້ແຈ້ງທຳເຄື່ອງສະບັດອອກຈາກວິຈິກິດສາທີ່ເກີດຂຶ້ນແລ້ວຕາມຄວາມເປັນຈິງ ສະໄໝນັ້ນ ບຸກຄົນບໍ່ຮູ້ ບໍ່ເຫັນແມ່ນປະໂຫຍດຕົນ ປະໂຫຍດ ຜູ້ອື່ນ ແລະ ປະໂຫຍດທັງສອງຕາມຄວາມເປັນຈິງ ມົນແມ່ນທີ່ສາທະຍາຍ ມາເປັນເວລາດົນກໍບໍ່ແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ບໍ່ໄດ້ສາທະຍາຍເລີຍ

ພາຊະນະນ້ຳຂຸ່ນມົວ ເປັນຕົມ ທີ່ເຂົາວາງໄວ້ໃນບ່ອນມືດ ຄົນມີຕາດີ ແນມເບິ່ງເງົາໜ້າຂອງຕົນໃນພາຊະນະນ້ຳນັ້ນ ບໍ່ເພິ່ງຮູ້ ບໍ່ເພິ່ງເຫັນຕາມຄວາມເປັນຈິງ ແມ່ນສັນໃດ

ສະໄໝໃດ ບຸກຄົນມີຈິດຖືກວິຈິກິດສາຕຸ້ມສຸມ ຖືກວິຈິກິດສາຄອບງຳຢູ່ ແລະບໍ່ຮູ້ແຈ້ງທຳເຄື່ອງສະບັດອອກຈາກວິຈິກິດສາທີ່ເກີດຂຶ້ນແລ້ວຕາມຄວາມເປັນຈິງ ສະໄໝນັ້ນ ບຸກຄົນບໍ່ຮູ້ ບໍ່ເຫັນແມ່ນປະໂຫຍດຕົນ ປະໂຫຍດຜູ້ອື່ນ ແລະປະໂຫຍດທັງສອງຕາມຄວາມເປັນຈິງ ມົນແມ່ນທີ່ສາທະຍາຍມາເປັນເວລາດົນກໍບໍ່ແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ບໍ່ໄດ້ສາທະຍາຍເລີຍ ຄືກັນສັນນັ້ນ

ນີ້ແລ ເປັນເຫດເປັນປັດໄຈໃຫ້ມົນແມ່ນທີ່ສາທະຍາຍມາເປັນເວລາດົນກໍບໍ່ແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ບໍ່ໄດ້ສາທະຍາຍເລີຍ

ພາມ ແຕ່

໑. ສະໄໝໃດ ບຸກຄົນມີຈິດບໍ່ຖືກກາມຣາຄະຕຸ້ມສຸມ ບໍ່ຖືກກາມຣາຄະຄອບງຳຢູ່ ແລະຮູ້ແຈ້ງທຳເຄື່ອງສະບັດອອກຈາກກາມຣາຄະທີ່ເກີດຂື້ນແລ້ວຕາມຄວາມເປັນຈິງ ສະໄໝນັ້ນ ບຸກຄົນຍ່ອມຮູ້ ຍ່ອມເຫັນແມ່ນປະໂຫຍດຕົນ ປະໂຫຍດຜູ້ອື່ນ ແລະປະໂຫຍດທັງສອງຕາມຄວາມເປັນຈິງ ມົນແມ່ນທີ່ບໍ່ໄດ້ສາທະຍາຍມາເປັນເວລາດົນກໍແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ສາທະຍາຍເລີຍ

ພາຊະນະນ້ຳເຊິ່ງບໍ່ຜະສົມດ້ວຍຄັ່ງ ຂີ້ມິ້ນ ສີຂຽວ ຫຼືສີເຫຼືອງອ່ອນ ຄົນມີຕາດີ ແນມ ເບິ່ງເງົາໜ້າຂອງຕົນໃນພາຊະນະນ້ຳນັ້ນເພິ່ງຮູ້ ເພິ່ງເຫັນຕາມຄວາມເປັນຈິງ ແມ່ນສັນໃດ

ສະໄໝໃດ ບຸກຄົນມີຈິດບໍ່ຖືກກາມຣາຄະຕຸ້ມສຸມ ບໍ່ຖືກກາມຣາຄະຄອບງຳຢູ່ ແລະຮູ້ແຈ້ງທຳເຄື່ອງສະບັດອອກຈາກກາມຣາຄະທີ່ເກີດຂື້ນແລ້ວຕາມຄວາມເປັນຈິງ ຯລຯ

໔. ສະໄໝໃດ ບຸກຄົນມີຈິດບໍ່ຖືກພະຍາບາດຕຸ້ມສຸມ ບໍ່ຖືກພະຍາບາດຄອບງຳຢູ່ ແລະຮູ້ແຈ້ງທຳເຄື່ອງສະບັດອອກຈາກພະຍາບາດທີ່ເກີດຂື້ນແລ້ວຕາມຄວາມເປັນຈິງ ສະໄໝນັ້ນ ບຸກຄົນຍ່ອມຮູ້ ຍ່ອມເຫັນແມ່ນປະໂຫຍດຕົນ ປະໂຫຍດຜູ້ອື່ນ ແລະປະໂຫຍດທັງສອງຕາມຄວາມເປັນຈິງ ມົນແມ່ນທີ່ບໍ່ໄດ້ສາທະຍາຍມາເປັນເວລາດົນກໍແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ສາທະຍາຍເລີຍ

ພາຊະນະນ້ຳບໍ່ຮ້ອນຍ້ອນໄຟ ບໍ່ຮ້ອນພົດ ບໍ່ເປັນອາຍ ຄົນມີຕາດີແນມເບິ່ງເງົາໜ້າຂອງຕົນໃນພາຊະນະນ້ຳນັ້ນເພິ່ງຮູ້ ເພິ່ງເຫັນຕາມຄວາມເປັນຈິງ ແມ່ນສັນໃດ

ສະໄໝໃດ ບຸກຄົນມີຈິດບໍ່ຖືກພະຍາບາດຕຸ້ມສຸມ ບໍ່ຖືກພະຍາບາດຄອບງຳຢູ່ ແລະຮູ້ແຈ້ງທຳເຄື່ອງສະບັດອອກຈາກພະຍາບາດທີ່ເກີດຂື້ນແລ້ວຕາມຄວາມເປັນຈິງ ສະໄໝນັ້ນ ບຸກຄົນຍ່ອມຮູ້ ຍ່ອມເຫັນແມ່ນປະໂຫຍດຕົນ ປະໂຫຍດຜູ້ອື່ນ ແລະປະໂຫຍດທັງສອງຕາມຄວາມເປັນຈິງ ມົນແມ່ນທີ່ບໍ່ໄດ້ສາທະຍາຍມາເປັນເວລາດົນກໍແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ສາທະຍາຍເລີຍ ຄືກັນສັນນັ້ນ

໓. ສະໄໝໃດ ບຸກຄົນມີຈິດບໍ່ຖືກຖີນະມິດທະຕຸ້ມສຸມ ບໍ່ຖືກຖີນະມິດທະຄອບງຳຢູ່ ແລະຮູ້ແຈ້ງທຳເຄື່ອງສະບັດອອກຈາກຖີນະມິດທະທີ່ເກີດຂື້ນແລ້ວຕາມຄວາມເປັນຈິງ ສະໄໝນັ້ນ ບຸກຄົນຍ່ອມຮູ້ ຍ່ອມເຫັນແມ່ນປະໂຫຍດຕົນ ປະໂຫຍດຜູ້ອື່ນ ແລະປະໂຫຍດທັງສອງຕາມຄວາມ

ເປັນຈິງ ມັນແມ່ນທີ່ບໍ່ໄດ້ສາທະຍາຍມາເປັນເວລາດົນກໍແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມັນທີ່ສາທະຍາຍເລີຍ

ພາຊະນະນ້ຳບໍ່ຖືກສາຫຮ່າຍແລະແໜປົກຄຸມໄວ້ ຄົນມີຕາດີແນມເບິ່ງເງົາໜ້າຂອງຕົນໃນພາຊະນະນ້ຳນັ້ນເພິ່ງຮູ້ ເພິ່ງເຫັນຕາມຄວາມເປັນຈິງ ແມ່ນສັນໃດ

ສະໄໝໃດ ບຸກຄົນມີຈິດບໍ່ຖືກຖີນະມິດທະຕຸ້ມສຸມ ບໍ່ຖືກຖີນະມິດທະຄອບງຳຢູ່ ແລະຮູ້ແຈ້ງທຳເຄື່ອງສະບັດອອກຈາກຖີນະມິດທະທີ່ເກີດຂື້ນແລ້ວຕາມຄວາມເປັນຈິງ ສະໄໝນັ້ນ ບຸກຄົນຍ່ອມຮູ້ຍ່ອມເຫັນແມ່ນປະໂຫຍດຕົນ ປະໂຫຍດຜູ້ອື່ນ ແລະປະໂຫຍດທັງສອງຕາມຄວາມເປັນຈິງ ມັນແມ່ນທີ່ບໍ່ໄດ້ສາທະຍາຍມາເປັນເວລາດົນກໍແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມັນທີ່ສາທະຍາຍເລີຍ ຄືກັນສັນນັ້ນ

໔. ສະໄໝໃດ ບຸກຄົນມີຈິດບໍ່ຖືກອຸດທັດຈະກຸກກຸດຈະຕຸ້ມສຸມ ບໍ່ຖືກອຸທທັດຈະກຸກກຸດຈະຄອບງຳຢູ່ ແລະຮູ້ແຈ້ງທຳເຄື່ອງສະບັດອອກຈາກອຸດທັດຈະກຸກກຸດຈະທີ່ເກີດຂື້ນແລ້ວຕາມຄວາມເປັນຈິງ ສະໄໝນັ້ນ ບຸກຄົນຍ່ອມຮູ້ ຍ່ອມເຫັນແມ່ນປະໂຫຍດຕົນ ປະໂຫຍດຜູ້ອື່ນ ແລະປະໂຫຍດທັງສອງ ຕາມຄວາມເປັນຈິງ ມັນແມ່ນທີ່ບໍ່ໄດ້ສາທະຍາຍມາເປັນເວລາດົນ ກໍແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມັນທີ່ສາທະຍາຍເລີຍ

ພາຊະນະນ້ຳບໍ່ຖືກລົມພັດ ກໍບໍ່ໄຫວ ບໍ່ວົນ ບໍ່ເປັນຄື້ນ ຄົນມີຕາດີແນມເບິ່ງເງົາໜ້າຂອງຕົນໃນພາຊະນະນ້ຳນັ້ນ ເພິ່ງຮູ້ ເພິ່ງເຫັນຕາມຄວາມເປັນຈິງ ແມ່ນສັນໃດ

ສະໄໝໃດ ບຸກຄົນມີຈິດບໍ່ຖືກອຸດທັດຈະກຸກກຸດຈະຕຸ້ມສຸມ ບໍ່ຖືກອຸດທັດຈະກຸກກຸດຈະຄອບງຳຢູ່ ແລະຮູ້ແຈ້ງທຳເຄື່ອງສະບັດອອກຈາກອຸດທັດຈະກຸກກຸດຈະທີ່ເກີດຂື້ນແລ້ວຕາມຄວາມເປັນຈິງ ສະໄໝນັ້ນ ບຸກຄົນຍ່ອມຮູ້ ຍ່ອມເຫັນແມ່ນປະໂຫຍດຕົນ ປະໂຫຍດຜູ້ອື່ນ ແລະປະໂຫຍດທັງສອງຕາມຄວາມເປັນຈິງ ມັນແມ່ນທີ່ບໍ່ໄດ້ສາທະຍາຍມາເປັນເວລາດົນ ກໍແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມັນທີ່ສາທະຍາຍເລີຍ ຄືກັນສັນນັ້ນ

໕. ສະໄໝໃດ ບຸກຄົນມີຈິດບໍ່ຖືກວິຈິກິດສາຕຸ້ມສຸມ ບໍ່ຖືກວິຈິກິດສາຄອບງຳຢູ່ ແລະຮູ້ແຈ້ງທຳເຄື່ອງສະບັດອອກຈາກວິຈິກິດສາທີ່ເກີດຂື້ນແລ້ວຕາມຄວາມເປັນຈິງ ສະໄໝນັ້ນ ບຸກຄົນຍ່ອມຮູ້ ຍ່ອມເຫັນແມ່ນປະໂຫຍດຕົນ ປະໂຫຍດຜູ້ອື່ນ ແລະປະໂຫຍດທັງສອງຕາມຄວາມເປັນຈິງ ມັນແມ່ນທີ່ບໍ່ໄດ້ສາທະຍາຍມາເປັນເວລາດົນກໍແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມັນທີ່ສາທະຍາຍເລີຍ

ພາຊະນະນ້ຳໃສແຈ່ວ ບໍ່ຂຸ່ນມົວ ທີ່ເຂົາວາງໄວ້ໃນກາງແຈ້ງ ຄົນມີຕາດີແນມເບິ່ງເງົາໜ້າ

ຂອງຕົນໃນພາຊະນະນ້ຳນັ້ນເພິ່ງຮູ້ ເພິ່ງເຫັນຕາມຄວາມເປັນຈິງ ແມ່ນສັນໃດ

ສະໄໝໃດ ບຸກຄົນມີຈິດບໍ່ຖືກວິຈິກິດສາຕຸ້ມສຸມ ບໍ່ຖືກວິຈິກິດສາຄອບງຳຢູ່ ແລະຮູ້ແຈ້ງທຳເຄື່ອງສະບັດອອກຈາກວິຈິກິດສາທີ່ເກີດຂຶ້ນແລ້ວຕາມຄວາມເປັນຈິງ ສະໄໝນັ້ນ ບຸກຄົນຍ່ອມຮູ້ ຍ່ອມເຫັນແມ່ນປະໂຫຍດຕົນ ປະໂຫຍດຜູ້ອື່ນ ແລະປະໂຫຍດທັງສອງຕາມຄວາມເປັນຈິງ ມົນແມ່ນທີ່ບໍ່ໄດ້ສາທະຍາຍມາເປັນເວລາດົນກໍແຈ່ມແຈ້ງໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ສາທະຍາຍເລີຍ ຄືກັນສັນນັ້ນ

ນີ້ແລ ເປັນເຫດເປັນປັດໄຈໃຫ້ມົນແມ່ນທີ່ບໍ່ໄດ້ສາທະຍາຍມາເປັນເວລາດົນກໍແຈ່ມແຈ້ງໄດ້ໃນການບາງເວລາ ບໍ່ຈຳເປັນຕ້ອງເວົ້າເຖິງມົນທີ່ສາທະຍາຍເລີຍ໑

ພາມ ໂພດຊົງ ໗ ປະການນີ້ບໍ່ເປັນນີວອນເຄື່ອງກາງກັ້ນ ບໍ່ເປັນຄວາມເສົ້າໝອງແຫ່ງຈິດທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງຜົນແຫ່ງວິດຊາແລະວິມຸດຕິ

ໂພດຊົງ ໗ ປະການ ອັນໃດແດ່ ຄື

໑. ສະຕິສຳໂພດຊົງບໍ່ເປັນນີວອນເຄື່ອງກາງກັ້ນ ບໍ່ເປັນຄວາມເສົ້າໝອງ ແຫ່ງຈິດທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງຜົນແຫ່ງວິດຊາແລະວິມຸດຕິ

ຯລຯ

໗. ອຸເປກຂາສຳໂພດຊົງບໍ່ເປັນນີວອນເຄື່ອງກາງກັ້ນ ບໍ່ເປັນຄວາມເສົ້າໝອງແຫ່ງຈິດທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງຜົນແຫ່ງວິດຊາແລະວິມຸດຕິ

ພາມ ໂພດຊົງ ໗ ປະການນີ້ບໍ່ເປັນນີວອນເຄື່ອງກາງກັ້ນ ບໍ່ເປັນຄວາມເສົ້າໝອງແຫ່ງຈິດທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງຜົນແຫ່ງ ວິດຊາແລະວິມຸດຕິ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ສັງຄາຣະວະພາມໄດ້ຂາບທູນວ່າ ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ຯລຯ ຂໍທ່ານ ພຣະໂຄດົມຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ສັງຄາຣະວະສູດທີ ໕ ຈົບ**

# ໖. ອະພະຍະສູດ

## ວ່າດ້ວຍອະໄພຣາດຊະກຸມານ

[໔໓໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພູຄິດຊະກູດ ເຂດເມືອງຣາດຊະຄຶ ຄັ້ງນັ້ນ ອະໄພຣາດຊະກຸມານເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ປູຣະນະກັດສະປະໄດ້ກ່າວວ່າ ເຫດບໍ່ມີ ປັດໄຈບໍ່ມີເພື່ອຄວາມບໍ່ຮູ້ ເພື່ອຄວາມບໍ່ເຫັນ ຄວາມບໍ່ຮູ້ ຄວາມບໍ່ເຫັນບໍ່ມີເຫດ ບໍ່ມີປັດໄຈ ເຫດບໍ່ມີ ປັດໄຈບໍ່ມີເພື່ອຄວາມຮູ້ ເພື່ອຄວາມເຫັນ ຄວາມຮູ້ ຄວາມເຫັນບໍ່ມີເຫດ ບໍ່ມີປັດໄຈ ໃນເລື້ອງນີ້ ພຣະອົງຕັດວ່າແນວໃດ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ຣາດຊະກຸມານ ເຫດມີ ປັດໄຈມີເພື່ອຄວາມບໍ່ຮູ້ ເພື່ອຄວາມບໍ່ເຫັນ ຄວາມບໍ່ຮູ້ ຄວາມບໍ່ເຫັນມີເຫດ ມີປັດໄຈ ເຫດມີ ປັດໄຈມີເພື່ອຄວາມຮູ້ ເພື່ອຄວາມເຫັນ ຄວາມຮູ້ ຄວາມເຫັນມີເຫດ ມີປັດໄຈ

ຂ້າແດ່ ພຣະອົງຜູ້ຈະເລີນ ເຫດເປັນແນວໃດ? ປັດໄຈເພື່ອຄວາມບໍ່ຮູ້ ເພື່ອຄວາມບໍ່ເຫັນເປັນແນວໃດ? ຄວາມບໍ່ຮູ້ ຄວາມບໍ່ເຫັນມີເຫດ ມີປັດໄຈແນວໃດ

ຣາດຊະກຸມານ ສະໄໝໃດ ບຸກຄົນມີຈິດຖືກກາມຣາຄະຕຸ້ມສຸມ ຖືກກາມຣາຄະຄອບງຳຢູ່ ແລະບໍ່ຮູ້ ບໍ່ເຫັນທຳເຄື່ອງສະບັດອອກຈາກກາມຣາຄະທີ່ເກີດຂຶ້ນແລ້ວຕາມຄວາມເປັນຈິງ ນີ້ແລເປັນເຫດເປັນປັດໄຈ ເພື່ອຄວາມບໍ່ຮູ້ ເພື່ອຄວາມບໍ່ເຫັນ ຄວາມບໍ່ຮູ້ ຄວາມບໍ່ເຫັນ ມີເຫດ ມີປັດໄຈ ແມ່ນແນວນີ້

ອີກປະການໜຶ່ງ ສະໄໝໃດ ບຸກຄົນມີຈິດຖືກພະຍາບາດຕຸ້ມສຸມ ຖືກພະຍາບາດຄອບງຳຢູ່ ແລະບໍ່ຮູ້ ບໍ່ເຫັນທຳເຄື່ອງສະບັດອອກຈາກພະຍາບາດທີ່ເກີດຂຶ້ນແລ້ວຕາມຄວາມເປັນຈິງ ນີ້ແລເປັນເຫດ ເປັນປັດໄຈ ເພື່ອຄວາມບໍ່ຮູ້ ເພື່ອຄວາມບໍ່ເຫັນ ຄວາມບໍ່ຮູ້ ຄວາມບໍ່ເຫັນມີເຫດ ມີປັດໄຈ ແມ່ນແນວນີ້

ອີກປະການໜຶ່ງ ສະໄໝໃດ ບຸກຄົນມີຈິດຖືກຖີນະມິດທະຕຸ້ມສຸມ ຯລຯ ມີຈິດຖືກ ອຸດທັດຈະກຸກກຸດຈະຕຸ້ມສຸມ ຯລຯ ມີຈິດຖືກວິຈິກິດສາຕຸ້ມສຸມ ຖືກວິຈິກິດສາຄອບງຳຢູ່ ແລະບໍ່ຮູ້ ບໍ່ເຫັນທຳເຄື່ອງສະບັດອອກຈາກວິຈິກິດສາທີ່ເກີດຂຶ້ນແລ້ວຕາມຄວາມເປັນຈິງ ນີ້ແລ ເປັນເຫດເປັນປັດໄຈ ເພື່ອຄວາມບໍ່ຮູ້ ເພື່ອຄວາມບໍ່ເຫັນ ຄວາມບໍ່ຮູ້ ຄວາມບໍ່ເຫັນ ມີເຫດ ມີປັດໄຈ ແມ່ນແນວນີ້

ຂ້າແດ່ ພຣະອົງຜູ້ຈະເລີນ ທຳບັນລະຍາຍນີ້ຊື່ອັນໃດ

ธາດຊະກຸມານ ທຳເຫຼົ່ານີ້ຊື່ ນິວອນ

ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ນິວອນເປັນແນວນີ້ ຂ້າແດ່ພຣະສຸຄົດເຈົ້າ ນິວອນເປັນແນວນີ້ ຂ້າແດ່ ພຣະອົງຜູ້ຈະເລີນ ບຸກຄົນຖືກນິວອນແມ່ນແນວໃດແນວໜຶ່ງຄອບງຳແລ້ວ ກໍບໍ່ຮູ້ບໍ່ເຫັນຕາມຄວາມເປັນຈິງ ບໍ່ຈຳເປັນຕ້ອງເວົ້າເຖິງບຸກຄົນຜູ້ຖືກນິວອນທັງ ໕ ຄອບງຳເລີຍ

ຂ້າແດ່ ພຣະອົງຜູ້ຈະເລີນ ອັນໜຶ່ງ ເຫດເປັນແນວໃດ? ປັດໄຈເພື່ອຄວາມຮູ້ ເພື່ອຄວາມເຫັນເປັນແນວໃດ? ຄວາມຮູ້ ຄວາມເຫັນມີເຫດ ມີປັດໄຈແນວໃດ

ธາດຊະກຸມານ ພິກຂຸໃນທຳວິໄນນີ້ຈະເລີນສະຕິສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ ທ່ານມີຈິດອັນສະຕິສຳໂພດຊົງໃຫ້ຈະເລີນແລ້ວຍ່ອມຮູ້ ຍ່ອມເຫັນຕາມຄວາມເປັນຈິງ ธາດຊະກຸມານ ນີ້ແລເປັນເຫດ ເປັນປັດໄຈເພື່ອຄວາມຮູ້ ເພື່ອຄວາມເຫັນ ຄວາມຮູ້ ຄວາມເຫັນມີເຫດ ມີປັດໄຈ ແມ່ນແນວນີ້

ອີກປະການໜຶ່ງ ຯລຯ ພິກຂຸຈະເລີນອຸເປກຂາສຳໂພດຊົງອັນອາໄສວິເວກ ອາໄສ ວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ ທ່ານມີຈິດອັນອຸເປກຂາສຳໂພດຊົງໃຫ້ຈະເລີນແລ້ວຍ່ອມຮູ້ ຍ່ອມເຫັນຕາມຄວາມເປັນຈິງ ธາດຊະກຸມານ ນີ້ແລເປັນເຫດ ເປັນປັດໄຈ ເພື່ອຄວາມຮູ້ເພື່ອຄວາມເຫັນ ຄວາມຮູ້ ຄວາມເຫັນມີເຫດ ມີປັດໄຈ ແມ່ນແນວນີ້

ຂ້າແດ່ ພຣະອົງຜູ້ຈະເລີນ ທຳບັນລະຍາຍນີ້ຊື່ອັນໃດ

ธາດຊະກຸມານ ທຳເຫຼົ່ານີ້ຊື່ ໂພດຊົງ

ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ໂພດຊົງເປັນແນວນີ້ ຂ້າແດ່ພຣະສຸຄົດເຈົ້າ ໂພດຊົງເປັນແນວນີ້ ຂ້າແດ່ພຣະອົງຜູ້ຈະເລີນ ບຸກຄົນຜູ້ປະກອບດ້ວຍໂພດຊົງແມ່ນແນວໃດແນວໜຶ່ງເພິ່ງຮູ້ເພິ່ງເຫັນຕາມຄວາມເປັນຈິງ ບໍ່ຈຳເປັນຕ້ອງເວົ້າເຖິງບຸກຄົນຜູ້ປະກອບດ້ວຍໂພດຊົງທັງ ໗ ປະການເລີຍ ຂ້າແດ່ພຣະອົງຜູ້ຈະເລີນ ແມ່ນຄວາມອິດເມື່ອຍອ່ອນແຮງກາຍໃຈທີ່ມີແກ່ຂ້າພຣະອົງຜູ້ຂຶ້ນພູຄິດຊະກູດກໍລະງັບໄປ ແລະ ທຳອັນຂ້າພຣະອົງກໍໄດ້ບັນລຸແລ້ວ

**ອະພະຍະສູດທີ ໖ ຈົບ**

**ໂພຊຊັງຄະສາກັຈສະວັກທີ ໖ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື



# ໗. ອານາປານະວັກ

## ໝວດວ່າດ້ວຍອານາປານະສະຕິ

# ໑. ອັດຖິກະມະຫັບຜະລະສູດ

## ວ່າດ້ວຍອັດຖິກະສັນຍາມີຜົນຫຼາຍ

[໔໒໘] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອັດຖິກະສັນຍາ (ຄວາມໝາຍຮູ້ຊາກສົບທີ່ຍັງເຫຼືອຢູ່ແຕ່ຮ່າງກະດູກຫຼືກະດູກທ່ອນ) ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ມີຜົນຫຼາຍ ມີອານິສົງຫຼາຍ

ອັດຖິກະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ມີຜົນຫຼາຍ ມີອານິສົງຫຼາຍ ແນວໃດ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງທີ່ປະກອບດ້ວຍອັດຖິກະສັນຍາ ອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ฯลฯ

໗. ຈະເລີນອຸເປກຂາສຳໂພດຊົງທີ່ປະກອບດ້ວຍອັດຖິກະສັນຍາ ອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ອັດຖິກະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ມີຜົນຫຼາຍ ມີອານິສົງຫຼາຍ ແນວນີ້ແລ

# (໑) ອັນຍະຕະຣະຜະລະສູດ

## ວ່າດ້ວຍອັດຖິກະສັນຍາມີຜົນແນວໃດແນວໜຶ່ງ

ພິກຂຸທັງຫຼາຍ ເມື່ອອັດຖິກະສັນຍາອັນບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວເພິ່ງຫວັງຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ ກໍຈັກເປັນພຣະອະນາຄາມີ

ເມື່ອອັດຖິກະສັນຍາອັນບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວເພິ່ງຫວັງຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນພຣະອະນາຄາມີ ແນວໃດ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງທີ່ປະກອບດ້ວຍອັດຖິກະສັນຍາ

ฯລฯ

໗. ຈະເລີນອຸເປກຂາສຳໂພດຊົງທີ່ປະກອບດ້ວຍອັດຖິກະສັນຍາ ອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ເມື່ອອັດຖິກະສັນຍາອັນບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວເພິ່ງຫວັງຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນພຣະອະນາຄາມີ ແນວນີ້ແລ

# (໒) ມະຫັດຖະສູດ

## ວ່າດ້ວຍອັດຖິກະສັນຍາເປັນໄປເພື່ອປະໂຫຍດຫຼາຍ

ພິກຂຸທັງຫຼາຍ ອັດຖິກະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອປະໂຫຍດຫຼາຍ

ອັດຖິກະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອປະໂຫຍດຫຼາຍແນວໃດ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງທີ່ປະກອບດ້ວຍອັດຖິກະສັນຍາ

ຯລຯ

໗. ຈະເລີນອຸເປກຂາສຳໂພດຊົງທີ່ປະກອບດ້ວຍອັດຖິກະສັນຍາ ອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ອັດຖິກະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອປະໂຫຍດຫຼາຍ ແນວນີ້ແລ

# (໓) ໂຍຄັກເຂມະສູດ

## ວ່າດ້ວຍອັດຖິກະສັນຍາເປັນໄປເພື່ອທຳເປັນແດນກະເສມຈາກໂຍຄະ

ພິກຂຸທັງຫຼາຍ ອັດຖິກະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອທຳເປັນແດນກະເສມຈາກໂຍຄະຫຼາຍ

ອັດຖິກະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອທຳເປັນແດນກະເສມຈາກໂຍຄະຫຼາຍ ແນວໃດ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງທີ່ປະກອບດ້ວຍອັດຖິກະສັນຍາ

ຯລຯ

໗. ຈະເລີນອຸເປກຂາສຳໂພດຊົງທີ່ປະກອບດ້ວຍອັດຖິກະສັນຍາ ອັນອາໄສ ວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ອັດຖິກະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອທຳເປັນແດນກະເສມຈາກໂຍຄະຫຼາຍ ແນວນີ້ແລ

# (໔) ສັງເວຄະສູດ

## ວ່າດ້ວຍອັດຖິກະສັນຍາເປັນໄປເພື່ອຄວາມສັງເວດ

ພິກຂຸທັງຫຼາຍ ອັດຖິກະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມສັງເວດຫຼາຍ

ອັດຖັງຄະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມສັງເວດຫຼາຍ ແນວໃດ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງທີ່ປະກອບດ້ວຍອັດຖັງຄະສັນຍາ

ຯລຯ

໗. ຈະເລີນອຸເປກຂາສຳໂພດຊົງທີ່ປະກອບດ້ວຍອັດຖັງຄະສັນຍາ ອັນອາໄສ ວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ອັດຖັງຄະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມສັງເວດຫຼາຍ ແນວນີ້ແລ

# (໕) ຜາສຸວິຫາຣະສູດ

## ວ່າດ້ວຍອັດຖັງຄະສັນຍາເປັນໄປເພື່ອຄວາມຢູ່ຜາສຸກ

ພິກຂຸທັງຫຼາຍ ອັດຖັງຄະສັນຍາ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມຢູ່ຜາສຸກຫຼາຍ

ອັດຖັງຄະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມຢູ່ຜາສຸກຫຼາຍ ແນວໃດ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງທີ່ປະກອບດ້ວຍອັດຖັງຄະສັນຍາ

ຯລຯ

໗. ຈະເລີນອຸເປກຂາສຳໂພດຊົງທີ່ປະກອບດ້ວຍອັດຖັງຄະສັນຍາ ອັນອາໄສ ວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ອັດຖັງຄະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມຢູ່ຜາສຸກຫຼາຍ ແນວນີ້ແລ

**ອັດຖັງຄະມະຫັປຜະລະສູດທີ ໑ ຈົບ**

# ໘. ປຸລະວະກະສູດ

## ວ່າດ້ວຍປຸລະວະກະສັນຍາ

[໔໓໙] ພິກຂຸທັງຫຼາຍ ປຸລະວະກະສັນຍາ (ຄວາມໝາຍຮູ້ຊາກສົບທີ່ມີໜອນຈຳນວນຫຼາຍເຕັມໄປໝົດ) ທີ່ບຸກຄົນຈະເລີນແລ້ວ ຯລຯ

**ປຸລະວະກະສູດທີ ໘ ຈົບ**

# ໙. ວິນີລະກະສູດ

## ວ່າດ້ວຍວິນີລະກະສັນຍາ

[໔໔໐] ພິກຂຸທັງຫຼາຍ ວິນີລະກະສັນຍາ (ຄວາມໝາຍຮູ້ຊາກສົບທີ່ມີສີຂຽວກ່ຳປົນດ້ວຍສີຕ່າງ ໆ) ທີ່ບຸກຄົນຈະເລີນແລ້ວ ຯລຯ

**ວິນີລະກະສູດທີ ໙ ຈົບ**

# ໑໐. ວິດສິດທະກະສູດ

## ວ່າດ້ວຍວິດສິດທະກະສັນຍາ

[໔໔໑] ພິກຂຸທັງຫຼາຍ ວິດສິດທະກະສັນຍາ (ຄວາມໝາຍຮູ້ຊາກສົບທີ່ຂາດຈາກກັນເປັນທ່ອນ ໆ) ທີ່ບຸກຄົນຈະເລີນແລ້ວ ຯລຯ

**ວິດສິດທະກະສູດທີ ໑໐ ຈົບ**

# ໑໑. ອຸດທຸມາຕະກະສູດ

## ວ່າດ້ວຍອຸດທຸມາຕະກະສັນຍາ

[໔໔໒] ພິກຂຸທັງຫຼາຍ ອຸດທຸມາຕະກະສັນຍາ (ຄວາມໝາຍຮູ້ຊາກສົບທີ່ເນົ່າພອງໄຄ່ເບັງ) ທີ່ບຸກຄົນຈະເລີນແລ້ວ ຯລຯ

**ອຸດທຸມາຕະກະສູດທີ ໑໑ ຈົບ**

## ໖. ເມດຕາສູດ
### ວ່າດ້ວຍເມດຕາ

[໔໔໓] ພິກຂຸທັງຫຼາຍ ເມດຕາທີ່ບຸກຄົນຈະເລີນແລ້ວ ຯລຯ

**ເມດຕາສູດທີ ໖ ຈົບ**

## ໗. ກະລຸນາສູດ
### ວ່າດ້ວຍກະລຸນາ

[໔໔໔] ພິກຂຸທັງຫຼາຍ ກະລຸນາທີ່ບຸກຄົນຈະເລີນແລ້ວ ຯລຯ

**ກະລຸນາສູດທີ ໗ ຈົບ**

## ໘. ມຸທິຕາສູດ
### ວ່າດ້ວຍມຸທິຕາ

[໔໔໕] ພິກຂຸທັງຫຼາຍ ມຸທິຕາທີ່ບຸກຄົນຈະເລີນແລ້ວ ຯລຯ

**ມຸທິຕາສູດທີ ໘ ຈົບ**

## ໙. ອຸເປກຂາສູດ
### ວ່າດ້ວຍອຸເປກຂາ

[໔໔໖] ພິກຂຸທັງຫຼາຍ ອຸເປກຂາທີ່ບຸກຄົນຈະເລີນແລ້ວ ຯລຯ

**ອຸເປກຂາສູດທີ ໙ ຈົບ**

## ໑໐. ອານາປານະສູດ
### ວ່າດ້ວຍອານາປານະສະຕິ

[໔໔໗] ພິກຂຸທັງຫຼາຍ ອານາປານະສະຕິ (ສະຕິກຳນົດລົມຫັນໃຈເຂົ້າອອກ) ທີ່ບຸກຄົນຈະເລີນແລ້ວ ຯລຯ

ອານາປານະສູດທີ ໑໐ ຈົບ

ອານາປານະວັກທີ ໗ ຈົບ

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໘. ນິໂຣທະວັກ

## ໝວດວ່າດ້ວຍນິໂຣດ

# ໑. ອະສຸພະສູດ

## ວ່າດ້ວຍອະສຸພະສັນຍາ

[໔໔໘] ພິກຂຸທັງຫຼາຍ ອະສຸພະສັນຍາ (ຄວາມໝາຍຮູ້ຄວາມບໍ່ງາມ) ທີ່ບຸກຄົນຈະເລີນແລ້ວ ຯລຯ

ອະສຸພະສູດທີ ໑ ຈົບ

# ໒. ມໍຣະນະສູດ

## ວ່າດ້ວຍມໍຣະນະສັນຍາ

[໔໔໙] ພິກຂຸທັງຫຼາຍ ມໍຣະນະສັນຍາ (ຄວາມໝາຍຮູ້ຄວາມຕາຍ) ທີ່ບຸກຄົນຈະເລີນແລ້ວ ຯລຯ

ມໍຣະນະສູດທີ ໒ ຈົບ

# ๓. ອາຫາເຣປະຕິກູລະສູດ

## ວ່າດ້ວຍອາຫາເຣປະຕິກູນສັນຍາ

[໔໕໐] ພິກຂຸທັງຫຼາຍ ອາຫາເຣປະຕິກູນສັນຍາ (ຄວາມໝາຍຮູ້ຄວາມປະຕິກູນໃນອາຫານ) ທີ່ບຸກຄົນຈະເລີນແລ້ວ ໆລໆ

**ອາຫາເຣປະຕິກູລະສູດທີ ๓ ຈົບ**

# ໔. ອະນະພິຣະຕິສູດ

## ວ່າດ້ວຍອະນະພິຣະຕິສັນຍາ

[໔໕໑] ພິກຂຸທັງຫຼາຍ ສັບພະໂລເກອະນະພິຣະຕິສັນຍາ (ຄວາມໝາຍຮູ້ຄວາມບໍ່ໜ້າເພີດເພີນໃນໂລກທັງປວງ) ທີ່ບຸກຄົນຈະເລີນແລ້ວ ໆລໆ

**ອະນະພິຣະຕິສູດທີ ໔ ຈົບ**

# ໕. ອະນິດຈະສູດ

## ວ່າດ້ວຍອະນິດຈະສັນຍາ

[໔໕໔] ພິກຂຸທັງຫຼາຍ ອະນິດຈະສັນຍາ(ຄວາມໝາຍຮູ້ຄວາມບໍ່ທ່ຽງ) ທີ່ບຸກຄົນ ຈະເລີນແລ້ວ ໆລໆ

**ອະນິດຈະສູດທີ ໕ ຈົບ**

# ໖. ທຸກຂະສູດ

## ວ່າດ້ວຍທຸກຂະສັນຍາ

[໔໕๓] ພິກຂຸທັງຫຼາຍ ທຸກຂະສັນຍາ(ຄວາມໝາຍຮູ້ຄວາມເປັນທຸກ) ທີ່ບຸກຄົນ ຈະເລີນແລ້ວ ໆລໆ

**ທຸກຂະສູດທີ ໖ ຈົບ**

# ໗. ອະນັດຕະສູດ

## ວ່າດ້ວຍອະນັດຕະສັນຍາ

[໔໕໔] ພິກຂຸທັງຫຼາຍ ອະນັດຕະສັນຍາ (ຄວາມໝາຍຮູ້ຄວາມເປັນອະນັດຕາ) ທີ່ບຸກຄົນຈະເລີນແລ້ວ ໆລໆ

**ອະນັດຕະສູດທີ ໗ ຈົບ**

# ໘. ປະຫານະສູດ

## ວ່າດ້ວຍປະຫານະສັນຍາ

[໔໕໕] ພິກຂຸທັງຫຼາຍ ປະຫານະສັນຍາ (ຄວາມໝາຍຮູ້ການລະ) ທີ່ບຸກຄົນຈະເລີນແລ້ວ ໆລໆ

**ປະຫານະສູດທີ ໘ ຈົບ**

# ໙. ວິຣາຄະສູດ

## ວ່າດ້ວຍວິຣາຄະສັນຍາ

[໔໕໖] ພິກຂຸທັງຫຼາຍ ວິຣາຄະສັນຍາ (ຄວາມໝາຍຮູ້ວິຣາຄະ) ທີ່ບຸກຄົນຈະເລີນແລ້ວ ໆລໆ

**ວິຣາຄະສູດທີ ໙ ຈົບ**

# ໑໐. ນິໂຣທະສູດ

## ວ່າດ້ວຍນິໂຣດສັນຍາ

[໔໕໗] ພິກຂຸທັງຫຼາຍ ນິໂຣທະສັນຍາ (ຄວາມໝາຍຮູ້ນິໂຣທ) ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວມີຜົນຫຼາຍ ມີອານິສົງຫຼາຍ

ນິໂຣທະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວມີຜົນຫຼາຍ ມີອານິສົງຫຼາຍ ແນວໃດ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງທີ່ປະກອບດ້ວຍອັດຖິກະສັນຍາ

ฯลฯ

໗. ຈະເລີນອຸເປກຂາສຳໂພດຊົງທີ່ປະກອບດ້ວຍອັດຖິກະສັນຍາ ອັນອາໄສ ວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ນິໂຣທະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ມີຜົນຫຼາຍ ມີອານິສົງຫຼາຍແນວນີ້

ພິກຂຸທັງຫຼາຍ ເມື່ອນິໂຣທະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວເພິ່ງຫວັງຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນພຣະອະນາຄາມີ

ເມື່ອນິໂຣທະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວເພິ່ງຫວັງຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼືເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນພຣະ

ອະນາຄາມີ ແນວໃດ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງທີ່ປະກອບດ້ວຍອັດຖິກະສັນຍາ

ฯลฯ

໗. ຈະເລີນອຸເປກຂາສຳໂພດຊົງທີ່ປະກອບດ້ວຍອັດຖິກະສັນຍາ ອັນອາໄສ ວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ເມື່ອນິໂຣທະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວເພິ່ງຫວັງຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼືເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນພຣະອະນາຄາມີ ແນວນີ້ແລ

ນິໂຣທະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອປະໂຫຍດຫຼາຍ ເພື່ອທຳທີ່ເປັນແດນກະເສມຈາກໂຍຄະຫຼາຍ ເພື່ອຄວາມສັງເວດຫຼາຍ ເພື່ອຄວາມຢູ່ຜາສຸກຫຼາຍ ນິໂຣທະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອປະໂຫຍດຫຼາຍ

ເພື່ອທຳທີ່ເປັນແດນກະເສມຈາກໂຍຄະຫຼາຍ ເພື່ອຄວາມສັງເວດຫຼາຍ ເພື່ອຄວາມຢູ່ຜາສຸກຫຼາຍ ແນວໃດ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງທີ່ປະກອບດ້ວຍອັດຖິກະສັນຍາ

ຯລຯ

໗. ຈະເລີນອຸເປກຂາສຳໂພດຊົງທີ່ປະກອບດ້ວຍອັດຖິກະສັນຍາ ອັນອາໄສ ວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ນິໂຣທະສັນຍາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອປະໂຫຍດຫຼາຍ ເພື່ອທຳທີ່ເປັນແດນກະເສມຈາກໂຍຄະຫຼາຍ ເພື່ອຄວາມສັງເວດຫຼາຍ ເພື່ອຄວາມຢູ່ຜາສຸກຫຼາຍ ແນວນີ້ແລ

**ນິໂຣທະສູດທີ ໑໐ ຈົບ**

**ນິໂຣທະວັກທີ ໗ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ອະສຸພະສູດ
໒. ອາຫາເຣປະຕິກູລະສູດ
໓. ອະນິດຈະສູດ
໗. ອະນັດຕະສູດ
໙. ວິຣາຄະສູດ

໔. ມໍຣະນະສູດ
໕. ອະນະພິຣະຕິສູດ
໖. ທຸກຂະສູດ
໘. ປະຫານະສູດ
໑໐. ນິໂຣທະສູດ

# ໗. ຄັງຄາເປີຍຍາລະວັກ

## ໝວດວ່າດ້ວຍຄັງຄາເປີຍຍາລະ

## ໑-໑໘. ຄັງຄານະທີອາທິສູດ

### ວ່າດ້ວຍອຸປະມາດ້ວຍແມ່ນ້ຳຄົງຄາເປັນຕົ້ນ

[໘໕໙-໘໖໙] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ແມ່ນ້ຳຄົງຄາໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ສັນໃດ ພິກຂຸເມື່ອຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ສັນນັ້ນ

ພິກຂຸເມື່ອຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍ

ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວໃດ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງ

ຯລຯ

໗. ຈະເລີນອຸເປກຂາສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸຈະເລີນໂພດຊົງ ໗ ປະການ ເຮັດໂພດຊົງ ໗ ປະການໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວນີ້ແລ

(ເພິ່ງເພີ່ມບາລີໃຫ້ພິດສະດານຈົນເຖິງເອສະນາສູດ)

**ຄັງຄານະທີອາທິສູດທີ ໑-໑໘ ຈົບ**

**ຄັງຄາເປີຍຍາລະວັກທີ ໗ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໑໐. ອັບປະມາທະວັກ

## ໝວດວ່າດ້ວຍຄວາມບໍ່ຜະໝາດ

# ໑-໑໐. ຕະຖາຄະຕາທິສູດ

## ວ່າດ້ວຍພຣະຕະຖາຄົດເຈົ້າເລີດກວ່າສັດທັງຫຼາຍເປັນຕົ້ນ

[໒໗໐-໒໗໙] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສັດທັງຫຼາຍບໍ່ມີຕີນ ມີສອງຕີນ ມີສີ່ຕີນ ຫຼື ມີຕີນຫຼາຍກໍຕາມ ມີປະມານທໍ່ໃດ

ເພິ່ງເພີ່ມຂໍ້ຄວາມຕໍ່ຈາກນີ້ໄປໃຫ້ພິດສະດານ

**ຕະຖາຄະຕາທິສູດທີ ໑-໑໐ ຈົບ**

**ອັບປະມາທະວັກທີ ໑໐ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໑໑. ພະລະກະຣະນີຍະວັກ

## ໝວດວ່າດ້ວຍການງານທີ່ເພິ່ງເຮັດດ້ວຍກຳລັງ

## ໑-໑໔. ພະລາທິສູດ

## ວ່າດ້ວຍອຸປະມາດ້ວຍການງານທີ່ເພິ່ງເຮັດດ້ວຍກຳລັງເປັນຕົ້ນ

[໔໗໐-໔໙໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ການງານທີ່ເພິ່ງເຮັດດ້ວຍກຳລັງທັງໝົດ ບຸກຄົນຕ້ອງອາໄສແຜ່ນດິນ ດຳລົງຢູ່ເທິງແຜ່ນດິນຈຶ່ງເຮັດໄດ້ ແມ່ນສັນໃດ

ເພິ່ງເພີ່ມຂໍ້ຄວາມຕໍ່ຈາກນີ້ໄປໃຫ້ພິດສະດານ

**ພະລາທິສູດທີ ໑-໑໔ ຈົບ**

**ພະລະກະຣະນີຍະວັກທີ ໑໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ພະລະສູດ | ໔. ພີຊະສູດ |
| ໓. ນາຄະສູດ | ໔. ຣຸກຂະສູດ |
| ໕. ກຸມພະສູດ | ໖. ສູກະສູດ |
| ໗. ອາກາສະສູດ | ໗. ປະຖົມເມຄະສູດ |
| ໙. ທຸຕິຍະເມຄະສູດ | ໑໐. ນາວາສູດ |
| ໑໑. ອາຄັນຕຸກະສູດ | ໑໔. ນະທີສູດ |

(ເພິ່ງຂະຫຍາຍພະລະກະຣະນີຍະວັກໃຫ້ພິດສະດານ ດ້ວຍອຳນາດໂພດຊົງແຫ່ງໂພດຊັງຄະສັງຍຸດ)

# ໑໔. ເອສະນາວັກ

## ໝວດວ່າດ້ວຍການສະແຫວງຫາ

## ໑-໑໑. ເອສະນາທິສູດ

## ວ່າດ້ວຍການສະແຫວງຫາເປັນຕົ້ນ

[໔໙໔-໓໐໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ການສະແຫວງຫາ ໓ ປະການນີ້

ການສະແຫວງຫາ ໓ ປະການ ອັນໃດແດ່ ຄື

໑. ການສະແຫວງຫາກາມ ໒. ການສະແຫວງຫາພົບ

໓. ການສະແຫວງຫາພົມມະຈັນ

ເພິ່ງເພີ່ມຂໍ້ຄວາມຕໍ່ຈາກນີ້ໄປໃຫ້ພິດສະດານ

**ເອສະນາທິສູດທີ ໑-໑໑ ຈົບ**

**ເອສະນາວັກທີ ໑໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ເອສະນາສູດ ໒. ວິທາສູດ

໓. ອາສະວະສູດ ໔. ພະວະສູດ

໕. ທຸກຂະຕາສູດ ໖. ຂີລະສູດ

໗. ມະລະສູດ ໘. ນີຄະສູດ

໙. ເວທະນາສູດ ໑໐. ຕັນຫາສູດ

໑໑. ຕະສິນາສູດ

(ຜູ້ຮູ້ທັງຫຼາຍເພິ່ງຂະຫຍາຍເອສະນາເປີຍຍາລະແຫ່ງໂພດຊັງຄະສັງຍຸດໂດຍອາໄສວິເວກ)

# ໑໓. ໂອຄະວັກ

## ໝວດວ່າດ້ວຍໂອຄະ

# ໑-໙. ໂອຄາທິສູດ

## ວ່າດ້ວຍໂອຄະເປັນຕົ້ນ

[໓໐໔-໓໑໐] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ໂອຄະ (ແມ່ນ້ຳ) ໔ ປະການນີ້

ໂອຄະ ໔ ປະການ ອັນໃດແດ່ ຄື

໑. ກາໂມຄະ
໓. ທິດໂຖຄະ
໔. ພະໂວຄະ
໔. ອະວິດໄຊຄະ

ເພິ່ງເພີ່ມຂໍ້ຄວາມຕໍ່ຈາກນີ້ໄປໃຫ້ພິດສະດານ

**ໂອຄາທີສູດທີ ໑-໙ ຈົບ**

# ໑໐. ອຸດທຳພາຄິຍະສູດ

## ວ່າດ້ວຍອຸທະທຳພາຄິຍະສັງໂຍດ

[໓໑໑] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ອຸດທຳພາຄິຍະສັງໂຍດ (ສັງໂຍດເບື້ອງສູງ) ໕ ປະການນີ້

ອຸດທຳພາຄິຍະສັງໂຍດ ໕ ປະການ ອັນໃດແດ່ ຄື

໑. ຣູບປະຣາຄະ
໔. ອະຣູບປະຣາຄະ
໓. ມານະ
໔. ອຸດທັດຈະ
໕. ອະວິດຊາ

ອຸດທຳພາຄິຍະສັງໂຍດ ໕ ປະການນີ້

ພິກຂຸເພິ່ງຈະເລີນໂພດຊົງ ໗ ປະການ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະ ອຸດທຳພາຄິຍະສັງໂຍດ ໕ ປະການນີ້

ໂພດຊົງ ໗ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

໗໑໗

໗. ຈະເລີນອຸເປກຂາສໍາໂພດຊົງອັນເປັນທໍາມີການກໍາຈັດຣາຄະ ໂທສະ ແລະໂມ ຫະເປັນບ່ອນສຸດ ຯລຯ ອັນຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ

ມີອະມະຕະເປັນບ່ອນສຸດ ຯລຯ ອັນນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນໂພດຊົງ ໗ ປະການນີ້ ເພື່ອຮູ້ຍິ່ງ ເພື່ອກໍານົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະອຸດທໍາພາຄິຍະສັງໂຍດ ໕ ປະການນີ້

**ອຸດທໍາພາຄິຍະສູດທີ ໑໐ ຈົບ**

**ໂອຄະວັກທີ ໑໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ໂອຄະສູດ
໒. ໂຍຄະສູດ
໓. ອຸປາທານະສູດ
໔. ຄັນຖະສູດ
໕. ອະນຸສະຍະສູດ
໖. ກາມມະຄຸນສູດ
໗. ນີວະຣະນະສູດ
໘. ອຸປາທານັກຂັນທະສູດ
໙. ໂອຣໍາພາຄິຍະສູດ
໑໐. ອຸດທໍາພາຄິຍະສູດ

# ໑໔. ປຸນະຄັງຄາເປີຍຍາລະວັກ

## ໝວດວ່າດ້ວຍຄັງຄາເປີຍຍາລະ ອີກໝວດໜຶ່ງ

# ໓໑໘-໓໘໓. ປຸນະຄັງຄານະທີອາທີສູດ

## ວ່າດ້ວຍອຸປະມາດ້ວຍແມ່ນໍ້າຄົງຄາເປັນຕົ້ນ ອີກສູດໜຶ່ງ

**ປຸນະຄັງຄານະທີອາທີສູດທີ ໓໑໘-໓໘໓ ຈົບ**

**ວັກທີ ໑໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ປະຖົມປາຈີນນິນນະສູດ ໔-໕. ທຸຕິຍາທິປາຈີນນິນນະສຸດຕະຈະຕຸກກະ
໖. ສັດຖະປາຈີນນິນນະສູດ ໗. ປະຖົມສະມຸດທະນິນນະສູດ
໘-໑໔. ທຸຕິຍາທິສະມຸດທະນິນນະສຸດຕະປັນຈະກະ

(ເພິ່ງຂະຫຍາຍຄັງຄາເປີຍຍາລະແຫ່ງໂພດຊັງຄະສັງຍຸດໃຫ້ພິດສະດານດ້ວຍອຳນາດຣາຄະ)

# ໑໕. ປຸນະອັບປະມາທະວັກ

## ໝວດວ່າດ້ວຍຄວາມບໍ່ຜະໝາດ ອີກໝວດໜຶ່ງ

## ໓໔໔-໓໓໓. ຕະຖາຄະຕາທິສູດ

## ວ່າດ້ວຍພຣະຕະຖາຄົດເລີດກວ່າສັດທັງຫຼາຍເປັນຕົ້ນ

**ຕະຖາຄະຕາທິສູດທີ ໓໔໔-໓໓໓ ຈົບ**

**ປຸນະອັບປະມາທະວັກທີ່ ໑໕ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ຕະຖາຄະຕະສູດ ໔. ປະທະສູດ
໓-໗. ກູຕາທິສຸດຕະປັນຈະກະ ໘-໑໐. ຈັນທິມາທິສຸດຕະຕິກະ

(ເພິ່ງຂະຫຍາຍອັບປະມາທະວັກໃຫ້ພິດສະດານດ້ວຍອຳນາດຣາຄະ)

# ໑໖. ປຸນະພະລະກະຣະນີຍະວັກ

## ໝວດວ່າດ້ວຍການງານທີ່ເພິ່ງເຮັດດ້ວຍກຳລັງ ອີກໝວດໜຶ່ງ

## ໓໓໔-໓໔໕. ປຸນະພະລາທິສູດ

## ວ່າດ້ວຍອຸປະມາດ້ວຍການງານທີ່ເພິ່ງເຮັດດ້ວຍກຳລັງເປັນຕົ້ນ ອີກສູດໜຶ່ງ

ປຸນະພະລາທິສູດທີ ៣៧៨-៣៨៨ ຈົບ

ປຸນະພະລະກະຣະນີຍະວັກທີ ១៦ ຈົບ

## ລວມພຣະສູດທີ່ມີໃນວັກນີ້ ຄື

១. ພະລະສູດ
២. ນາຄະສູດ
៣. ກຸມພະສູດ
៤. ອາກາສະສູດ
៥. ທຸຕິຍະເມຂະສູຕ
១១. ອາຄັນຕຸກະສູດ
៦. ພີຊະສູດ
៧. ຣຸກຂະສູດ
៨. ສູກະສູດ
៩. ປະຖົມເມຄະສູດ
១០. ນາວາສູດ
១២. ນະທີສູດ

(ເພິ່ງຂະຫຍາຍພະລະກະຣະນີຍະວັກແຫ່ງໂພດຊັງຄະສັງຍຸດໃຫ້ພິດສະດານດ້ວຍອຳນາດຣາຄະ)

# ១៧. ປຸນະເອສະນາວັກ

## ໝວດວ່າດ້ວຍການສະແຫວງຫາ ອີກໝວດໜຶ່ງ

## ៣៨៦-៣៩៦. ປຸນະເອສະນາທິສູດ

### ວ່າດ້ວຍການສະແຫວງຫາເປັນຕົ້ນ ອີກສູດໜຶ່ງ

ປຸນະເອສະນາທິສູດທີ ៣៨៦-៣៩៦ ຈົບ

ປຸນະເອສະນາວັກແຫ່ງໂພດຊັງຄະສັງຍຸດທີ ១៧ ຈົບ

## ລວມພຣະສູດທີ່ມີໃນວັກນີ້ ຄື

១. ເອສະນາສູດ
២. ອາສະວະສູດ
៣. ທຸກຂະຕາສູດ
៤. ມະລະສູດ
៥. ເວທະນາສູດ
១១. ຕະສິນາສູດ
៦. ວິທາສູດ
៧. ພະວະສູດ
៨. ຂີລະສູດ
៩. ນີຄະສູດ
១០. ຕັນຫາສູດ

# ໑໙. ປຸນະໂອຄະວັກ

## ໝວດວ່າດ້ວຍໂອຄະ ອີກໝວດໜຶ່ງ

# ໓໕໗-໓໖໖. ປຸນະໂອຄາທິສູດ

## ວ່າດ້ວຍໂອຄະເປັນຕົ້ນ ອີກສູດໜຶ່ງ

**ປຸນະໂອຄາທິສູດທີ ໓໕໗-໓໖໖ ຈົບ**

**ປຸນະໂອຄະວັກແຫ່ງໂພດຊັງຄະສັງຍຸດທີ່ ໑໙ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ໂອຄະສູດ | ໒. ໂຍຄະສູດ |
| ໓. ອຸປາທານະສູດ | ໔. ຄັນຖະສູດ |
| ໕. ອະນຸສະຍະສູດ | ໖. ກາມມະຄຸນສູດ |
| ໗. ນີວະຣະນະສູດ | ໘. ອຸປາທານັກຂັນທະສູດ |
| ໙. ໂອຣຳພາຄິຍະສູດ | ໑໐. ອຸດທຳພາຄິຍະສູດ |

(ເພິ່ງຂະຫຍາຍໂອຄະວັກໃຫ້ພິດສະດານດ້ວຍອຳນາດການກຳຈັດຣາຄະ ໂທສະ ແລະໂມຫະ ເປັນບ່ອນສຸດ)

(ເພິ່ງຂະຫຍາຍແມ່ນໂພດຊັງຄະສັງຍຸດໃຫ້ພິດສະດານຄືມັກຄະສັງຍຸດສັນນັ້ນ)

**ໂພດຊັງຄະສັງຍຸດທີ່ ໒ ຈົບ**

# ၃. ສະຕິປັດຖານະສັງຍຸດ

## ໑. ອຳພະປາລິວັກ

### ໝວດວ່າດ້ວຍພຣະທຳເທດສະໜາທີ່ອຳພະປາລິວັນ

## ໑. ອຳພະປາລິສູດ

### ວ່າດ້ວຍພຣະທຳເທດສະໜາທີ່ອຳພະປາລິວັນ

[၃໙໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ອຳພະປາລິວັນ ເຂດເມືອງເວສາລີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ທາງນີ້ເປັນທາງດຽວ ເພື່ອຄວາມບໍລິສຸດແຫ່ງສັດທັງຫຼາຍ ເພື່ອກ້າວລ່ວງໂສກະແລະປະຣິເທວະ ເພື່ອດັບທຸກແລະໂທມະນັດ ເພື່ອບັນລຸຍາຍະທຳ ເພື່ອເຮັດນິບພານໃຫ້ແຈ້ງ ຄື ສະຕິປັດຖານ ໔ ປະການ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
၃. ພິຈາລະນາເຫັນຈິດໃນຈິດຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸທັງຫຼາຍ ທາງນີ້ເປັນທາງດຽວເພື່ອຄວາມບໍລິສຸດແຫ່ງສັດທັງຫຼາຍ ເພື່ອກ້າວລ່ວງໂສກະແລະປະຣິເທວະ ເພື່ອດັບທຸກແລະໂທມະນັດ ເພື່ອບັນລຸຍາຍະທຳ ເພື່ອເຮັດ ນິບພານໃຫ້ແຈ້ງ ຄື ສະຕິປັດຖານ ໔ ປະການ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນມີໃຈຍິນດີ ຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ

**ອັມພະປາລີສູດທີ ໑ ຈົບ**

# ໔. ສະຕິສູດ

## ວ່າດ້ວຍຜູ້ມີສະຕິສຳປະຊັນຍະ

[໓໙໘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ອຳພະປາລີວັນ ເຂດເມືອງເວສາລີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ພິກຂຸເພິ່ງມີສະຕິສຳປະຊັນຍະຢູ່ເທີ້ນ ນີ້ເປັນຄຳພ່ຳສອນຂອງເຮົາສຳລັບທ່ານທັງຫຼາຍ

ພິກຂຸຜູ້ມີສະຕິ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸຜູ້ມີສະຕິ ເປັນແນວນີ້ແລ

ພິກຂຸຜູ້ມີສຳປະຊັນຍະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ທຳຄວາມຮູ້ສຶກໂຕໃນການກ້າວໄປ ການຖອຍກັບ ການແລເບິ່ງ ການຫລຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດແລະຈີວອນ ການສັນ ການດື່ມ ການຫຍ້ຳ ການກິນ ການຖ່າຍອຸດຈາຣະປັດສາວະ ການຍ່າງ ການຢືນ ການນັ່ງ ການນອນ ການຕື່ນ ການເວົ້າ ການມິດ

ພິກຂຸຜູ້ມີສຳປະຊັນຍະ ເປັນແນວນີ້ແລ

ພິກຂຸທັງຫຼາຍ ພິກຂຸເພິ່ງມີສະຕິສຳປະຊັນຍະຢູ່ເທີ້ນ ນີ້ເປັນຄຳພ່ຳສອນຂອງເຮົາສຳລັບທ່ານທັງຫຼາຍ

**ສະຕິສູດທີ ໘ ຈົບ**

# ៩. ພິກຂຸສູດ

## ວ່າດ້ວຍພິກຂຸ

[៩៧ດ] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດເມືອງສາວັດຖີ ຄັ້ງນັ້ນແລ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີ

ພຣະພາກດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳແກ່ຂ້າພຣະອົງໂດຍຫຍໍ້ ເຊິ່ງຂ້າພຣະອົງໄດ້ຟັງແລ້ວ ຈະເພິ່ງຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ໂມຄະບຸຣຸດລາງພວກໃນໂລກນີ້ ເຊື້ອເຊີນເຮົາແນວນີ້ຄືກັນແລະເມື່ອເຮົາໄດ້ກ່າວທຳ ຍ່ອມສຳຄັນເຮົາວ່າຄວນຕິດຕາມທໍ່ນັ້ນ

ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳແກ່ຂ້າພຣະອົງໂດຍຫຍໍ້ ຂໍພຣະສຸດຄົດເຈົ້າໂຜດສະແດງທຳແກ່ຂ້າພຣະອົງໂດຍຫຍໍ້ເທີ້ນ ບາງເທື່ອ ຂ້າພຣະອົງເພິ່ງຮູ້ທົ່ວເຖິງເນື້ອຄວາມແຫ່ງພຣະດຳຣັດຂອງພຣະຜູ້ມີພຣະພາກເຈົ້າ ບາງເທື່ອ ຂ້າພຣະອົງເພິ່ງເປັນຜູ້ສືບທອດພຣະດຳຣັດຂອງພຣະຜູ້ມີພຣະພາກເຈົ້າ

ພິກຂຸ ຍ້ອນເຫດນັ້ນ ທ່ານຈົ່ງເຮັດເບື້ອງຕົ້ນໃນກຸສົນທຳທັງຫຼາຍໃຫ້ມົດຈົດກ່ອນ ອັນໃດເປັນເບື້ອງຕົ້ນແຫ່ງກຸສົນທຳທັງຫຼາຍ ຄື ສີນທີ່ບໍລິສຸດດີແລະຄວາມເຫັນທີ່ກົງ

ເມື່ອໃດ ສີນຂອງທ່ານຈັກບໍລິສຸດດີ ແລະຄວາມເຫັນຈັກກົງ ເມື່ອນັ້ນ ທ່ານອາໄສສີນດຳລົງຢູ່ໃນສີນແລ້ວ ເພິ່ງຈະເລີນສະຕິປັດຖານ ໔ ປະການ ໂດຍ ໑ ວິທີ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ໃນທຳວິໄນນີ້ ທ່ານ

໑. ຈົ່ງພິຈາລະນາເຫັນກາຍໃນກາຍພາຍໃນຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ຈົ່ງພິຈາລະນາເຫັນກາຍໃນກາຍພາຍນອກຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ຫຼື ຈົ່ງພິຈາລະນາເຫັນກາຍໃນກາຍທັງພາຍໃນທັງພາຍນອກຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

໒. ຈົ່ງພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍພາຍໃນຢູ່ ຯລຯ ຈົ່ງພິຈາລະນາ ເຫັນເວທະນາໃນເວທະນາທັງຫຼາຍພາຍນອກຢູ່ ຯລຯ ຈົ່ງພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍທັງພາຍໃນທັງພາຍນອກຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

໓. ຈົ່ງພິຈາລະນາເຫັນຈິດໃນຈິດພາຍໃນຢູ່ ຯລຯ ຈົ່ງພິຈາລະນາເຫັນຈິດໃນຈິດພາຍນອກຢູ່ ຯລຯ ຈົ່ງພິຈາລະນາເຫັນຈິດໃນຈິດທັງພາຍໃນທັງພາຍນອກຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະ ໂທມະນັດໃນໂລກໄດ້

໔. ຈົ່ງພິຈາລະນາເຫັນທຳໃນທຳທັງຫຼາຍພາຍໃນຢູ່ ຯລຯ ຈົ່ງພິຈາລະນາ ເຫັນທຳໃນທຳທັງຫຼາຍພາຍນອກຢູ່ ຯລຯ ຈົ່ງພິຈາລະນາເຫັນທຳ ໃນທຳທັງຫຼາຍທັງພາຍໃນທັງພາຍນອກຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸ ເມື່ອໃດ ທ່ານອາໄສສີນ ດຳລົງຢູ່ໃນສີນແລ້ວຈັກຈະເລີນສະຕິປັດຖານ ໔ ປະການນີ້ ໂດຍ ໓ ວິທີແບບນີ້ ເມື່ອນັ້ນ ທ່ານເພິ່ງຫວັງຄວາມຈະເລີນໃນກຸສົນທຳທັງຫຼາຍ ຕະຫຼອດຄືນຫຼືວັນທີຈັກມາເຖິງ ບໍ່ມີຄວາມເສື່ອມເລີຍ

ລຳດັບນັ້ນ ພິກຂຸອົງນັ້ນຊົມຊື່ນຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າແລ້ວ ລຸກຈາກອາສະນະ ຖວາຍອະພິວາດ ທຳປະທັກສິນແລ້ວຈາກໄປ ຕໍ່ມາ ທ່ານກໍຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ບໍ່ດົນປານໃດໄດ້ເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດອັນເປັນບ່ອນສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດອອກຈາກເຮືອນບວດເປັນ ບັນພະຊິດໂດຍຖືກຕ້ອງ ປາຖະໜາດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນ

ແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ອັນໜຶ່ງ ພິກຂຸອົງນັ້ນ ໄດ້ເປັນພຣະອະຣະຫັນອີກອົງໜຶ່ງໃນບັນດາພຣະອະຣະຫັນທັງຫຼາຍ

**ພິກຂຸສູດທີ ໓ ຈົບ**

# ໔. ສາລະສູດ

## ວ່າດ້ວຍພຣະທຳເທດສະໜາທີ່ໝູ່ບ້ານພາມຊື່ສາລາ

[໓໗໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໝູ່ບ້ານພາມຊື່ສາລາ ແຄວັ້ນໂກສົນ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ຯລຯ ຈຶ່ງໄດ້ຕັດເລື້ອງນີ້ວ່າ

ພິກຂຸທັງຫຼາຍ ພິກຂຸເຫຼົ່າໃດຍັງເປັນຜູ້ໃໝ່ ບວດໄດ້ບໍ່ດົນ ເພິ່ງມາສູ່ທຳວິໄນນີ້ ທ່ານທັງຫຼາຍເພິ່ງຊັກຊວນພິກຂຸເຫຼົ່ານັ້ນໃຫ້ຕັ້ງໝັ້ນ ໃຫ້ດຳລົງຢູ່ໃນການຈະເລີນສະຕິປັດຖານ ໔ ປະການ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ມາເທີ້ນ ຜູ້ມີອາຍຸທັງຫຼາຍ ທ່ານທັງຫຼາຍ

໑. ຈົ່ງພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີທຳເປັນໜຶ່ງຜຸດຂຶ້ນ ມີຈິດຜ່ອງໃສ ຕັ້ງໝັ້ນ ມີອາລົມດຽວເພື່ອຮູ້ຍິ່ງກາຍຕາມຄວາມເປັນຈິງ

໒. ຈົ່ງພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີທຳເປັນໜຶ່ງຜຸດຂຶ້ນ ມີຈິດຜ່ອງໃສ ຕັ້ງໝັ້ນ ມີອາລົມ ດຽວເພື່ອຮູ້ຍິ່ງເວທະນາຕາມຄວາມເປັນຈິງ

໓. ຈົ່ງພິຈາລະນາເຫັນຈິດໃນຈິດຢູ່ ມີຄວາມພຽນ ມີສຳປະຊັນຍະ ມີທຳ ເປັນໜຶ່ງຜຸດຂຶ້ນ ມີ ຈິດຜ່ອງໃສ ຕັ້ງໝັ້ນ ມີອາລົມດຽວເພື່ອຮູ້ຍິ່ງຈິດຕາມຄວາມເປັນຈິງ

໔. ຈົ່ງພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີທຳເປັນໜຶ່ງຜຸດຂຶ້ນ ມີຈິດຜ່ອງໃສ ຕັ້ງໝັ້ນ ມີອາລົມດຽວເພື່ອຮູ້ຍິ່ງທຳທັງຫຼາຍຕາມຄວາມເປັນຈິງ

ແມ່ນພິກຂຸເຫຼົ່າໃດທີ່ຍັງເປັນເສຂະ ຍັງບໍ່ບັນລຸອະຣະຫັດຕະຜົນ ປາຖະໜາທຳທີ່ເປັນ

ແດນກະເສມຈາກໂຍຄະອັນປະເສີດ ແມ່ນພິກຂຸເຫຼົ່ານັ້ນ ກໍພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີທຳເປັນໜຶ່ງຜຸດຂຶ້ນ ມີຈິດຜ່ອງໃສ ຕັ້ງໝັ້ນ ມີອາລົມດຽວ ເພື່ອກຳນົດຮູ້ກາຍ ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີທຳເປັນໜຶ່ງຜຸດຂຶ້ນ ມີຈິດຜ່ອງໃສ ຕັ້ງໝັ້ນ ມີອາລົມດຽວເພື່ອກຳນົດຮູ້ເວທະນາ ພິຈາລະ ນາເຫັນຈິດໃນຈິດຢູ່ ມີຄວາມພຽນ ມີສຳປະຊັນຍະ ມີທຳເປັນໜຶ່ງຜຸດຂຶ້ນ ມີຈິດຜ່ອງໃສ ຕັ້ງໝັ້ນ ມີອາລົມດຽວ ເພື່ອກຳນົດຮູ້ຈິດ ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີທຳເປັນໜຶ່ງຜຸດຂຶ້ນ ມີຈິດຜ່ອງໃສ ຕັ້ງໝັ້ນມີອາລົມດຽວເພື່ອກຳນົດຮູ້ທຳທັງຫຼາຍ

ແມ່ນພິກຂຸເຫຼົ່າໃດທີ່ເປັນພຣະອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນ ເຮັດສຳເລັດແລ້ວ ປົງພາຣະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນຍ້ອນຮູ້ໂດຍຖືກຕ້ອງ ແມ່ນພິກຂຸເຫຼົ່ານັ້ນກໍພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີທຳເປັນໜຶ່ງຜຸດຂຶ້ນ ມີຈິດຜ່ອງໃສ ຕັ້ງໝັ້ນ ມີອາລົມດຽວ ພາກຈາກກາຍແລ້ວ ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີທຳເປັນໜຶ່ງຜຸດຂຶ້ນ ມີຈິດຜ່ອງໃສ ຕັ້ງໝັ້ນ ມີອາລົມດຽວ ພາກຈາກເວທະນາທັງຫຼາຍ ແລ້ວພິຈາລະນາເຫັນຈິດໃນຈິດຢູ່ ມີຄວາມພຽນ ມີສຳປະຊັນຍະ ມີທຳເປັນໜຶ່ງຜຸດຂຶ້ນ ມີຈິດຜ່ອງໃສ ຕັ້ງໝັ້ນ ມີອາລົມດຽວ ພາກຈາກຈິດແລ້ວ ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີທຳເປັນໜຶ່ງຜຸດຂຶ້ນ ມີຈິດຜ່ອງໃສ ຕັ້ງໝັ້ນ ມີອາລົມດຽວ ພາກຈາກທຳທັງຫຼາຍແລ້ວ

ພິກຂຸທັງຫຼາຍ ພິກຂຸເຫຼົ່າໃດຍັງເປັນຜູ້ໃໝ່ ບວດໄດ້ບໍ່ດົນ ເພິ່ງມາສູ່ທຳວິໄນນີ້ ທ່ານທັງຫຼາຍເພິ່ງຊັກຊວນພິກຂຸເຫຼົ່ານັ້ນໃຫ້ຕັ້ງໝັ້ນ ໃຫ້ດຳລົງຢູ່ໃນການຈະເລີນສະຕິປັດຖານ ໔ ປະການນີ້

**ສາລະສູດທີ ໔ ຈົບ**

# ໕. ອກຸສະລະຣາສີສູດ

## ວ່າດ້ວຍກອງອະກຸສົນ

[໓໗໑] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຕັດເລື້ອງນີ້ວ່າ ພິກຂຸທັງຫຼາຍ ບຸກຄົນເມື່ອຈະກ່າວເຖິງກອງອະກຸສົນ ຈະກ່າວໃຫ້ຖືກຕ້ອງ ເພິ່ງກ່າວເຖິງນິວອນ (ທຳທີ່ກັ້ນຈິດບໍ່ໃຫ້ບັນລຸຄວາມ

ດີ) ໕ ປະການ ຍ້ອນກອງອະກຸສົນທັງໝົດນີ້ກໍຄືນິວອນ ໕ ປະການ

ນິວອນ ໕ ປະການ ອັນໃດແດ່ ຄື

໑. ກາມສັນທະນິວອນ
໒. ພະຍາບາດນິວອນ
໓. ຖີນະມິດທະນິວອນ
໔. ອຸດທັດຈະກຸກກຸດຈະນິວອນ
໕. ວິຈິກິດສານິວອນ

ບຸກຄົນເມື່ອຈະກ່າວເຖິງກອງອະກຸສົນ ຈະກ່າວໃຫ້ຖືກຕ້ອງ ເພິ່ງກ່າວເຖິງນິວອນ ໕ ປະການນີ້ ຍ້ອນກອງອະກຸສົນທັງໝົດນີ້ກໍຄືນິວອນ ໕ ປະການ

ບຸກຄົນເມື່ອຈະກ່າວເຖິງກອງກຸສົນ ຈະກ່າວໃຫ້ຖືກຕ້ອງ ເພິ່ງກ່າວເຖິງສະຕິປັດຖານ ໔ ປະການນີ້ ຍ້ອນກອງກຸສົນທັງໝົດນີ້ກໍຄືສະຕິປັດຖານ ໔ ປະການ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີ
ສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸທັງຫຼາຍ ບຸກຄົນເມື່ອຈະກ່າວເຖິງກອງກຸສົນ ຈະກ່າວໃຫ້ຖືກຕ້ອງ ເພິ່ງກ່າວເຖິງສະຕິປັດຖານ ໔ ປະການນີ້ ຍ້ອນກອງກຸສົນທັງໝົດນີ້ກໍຄືສະຕິປັດຖານ ໔ ປະການ

**ອກຸສະລະຣາສີສູດທີ ໕ ຈົບ**

# ໖. ສະກຸນັກຄີສູດ

## ວ່າດ້ວຍແຫຼວ

[໓໗໔] ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ແຫຼວເຈີດລົງຫຍຸມເອົານົກຂີ້ໄຖຢ່າງວ່ອງໄວ ຂະນະນັ້ນ ນົກຂີ້ໄຖກຳລັງຖືກແຫຼວພາໄປ ໄດ້ຮ້ອງຮ່ຳໄຮແນວນີ້ວ່າ ເຮົາອັບໂຊກມີບຸນໜ້ອຍ

ທ່ຽວໄປໃນແດນອື່ນເຊິ່ງບໍ່ແມ່ນບ່ອນຫາກິນ ຖ້າໃນມື້ນີ້ເຮົາທ່ຽວຫາກິນໃນແດນຫາກິນທີ່ເປັນຂອງບິດາຂອງຕົນແລ້ວ ເຮົາກໍອາດສູ້ແຫຼວໂຕນີ້ໄດ້

ແຫຼວຈຶ່ງຖາມວ່າ ເຈົ້ານົກຂີ້ໄຖ ແດນຫາກິນທີ່ເປັນຂອງບິດາຂອງເຈົ້າຄືອັນໃດ

ນົກຂີ້ໄຖຕອບວ່າ ຄືຖິ່ນທີ່ເປັນດິນກ້ອນຂີ້ໄຖທີ່ເຂົາໄຖໄວ້

ຂະນະນັ້ນ ແຫຼວຍິ່ງໃນກຳລັງຂອງຕົນ ເມື່ອຈະອວດອ້າງກຳລັງຂອງຕົນ ຈຶ່ງປ່ອຍນົກຂີ້ໄຖໄປດ້ວຍເວົ້າວ່າ ໄປເທີ້ນ ເຈົ້ານົກຂີ້ໄຖ ເຖິງເຈົ້າຈະໄປໃນບ່ອນນັ້ນກໍບໍ່ພົ້ນເຮົາ

ບັດນັ້ນ ນົກຂີ້ໄຖຈຶ່ງໄປສູ່ຖິ່ນທີ່ເປັນດິນກ້ອນຂີ້ໄຖທີ່ເຂົາໄຖໄວ້ ຈັບຢູ່ບ່ອນກ້ອນໃຫຍ່ ຢືນຮ້ອງທ້າແຫຼວວ່າ ເຈົ້າແຫຼວ ເຈົ້າຈົ່ງມາຈັບເຮົາດຽວນີ້ ເຈົ້າແຫຼວ ເຈົ້າຈົ່ງມາຈັບເຮົາດຽວນີ້ ຂະນະນັ້ນ ແຫຼວຍິ່ງໃນກຳລັງຂອງຕົນ ເມື່ອຈະອວດອ້າງກຳລັງຂອງຕົນ ຈຶ່ງຫຸບປີກທັງ ໒ ເຈີດລົງຫຍຸມນົກຂີ້ໄຖຢ່າງວ່ອງໄວ ເມື່ອນົກຂີ້ໄຖຮູ້ວ່າ ແຫຼວໂຕນີ້ເຈີດລົງມາຢ່າງວ່ອງໄວໝາຍຈະຫຍຸມເອົາເຮົາ ຈຶ່ງຫຼົບເຂົ້າຊອກກ້ອນດິນນັ້ນເອງ ແຫຼວເອິກກະແທກກ້ອນຂີ້ໄຖ (ຕາຍ) ຢູ່ໃນບ່ອນນັ້ນເອງ ເລື້ອງນົກຂີ້ໄຖທ່ຽວໄປໃນແດນອື່ນ ເຊິ່ງບໍ່ແມ່ນບ່ອນຫາກິນກໍເປັນເຊັ່ນນີ້ແລ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍຢ່າທ່ຽວໄປໃນແດນອື່ນທີ່ເປັນອະໂຄຈອນ ເມື່ອທ່ານທັງຫຼາຍທ່ຽວໄປໃນແດນອື່ນທີ່ເປັນອະໂຄຈອນ ມານກໍຈັກໄດ້ປ່ອງ ໄດ້ອາລົມ

ແດນອື່ນທີ່ເປັນອະໂຄຈອນຂອງພິກຂຸ ເປັນແນວໃດ?
ຄື ກາມມະຄຸນ ໕ ປະການ
ກາມມະຄຸນ ໕ ປະການ ອັນໃດແດ່ ຄື

໑. ຮູບທີ່ເພິ່ງຮູ້ແຈ້ງທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ
໒. ສຽງທີ່ເພິ່ງຮູ້ແຈ້ງທາງຫູ ฯລฯ
໓. ກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ฯລฯ
໔. ຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ฯລฯ
໕. ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ພິກຂຸທັງຫຼາຍ ນີ້ຄື ແດນອື່ນທີ່ເປັນອະໂຄຈອນຂອງພິກຂຸ

ພິກຂຸທັງຫຼາຍ ທ່ານທັງຫຼາຍ ຈົ່ງທ່ຽວໄປໃນແດນທີ່ເປັນຂອງບິດາຂອງຕົນອັນເປັນໂຄ

ຈອນເທີ້ນ ເມື່ອທ່ານທັງຫຼາຍທ່ຽວໄປໃນແດນທີ່ເປັນຂອງບິດາຂອງຕົນອັນເປັນໂຄຈອນ ມານກໍຈັກບໍ່ໄດ້ປ່ອງ ບໍ່ໄດ້ອາລົມ

ແດນທີ່ເປັນຂອງບິດາຂອງຕົນອັນເປັນໂຄຈອນຂອງພິກຂຸ ເປັນແນວໃດ?

ຄື ສະຕິປັດຖານ ໔ ປະການ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ

໓. ພິຈາລະນາເຫັນຈິດໃນຈິດ ຯລຯ

໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸທັງຫຼາຍ ນີ້ຄືແດນທີ່ເປັນຂອງບິດາຂອງຕົນອັນເປັນໂຄຈອນຂອງພິກຂຸ

**ສະກຸນັກຄິສູດທີ ໗ ຈົບ**

# ໗. ມັກກະຕະສູດ

## ວ່າດ້ວຍລີງຕິດຕັງ

[໓໗໓] ພິກຂຸທັງຫຼາຍ ຖິ່ນທີ່ເປັນພູຫຼວງຫິມະພານ ເຊິ່ງໄປໄດ້ຍາກ ຂຸຂະ ບໍ່ເປັນບ່ອນທ່ຽວໄປທັງຂອງຝູງລີງທັງຂອງໝູ່ມະນຸດ ມີຢູ່ ຖິ່ນທີ່ເປັນພູຫຼວງຫິມະພານ ເຊິ່ງໄປໄດ້ຍາກ ຂຸຂະ ເປັນບ່ອນທ່ຽວໄປຂອງຝູງລີງ ບໍ່ແມ່ນທີ່ທ່ຽວໄປຂອງໝູ່ມະນຸດ ມີຢູ່ ພາກພື້ນພູຫຼວງຫິມະພານ ເຊິ່ງຮາບພຽງ ໜ້າອອນຊອນ ເປັນບ່ອນທ່ຽວໄປທັງຂອງຝູງລີງທັງຂອງ ໝູ່ມະນຸດ ກໍມີຢູ່ບ່ອນນັ້ນ ພວກນາຍພານວາງຕັງດັກໄວ້ທີ່ທາງຍ່າງຂອງຝູງລີງເພື່ອດັກລີງ

ພິກຂຸທັງຫຼາຍ ບັນດາລີງເຫຼົ່ານັ້ນ ລີງເຫຼົ່າໃດບໍ່ໂງ່ ບໍ່ລອກແລກ ລີງເຫຼົ່ານັ້ນເຫັນຕັງນັ້ນກໍຫຼີກຫ່າງໄກ ສ່ວນລີງໂຕໃດໂງ່ ລອກແລກ ລີງໂຕນັ້ນເຂົ້າໄປໃກ້ຕັງນັ້ນແລ້ວ ເອົາມືຈັບເບິ່ງ ມືຈຶ່ງຕິດທີ່ຕັງນັ້ນ ມັນຄິດຈະດຶງມືອອກ ຈຶ່ງເອົາມືຂ້າງທີ ໒ ຈັບ ມືຂ້າງທີ ໒ ກໍຕິດທີ່ຕັງນັ້ນ ມັນຄິດຈະດຶງມືທັງ ໒ ຂ້າງອອກຈຶ່ງເອົາຕີນຍັນ ຕີນກໍຕິດທີ່ຕັງນັ້ນ ມັນຄິດຈະດຶງມືທັງ ໒ ແລະຕີນອອກ ຈຶ່ງເອົາຕີນຂ້າງທີ ໒ ຍັນ ຕີນຂ້າງທີ ໒ ກໍຕິດທີ່ຕັງນັ້ນ ມັນຄິດຈະດຶງມືທັງ ໒ ແລະຕີນ

ທັງ ໔ ອອກຈຶ່ງເອົາປາກກັດ ປາກກໍຕິດທີ່ຕັງນັ້ນອີກ ລີງໂຕນັ້ນຕິດຕັງ ໕ ແຫ່ງແນວນີ້ ນອນຖອດໃຈ ເຖິງຄວາມພິນາດ ຍ່ອຍຍັບແລ້ວ ຖືກນາຍພານເຮັດໄດ້ຕາມໃຈປາຖະໜາ ນາຍພານແຍກລີງໂຕນັ້ນອອກແລ້ວ ຍົກແຂວນໄວ້ໃນບ່ອນນັ້ນເອງ ບໍ່ໃຫ້ລຸດໄປແລ້ວຫຼີກໄປຕາມຕ້ອງການເລື້ອງລີງທ່ຽວໄປໃນແດນອື່ນ ເຊິ່ງບໍ່ແມ່ນບ່ອນຫາກິນ ກໍເປັນເຊັ່ນນີ້ແລ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍຢ່າທ່ຽວໄປໃນແດນອື່ນທີ່ເປັນອະໂຄຈອນ ເມື່ອທ່ານທັງຫຼາຍທ່ຽວໄປໃນແດນອື່ນທີ່ເປັນອະໂຄຈອນ ມານກໍຈັກໄດ້ປ່ອງ ໄດ້ອາລົມ

ແດນອື່ນທີ່ເປັນອະໂຄຈອນຂອງພິກຂຸ ເປັນແນວໃດ?

ຄື ກາມມະຄຸນ ໕ ປະການ

ກາມມະຄຸນ ໕ ປະການ ອັນໃດແດ່ ຄື

໑. ຮູບທີ່ເພິ່ງຮູ້ແຈ້ງທາງຕາ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ
໒. ສຽງທີ່ເພິ່ງຮູ້ແຈ້ງທາງຫູ ຯລຯ
໓. ກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ຯລຯ
໔. ຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ຯລຯ
໕. ໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ພາໃຈໃຫ້ກຳໜັດ

ພິກຂຸທັງຫຼາຍ ນີ້ຄືແດນອື່ນທີ່ເປັນອະໂຄຈອນ

ພິກຂຸທັງຫຼາຍ ທ່ານທັງຫຼາຍ ຈົ່ງທ່ຽວໄປໃນແດນທີ່ເປັນຂອງບິດາຂອງຕົນອັນເປັນໂຄຈອນເທີ້ນ ເມື່ອທ່ານທັງຫຼາຍທ່ຽວໄປໃນແດນທີ່ເປັນຂອງບິດາຂອງຕົນອັນເປັນໂຄຈອນ ມານກໍຈັກບໍ່ໄດ້ປ່ອງ ບໍ່ໄດ້ອາລົມ

ແດນທີ່ເປັນຂອງບິດາຂອງຕົນອັນເປັນໂຄຈອນ ອັນໃດແດ່

ຄື ສະຕິປັດຖານ ໔ ປະການ

ສະຕິປັດຖານ ໔ ປະການ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ

໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸທັງຫຼາຍ ນີ້ຄືແດນທີ່ເປັນຂອງບິດາຂອງຕົນອັນເປັນໂຄຈອນຂອງພິກຂຸ

**ມັກກະຕະສູດທີ ໗ ຈົບ**

# ໘. ສູທະສູດ

## ວ່າດ້ວຍອຸປະມາດ້ວຍພໍ່ຄົວ

[໓໗໔] ພິກຂຸທັງຫຼາຍ ພໍ່ຄົວຜູ້ຈົ໊າ ບໍ່ສະຫຼາດ ບໍ່ແຫຼມຄົມ ບຳລຸງພຣະຣາຊາຫຼືມະຫາອຳມາດຂອງພຣະຣາຊາດ້ວຍແກງຊະນິດຕ່າງ ໆ ຄື ສົ້ມ ໆ ແດ່ ຂົມ ໆ ແດ່ ເຜັດ ໆ ແດ່ ຫວານ ໆ ແດ່ ເຝື່ອນແດ່ ບໍ່ເຝື່ອນແດ່ ເຄັ່ມແດ່ ຈືດແດ່ ພໍ່ຄົວ ຜູ້ຈົ໊າ ບໍ່ສະຫຼາດ ບໍ່ແຫຼມຄົມນັ້ນບໍ່ສັງເກດຊະນິດແຫ່ງອາຫານຂອງຕົນວ່າ ມື້ນີ້ ທ່ານ ມັກເຂົ້າແລະແກງຊະນິດນີ້ຂອງເຮົາ ຫຼື ຮັບແກງຊະນິດນີ້ ຕັກແກງຊະນິດນີ້ຫຼາຍ ຫຼື ຊົມແກງຊະນິດນີ້ ມື້ນີ້ ທ່ານມັກເຂົ້າແລະແກງທີ່ມີຣົດສົ້ມໆຂອງເຮົາ ຫຼື ຮັບແກງທີ່ມີຣົດ ສົ້ມ ໆ ຕັກແກງທີ່ມີຣົດສົ້ມໆຫຼາຍ ຫຼື ຊົມແກງທີ່ມີຣົດສົ້ມ ໆ ມື້ນີ້ ແກງຂອງເຮົາມີຣົດຂົມ ໆ ຯລຯ ມີຣົດເຜັດ ໆ ຯລຯ ມີຫວານ ໆ ຯລຯ ມີຣົດເຝື່ອນ ຯລຯ ມີຣົດບໍ່ເຝື່ອນ ຯລຯ ມີຣົດເຄັ່ມ ຯລຯ ມື້ນີ້ ທ່ານມັກເຂົ້າ ແລະແກງທີ່ມີຣົດຈືດຂອງເຮົາ ຫຼື ຮັບແກງທີ່ມີຣົດຈືດ ຕັກແກງທີ່ມີຣົດຈືດຫຼາຍ ຫຼື ຊົມແກງທີ່ມີດຈືດ ພໍ່ຄົວຜູ້ຈົ໊າ ບໍ່ສະຫຼາດ ບໍ່ແຫຼມຄົມນັ້ນ ຍ່ອມບໍ່ໄດ້ເຄື່ອງນຸ່ງຫົ່ມ ບໍ່ໄດ້ຄ່າຈ້າງ ບໍ່ໄດ້ລາງວັນ ຂໍ້ນັ້ນຍ້ອນເຫດໃດ ຍ້ອນພໍ່ຄົວນັ້ນເປັນຄົນຈົ໊າ ບໍ່ສະຫຼາດ ບໍ່ແຫຼມຄົມ ບໍ່ສັງເກດຊະນິດແຫ່ງອາຫານຂອງຕົນ ແມ່ນສັນໃດ

ພິກຂຸທັງຫຼາຍ ພິກຂຸລາງອົງໃນທຳວິໄນນີ້ກໍຄືກັນສັນນັ້ນ ຈົ໊າ ບໍ່ສະຫຼາດ ບໍ່ແຫຼມຄົມ ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ເມື່ອທ່ານພິຈາລະນາເຫັນກາຍໃນກາຍຢູ່ ຈິດບໍ່ຕັ້ງໝັ້ນ ລະຄວາມເສົ້າໝອງບໍ່ໄດ້ ທ່ານບໍ່ກຳນົດນິມິດນັ້ນ ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ ພິຈາລະນາເຫັນຈິດໃນຈິດ ຯລຯ ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່

ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້ ເມື່ອທ່ານພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ຈິດບໍ່ຕັ້ງໝັ້ນ ລະຄວາມເສົ້າໝອງບໍ່ໄດ້

ທ່ານບໍ່ກຳນົດນິມິດນັ້ນ ພິກຂຸນັ້ນ ຍ່ອມບໍ່ໄດ້ທຳເຄື່ອງຢູ່ເປັນສຸກໃນປັດຈຸບັນ ແລະບໍ່ໄດ້ສະຕິສຳປະຊັນຍະ ຂໍ້ນັ້ນຍ້ອນເຫດໃດ ຍ້ອນພິກຂຸນັ້ນເປັນຜູ້ຈົ໊າ ບໍ່ສະຫຼາດ ບໍ່ແຫຼມຄົມ ບໍ່ກຳນົດນິມິດແຫ່ງຈິດຂອງຕົນ

ພິກຂຸທັງຫຼາຍ ພໍ່ຄົວຜູ້ເປັນບັນດິດ ສະຫຼາດ ແຫຼມຄົມ ບໍາລຸງພຣະຣາຊາ ຫຼື ມະຫາອໍາມາດຂອງພຣະຣາຊາດ້ວຍແກງຊະນິດຕ່າງ ໆ ຄື ສົ້ມ ໆ ແດ່ ຂົມໆ ແດ່ ເຜັດ ໆ ແດ່ ຫວານ ໆ ແດ່ ເຝື່ອນແດ່ ບໍ່ເຝື່ອນແດ່ ເຄັມແດ່ ຈືດແດ່ ພໍ່ຄົວຜູ້ເປັນບັນດິດ ສະຫຼາດ ແຫຼມຄົມນັ້ນສັງເກດຊະນິດແຫ່ງອາຫານຂອງຕົນວ່າ ມື້ນີ້ ທ່ານມັກ ເຂົ້າແລະແກງຊະນິດນີ້ຂອງເຮົາ ຫຼືຮັບແກງຊະນິດນີ້ ຕັກແກງຊະນິດນີ້ຫຼາຍ ຫຼື ຊົມແກງຊະນິດນີ້ ມື້ນີ້ ທ່ານມັກເຂົ້າແລະແກງທີ່ມີຣົດສົ້ມ ໆ ຂອງເຮົາ ຫຼື ຮັບແກງທີ່ມີຣົດສົ້ມ ໆ ຕັກແກງທີ່ມີຣົດສົ້ມຈັດຫຼາຍ ຫຼື ຊົມແກງທີ່ມີຣົດສົ້ມ ໆ ມື້ນີ້ ແກງຂອງເຮົາມີຣົດຂົມ ໆ ຯລຯ ມີຣົດເຜັດ ໆ ຯລຯ ມີຫວານ ໆ ຯລຯ ມີຣົດເຝື່ອນ ຯລຯ ມີຣົດບໍ່ເຝື່ອນ ຯລຯ ມີຣົດເຄັມ ຯລຯ ມື້ນີ້ ທ່ານມັກເຂົ້າ ແລະແກງທີ່ມີຣົດຈືດຂອງເຮົາ ຫຼື ຮັບແກງທີ່ມີຣົດຈືດ ຕັກແກງທີ່ມີຣົດຈືດຫຼາຍ ຫຼື ຊົມແກງທີ່ມີຣົດຈືດ ພໍ່ຄົວຜູ້ເປັນບັນດິດ ສະຫຼາດ ແຫຼມຄົມນັ້ນ ຍ່ອມໄດ້ເຄື່ອງນຸ່ງຫົ່ມ ໄດ້ຄ່າຈ້າງ ໄດ້ລາງວັນ ຂໍ້ນັ້ນຍ້ອນເຫດໃດ ຍ້ອນພໍ່ຄົວນັ້ນເປັນບັນດິດ ສະຫຼາດ ແຫຼມຄົມ ສັງເກດຊະນິດແຫ່ງອາຫານຂອງຕົນ ແມ່ນສັນໃດ

ພິກຂຸທັງຫຼາຍ ພິກຂຸລາງອົງໃນທໍາວິໄນນີ້ກໍຄືກັນສັນນັ້ນ ເປັນບັນດິດ ສະຫຼາດ ແຫຼມຄົມພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສໍາປະຊັນຍະ ມີສະຕິ ກໍາຈັດອະພິດຊາແລະໂທມະນັດໃນໂລກໄດ້ ເມື່ອທ່ານພິຈາລະນາເຫັນກາຍໃນກາຍຢູ່ ຈິດຍ່ອມຕັ້ງໝັ້ນ ລະຄວາມເສົ້າໝອງໄດ້ ທ່ານຍ່ອມກໍານົດນິມິດນັ້ນໄດ້ ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ ພິຈາລະນາເຫັນຈິດໃນຈິດ ຯລຯ ພິຈາລະນາເຫັນທໍາໃນທໍາທັງຫຼາຍຢູ່ ມີຄວາມພຽນ ມີສໍາປະຊັນຍະ ມີສະຕິ ກໍາຈັດອະພິດຊາແລະໂທມະນັດໃນໂລກໄດ້ ເມື່ອທ່ານພິຈາລະນາເຫັນທໍາໃນທໍາທັງຫຼາຍຢູ່ ຈິດຍ່ອມຕັ້ງໝັ້ນ ລະຄວາມເສົ້າໝອງໄດ້ ທ່ານຍ່ອມກໍານົດນິມິດນັ້ນໄດ້

ພິກຂຸທັງຫຼາຍ ພິກຂຸນັ້ນເປັນບັນດິດ ສະຫຼາດ ແຫຼມຄົມ ຍ່ອມໄດ້ທໍາເຄື່ອງຢູ່ເປັນສຸກໃນປັດຈຸບັນ ແລະໄດ້ສະຕິສໍາປະຊັນຍະ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນພິກຂຸນັ້ນເປັນບັນດິດ ສະຫຼາດແຫຼມຄົມ ກໍານົດນິມິດແຫ່ງຈິດຂອງຕົນ

**ສູທະສູດທີ ໘ ຈົບ**

# ໙. ຄິລານະສູດ

## ວ່າດ້ວຍພຣະຜູ້ມີພຣະພາກເຈົ້າຊົງພຣະປະຊວນ

[໓໗໕] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ເວລຸວະຄາມ ເຂດເມືອງເວສາລີ

ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ມາເທີ້ນ ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງເຂົ້າຈຳພັນສາຮອບເມືອງເວສາລີ ຕາມທີ່ທີ່ມີເພື່ອນ ຕາມທີ່ທີ່ມີຄົນເຄີຍຄົບກັນ ຕາມທີ່ທີ່ມີຄົນເຄີຍຄົບກັນມາ ເຮົາກໍຈະເຂົ້າຈຳພັນສາໃນເວລຸວະຄາມນີ້ຄືກັນ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວເຂົ້າຈຳພັນສາຮອບເມືອງເວສາລີ ຕາມທີ່ທີ່ມີເພື່ອນ ຕາມທີ່ທີ່ມີຄົນເຄີຍຄົບກັນ ຕາມທີ່ທີ່ມີຄົນເຄີຍຄົບກັນມາ ສ່ວນພຣະຜູ້ມີພຣະພາກເຈົ້າກໍຊົງເຂົ້າຈຳພັນສາໃນເວລຸວະຄາມນັ້ນເອງ

ຄັນເມື່ອພຣະຜູ້ມີພຣະພາກເຈົ້າຊົງເຂົ້າຈຳພັນສາແລ້ວ ຊົງພຣະປະຊວນຢ່າງຮຸນແຮງ ມີທຸກຂະເວທະນາຢ່າງແສນສາຫັດ ໃກ້ຈະປະຣິນິບພານ ພຣະອົງຊົງມີສະຕິສຳປະຊັນຍະ ຊົງອົດກັ້ນ ບໍ່ພັ່ນພືງ ຊົງພຣະດຳຣິວ່າ ການທີ່ເຮົາບໍ່ບອກຜູ້ອຸປັດຖາກ ບໍ່ອຳລາພິກຂຸສົງປະຣິນິບພານນັ້ນ ບໍ່ເໝາະແກ່ເຮົາ ທາງທີ່ດີ ເຮົາຄວນໃຊ້ຄວາມພຽນຂັບໄລ່ອາພາດນີ້ ດຳລົງຊີວິດສັງຂານຢູ່ຕໍ່ໄປ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງໃຊ້ຄວາມພຽນຂັບໄລ່ພຣະອາການປະຊວນນັ້ນ ຊົງດຳລົງຊີວິດສັງຂານຢູ່ ອາການພຣະປະຊວນຈຶ່ງສະງົບ ເມື່ອພຣະຜູ້ມີພຣະພາກເຈົ້າຊົງຫາຍຈາກພຣະປະຊວນ ຫາຍຈາກພຣະອາການໄຂ້ບໍ່ດົນ ໄດ້ສະເດັດອອກຈາກພຣະວິຫານ ໄປປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວໃນຮົ່ມເງົາພຣະວິຫານ

ບັດນັ້ນ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ເມື່ອຂ້າພຣະອົງໄດ້ເຫັນພຣະສຸກຂະພາບຂອງພຣະອົງແລ້ວ ໄດ້ເຫັນພຣະອົງຊົງອົດທົນຕໍ່ທຸກຂະເວທະນາແລ້ວ ເຮັດໃຫ້ຮ່າງກາຍຂອງຂ້າພຣະອົງອ່ອນເປ້ຍເໝືອນຄົນເມົາ ຂ້າພຣະອົງຮູ້ສຶກມືດທຸກດ້ານ ແມ່ນທຳກໍບໍ່ຜາກົດແກ່ຂ້າພຣະອົງອີກແລ້ວ ຍ້ອນພຣະອາການໄຂ້ຂອງພຣະຜູ້ມີພຣະພາກເຈົ້າ ແຕ່ຂ້າພຣະອົງກໍຍັງເບົາໃຈຢູ່ໜ້ອຍໜຶ່ງວ່າ ພຣະຜູ້ມີພຣະພາກເຈົ້າຈະຍັງບໍ່ປະຣິນິບພານຕາບທີ່ທີ່ຍັງບໍ່ໄດ້ຜາຣົບພິກຂຸສົງແລ້ວ ຕັດພຣະພຸດທະພົດແນວໃດແນວໜຶ່ງ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ອານົນ ພິກຂຸສົງຍັງຈະຫວັງໄດ້ອັນໃດໃນເຮົາອີກນໍ ທຳທີ່ເຮົາສະແດງແລ້ວບໍ່ມີໃນບໍ່ມີນອກ ໃນເລື້ອງທຳທັງຫຼາຍ ຕະຖາຄົດບໍ່ມີອາຈະຣິຍະມຸດຖິ ຜູ້ທີ່ຄິດວ່າ ເຮົາທີ່ນັ້ນຈັກເປັນຜູ້ບໍລິຫານພິກຂຸສົງຕໍ່ໄປ ຫຼື ວ່າ ພິກຂຸສົງຈະຕ້ອງຢຶດເຮົາທີ່ນັ້ນເປັນຫຼັກ ຜູ້ນັ້ນຈະຕ້ອງຜາຣົບພິກຂຸສົງແລ້ວກ່າວແນວໃດແນວໜຶ່ງເປັນແນ່ ແຕ່ຕະຖາຄົດບໍ່ຄິດວ່າ ເຮົາທີ່ນັ້ນຈັກເປັນຜູ້ບໍລິຫານພິກຂຸສົງຕໍ່ໄປ ຫຼື ວ່າ ພິກຂຸສົງຈະຕ້ອງຢຶດເຮົາທີ່ນັ້ນເປັນຫຼັກ ແລ້ວເປັນຫຍັງຕະຖາຄົດຈະຕ້ອງຜາຣົບພິກຂຸສົງກ່າວແນວໃດແນວໜຶ່ງອີກນໍ ບັດນີ້ເຮົາເປັນຜູ້ຊະຣາ ແກ່ເຖົ້າລ່ວງການມາດົນ ຜ່ານໄວມາຫຼາຍ ເຮົາມີໄວ ໘໐ ປີ ຮ່າງກາຍຂອງຕະຖາຄົດຍັງເປັນໄປໄດ້ກໍຄື

ກັບກວຽນເກົ່າທີ່ຊ່ອມແຊມດ້ວຍໄມ້ໄຜ່ ສັນນັ້ນ ຮ່າງກາຍຂອງຕະຖາຄົດຍັງສະບາຍຂຶ້ນ ກໍຍ້ອນໃນເວລາທີ່ຕະຖາຄົດເຂົ້າ ເຈໂຕສະມາທິອັນບໍ່ມີນິມິດ ຍ້ອນບໍ່ໃສ່ໃຈນິມິດທຸກຢ່າງ ແລະຍ້ອນດັບເວທະນາບາງຢ່າງໄດ້ທີ່ນັ້ນ ທ່ານທັງຫຼາຍຈົ່ງມີຕົນເປັນເກາະ ມີຕົນເປັນບ່ອນເພິ່ງ ຢ່າມີສິ່ງອື່ນເປັນບ່ອນເພິ່ງເລີຍ ມີທຳເປັນເກາະ ມີທຳເປັນບ່ອນເພິ່ງ ຢ່າມີສິ່ງອື່ນເປັນບ່ອນເພິ່ງຢູ່ເທີ້ນ

ພິກຂຸຈະຊື່ວ່າມີຕົນເປັນເກາະ ມີຕົນເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງ ມີທຳເປັນເກາະ ມີທຳເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງຢູ່ ແນວໃດ

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸຈະຊື່ວ່າມີຕົນເປັນເກາະ ມີຕົນເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງ ມີທຳເປັນເກາະ ມີທຳເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງຢູ່ ແນວນີ້ແລ

ອານົນ ພິກຂຸເຫຼົ່າໃດເຫຼົ່າໜຶ່ງໃນບັດນີ້ກໍດີ ໃນເວລາທີ່ເຮົາລ່ວງໄປກໍດີ ຈັກມີຕົນເປັນເກາະ ມີຕົນເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງ ມີທຳເປັນເກາະ ມີທຳເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງຢູ່ ພິກຂຸເຫຼົ່ານັ້ນຈັກເປັນຜູ້ເລີດກວ່າ ພິກຂຸຜູ້ຕ້ອງການຕໍ່ການສຶກສາ

**ຄິລານະສູດທີ ໙ ຈົບ**

# ໑໐. ພິກຂຸນູປັດສະຍະສູດ

## ວ່າດ້ວຍການສົນທະນາທຳໃນສຳນັກພິກຂຸນີ

[໓໗໖] ເມື່ອໃນເວລາເຊົ້າ ທ່ານພຣະອານົນຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປສູ່ສຳນັກພິກຂຸນີແຫ່ງໜຶ່ງ ນັ່ງເທິງອາສະນະທີ່ປູລາດໄວ້ ລຳດັບນັ້ນ ພິກຂຸນີຫຼາຍອົງເຂົ້າໄປຫາທ່ານພຣະອານົນຮອດບ່ອນຢູ່ ໄຫວ້ແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບ ທ່ານພຣະອານົນດັ່ງນີ້ວ່າ ທ່ານອານົນ ພິກຂຸນີຈຳນວນຫຼາຍໃນພຣະທຳວິໄນນີ້ມີຈິດຕັ້ງໝັ້ນດີໃນສະຕິປັດຖານ ໔ ປະການຢູ່ ຍ່ອມຮູ້ຄຸນວິເສດອັນຍິ່ງແນວອື່ນຈາກຄຸນວິເສດທີ່ມີຢູ່ກ່ອນ

ທ່ານພຣະອານົນກ່າວວ່າ ນາງທັງຫຼາຍ ຂໍ້ນີ້ເປັນແນວນັ້ນ ນາງທັງຫຼາຍ ຂໍ້ນີ້ເປັນແນວນັ້ນ ພິກຂຸຫຼືພິກຂຸນີອົງໃດອົງໜຶ່ງ ມີຈິດຕັ້ງໝັ້ນດີໃນສະຕິປັດຖານ ໔ ປະການຢູ່ ພິກຂຸຫຼືພິກຂຸນີອົງນັ້ນເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຮູ້ຄຸນວິເສດອັນຍິ່ງແນວອື່ນຈາກຄຸນວິເສດທີ່ມີຢູ່ກ່ອນ ຈາກນັ້ນໄດ້ຊີ້ແຈ່ງໃຫ້ພິກຂຸນີເຫຼົ່ານັ້ນເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮອຍຮ່ຳໃຈໃຫ້ສົດຊື່ນ ແຈ່ມໃສດ້ວຍທຳມີກະຖາແລ້ວ ລຸກຈາກອາສະນະຈາກໄປ

ຕໍ່ມາ ທ່ານພຣະອານົນທ່ຽວບິນທະບາດໃນເມືອງສາວັດຖີ ກັບຈາກບິນທະບາດ ພາຍຫຼັງສັນພັດຕາຫານສຳເລັດແລ້ວ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂອກາດ ເມື່ອເຊົ້ານີ້ ຂ້າພຣະອົງຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປສູ່ສຳນັກພິກຂຸນີແຫ່ງໜຶ່ງ ນັ່ງເທິງອາສະນະທີ່ປູລາດໄວ້ ລຳດັບນັ້ນ ພິກຂຸນີຈຳນວນຫຼາຍເຂົ້າມາຫາຂ້າພຣະອົງຮອດບ່ອນຢູ່ ໄຫວ້ແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບຂ້າພຣະອົງດັ່ງນີ້ວ່າ ທ່ານອານົນ ພິກຂຸນີຈຳນວນຫຼາຍໃນພຣະທຳວິໄນນີ້ມີຈິດຕັ້ງໝັ້ນດີໃນສະຕິປັດຖານ ໔ ປະການຢູ່ ຍ່ອມຮູ້ຄຸນວິເສດອັນຍິ່ງແນວອື່ນຈາກຄຸນວິເສດທີ່ມີຢູ່ກ່ອນ ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອພິກຂຸນີທັງຫຼາຍກ່າວແນວນີ້ແລ້ວ ຂ້າພຣະອົງຈຶ່ງກ່າວວ່າ ນາງທັງຫຼາຍ ຂໍ້ນີ້ ເປັນແນວນັ້ນ ນາງທັງຫຼາຍ ຂໍ້ນີ້ເປັນແນວນັ້ນ ພິກຂຸ ຫຼື ພິກຂຸນີອົງໃດອົງໜຶ່ງມີຈິດຕັ້ງໝັ້ນດີໃນສະຕິປັດຖານ ໔ ປະການຢູ່ ພິກຂຸຫຼືພິກຂຸນີອົງນັ້ນ ເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຮູ້ຄຸນວິເສດອັນຍິ່ງແນວອື່ນຈາກຄຸນວິເສດທີ່ມີຢູ່ກ່ອນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ອານົນ ຂໍ້ນີ້ເປັນແນວນັ້ນ ອານົນ ຂໍ້ນີ້ເປັນແນວນັ້ນ ພິກຂຸຫຼືພິກຂຸນີອົງໃດອົງໜຶ່ງມີຈິດຕັ້ງໝັ້ນດີໃນສະຕິປັດຖານ ໔ ປະການຢູ່ ພິກຂຸຫຼືພິກຂຸນີອົງນັ້ນເພິ່ງຫວັງຂໍ້ນີ້ໄດ້ວ່າ ຈັກຮູ້ຄຸນວິເສດອັນຍິ່ງແນວອື່ນຈາກຄຸນວິເສດທີ່ມີຢູ່ກ່ອນ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ເມື່ອທ່ານພິຈາລະນາເຫັນກາຍໃນກາຍຢູ່ ຄວາມຮ້ອນຮົນໃນກາຍທີ່ມີກາຍເປັນອາລົມເກີດຂຶ້ນແດ່ ຈິດຫົດຫູ່ແດ່ ຈິດຟຸ້ງຊ່ານໄປພາຍນອກແດ່ ພິກຂຸນັ້ນເພິ່ງຕັ້ງຈິດໄວ້ທີ່ນິມິດອັນເປັນບ່ອນຕັ້ງແຫ່ງຄວາມເຫຼື້ອມໃສແນວໃດແນວໜຶ່ງ ເມື່ອທ່ານຕັ້ງຈິດໄວ້ທີ່ນິມິດອັນເປັນບ່ອນຕັ້ງແຫ່ງຄວາມເຫຼື້ອມໃສແນວໃດແນວໜຶ່ງ ປາໂມດຍ່ອມເກີດ ເມື່ອມີປາໂມດ ປີຕິຍ່ອມເກີດ ເມື່ອໃຈມີປີຕິ ກາຍຍ່ອມສະງົບ ທ່ານມີກາຍສະງົບ ຍ່ອມໄດ້ຮັບສຸກ ເມື່ອມີສຸກ ຈິດຍ່ອມຕັ້ງໝັ້ນ ທ່ານພິຈາລະນາເຫັນວ່າ ເຮົາຕັ້ງຈິດໄວ້ເພື່ອປະໂຫຍດໃດ ປະໂຫຍດນັ້ນສຳເລັດແລ້ວ

ແກ່ເຮົາ ຖ້າຈັ່ງຊັ້ນ ບັດນີ້ເຮົາຈະຄຸມຈິດໄວ້ ທ່ານຄຸມຈິດໄວ້ ບໍ່ນຶກ ແລະບໍ່ຕອງ ຍ່ອມຮູ້ແຈ້ງວ່າ ເຮົາບໍ່ມີວິຕົກ ບໍ່ມີວິຈານ ມີສະຕິໃນພາຍໃນ ມີຄວາມສຸກ

໒. ພິຈາລະນາເຫັນ ເວທະນາໃນເວທະນາທັງຫຼາຍ ຯລຯ

໓. ພິຈາລະນາເຫັນ ຈິດໃນຈິດ ຯລຯ

໔. ພິຈາລະນາເຫັນ ທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້ ເມື່ອທ່ານພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ຄວາມຮ້ອນຮົນໃນກາຍທີ່ມີທຳເປັນອາລົມເກີດຂຶ້ນແດ່ ຈິດຫົດຫູ່ແດ່ ຈິດຟຸ້ງຊ່ານໄປພາຍນອກແດ່ ພິກຂຸນັ້ນເພິ່ງຕັ້ງຈິດໄວ້ທີ່ນິມິດອັນເປັນບ່ອນຕັ້ງແຫ່ງຄວາມເຫຼື້ອມໃສແນວໃດແນວໜຶ່ງ ເມື່ອທ່ານຕັ້ງຈິດໄວ້ທີ່ນິມິດອັນເປັນບ່ອນຕັ້ງແຫ່ງຄວາມເຫຼື້ອມໃສແນວໃດແນວໜຶ່ງຢູ່ ປາໂມດຍ່ອມເກີດ ເມື່ອມີປາໂມດ ປີຕິຍ່ອມເກີດ ເມື່ອໃຈມີປີຕິ ກາຍຍ່ອມສະງົບ ທ່ານມີກາຍສະງົບຍ່ອມໄດ້ຮັບສຸກ ເມື່ອມີສຸກ ຈິດຍ່ອມຕັ້ງໝັ້ນ ທ່ານພິຈາລະນາເຫັນວ່າ ເຮົາຕັ້ງຈິດໄວ້ ເພື່ອປະໂຫຍດໃດ ປະໂຫຍດນັ້ນສຳເລັດແລ້ວແກ່ເຮົາ ຖ້າຈັ່ງຊັ້ນ ບັດນີ້ເຮົາຈະຄຸມຈິດໄວ້ ທ່ານຄຸມຈິດໄວ້ ບໍ່ນຶກ ແລະບໍ່ຕອງ ຍ່ອມຮູ້ແຈ້ງວ່າ ເຮົາບໍ່ມີວິຕົກ ບໍ່ມີວິຈານ ມີສະຕິໃນພາຍໃນ ມີຄວາມສຸກ

ອານົນ ພາວະນາຍ່ອມມີຍ້ອນການຕັ້ງຈິດໄວ້ ແນວນີ້

ພາວະນາຍ່ອມມີຍ້ອນບໍ່ຕັ້ງຈິດໄວ້ ແນວໃດ?

ຄື ພິກຂຸ ບໍ່ຕັ້ງຈິດໄວ້ໃນພາຍນອກ ຍ່ອມຮູ້ແຈ້ງວ່າ ເຮົາບໍ່ໄດ້ຕັ້ງຈິດໄວ້ໃນພາຍນອກ ລຳດັບນັ້ນ ທ່ານຮູ້ແຈ້ງວ່າ ຈິດຂອງເຮົາບໍ່ຟຸ້ງຊ່ານໄປທາງຫຼັງ ຫຼື ທາງໜ້າ ລຸດພົ້ນແລ້ວ ບໍ່ຕັ້ງຢູ່ ຕໍ່ມາກໍຮູ້ແຈ້ງວ່າ ເຮົາພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ມີຄວາມສຸກ

ພິກຂຸ ບໍ່ຕັ້ງຈິດໄວ້ໃນພາຍນອກ ຍ່ອມຮູ້ແຈ້ງວ່າ ເຮົາບໍ່ໄດ້ຕັ້ງຈິດໄວ້ໃນພາຍນອກ ລຳດັບນັ້ນ ທ່ານຮູ້ແຈ້ງວ່າ ຈິດຂອງເຮົາບໍ່ຟຸ້ງຊ່ານໄປທາງຫຼັງຫຼືທາງໜ້າ ລຸດພົ້ນແລ້ວ ບໍ່ຕັ້ງຢູ່ ຕໍ່ມາກໍຮູ້ແຈ້ງວ່າ ເຮົາພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ມີຄວາມສຸກ

ພິກຂຸ ບໍ່ຕັ້ງຈິດໄວ້ໃນພາຍນອກ ຍ່ອມຮູ້ແຈ້ງວ່າ ເຮົາບໍ່ໄດ້ຕັ້ງຈິດໄວ້ໃນພາຍນອກ ລຳດັບນັ້ນ ທ່ານຮູ້ແຈ້ງວ່າ ຈິດຂອງເຮົາບໍ່ຟຸ້ງຊ່ານໄປທາງຫຼັງຫຼືທາງໜ້າ ລຸດພົ້ນແລ້ວ ບໍ່ຕັ້ງຢູ່ ຕໍ່ມາກໍຮູ້ແຈ້ງວ່າ ເຮົາພິຈາລະນາເຫັນຈິດໃນຈິດຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ມີຄວາມສຸກ

ພິກຂຸ ບໍ່ຕັ້ງຈິດໄວ້ໃນພາຍນອກ ຍ່ອມຮູ້ແຈ້ງວ່າ ເຮົາບໍ່ໄດ້ຕັ້ງຈິດໄວ້ໃນພາຍນອກ ລຳດັບນັ້ນ ທ່ານຮູ້ແຈ້ງວ່າ ຈິດຂອງເຮົາບໍ່ຟຸ້ງຊ່ານໄປທາງຫຼັງຫຼືທາງໜ້າ ລຸດພົ້ນແລ້ວ ບໍ່ຕັ້ງຢູ່ ຕໍ່ມາກໍຮູ້ແຈ້ງວ່າ ເຮົາພິຈາລະນາເຫັນທຳໃນທຳທັງຫຼາຍ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ມີຄວາມສຸກ

ອານົນ ພາວະນາຍ່ອມມີຍ້ອນບໍ່ຕັ້ງຈິດໄວ້ ແນວນີ້

ອານົນ ພາວະນາຍ້ອນການຕັ້ງຈິດໄວ້ເຮົາໄດ້ສະແດງແລ້ວ ພາວະນາຍ້ອນການບໍ່ຕັ້ງຈິດໄວ້ ເຮົາກໍໄດ້ສະແດງແລ້ວ ດ້ວຍປະການດັ່ງນີ້

ອານົນ ກິດໃດທີ່ສາດສະດາຜູ້ສະແຫວງຫາປະໂຫຍດເກື້ອກູນຜູ້ອະນຸເຄາະເພິ່ງອາໄສຄວາມອະນຸເຄາະກະທຳແກ່ສາວົກທັງຫຼາຍ ກິດນັ້ນເຮົາກໍໄດ້ກະທຳແລ້ວແກ່ທ່ານທັງຫຼາຍ ອານົນ ນັ້ນເຫງົ້າໄມ້ ນັ້ນເຮືອນວ່າງ ທ່ານທັງຫຼາຍຈົ່ງເພ່ງພິນິດ ຢ່າຜະໝາດ ຢ່າໄດ້ມີຄວາມຮ້ອນໃຈໃນພາຍຫຼັງ ນີ້ຄື ຄຳພ່ຳສອນຂອງເຮົາສຳລັບທ່ານທັງຫຼາຍ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ທ່ານພຣະອານົນມີໃຈຍິນດີ ຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ

**ພິກຂຸນູປັດສະຍະສູດທີ ໑໐ ຈົບ**

**ອຳພະປາລິວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ອຳພະປາລິສູດ
໒. ພິກຂຸສູດ
໓. ອະກຸສະລະຣາສີສູດ
໔. ມັກກະຕະສູດ
໕. ຄິລານະສູດ
໖. ສະຕິສູດ
໗. ສາລະສູດ
໘. ສະກຸນັກຄີສູດ
໙. ສູທະສູດ
໑໐. ພິກຂຸນູປັດສະຍະສູດ

# ໔. ນາລັນທະວັກ

## ໝວດວ່າດ້ວຍພຣະທຳມະເທດສະໜາທີ່ເມືອງນາລັນທາ

## ໑. ມະຫາປຸຣິສະສູດ

### ວ່າດ້ວຍມະຫາບຸຣຸດ

[໓໗໗] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ຄັ້ງນັ້ນແລ ທ່ານພຣະສາຣີບຸດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງຕັດວ່າ ມະຫາບຸຣຸດ ມະຫາບຸຣຸດ ດ້ວຍເຫດພຽງທໍ່ໃດນໍ? ບຸກຄົນຈຶ່ງຊື່ວ່າເປັນມະຫາບຸຣຸດ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ສາຣີບຸດ ເຮົາກ່າວວ່າ ມະຫາບຸຣຸດ ຍ້ອນມີຈິດລຸດພົ້ນ ເຮົາກ່າວວ່າ ບໍ່ແມ່ນມະຫາບຸຣຸດ ຍ້ອນມີຈິດຍັງບໍ່ລຸດພົ້ນ

ບຸກຄົນຜູ້ມີຈິດລຸດພົ້ນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້ ເມື່ອທ່ານພິຈາລະນາເຫັນກາຍໃນກາຍຢູ່ ຈິດຍ່ອມຄາຍກຳໜັດ ລຸດພົ້ນຈາກອາສະວະທັງຫຼາຍ ຍ້ອນບໍ່ຖືໝັ້ນ
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ฯລฯ
໓. ພິຈາລະນາເຫັນຈິດໃນຈິດ ฯລฯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້ ເມື່ອທ່ານພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ຈິດຍ່ອມຄາຍກຳໜັດ ລຸດພົ້ນຈາກອາສະວະທັງຫຼາຍຍ້ອນບໍ່ຖືໝັ້ນ

ບຸກຄົນຜູ້ມີຈິດລຸດພົ້ນ ເປັນແນວນີ້ແລ

ສາຣີບຸດ ເຮົາກ່າວວ່າ ມະຫາບຸຣຸດ ຍ້ອນມີຈິດລຸດພົ້ນ ເຮົາກ່າວວ່າ ບໍ່ແມ່ນມະຫາບຸຣຸດ ຍ້ອນມີຈິດຍັງບໍ່ລຸດພົ້ນ

**ມະຫາປຸຣິສະສູດທີ ໑ ຈົບ**

# ໘. ນາລັນທະສູດ

## ວ່າດ້ວຍພຣະທຳມະເທດສະໜາທີ່ເມືອງນາລັນທາ

[໓໗໘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ປາວາຣິກຳພະວັນ ເຂດເມືອງນາລັນທາ ຄັ້ງນັ້ນແລ ທ່ານພຣະສາຣີບຸດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງເຫຼື້ອມໃສໃນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ ບໍ່ເຄີຍມີ ຈັກບໍ່ມີ ແລະຍ່ອມບໍ່ມີສະມະນະ ຫຼື ພາມຜູ້ອື່ນເຊິ່ງຈະມີປັນຍາໃນທາງສຳໂພທິຍານຍິ່ງກວ່າພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ສາຣີບຸດ ທ່ານກ່າວອາສະພິວາຈາຢ່າງຍິ່ງ ທ່ານຖືເອົາດ້ານດຽວ ບັນລືສີຫະນາດວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງເຫຼື້ອມໃສໃນພຣະຜູ້ມີພຣະພາກເຈົ້າແນວນີ້ວ່າ ບໍ່ເຄີຍມີ ຈັກບໍ່ມີ ແລະຍ່ອມບໍ່ມີສະມະນະຫຼືພາມຜູ້ອື່ນ ເຊິ່ງຈະມີປັນຍາໃນທາງສຳໂພທິຍານຍິ່ງກວ່າພຣະຜູ້ມີພຣະພາກເຈົ້າ

ສາຣີບຸດ ທ່ານກຳນົດຮູ້ພຣະຫະໄທຂອງພຣະຜູ້ມີພຣະພາກ ອະຣະຫັນຕະສຳມາສຳພຸດທະເຈົ້າ ທຸກພຣະອົງໃນອະດີດຕະການດ້ວຍໃຈແລ້ວບໍວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຊົງມີສິນແນວນີ້ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນຊົງມີທຳແນວນີ້ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນຊົງມີປັນຍາແນວນີ້ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຊົງມີທຳເຄື່ອງຢູ່ແນວນີ້ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນຊົງລຸດພົ້ນແນວນີ້

ບໍ່ໄດ້ກຳນົດຮູ້ ຂ້ານ້ອຍ

ສາຣີບຸດ ທ່ານກຳນົດຮູ້ພຣະຫະໄທຂອງພຣະຜູ້ມີພຣະພາກ ອະຣະຫັນຕະສຳມາສຳພຸດທະເຈົ້າ ທຸກພຣະອົງໃນອະນາຄົດຕະການດ້ວຍໃຈແລ້ວບໍວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈັກຊົງມີສິນແນວນີ້ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນຈັກຊົງມີທຳແນວນີ້ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ຈັກຊົງມີປັນຍາແນວນີ້ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນຈັກຊົງມີທຳເຄື່ອງຢູ່ແນວນີ້ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນຈັກຊົງລຸດພົ້ນແນວນີ້

ບໍ່ໄດ້ກໍານົດຮູ້ ຂ້ານ້ອຍ

ສາຣີບຸດ ທ່ານກໍານົດຮູ້ໃຈເຮົາຜູ້ເປັນພຣະອະຣະຫັນຕະສໍາມາສໍາພຸດທະເຈົ້າໃນເວລານີ້ ດ້ວຍ ໃຈແລ້ວບໍວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າຊົງມີສິນແນວນີ້ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າຊົງມີທໍາແນວນີ້ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າຊົງມີປັນຍາແນວ ນີ້ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າຊົງມີທໍາເຄື່ອງຢູ່ແນວນີ້ ແມ່ນຍ້ອນເຫດນີ້ ພຣະຜູ້ ມີພຣະພາກເຈົ້າຊົງລຸດພົ້ນແນວນີ້

ບໍ່ໄດ້ກໍານົດຮູ້ ຂ້ານ້ອຍ

ສາຣີບຸດ ໃນເລື້ອງນີ້ ທ່ານບໍ່ມີຍານກໍານົດຮູ້ພຣະທະໄທພຣະອະຣະຫັນຕະ ສໍາມາສໍາ ພຸດທະເຈົ້າ ທັງໃນອະດີດ ອະນາຄົດ ແລະປັດຈຸບັນ ເມື່ອເປັນເຊັ່ນນັ້ນ ຍ້ອນເຫດໃດ ທ່ານຈຶ່ງ ກ່າວ ອາສະພິວາຈາຢ່າງຍິ່ງນີ້ ທ່ານຖືເອົາດ້ານດຽວບັນລືສີຫະນາດວ່າ ຂ້າແດ່ ພຣະອົງຜູ້ຈະ ເລີນ ຂ້າພຣະອົງເຫຼື້ອມໃສໃນພຣະຜູ້ມີພາກແນວນີ້ວ່າ ບໍ່ເຄີຍມີ ຈັກບໍ່ມີ ແລະຍ່ອມບໍ່ມີສະມະນະ ຫຼືພາມຜູ້ອື່ນ ເຊິ່ງຈະມີປັນຍາໃນທາງສໍາໂພທິຍານຍິ່ງກວ່າພຣະຜູ້ມີພຣະພາກເຈົ້າ

ຂ້າແດ່ ພຣະອົງຜູ້ຈະເລີນ ເຖິງແມ່ນວ່າຂ້າພຣະອົງຈະບໍ່ມີຍານກໍານົດຮູ້ພຣະທະໄທຂອງ ພຣະອະຣະຫັນຕະສໍາມາສໍາພຸດທະເຈົ້າທັງໃນອະດີດ ອະນາຄົດ ແລະປັດຈຸບັນ ແຕ່ຂ້າພຣະອົງ ກໍຮູ້ວິທີການອະນຸມານ ຂ້າແດ່ ພຣະອົງຜູ້ຈະເລີນ ເມືອງຊາຍແດນຂອງພຣະຣາຊາມີຮາກຖານ ໝັ້ນຄົງ ມີກໍາແພງ ແລະປ້ອມຄ່າຍແໜ້ນໜາ ມີປະຕູດຽວ ນາຍປະຕູຂອງເມືອງນັ້ນເປັນຄົນ ສະຫຼຽວ ສະຫຼາດ ຫຼັກແຫຼມ ຫ້າມຄົນທີ່ບໍ່ຮູ້ຈັກ ອະນຸຍາດໃຫ້ຄົນທີ່ຮູ້ຈັກເຂົ້າໄປໄດ້ ເຂົາຍ່າງ ກວດກາເບິ່ງຫົນທາງໄປຮອບເມືອງນັ້ນ ບໍ່ພົ້ຮອຍຕໍ່ຫຼືປ່ອງກໍາແພງ ໂດຍທີ່ສຸດແມ່ນພໍທີ່ແມວລອດ ອອກໄປໄດ້ ເຂົາຍ່ອມຮູ້ວ່າ ສັດໃຫຍ່ທຸກຊະນິດຈະເຂົ້າຫຼືອອກທີ່ເມືອງນີ້ ຈະເຂົ້າຫຼືອອກທາງປະ ຕູນີ້ທີ່ນັ້ນ ແມ່ນສັນໃດ ວິທີການອະນຸມານກໍຄືກັນສັນນັ້ນ ຂ້າພຣະອົງຮູ້ວ່າ ພຣະຜູ້ມີພຣະພາກ ອະຣະຫັນຕະສໍາມາສໍາພຸດທະເຈົ້າທຸກພຣະອົງ ໃນອະດີດຕະການ ຊົງລະນິວອນ ໕ ປະການອັນ ເປັນຄວາມເສົ້າໝອງແຫ່ງຈິດ ບັ່ນທອນກໍາລັງປັນຍາ ມີພຣະທະໄທໝັ້ນຄົງດີໃນສະຕິປັດຖານ ໔ ປະການ ຊົງຈະເລີນໂພດຊົງ ໗ ປະການຕາມຄວາມເປັນຈິງ ໄດ້ຕັດສະຮູ້ພຣະສໍາມາສໍາໂພທິ ຍານອັນປະເສີດ ແມ່ນພຣະຜູ້ມີພຣະພາກອະຣະຫັນຕະສໍາມາ ສໍາພຸດທະເຈົ້າທຸກພຣະອົງໃນ ອະນາຄົດຕະການ ຊົງລະນິວອນ ໕ ປະການອັນເປັນຄວາມເສົ້າໝອງແຫ່ງຈິດ ບັ່ນທອນກໍາລັງ ປັນຍາ ມີພຣະທະໄທໝັ້ນຄົງດີໃນສະຕິປັດຖານ ໔ ປະການ ຊົງຈະເລີນໂພດຊົງ ໗ ປະການ ຕາມຄວາມເປັນຈິງ ຈັກຕັດສະຮູ້ສໍາມາສໍາໂພທິຍານອັນປະເສີດ ແມ່ນພຣະຜູ້ມີພຣະພາກເຈົ້າອະ ຣະຫັນຕະສໍາມາສໍາພຸດທະເຈົ້າໃນບັດນີ້ ກໍຊົງລະນິວອນ ໕ ປະການອັນເປັນຄວາມເສົ້າໝອງ ແຫ່ງຈິດ ບັ່ນທອນກໍາລັງປັນຍາ ມີພຣະທະໄທໝັ້ນຄົງດີໃນສະຕິປັດຖານ ໔ ປະການ ຊົງ ຈະເລີນໂພດຊົງ ໗ ປະການຕາມຄວາມເປັນຈິງ ຕັດສະຮູ້ສໍາມາສໍາໂພທິຍານອັນປະເສີດ

ດີແລ້ວ ດີແລ້ວ ສາຣີບຸດ ຍ້ອນເຫດນັ້ນ ທ່ານເພິ່ງກ່າວທຳບັນລະຍາຍນີ້ເນືອງ ໆ ແກ່ພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາທັງຫຼາຍ ດ້ວຍວ່າ ໂມຄະບຸຣຸດເຫຼົ່າໃດ ຈັກມີຄວາມເຄືອບແຄງຫຼືຄວາມສົງໄສໃນຕະຖາຄົດ ໂມຄະບຸຣຸດເຫຼົ່ານັ້ນ ຈັກລະຄວາມເຄືອບແຄງຫຼືຄວາມສົງໄສໃນຕະຖາຄົດ ຍ້ອນໄດ້ຟັງທຳບັນລະຍາຍນີ້

**ນາລັນທະສູດທີ ໘ ຈົບ**

## ໙. ຈຸນທະສູດ

### ວ່າດ້ວຍຈຸນທະສະມະນຸດເທດ

[໓໗໙] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດເມືອງສາວັດຖີ ສະໄໝນັ້ນ ທ່ານພຣະສາຣີບຸດຢູ່ເຮືອນນາລະກະຄາມແຄວ້ນມະຄົດ ອາພາດ ໄດ້ຮັບທຸກ ເປັນໄຂ້ໜັກ ອັນໜຶ່ງ ຈຸນທະ ສະມະນຸດເທດ ເປັນຜູ້ປົນນິບັດທ່ານ

ຄັ້ງນັ້ນ ທ່ານພຣະສາຣີບຸດ ປະຣິນິບພານດ້ວຍອາພາດນັ້ນແລ ບັດນັ້ນ ຈຸນທະ ສະມະນຸດເທດຈຶ່ງຖືບາດ ແລະຈີວອນຂອງທ່ານພຣະສາຣີບຸດເຂົ້າໄປຫາທ່ານພຣະອານົນເຖິງພຣະເຊຕະວັນ ໄຫວ້ແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບທ່ານພຣະອານົນດັ່ງນີ້ວ່າ ທ່ານ ສາຣີບຸດປະຣິນິບພານແລ້ວ ຂ້ານ້ອຍ ນີ້ບາດ ແລະຈີວອນຂອງທ່ານ

ທ່ານພຣະອານົນກ່າວວ່າ ຈຸນທະ ມູນເລື້ອງນີ້ໃຫ້ເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າໄດ້ ມາເທີ້ນ ຈຸນທະ ພວກເຮົາຈັກເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວ ຂາບທູນເລື້ອງນີ້ ຈຸນທະ ສະມະນຸດເທດຮັບຄຳຂອງທ່ານພຣະອານົນແລ້ວ

ຕໍ່ມາ ທ່ານພຣະອານົນ ແລະຈຸນທະ ສະມະນຸດເທດ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ທ່ານພຣະອານົນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຈຸນທະ ສະມະນຸດເທດນີ້ໄດ້ກ່າວແນວນີ້ວ່າ ທ່ານສາຣີບຸດປະຣິນິບພານແລ້ວ ນີ້ບາດ ແລະຈີວອນຂອງທ່ານ ຂ້າແດ່ ພຣະອົງຜູ້ຈະເລີນຮ່າງກາຍຂອງຂ້າພຣະອົງອ່ອນເປ້ຍເໝືອນຄົນເມົາ ຂ້າພຣະອົງຮູ້ສຶກມືດທຸກດ້ານ ແມ່ນທຳກໍບໍ່ແຈ່ມແຈ້ງແກ່ຂ້າພຣະອົງຍ້ອນໄດ້ຟັງວ່າ ທ່ານສາຣີບຸດປະຣິນິບພານແລ້ວ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດຖາມວ່າ ອານົນ ສາຣີບຸດພາເອົາສີນຂັນ ສະມາທິຂັນ ປັນຍາຂັນ ວິມຸດຕິຂັນ ຫຼື ວິມຸດຕິຍານທັດສະນະຂັນປະຣິນິບພານໄປນຳບໍ?

ທ່ານພຣະອານົນທູນຕອບວ່າ ບໍ່ແມ່ນແນວນັ້ນ ຂ້ານ້ອຍ ທ່ານສາຣີບຸດບໍ່ໄດ້ພາເອົາສີນຂັນ ຯລຯ ວິມຸດຕິຍານທັດສະນະຂັນປະຣິນິບພານໄປນຳ ແຕ່ທ່ານສາຣີບຸດໄດ້ເປັນຜູ້ໃຫ້ໂອວາດ ຊີ້ການຳໃຫ້ຮູ້ ຊີ້ແຈ່ງໃຫ້ເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຣວຍຣໍາໃຈໃຫ້ສົດຊື່ນແຈ່ມໃສ ເອົາໃຈໃສ່ໃນການສະແດງທຳ ອະນຸເຄາະເພື່ອນພົມມະຈາຣີ ຂ້າພຣະອົງທັງຫຼາຍ ຣະນຶກເຖິງໂອຊະແຫ່ງທຳ ໂພຄະທຳ ແລະການອະນຸເຄາະດ້ວຍທຳນັ້ນຂອງທ່ານ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ອານົນ ເຮົາໄດ້ບອກເລື້ອງນັ້ນ ໄວ້ກ່ອນແລ້ວບໍ່ແມ່ນບໍວ່າ ຄວາມພັດພາກ ຄວາມປະຖິ້ມ ຄວາມແປປ່ຽນເປັນແນວອື່ນຈາກຂອງຮັກຂອງພໍໃຈ ທຸກຢ່າງຈະຕ້ອງມີ ສັນນັ້ນ ຈະໄປຫວັງອັນໃດໃນສິ່ງເຫຼົ່ານັ້ນນໍ? ສິ່ງທີ່ເກີດຂຶ້ນ ມີຂຶ້ນ ຖືກປັດໄຈປຸງແຕ່ງລ້ວນແຕກສະຫຼາຍເປັນທຳມະດາ ເປັນໄປບໍ່ໄດ້ເລີຍທີ່ຈະປາຖະໜາວ່າ ຂໍສິ່ງນັ້ນຢ່າເສື່ອມສະຫຼາຍໄປ ເມື່ອຕົ້ນໄມ້ໃຫຍ່ ມີແກ່ນ ຢືນຕົ້ນຢູ່ ຕົ້ນທີ່ໃຫຍ່ກວ່າເພິ່ງລົ້ມລົງ ແມ່ນສັນໃດ ເມື່ອພິກຂຸສົງໝູ່ໃຫຍ່ຜູ້ເປັນຫຼັກຍັງດຳລົງຢູ່ ສາຣີບຸດປະຣິນິບພານແລ້ວກໍສັນນັ້ນ ສະນັ້ນ ຈະໄປຫວັງອັນໃດໃນສິ່ງເຫຼົ່ານັ້ນນໍ ສິ່ງທີ່ເກີດຂຶ້ນ ມີຂຶ້ນ ຖືກປັດໄຈປຸງແຕ່ງ ລ້ວນແຕກສະຫຼາຍເປັນທຳມະດາ ເປັນໄປບໍ່ໄດ້ເລີຍທີ່ຈະປາຖະໜາວ່າ ຂໍສິ່ງນັ້ນ ຢ່າເສື່ອມສະຫຼາຍໄປ

ຍ້ອນເຫດນັ້ນ ທ່ານທັງຫຼາຍຈົ່ງມີຕົນເປັນເກາະ ມີຕົນເປັນບ່ອນເພິ່ງ ຢ່າມີສິ່ງອື່ນເປັນບ່ອນເພິ່ງ ມີທຳເປັນເກາະ ມີທຳເປັນບ່ອນເພິ່ງ ຢ່າມີສິ່ງອື່ນເປັນບ່ອນເພິ່ງຢູ່ເທີ້ນ

ພິກຂຸຈະຊື່ວ່າມີຕົນເປັນເກາະ ມີຕົນເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງ ມີທຳເປັນເກາະ ມີທຳເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງຢູ່ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້

ພິກຂຸຈະຊື່ວ່າມີຕົນເປັນເກາະ ມີຕົນເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງ ມີທຳເປັນເກາະ ມີທຳເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງຢູ່ ແນວນີ້ແລ

ອານົນ ພິກຂຸເຫຼົ່າໃດເຫຼົ່າໜຶ່ງໃນບັດນີ້ກໍດີ ໃນເວລາທີ່ເຮົາລ່ວງໄປກໍດີ ຈັກມີຕົນເປັນ

ເກາະ ມີຕົນເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງ ມີທຳເປັນເກາະ ມີທຳເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງຢູ່ ພິກຂຸເຫຼົ່ານັ້ນ ຈັກເປັນຜູ້ເລີດກວ່າພິກຂຸຜູ້ຕ້ອງການຕໍ່ການສຶກສາ

**ຈຸນທະສູດທີ ໓ ຈົບ**

# ໔. ອຸກກະເຈລະສູດ

## ວ່າດ້ວຍພຣະທຳເທດສະໜາທີ່ອຸກກະເຈລະນິຄົມ

[໓໗໐] ສະໄໝໜຶ່ງ ເມື່ອພຣະສາຣີບຸດ ແລະພຣະໂມກຄັນລານະປະຣິນິບພານໄດ້ບໍ່ດົນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ແຄມຝັ່ງແມ່ນ້ຳຄົງຄາ ເຂດອຸກກະເຈລະນິຄົມ ແຄວ້ນວັດຊີ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮ້ອມລ້ອມດ້ວຍພິກຂຸສົງ ປະທັບນັ່ງໃນທີ່ກາງແຈ້ງ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຊຳເລືອງພຣະເນດເບິ່ງພິກຂຸສົງທີ່ມິດຢູ່ແລ້ວຮັບສັ່ງຮຽກພິກຂຸ

ທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ເມື່ອສາຣີບຸດ ແລະໂມກຄັນລານະປະຣິນິບພານແລ້ວ ບໍລິສັດຂອງເຮົານີ້ຜາກົດເໝືອນວ່າງເປົ່າ ສາຣີບຸດແລະໂມກຄັນລານະຢູ່ໃນທິດໃດ ບໍລິສັດຂອງເຮົາບໍ່ວ່າງເປົ່າ ບໍ່ມີຄວາມຫ່ວງໃຍໃນທິດນັ້ນ ພຣະອະຣະຫັນຕະສຳມາສຳພຸດທະເຈົ້າເຫຼົ່ານັ້ນໃດໄດ້ມີແລ້ວໃນອະດີດຕະການ ແມ່ນພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນໄດ້ມີຄູ່ສາວົກນັ້ນ ເປັນຢ່າງຍິ່ງຄືກັບສາຣີບຸດ ແລະໂມກຄັນລານະຂອງເຮົາ ພຣະອະຣະຫັນຕະສຳມາສຳພຸດທະເຈົ້າເຫຼົ່ານັ້ນໃດຈັກມີໃນອະນາຄົດຕະການ ແມ່ນພຣະຜູ້ມີພຣະພາກເຈົ້າເຫຼົ່ານັ້ນ ກໍຈັກມີຄູ່ສາວົກນັ້ນເປັນຢ່າງຍິ່ງຄືສາຣີບຸດ ແລະໂມກຄັນລານະຂອງເຮົາ

ພິກຂຸທັງຫຼາຍ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດສຳລັບສາວົກທັງຫຼາຍ ຊື່ວ່າສາວົກທັງຫຼາຍ ຈັກເຮັດຕາມຄຳສອນແລະເຮັດຕາມຄຳສັ່ງຂອງພຣະສາດສະດາ ຈັກເປັນທີ່ຮັກທີ່ພໍໃຈແລະເປັນທີ່ເຄົາລົບສັນເສີນຂອງບໍລິສັດ ໔

ພິກຂຸທັງຫຼາຍ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດສຳລັບຕະຖາຄົດ ເມື່ອຄູ່ສາວົກປານນີ້ປະຣິນິບພານແລ້ວ ໂສກະ ຫຼື ປະຣິເທວະຍ່ອມບໍ່ມີແກ່ຕະຖາຄົດ ສັນນັ້ນ ຈະໄປຫວັງອັນໃດໃນສິ່ງເຫຼົ່ານັ້ນນໍ ສິ່ງທີ່ເກີດຂຶ້ນ ມີຂຶ້ນ ຖືກປັດໄຈປຸງແຕ່ງ ລ້ວນແຕກສະຫຼາຍເປັນທຳມະດາ ເປັນໄປບໍ່ໄດ້ເລີຍທີ່ຈະປາຖະໜາວ່າ ຂໍສິ່ງນັ້ນ ຢ່າເສື່ອມສະຫຼາຍໄປ ເມື່ອຕົ້ນໄມ້ໃຫຍ່ ມີແກ່ນ ຢືນຕົ້ນຢູ່ຕົ້ນທີ່ໃຫຍ່ກວ່າເພິ່ງລົ້ມລົງ ແມ່ນສັນໃດ ເມື່ອພິກຂຸສົງໝູ່ໃຫຍ່ຜູ້ເປັນຫຼັກຍັງດຳລົງຢູ່ ສາຣີບຸດ

ແລະໂມກຄັນລານະປະຣິ ນິບພານແລ້ວກໍສັນນັ້ນ ດັ່ງນັ້ນ ຈະໄປຫວັງອັນໃດໃນສິ່ງເຫຼົ່ານັ້ນນໍ ສິ່ງທີ່ເກີດຂຶ້ນ ມີຂຶ້ນ ຖືກປັດໄຈປຸງແຕ່ງ ລ້ວນແຕກສະຫຼາຍເປັນທຳມະດາ ເປັນໄປບໍ່ໄດ້ເລີຍທີ່ຈະປາຖະໜາວ່າ ຂໍສິ່ງນັ້ນ ຢ່າເສື່ອມສະຫຼາຍໄປ

ຍ້ອນເຫດນັ້ນ ທ່ານທັງຫຼາຍຈົ່ງມີຕົນເປັນເກາະ ມີຕົນເປັນບ່ອນເພິ່ງ ຢ່າມີສິ່ງອື່ນເປັນບ່ອນເພິ່ງ ມີທຳເປັນເກາະ ມີທຳເປັນບ່ອນເພິ່ງ ຢ່າມີສິ່ງອື່ນເປັນບ່ອນເພິ່ງຢູ່ເທີ້ນ

ພິກຂຸຈະຊື່ວ່າມີຕົນເປັນເກາະ ມີຕົນເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງ ມີທຳເປັນເກາະ ມີທຳເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງຢູ່ ແນວໃດ

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸຈະຊື່ວ່າ ມີຕົນເປັນເກາະ ມີຕົນເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງ ມີທຳເປັນເກາະ ມີທຳເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນທີ່ເພິ່ງຢູ່ ແນວນີ້ແລ

ພິກຂຸທັງຫຼາຍ ພິກຂຸເຫຼົ່າໃດເຫຼົ່າໜຶ່ງໃນບັດນີ້ກໍດີ ໃນເວລາທີ່ເຮົາລ່ວງໄປກໍດີ ຈັກມີຕົນເປັນເກາະ ມີຕົນເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງ ມີທຳເປັນເກາະ ມີທຳເປັນບ່ອນເພິ່ງ ບໍ່ມີສິ່ງອື່ນເປັນບ່ອນເພິ່ງຢູ່ ພິກຂຸເຫຼົ່ານັ້ນ ຈັກເປັນຜູ້ເລີດກວ່າພິກຂຸຜູ້ຕ້ອງການຕໍ່ການສຶກສາ

**ອຸກກະເຈລະສູດທີ ໔ ຈົບ**

# ໕. ພາຫິຍະສູດ

## ວ່າດ້ວຍພຣະພາຫິຍະ

[໓໗໑] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ຄັ້ງນັ້ນ ທ່ານພຣະພາຫິຍະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້

ຈະເລີນ ຂໍປະທານອະໂອກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທໍາແກ່ຂ້າພຣະອົງໂດຍຫຍໍ້ ເຊິ່ງຂ້າພຣະອົງໄດ້ຟັງແລ້ວ ຈະເພິ່ງຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍ ແລະໃຈຢູ່ເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພາຫິຍະ ຍ້ອນເຫດນັ້ນ ທ່ານຈົ່ງເຮັດເບື້ອງຕົ້ນໃນກຸສົນທໍາທັງຫຼາຍໃຫ້ມົດຈົດກ່ອນ

ອັນໃດ ເປັນເບື້ອງຕົ້ນແຫ່ງກຸສົນທໍາທັງຫຼາຍ
ຄື ສິນທີ່ບໍລິສຸດດີ ແລະ ຄວາມເຫັນທີ່ກົງ

ພາຫິຍະ ເມື່ອໃດ ສິນຂອງທ່ານຈັກບໍລິສຸດດີ ແລະຄວາມເຫັນຈັກກົງ ເມື່ອນັ້ນ ທ່ານອາໄສສິນ ດໍາລົງຢູ່ໃນສິນແລ້ວ ເພິ່ງຈະເລີນສະຕິປັດຖານ ໔ ປະການ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ໃນທໍາວິໄນນີ້ ທ່ານ

໑. ຈົ່ງພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສໍາປະຊັນຍະ ມີສະຕິ ກໍາຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ຈົ່ງພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ຈົ່ງພິຈາລະນາເຫັນຈິດໃນຈິດ ຯລຯ
໔. ຈົ່ງພິຈາລະນາເຫັນທໍາໃນທໍາທັງຫຼາຍຢູ່ ມີຄວາມພຽນ ມີສໍາປະຊັນຍະ ມີສະຕິ ກໍາຈັດອະພິດຊາ ແລະ ໂທມະນັດໃນໂລກໄດ້

ພາຫິຍະ ເມື່ອໃດ ທ່ານອາໄສສິນ ດໍາລົງຢູ່ໃນສິນແລ້ວຈັກຈະເລີນສະຕິປັດຖານ ໔ ປະການນີ້ແນວນີ້ ເມື່ອນັ້ນ ທ່ານເພິ່ງຫວັງຄວາມຈະເລີນໃນກຸສົນທໍາທັງຫຼາຍຕະຫຼອດຄືນຫຼື ວັນທີຈັກມາເຖິງ ບໍ່ມີຄວາມເສື່ອມເລີຍ

ລໍາດັບນັ້ນ ທ່ານພຣະພາຫິຍະຊົມຊື່ນ ຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າແລ້ວ ລຸກຈາກອາສະນະ ຖວາຍອະພິວາດ ທໍາປະທັກສິນແລ້ວຈາກໄປ ຕໍ່ມາ ທ່ານພຣະພາຫິຍະກໍຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ບໍ່ດົນປານໃດໄດ້ເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດ ອັນເປັນບ່ອນສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດອອກຈາກເຮືອນ ບວດເປັນບັນພະຊິດໂດຍຖືກຕ້ອງ ປາຖະໜາດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ຮູ້ແຈ້ງວ່າຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສໍາເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ອັນໜຶ່ງ ທ່ານພຣະພາຫິຍະໄດ້ເປັນພຣະອະຣະຫັນອີກອົງໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ ດ້ວຍອາການຢ່າງນີ້ແລ

**ພາຫິຍະສູດທີ ໕ ຈົບ**

# ໖. ອຸດຕິຍະສູດ

## ວ່າດ້ວຍພຣະອຸດຕິຍະ

[໓໗໔] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ຄັ້ງນັ້ນ ທ່ານພຣະອຸດຕິຍະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳແກ່ຂ້າພຣະອົງໂດຍຫຍໍ້ ເຊິ່ງຂ້າພຣະອົງໄດ້ຟັງແລ້ວ ຈະເພິ່ງຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ອຸດຕິຍະ ຍ້ອນເຫດນັ້ນ ທ່ານຈົ່ງເຮັດເບື້ອງຕົ້ນໃນກຸສົນທຳທັງຫຼາຍ ໃຫ້ມົດຈົດກ່ອນ

ອັນໃດ ເປັນເບື້ອງຕົ້ນແຫ່ງກຸສົນທຳທັງຫຼາຍ
ຄື ສີນທີ່ບໍລິສຸດດີ ແລະ ຄວາມເຫັນທີ່ກົງ

ອຸດຕິຍະ ເມື່ອໃດ ສີນຂອງທ່ານຈັກບໍລິສຸດດີແລະຄວາມເຫັນຈັກກົງ ເມື່ອນັ້ນ ທ່ານອາໄສສີນ ດຳລົງຢູ່ໃນສີນແລ້ວ ເພິ່ງຈະເລີນສະຕິປັດຖານ ໔ ປະການ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ໃນທຳວິໄນນີ້ ທ່ານ

໑. ຈົ່ງພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ຈົ່ງພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ຈົ່ງພິຈາລະນາເຫັນຈິດໃນຈິດ ຯລຯ
໔. ຈົ່ງພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະ ໂທມະນັດໃນໂລກໄດ້

ອຸດຕິຍະ ເມື່ອໃດ ທ່ານອາໄສສີນ ດຳລົງຢູ່ໃນສີນແລ້ວ ຈັກຈະເລີນສະຕິປັດຖານ ໔ ປະການນີ້ແນວນີ້ ເມື່ອນັ້ນ ທ່ານຈັກເຖິງຈຸດຈົບແຫ່ງຄວາມຕາຍ

ລຳດັບນັ້ນ ທ່ານພຣະອຸດຕິຍະຊົມຊື່ນ ຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າແລ້ວ ລຸກຈາກອາສະນະ ຖວາຍອະພິວາດ ທຳປະທັກສິນແລ້ວຈາກໄປ ຕໍ່ມາ ທ່ານພຣະອຸດຕິຍະກໍຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ບໍ່ດົນປານໃດໄດ້ເຮັດໃຫ້ແຈ້ງເຊິ່ງປະໂຫຍດປະເສີດ ອັນເປັນບ່ອນສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດອອກຈາກເຮືອນ ບວດເປັນບັນພະຊິດ ໂດຍຖືກຕ້ອງປາຖະໜາດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ອັນໜຶ່ງ ທ່ານພຣະອຸດຕິຍະໄດ້ເປັນພຣະອະຣະຫັນອີກອົງໜຶ່ງ ໃນບັນດາພຣະອະຣະຫັນທັງຫຼາຍ ດ້ວຍອາການຢ່າງນີ້ແລ

**ອຸດຕິຍະສູດທີ ໖ ຈົບ**

# ໗. ອະຣິຍະສູດ

## ວ່າດ້ວຍທຳທີ່ເປັນອະຣິຍະ

[໓໗໓] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສະຕິປັດຖານ ໔ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ເປັນອະຣິຍະ ເປັນນິຍະຍານິກະທຳ ນຳອອກໄປເພື່ອໃຫ້ສິ້ນທຸກໂດຍຖືກຕ້ອງແກ່ຜູ້ພ່ຳເພັງສະຕິປັດຖານ ໔ ປະການນັ້ນ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ

໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸທັງຫຼາຍ ສະຕິປັດຖານ ໔ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ເປັນອະຣິຍະ ເປັນນິຍະຍານິກະທຳ ນຳອອກໄປເພື່ອໃຫ້ສິ້ນທຸກໂດຍຖືກຕ້ອງແກ່ຜູ້ພ່ຳເພັງສະຕິປັດຖານ ໔ ປະການນັ້ນ

**ອະຣິຍະສູດທີ ໗ ຈົບ**

# ໘. ພົມສູດ

## ວ່າດ້ວຍທ້າວສະຫຳບໍດີພົມ

[໓໗໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າທຳອິດຕັດສະຣູ້ ປະທັບຢູ່ໃຕ້ຕົ້ນອະຊະປາລະນິໂຄດ ແຄມຝັ່ງແມ່ນ້ຳເນຣັນຊະຣາ ເຂດອຸຣຸເວລາ ຊົງຫຼີບຫຼີກຢູ່ໃນບ່ອນສະງັດ ໄດ້ເກີດຄວາມຮ່ຳເພິງຂຶ້ນ ມາວ່າ ທາງນີ້ເປັນທາງດຽວເພື່ອຄວາມບໍລິສຸດແຫ່ງສັດທັງຫຼາຍ ເພື່ອກ້າວລ່ວງໂສກະ ແລະປະຣິເທວະ ເພື່ອດັບທຸກແລະໂທມະນັດ ເພື່ອບັນລຸຍາຍະທຳ ເພື່ອເຮັດນິບພານໃຫ້ແຈ້ງ ຄື ສະຕິປັດຖານ ໔ ປະການ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸ

໑. ເພິ່ງພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ເພິ່ງພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ເພິ່ງພິຈາລະນາເຫັນຈິດໃນຈິດ ຯລຯ
໔. ເພິ່ງພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ທາງນີ້ເປັນທາງດຽວເພື່ອຄວາມບໍລິສຸດແຫ່ງສັດທັງຫຼາຍ ເພື່ອກ້າວລ່ວງໂສກະ ແລະປະຣິເທວະ ເພື່ອດັບທຸກແລະໂທມະນັດ ເພື່ອບັນລຸຍາຍະທຳ ເພື່ອເຮັດນິບພານໃຫ້ແຈ້ງ

ຄື ສະຕິປັດຖານ ໔ ປະການ

ລຳດັບນັ້ນ ທ້າວສະຫາບໍດີພົມຮູ້ຄວາມຮ່ຳເພິງຂອງພຣະຜູ້ມີພຣະພາກເຈົ້າແລ້ວ ຈຶ່ງຫາຍໂຕຈາກພົມມະໂລກມາຜາກົດກົງພຣະພັກຂອງພຣະຜູ້ມີພຣະພາກເຈົ້າ ປຽບຄື ບຸຣຸດມີກຳລັງຢຽດແຂນອອກ ຫຼື ຄູ້ແຂນເຂົ້າສັນນັ້ນ ແລ້ວພຣະອົງຫົ່ມຜ້າບ່ຽງບ່າ ຂ້າງໜຶ່ງ ປະນົມອັນຊະລີໄປທາງພຣະຜູ້ມີພຣະພາກເຈົ້າແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ເລື້ອງນີ້ເປັນແນວນັ້ນ ຂ້າແດ່ ພຣະສຸຄົດເຈົ້າ ເລື້ອງນີ້ເປັນແນວນັ້ນ ຂ້າແດ່ ພຣະອົງຜູ້ຈະເລີນ ທາງນີ້ເປັນທາງດຽວເພື່ອຄວາມບໍລິສຸດແຫ່ງສັດທັງຫຼາຍ ເພື່ອກ້າວລ່ວງໂສກະ ແລະປະຣິເທວະ ເພື່ອດັບທຸກແລະໂທມະນັດ ເພື່ອບັນລຸຍາຍະທຳ ເພື່ອເຮັດນິບພານໃຫ້ແຈ້ງ ຄື ສະຕິປັດຖານ ໔ ປະການ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸ

໑. ເພິ່ງພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ເພິ່ງພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ฯລฯ
໓. ເພິ່ງພິຈາລະນາເຫັນຈິດໃນຈິດ ฯລฯ
໔. ເພິ່ງພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້

ຂ້າແດ່ ພຣະອົງຜູ້ຈະເລີນ ທາງນີ້ເປັນທາງດຽວ ເພື່ອຄວາມບໍລິສຸດແຫ່ງສັດທັງຫຼາຍ ເພື່ອກ້າວລ່ວງໂສກະ ແລະປະຣິເທວະ ເພື່ອດັບທຸກແລະໂທມະນັດ ເພື່ອບັນລຸຍາຍະທຳ ເພື່ອເຮັດນິບພານໃຫ້ແຈ້ງ ຄື ສະຕິປັດຖານ ໔ ປະການ

ທ້າວສະຫາບໍດີພົມໄດ້ຂາບທູນຄຳນີ້ແລ້ວ ຈຶ່ງໄດ້ກ່າວຄາຖາປະພັນຕໍ່ໄປອີກ ວ່າ

ພຣະຜູ້ມີພຣະພາກເຈົ້າຜູ້ຊົງເຫັນທຳ
ອັນເປັນສ່ວນບ່ອນສຸດສິ້ນແຫ່ງຊາດ
ຊົງອະນຸເຄາະດ້ວຍຄວາມເກື້ອກູນ
ຊົງຮູ້ຈັກທາງອັນເປັນທາງດຽວ
ເຊິ່ງເຫຼົ່າບັນດິດໄດ້ຂ້າມມາກ່ອນແລ້ວ
ຈັກຂ້າມ ແລະກຳລັງຂ້າມໂອຄະໄດ້ດ້ວຍທາງນີ້

**ພົມສູດທີ ໗ ຈົບ**

# ໙. ເສທະກະສູດ

## ວ່າດ້ວຍທຳມະເທດສະໜາທີ່ເສທະກະນິຄົມ

[໓໗໕] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນິຄົມຂອງຊາວສຸມພະຊື່ເສທະກະ ແຄວ້ນສຸມພະໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ຄົນຈັນທານຜູ້ເປັນນັກໄຕ່ຮາວ ຍົກໄມ້ໄຜ່ຂຶ້ນຕັ້ງໄວ້ ແລ້ວຮຽກສິດຊື່ເມທະກະຖາລິກະມາບອກວ່າ ເມທະກະຖາລິກະຜູ້ສະຫາຍ ທ່ານຈົ່ງຂຶ້ນຮາວໄມ້ໄຜ່ແລ້ວຢືນເທິງຄໍຂອງເຮົາເທີ້ນ

ພິກຂຸທັງຫຼາຍ ເມທະກະຖາລິກະຜູ້ເປັນສິດຮັບຄຳຂອງຄົນຈັນທານຜູ້ເປັນນັກໄຕ່ຮາວແລ້ວໄດ້ຂຶ້ນຮາວໄມ້ໄຜ່ ຢືນຢູ່ເທິງຄໍຂອງອາຈານ ຄົນຈັນທານຜູ້ເປັນນັກໄຕ່ຮາວໄດ້ກ່າວວ່າ ເມທະກະຖາລິກະຜູ້ສະຫາຍ ທ່ານຈົ່ງຮັກສາເຮົາ ເຮົາກໍຈັກຮັກສາທ່ານ ເຮົາທັງສອງຕ່າງຄຸ້ມຄອງຮັກສາກັນ ແລະກັນແນວນີ້ ຈັກສະແດງສິລະປະ ຈັກໄດ້ລາບ ແລະຈັກລົງຈາກຮາວໄມ້ໄຜ່ໂດຍຄວາມໂດຍປອດໄພ

ພິກຂຸທັງຫຼາຍ ເມື່ອອາຈານກ່າວແນວນີ້ແລ້ວ ເມທະກະຖາລິກະຜູ້ເປັນສິດໄດ້ກ່າວ ວ່າທ່ານອາຈານ ກໍເລື້ອງນີ້ ຈັກເປັນແນວນັ້ນເປັນໄປບໍ່ໄດ້ ທ່ານຈົ່ງຮັກສາຕົນ ຂ້ານ້ອຍກໍຈັກຮັກສາຕົນ ເຮົາທັງສອງຕ່າງຄຸ້ມຄອງຮັກສາຕົນແນວນີ້ ຈັກສະແດງສິລະປະ ຈັກໄດ້ລາບ ແລະຈັກລົງຈາກຮາວໄມ້ໄຜ່ໂດຍຄວາມໂດຍປອດໄພ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດສະໜັບສະໜູນວ່າ ອຸບາຍໃນເລື້ອງນັ້ນມີຢູ່ ຄືສິດຊື່ເມທະກະຖາລິກໍໄດ້ເວົ້າກັບອາຈານ ຄື ພຣະອົງໄດ້ຕັດວ່າ

ພິກຂຸທັງຫຼາຍ ທ່ານທັງຫຼາຍ ເພິ່ງປະຕິບັດສະຕິປັດຖານດ້ວຍຄິດວ່າ ຈັກຮັກສາຕົນ ເພິ່ງປະຕິບັດສະຕິປັດຖານດ້ວຍຄິດວ່າ ຈັກຮັກສາຜູ້ອື່ນ ບຸກຄົນເມື່ອຮັກສາຕົນ ຊື່ວ່າຮັກສາຜູ້ອື່ນ ເມື່ອຮັກສາຜູ້ອື່ນ ກໍຊື່ວ່າຮັກສາຕົນ

ບຸກຄົນເມື່ອຮັກສາຕົນ ຊື່ວ່າຮັກສາຜູ້ອື່ນ ເປັນແນວໃດ?

ຄື ບຸກຄົນເມື່ອຮັກສາຕົນດ້ວຍການປະຕິບັດ ດ້ວຍການຈະເລີນ ດ້ວຍການເຮັດໃຫ້ຫຼາຍ ຊື່ວ່າຮັກສາຜູ້ອື່ນ

ບຸກຄົນເມື່ອຮັກສາຕົນ ຊື່ວ່າ ຮັກສາຜູ້ອື່ນ ເປັນແນວນີ້ແລ

ບຸກຄົນເມື່ອຮັກສາຜູ້ອື່ນ ຊື່ວ່າ ຮັກສາຕົນ ເປັນແນວໃດ?

ຄື ບຸກຄົນເມື່ອຮັກສາຜູ້ອື່ນດ້ວຍຄວາມອົດທົນ ດ້ວຍຄວາມບໍ່ບຽດບຽນ ດ້ວຍຈິດເມດຕາ ດ້ວຍຄວາມອີດູ ຊື່ວ່າຮັກສາຕົນ

ບຸກຄົນເມື່ອຮັກສາຜູ້ອື່ນ ຊື່ວ່າຮັກສາຕົນ ເປັນແນວນີ້ແລ

ທ່ານທັງຫຼາຍເພິ່ງປະຕິບັດສະຕິປັດຖານດ້ວຍຄິດວ່າ ຈັກຮັກສາຕົນ ເພິ່ງປະຕິບັດສະຕິປັດຖານດ້ວຍຄິດວ່າ ຈັກຮັກສາຜູ້ອື່ນ

ພິກຂຸທັງຫຼາຍ ບຸກຄົນເມື່ອຮັກສາຕົນ ຊື່ວ່າ ຮັກສາຜູ້ອື່ນ ເມື່ອຮັກສາຜູ້ອື່ນ ກໍຊື່ວ່າ ຮັກສາຕົນ

**ເສທະກະສູດທີ ໙ ຈົບ**

# ໑໐. ຊະນະປະທະກັນລະຍານີສູດ

## ວ່າດ້ວຍນາງງາມໃນຊົນນະບົດ

[໓໗໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ນິຄົມຂອງຊາວສຸມພະຊື່ ເສທະກະ ໃນແຄວັ້ນສຸມພະໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ໝູ່ມະຫາຊົນໄດ້ຮູ້ຂ່າວວ່າ ມີນາງງາມໃນຊົນນະບົດ ມີນາງງາມໃນຊົນນະບົດ ຈຶ່ງປະຊຸມກັນ ກໍນາງງາມໃນຊົນນະບົດນັ້ນເປັນຕາເບິ່ງຢ່າງຍິ່ງໃນເວລາຟ້ອນລຳ ເປັນຕາຟັງຢ່າງຍິ່ງ ໃນເວລາຂັບຮ້ອງ ໝູ່ມະຫາຊົນໄດ້ຮູ້ຂ່າວອີກວ່າ ນາງງາມໃນຊົນນະບົດຈະຟ້ອນລຳ ຈະຂັບຮ້ອງ ຈຶ່ງປະຊຸມກັນແໜ້ນໜາປະມານບໍ່ໄດ້ ບັດນັ້ນ ມີບຸຣຸດຄົນໜຶ່ງຜູ້ຮັກໂຕຢ້ານຕາຍ ມັກສຸກຊັງທຸກຍ່າງມາ ໝູ່ມະຫາຊົນເພິ່ງເວົ້າກັບເຂົາແນວນີ້ວ່າ ບຸຣຸດຜູ້ຈະເລີນ ທ່ານເພິ່ງນຳພາຊະນະນ້ຳມັນ ເຊິ່ງເຕັມປ່ຽມນີ້ຜ່ານໄປລະຫວ່າງທີ່ປະຊຸມໃຫຍ່ກັບນາງງາມຊົນນະບົດ ແລະຈັກມີບຸຣຸດເງື້ອດາບຕິດຕາມໄປທາງຫຼັງ ໆ ໂດຍບອກວ່າ ຖ້າທ່ານຈັກເຮັດນ້ຳມັນເຟືອດແມ່ນພຽງໜ້ອຍໜຶ່ງໃນບ່ອນໃດ ຫົວຂອງທ່ານຈັກຂາດຕົກລົງໃນບ່ອນນັ້ນ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ບຸຣຸດນັ້ນ ຈະບໍ່ໃສ່ໃຈພາຊະນະນ້ຳມັນນັ້ນແລ້ວ ເຜີນຳໄປໃນພາຍນອກຢູ່ບໍ

ພິກຂຸທັງຫຼາຍຂາບທູນວ່າ ບໍ່ແມ່ນແນວນັ້ນ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຍົກອຸປະມານີ້ມາ ກໍເພື່ອໃຫ້ເຂົ້າໃຈເນື້ອຄວາມຊັດເຈນ ເນື້ອຄວາມໃນເລື້ອງນີ້ມີດັ່ງຕໍ່ໄປນີ້

ຄຳວ່າ ພາຊະນະນ້ຳມັນເຊິ່ງເຕັມປ່ຽມ ນີ້ເປັນຄຳຮຽກກາຍະຄະຕາສະຕິ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງຕັ້ງໃຈຮູ້ແນວນີ້ວ່າ ກາຍະຄະຕາສະຕິຈັກເປັນກຳມັດຖານທີ່ພວກເຮົາຈະເລີນ ເຮັດໃຫ້ຫຼາຍ ເຮັດໃຫ້ເປັນຄືຍານ ເຮັດໃຫ້ເປັນບ່ອນຕັ້ງ ໃຫ້ໝັ້ນຄົງ ສັ່ງສົມ ຜາຣົບດີແລ້ວ ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ

**ຊະນະປະທະກັນລະຍານີສູດທີ ໑໐ ຈົບ**

**ນາລັນທະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໒. ສີລັດຖິຕິວັກ

## ໝວດວ່າດ້ວຍຄວາມດຳລົງຢູ່ແຫ່ງສີນ

# ໑. ສີລະສູດ

## ວ່າດ້ວຍສີນທີ່ເປັນກຸສົນ

[໒໙໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ທ່ານພຣະອານົນ ແລະທ່ານພຣະພັດທະຢູ່ກຸກກຸຕາຣາມ ເຂດເມືອງ ປາຕະ

ລີບຸດ ເມື່ອໃນເວລາຄ່ຳ ທ່ານພຣະພັດທະອອກຈາກບ່ອນຫຼີບຫຼີກແລ້ວ ເຂົ້າໄປຫາທ່ານພຣະອານົນຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະອານົນດັ່ງນີ້ວ່າ ທ່ານອານົນ ພຣະຜູ້ມີພຣະພາກເຈົ້າຕັດສິນທີ່ເປັນກຸສົນເຫຼົ່ານີ້ໄວ້ຊົງມີພຣະປະສົງອັນໃດ

ທ່ານພຣະອານົນກ່າວສອບຖາມວ່າ ດີແລ້ວ ດີແລ້ວ ທ່ານພັດທະ ປັນຍາໃຝ່ຮູ້ຂອງທ່ານດີຫຼາຍ ປະຕິພານດີຫຼາຍ ເຂົ້າໃຈສອບຖາມ ກໍທ່ານຖາມວ່າ ທ່ານອານົນ ພຣະຜູ້ມີພຣະພາກຕັດສິນທີ່ເປັນ ກຸສົນເຫຼົ່ານີ້ໄວ້ ຊົງມີພຣະປະສົງອັນໃດ ແນວນັ້ນບໍ?

ແມ່ນແລ້ວ ຜູ້ມີອາຍຸ

ທ່ານພັດທະ ພຣະຜູ້ມີພຣະພາກເຈົ້າຕັດສິນທີ່ເປັນກຸສົນເຫຼົ່ານີ້ໄວ້ ກໍພຽງເພື່ອຈະເລີນສະຕິປັດຖານ ໔ ປະການທໍ່ນັ້ນ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸໃນພຣະທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ฯลฯ
໓. ພິຈາລະນາເຫັນຈິດໃນຈິດ ฯลฯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້

ທ່ານພັດທະ ພຣະຜູ້ມີພຣະພາກເຈົ້າຕັດສິນທີ່ເປັນກຸສົນເຫຼົ່ານີ້ໄວ້ ກໍພຽງເພື່ອຈະເລີນສະຕິປັດຖານ ໔ ປະການນີ້ທໍ່ນັ້ນ

**ສີລະສູດທີ ໑ ຈົບ**

## ໒. ຈິຣັດຖິຕິສູດ

### ວ່າດ້ວຍຄວາມດຳລົງຢູ່ໄດ້ດົນແຫ່ງພຣະສັດທຳ

[໓໗໗] ຕົ້ນເລື້ອງນີ້ຄືສູດທຳອິດ

ທ່ານພຣະພັດທະນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ຖາມທ່ານພຣະອານົນດັ່ງນີ້ວ່າ ທ່ານອານົນ ອັນໃດນໍເປັນເຫດ ເປັນປັດໄຈໃຫ້ພຣະສັດທຳດຳລົງຢູ່ໄດ້ບໍ່ດົນໃນເມື່ອພຣະຕະຖາຄົດເຈົ້າສະເດັດປະຣິນິບພານແລ້ວ ແລະອັນໃດເປັນເຫດ ເປັນປັດໄຈໃຫ້ພຣະສັດທຳດຳລົງຢູ່ໄດ້ດົນໃນເມື່ອພຣະຕະຖາຄົດເຈົ້າສະເດັດປະຣິນິບພານແລ້ວ

ທ່ານພຣະອານົນກ່າວສອບຖາມວ່າ ດີແລ້ວ ດີແລ້ວ ທ່ານພັດທະ ປັນຍາໃຝ່ຮູ້ຂອງທ່ານດີຫຼາຍ ປະຕິພານດີຫຼາຍ ເຂົ້າໃຈສອບຖາມ ກໍທ່ານຖາມວ່າ ທ່ານອານົນ ອັນໃດນໍເປັນເຫດ ເປັນປັດໄຈໃຫ້ພຣະສັດທຳດຳລົງຢູ່ໄດ້ບໍ່ດົນ ໃນເມື່ອພຣະຕະຖາຄົດເຈົ້າສະເດັດປະຣິນິບພານແລ້ວ ແລະອັນໃດເປັນເຫດ ເປັນປັດໄຈໃຫ້ພຣະສັດທຳດຳລົງຢູ່ໄດ້ດົນ ໃນເມື່ອພຣະຕະຖາຄົດເຈົ້າສະເດັດປະຣິນິບພານແລ້ວ ແນວນັ້ນບໍ?

ແມ່ນແລ້ວ ຜູ້ມີອາຍຸ

ຜູ້ມີອາຍຸ ຍ້ອນສະຕິປັດຖານ ໔ ປະການນີ້ທີ່ບຸກຄົນບໍ່ຈະເລີນ ບໍ່ເຮັດໃຫ້ຫຼາຍແລ້ວ ພຣະສັດທຳ ຈຶ່ງດຳລົງຢູ່ໄດ້ບໍ່ດົນໃນເມື່ອພຣະຕະຖາຄົດເຈົ້າສະເດັດປະຣິນິບພານແລ້ວ ແລະຍ້ອນສະຕິປັດຖານ ໔ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ພຣະສັດທຳຈຶ່ງດຳລົງ ຢູ່ໄດ້ດົນໃນເມື່ອພຣະຕະຖາຄົດເຈົ້າສະເດັດປະຣິນິບພານແລ້ວ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸໃນພຣະທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ฯລฯ

໓. ພິຈາລະນາເຫັນຈິດໃນຈິດ ฯລฯ

໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ຜູ້ມີອາຍຸ ຍ້ອນສະຕິປັດຖານ ໔ ປະການນີ້ທີ່ບຸກຄົນບໍ່ຈະເລີນ ບໍ່ເຮັດໃຫ້ຫຼາຍແລ້ວ ພຣະສັດທຳ ຈຶ່ງດຳລົງຢູ່ໄດ້ບໍ່ດົນໃນເມື່ອພຣະຕະຖາຄົດເຈົ້າສະເດັດປະຣິນິບພານແລ້ວ ແລະຍ້ອນສະຕິປັດຖານ ໔ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ພຣະສັດທຳຈຶ່ງດຳລົງຢູ່ໄດ້ດົນໃນເມື່ອພຣະຕະຖາຄົດເຈົ້າສະເດັດປະຣິນິບພານແລ້ວ

**ຈິຣັດຖິຕິສູດທີ ໔ ຈົບ**

# ໓. ປະຣິຫານະສູດ

## ວ່າດ້ວຍຄວາມເສື່ອມແຫ່ງພຣະສັດທຳ

[໓໗໙] ສະໄໝໜຶ່ງ ທ່ານພຣະອານົນແລະທ່ານພຣະພັດທະຢູ່ກຸກກຸຕາຣາມະ ເຂດເມືອງປາຕະລີບຸຕ ເມື່ອໃນເວລາຄ່ຳ ທ່ານພຣະພັດທະອອກຈາກບ່ອນຫຼີບຫຼີກເຂົ້າໄປຫາທ່ານພຣະອານົນຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະອານົນດັ່ງນີ້ວ່າ ທ່ານອານົນ ອັນໃດນໍເປັນເຫດ ເປັນປັດໄຈໃຫ້ພຣະສັດທຳເສື່ອມ ແລະອັນໃດເປັນເຫດ ເປັນປັດໄຈໃຫ້ພຣະສັດທຳບໍ່ເສື່ອມ

ທ່ານພຣະອານົນກ່າວສອບຖາມວ່າ ດີແລ້ວ ດີແລ້ວ ທ່ານພັດທະ ປັນຍາໃຝ່ຮູ້ຂອງທ່ານດີຫຼາຍ ປະຕິພານດີຫຼາຍ ເຂົ້າໃຈສອບຖາມ ກໍທ່ານຖາມວ່າ ທ່ານອານົນ ອັນໃດນໍເປັນເຫດ ເປັນປັດໄຈໃຫ້ພຣະສັດທຳເສື່ອມ ແລະອັນໃດເປັນເຫດ ເປັນປັດໄຈໃຫ້ພຣະ

ສັດທຳບໍ່ເສື່ອມ ແນວນັ້ນບໍ?

ແມ່ນແລ້ວ ຜູ້ມີອາຍຸ

ຜູ້ມີອາຍຸ ຍ້ອນສະຕິປັດຖານ ໔ ປະການທີ່ບຸກຄົນບໍ່ຈະເລີນ ບໍ່ເຮັດໃຫ້ຫຼາຍແລ້ວ ພຣະສັດທຳຈຶ່ງເສື່ອມ ແລະຍ້ອນສະຕິປັດຖານ ໔ ປະການທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ພຣະສັດທຳຈຶ່ງບໍ່ເສື່ອມ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸໃນພຣະທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ

໓. ພິຈາລະນາເຫັນຈິດໃນຈິດ ຯລຯ

໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ຜູ້ມີອາຍຸ ຍ້ອນສະຕິປັດຖານ ໔ ປະການນີ້ທີ່ບຸກຄົນບໍ່ຈະເລີນ ບໍ່ເຮັດໃຫ້ຫຼາຍແລ້ວ ພຣະສັດທຳຈຶ່ງເສື່ອມ ແລະຍ້ອນສະຕິປັດຖານ ໔ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍ ແລ້ວພຣະສັດທຳຈຶ່ງບໍ່ເສື່ອມ

**ປະຣິຫານະສູດທີ ໓ ຈົບ**

# ໔. ສຸດທະສູດ

## ວ່າດ້ວຍສະຕິປັດຖານລ້ວນ

[໓໙໐] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສະຕິປັດຖານ ໔ ປະການນີ້
ສະຕິປັດຖານ ໔ ປະການ ອັນໃດແດ່
ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸທັງຫຼາຍ ສະຕິປັດຖານ ໔ ປະການນີ້

**ສຸດທະສູດທີ ໔ ຈົບ**

# ໕. ອັນຍະຕະຣະພາມມະນະສູດ

## ວ່າດ້ວຍພາມຄົນໜຶ່ງທູນຖາມບັນຫາ

[໓໙໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດເມືອງສາວັດຖີ ຄັ້ງນັ້ນແລ ພາມຄົນໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງ ທີ່ປະທັບ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະໂຄດົມຜູ້ຈະເລີນ ອັນໃດນໍ ເປັນເຫດ ເປັນປັດໄຈໃຫ້ພຣະສັດທຳດຳລົງຢູ່ໄດ້ບໍ່ດົນ ໃນເມື່ອພຣະຕະຖາຄົດເຈົ້າປະຣິນິບພານແລ້ວ ແລະອັນໃດເປັນເຫດ ເປັນປັດໄຈໃຫ້ພຣະສັດທຳດຳລົງຢູ່ໄດ້ດົນໃນເມື່ອພຣະຕະຖາຄົດເຈົ້າປະຣິນິບພານແລ້ວ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພາມ ຍ້ອນສະຕິປັດຖານ ໔ ປະການທີ່ບຸກຄົນບໍ່ຈະເລີນ ບໍ່ເຮັດໃຫ້ຫຼາຍແລ້ວ ພຣະສັດທຳຈຶ່ງດຳລົງຢູ່ໄດ້ບໍ່ດົນໃນເມື່ອຕະຖາຄົດປະຣິນິບພານແລ້ວ ແລະຍ້ອນສະຕິປັດຖານ ໔ ປະການທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ພຣະສັດທຳຈຶ່ງດຳລົງຢູ່ໄດ້ດົນໃນເມື່ອຕະຖາຄົດປະຣິນິບພານແລ້ວ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພາມ ຍ້ອນສະຕິປັດຖານ ໔ ປະການນີ້ທີ່ບຸກຄົນບໍ່ຈະເລີນ ບໍ່ເຮັດໃຫ້ຫຼາຍແລ້ວ ພຣະສັດທຳຈຶ່ງດຳລົງຢູ່ໄດ້ບໍ່ດົນໃນເມື່ອຕະຖາຄົດປະຣິນິບພານແລ້ວ ແລະຍ້ອນສະຕິປັດຖານ ໔ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ພຣະສັດທຳຈຶ່ງດຳລົງຢູ່ໄດ້ດົນໃນເມື່ອຕະຖາຄົດປະຣິນິບພານແລ້ວ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພາມນັ້ນໄດ້ຂາບທູນວ່າ ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງທ່ານພຣະໂຄດົມມ່ວນຊັດເຈນຍິ່ງ ຂໍທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ອັນຍະຕະຣະພາມມະນະສູດທີ ໔ ຈົບ**

# ໕. ປະເທສະສູດ

## ວ່າດ້ວຍການຈະເລີນສະຕິປັດຖານບາງຂໍ້

[໓໗໒] ສະໄໝໜຶ່ງ ທ່ານພຣະສາຣີບຸດ ທ່ານພຣະມະຫາໂມກຄັນລານະ ແລະທ່ານພຣະອະນຸຣຸດທະຢູ່ກັນທະກີວັນ ເຂດເມືອງສາເກດ ເມື່ອໃນເວລາຄ່ຳ ທ່ານພຣະສາຣີບຸດ ແລະທ່ານພຣະມະຫາໂມກຄັນລານະອອກຈາກບ່ອນຫຼີບຫຼີກແລ້ວ ເຂົ້າໄປຫາທ່ານພຣະອະນຸຣຸດທະຮອດ

ບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ທ່ານພຣະສາຣີບຸດໄດ້ຖາມທ່ານພຣະອະນຸຣຸດທະດັ່ງນີ້ວ່າ ທ່ານອະນຸຣຸດທະ ທີ່ຮຽກກັນວ່າ ພຣະເສຂະ ພຣະເສຂະ ດ້ວຍເຫດພຽງທໍ່ໃດນໍ ບຸກຄົນຈຶ່ງຊື່ວ່າ ເປັນພຣະເສຂະ

ທ່ານພຣະອະນຸຣຸດທະຕອບວ່າ ຜູ້ມີອາຍຸ ບຸກຄົນຊື່ວ່າ ເປັນພຣະເສຂະ ຍ້ອນໄດ້ຈະເລີນສະຕິປັດຖານ ໔ ປະການເປັນບາງຂໍ້

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸໃນພຣະທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ຜູ້ມີອາຍຸ ບຸກຄົນຊື່ວ່າ ເປັນພຣະເສຂະ ຍ້ອນຈະເລີນສະຕິປັດຖານ ໔ ປະການນີ້ເປັນບາງຂໍ້

**ປະເທສະສູດທີ ໖ ຈົບ**

# ໗. ສະມັດຕະສູດ

## ວ່າດ້ວຍການຈະເລີນສະຕິປັດຖານຄົບບໍລິບູນ

[໓໙໓] ຕົ້ນເລື່ອງນີ້ຄືສູດທີ ໖

ທ່ານພຣະສາຣີບຸດນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ຖາມທ່ານພຣະອະນຸຣຸດທະວ່າ ທ່ານອະນຸຣຸດທະ ທີ່ຮຽກກັນວ່າ ພຣະອະເສຂະ ພຣະອະເສຂະ ດ້ວຍເຫດພຽງທໍ່ໃດນໍ? ບຸກຄົນຈຶ່ງຊື່ວ່າ ເປັນພຣະອະເສຂະ

ທ່ານພຣະອະນຸຣຸດທະຕອບວ່າ ຜູ້ມີອາຍຸ ບຸກຄົນຊື່ວ່າ ເປັນພຣະອະເສຂະ ຍ້ອນໄດ້ຈະເລີນ ສະຕິປັດຖານ ໔ ປະການຄົບບໍລິບູນ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸໃນພຣະທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ຜູ້ມີອາຍຸ ບຸກຄົນຊື່ວ່າເປັນພຣະອະເສຂະ ຍ້ອນໄດ້ຈະເລີນສະຕິປັດຖານ ໔ ປະການນີ້ຄົບບໍລິບູນ

**ສະມັດຕະສູດທີ ໗ ຈົບ**

# ໘. ໂລກະສູດ

## ວ່າດ້ວຍຜູ້ຮູ້ໂລກ

[໓໗໔] ຕົ້ນເລື່ອງນີ້ຄືສູດທີ ໖

ທ່ານພຣະສາຣີບຸດນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ຖາມທ່ານພຣະອະນຸຣຸດທະດັ່ງນີ້ວ່າ ທ່ານອະນຸຣຸດທະເຖິງຄວາມເປັນຜູ້ມີອະພິນຍາຫຼາຍ ຍ້ອນທຳເຫຼົ່າໃດ ທີ່ທ່ານຈະເລີນ ເຮັດໃຫ້ຫຼາຍແລ້ວ

ທ່ານພຣະອະນຸຣຸດທະຕອບວ່າ ຜູ້ມີອາຍຸ ຂ້ານ້ອຍເຖິງຄວາມເປັນຜູ້ມີອະພິນຍາຫຼາຍ ຍ້ອນສະຕິປັດຖານ ໔ ປະການ ທີ່ຂ້າພະເຈົ້າຈະເລີນ ເຮັດໃຫ້ຫຼາຍແລ້ວ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ໃນພຣະທຳວິໄນນີ້ ຂ້ານ້ອຍ

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ

໓. ພິຈາລະນາເຫັນຈິດໃນຈິດ ໆລໆ

໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ຜູ້ມີອາຍຸ ຂ້ານ້ອຍເຖິງຄວາມເປັນຜູ້ມີອະພິນຍາຫຼາຍ ຍ້ອນສະຕິປັດຖານ ໔ ປະການນີ້ທີ່ຂ້າພະເຈົ້າຈະເລີນ ເຮັດໃຫ້ຫຼາຍແລ້ວ ແລະຂ້ານ້ອຍຮູ້ແຈ້ງໂລກ ໑,໐໐໐ ໂລກໄດ້ ຍ້ອນສະຕິປັດຖານ ໔ ປະການນີ້ທີ່ຂ້າພະເຈົ້າຈະເລີນ ເຮັດໃຫ້ຫຼາຍແລ້ວ

**ໂລກະສູດທີ ໗ ຈົບ**

# ໘. ສິຣິວັດທະສູດ

## ວ່າດ້ວຍສິຣິວັດທະຄະຫະບໍດີ

[໓໙໕] ສະໄໝໜຶ່ງ ທ່ານພຣະອານົນຢູ່ວັດພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດເມືອງຣາດຊະຄຶ ສະໄໝນັ້ນ ຄະຫະບໍດີຊື່ສິຣິວັດທະປ່ວຍ ໄດ້ຮັບທຸກ ເປັນໄຂ້ໜັກ ໄດ້ຮຽກບຸຣຸດຄົນໜຶ່ງມາສັ່ງວ່າ ມານີ້ບຸຣຸດຜູ້ຈະເລີນ ທ່ານຈົ່ງເຂົ້າໄປຫາທ່ານພຣະອານົນຮອດບ່ອນຢູ່ ແລ້ວຂາບຕີນທັງສອງຂອງທ່ານດ້ວຍຂະໜ່ອມ ຮຽນຕາມຄຳຂອງເຮົາວ່າ ທ່ານຜູ້ຈະເລີນ ສິຣິວັດທະຄະຫະບໍດີປ່ວຍ ໄດ້ຮັບທຸກ ເປັນໄຂ້ໜັກ ຂໍຂາບຕີນທັງສອງຂອງທ່ານດ້ວຍຂະໜ່ອມ ແລະທ່ານຈົ່ງຮຽນວ່າ ຂໍທ່ານພຣະອານົນໂຜດອະນຸເຄາະເຂົ້າໄປຢ້ຽມສິຣິວັດທະຄະຫະບໍດີເຖິງນິເວດດ້ວຍເທີ້ນ ບຸຣຸດນັ້ນ ຮັບຄຳຂອງສິຣິວັດທະຄະຫະບໍດີແລ້ວເຂົ້າໄປຫາທ່ານພຣະອານົນຮອດບ່ອນຢູ່ ອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນທ່ານພຣະອານົນ ດັ່ງນີ້ວ່າ ທ່ານຜູ້ຈະເລີນ ສິຣິວັດທະຄະຫະບໍດີປ່ວຍ ໄດ້ຮັບທຸກ ເປັນໄຂ້ໜັກ ຂໍຂາບຕີນທັງສອງຂອງທ່ານດ້ວຍຂະໜ່ອມ ແລະຝາກມາຮຽນວ່າ ຂໍທ່ານພຣະອານົນໂຜດອະນຸເຄາະ ເຂົ້າໄປຢ້ຽມສິຣິວັດທະຄະຫະບໍດີເຖິງນິເວດດ້ວຍເທີ້ນ ທ່ານພຣະອານົນຮັບນິມົນໂດຍດຸດສະນີພາບ

ເມື່ອໃນເວລາເຊົ້າ ທ່ານພຣະອານົນຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປສູ່ນິເວດຂອງສິຣິວັດທະຄະຫະບໍດີ ນັ່ງເທິງອາສະນະທີ່ປູລາດໄວ້ແລ້ວຖາມວ່າ ຄະຫະບໍດີ ທ່ານຍັງສະບາຍດີບໍ ຍັງພໍເປັນຢູ່ໄດ້ບໍ ທຸກຂະເວທະນາທຸເລົາລົງບໍ່ກຳເຣີບຂຶ້ນບໍ ອາການທຸເລົາຜາກົດ ອາການກຳເຣີບບໍ່ຜາກົດບໍ?

ສິຣິວັດທະຄະຫະບໍດີຕອບວ່າ ຂ້ານ້ອຍບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ທຸກຂະເວທະນາມີແຕ່ກຳເຣີບໜັກຂຶ້ນ ບໍ່ທຸເລົາລົງເລີຍ ອາການກຳເຣີບຜາກົດ ອາການທຸເລົາບໍ່ຜາກົດ ຂ້ານ້ອຍ

ຄະຫະບໍດີ ຍ້ອນເຫດນັ້ນ ທ່ານເພິ່ງຕັ້ງໃຈຮູ້ແນວນີ້ວ່າ ເຮົາຈັກພິຈາລະນາເຫັນກາຍ ໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້ ຈັກພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ ຈັກພິຈາລະນາເຫັນຈິດໃນຈິດ ຯລຯ ຈັກພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້ ຄະຫະບໍດີ ທ່ານເພິ່ງຕັ້ງໃຈຮູ້ແນວນີ້ແລ

ທ່ານຜູ້ຈະເລີນ ທຳຄືສະຕິປັດຖານ ໔ ປະການທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວມີ ຢູ່ໃນຂ້ານ້ອຍ ແລະຂ້ານ້ອຍກໍເຫັນແຈ້ງໃນທຳເຫຼົ່ານັ້ນ ຍ້ອນຂ້ານ້ອຍພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້ ພິຈາລະນາເຫັນ ເວທະນາໃນເວທະນາທັງຫຼາຍ ຯລຯ ພິຈາລະນາເຫັນຈິດໃນຈິດ ຯລຯ ພິຈາລະນາເຫັນທຳໃນທຳ ທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້

ທ່ານຜູ້ຈະເລີນ ໂອຣຳພາຄິຍະສັງໂຍດ ໕ ປະການໃດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວ ຂ້ານ້ອຍບໍ່ເລັງເຫັນໂອຣຳພາຄິຍະສັງໂຍດ ໕ ປະການນັ້ນ ຂໍ້ໃດຂໍ້ໜຶ່ງໃນຕົນທີ່ຍັງລະບໍ່ໄດ້

ຄະຫະບໍດີ ເປັນລາບຂອງທ່ານແທ້ນໍ ທ່ານໄດ້ດີແລ້ວນໍ ອະນາຄາມີຜົນທ່ານເຮັດໃຫ້ແຈ້ງໄດ້ແລ້ວ

**ສິຣິວັດທະສູດທີ ໙ ຈົບ**

# ໑໐. ມານະທິນນະສູດ

## ວ່າດ້ວຍມານະທິນນະຄະຫະບໍດີ

[໓໙໗] ຕົ້ນເລື້ອງນີ້ຄືສູດທີ ໙

ສະໄໝນັ້ນ ຄະຫະບໍດີຊື່ມານະທິນນະປ່ວຍ ໄດ້ຮັບທຸກ ເປັນໄຂ້ໜັກ ໄດ້ຮຽກບຸຣຸດຄົນໜຶ່ງມາສັ່ງວ່າ ມານີ້ບຸຣຸດຜູ້ຈະເລີນ ຯລຯ

ມານະທິນນະຄະຫະບໍດີຕອບວ່າ ຂ້ານ້ອຍບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ທຸກຂະເວທະນາມີແຕ່ກຳເຣີບໜັກຂຶ້ນ ບໍ່ທຸເລົາລົງເລີຍ ອາການກຳເຣີບຜາກົດ ອາການທຸເລົາບໍ່ຜາກົດ ທ່ານຜູ້ຈະເລີນ ແມ່ນຂ້ານ້ອຍຈະໄດ້ຮັບທຸກຂະເວທະນາປານນີ້ກໍຍັງພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ ພິຈາລະນາເຫັນຈິດໃນຈິດ ຯລຯ ພິຈາລະນາເຫັນທຳ

ໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້

ທ່ານຜູ້ຈະເລີນ ໂອຣຳພາຄິຍະສັງໂຍດ ໕ ປະການໃດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວ ຂ້ານ້ອຍບໍ່ເລັງເຫັນໂອຣຳພາຄິຍະສັງໂຍດ ໕ ປະການນັ້ນ ຂໍ້ໃດຂໍ້ໜຶ່ງໃນຕົນທີ່ຍັງລະບໍ່ໄດ້

ຄະຫະບໍດີ ເປັນລາບຂອງທ່ານແທ້ນໍ ທ່ານໄດ້ດີແລ້ວນໍ ອະນາຄາມີຜົນທ່ານເຮັດໃຫ້ແຈ້ງໄດ້ແລ້ວ

**ມານະທິນນະສູດທີ ໑໐ ຈົບ**

**ສີລັດຖິຕິວັກທີ ໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໔. ອະນະນຸດສຸຕະວັກ

## ໝວດວ່າດ້ວຍທຳທີ່ບໍ່ເຄີຍໄດ້ຟັງມາກ່ອນ

## ໑. ອະນະນຸດສຸຕະສູດ

### ວ່າດ້ວຍທຳທີ່ບໍ່ເຄີຍໄດ້ຟັງມາກ່ອນ

[໓໙໗] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ຄືການພິຈາລະນາເຫັນກາຍໃນກາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວ ແກ່ເຮົາໃນທຳ

ທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ການພິຈາລະນາເຫັນກາຍໃນກາຍນີ້

ຄວນຈະເລີນ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ການພິຈາລະນາເຫັນກາຍໃນກາຍນີ້ ເຮົາໄດ້ຈະເລີນແລ້ວ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍ ທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ຄືການພິຈາລະນາ ເຫັນເວທະນາໃນເວທະນາທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ການພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍນີ້ຄວນຈະເລີນ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງ ເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ການພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍນີ້ເຮົາໄດ້ຈະເລີນແລ້ວ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວແສງສະຫວ່າງເກີດຂຶ້ນແລ້ວ ແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່ານີ້ຄືການພິຈາລະນາເຫັນຈິດໃນຈິດ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວ ແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງ ມາກ່ອນວ່າ ການພິຈາລະນາເຫັນຈິດໃນຈິດນີ້ຄວນຈະເລີນ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ການພິຈາລະນາເຫັນຈິດໃນຈິດນີ້ເຮົາໄດ້ຈະເລີນແລ້ວ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍ ທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ຄືການພິຈາລະນາເຫັນທຳໃນທຳທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍ ທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ການພິຈາລະນາເຫັນທຳໃນທຳທັງຫຼາຍນີ້ຄວນຈະເລີນ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງ ເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ການພິຈາລະນາເຫັນທຳໃນທຳທັງຫຼາຍນີ້ເຮົາໄດ້ຈະເລີນແລ້ວ

**ອະນະນຸດສຸຕະສູດທີ ໑ ຈົບ**

# ໒. ວິຣາຄະສູດ

## ວ່າດ້ວຍທຳທີ່ເປັນໄປເພື່ອຄວາມຄາຍກຳໜັດ

[໓໙໗] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ສະຕິປັດຖານ ໔ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມເບື່ອໜ່າຍແນວບ່ອນສຸດ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸທັງຫຼາຍ ສະຕິປັດຖານ ໔ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມເບື່ອໜ່າຍແນວບ່ອນສຸດ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ

**ວິຣາຄະສູດທີ ໒ ຈົບ**

# ໓. ວິຣັດທະສູດ

## ວ່າດ້ວຍທຳທີ່ບຸກຄົນພາດ

[໓໙໙] ພິກຂຸທັງຫຼາຍ ສະຕິປັດຖານ ໔ ປະການ ອັນບຸກຄົນເຫຼົ່າໃດເຫຼົ່າໜຶ່ງ ພາດແລ້ວ ອະຣິຍະມັກມີອົງ ໘ ທີ່ໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງ ຊື່ວ່າ ເປັນອັນບຸກຄົນເຫຼົ່ານັ້ນພາດແລ້ວ ສະຕິປັດຖານ ໔ ປະການ ອັນບຸກຄົນເຫຼົ່າໃດເຫຼົ່າໜຶ່ງຜາຣົບແລ້ວ ອະຣິຍະມັກມີອົງ ໘ ທີ່

ໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງ ຊື່ວ່າ ເປັນອັນບຸກຄົນເຫຼົ່ານັ້ນຜາຣົບແລ້ວ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້

ພິກຂຸທັງຫຼາຍ ສະຕິປັດຖານ ໔ ປະການນີ້ ອັນບຸກຄົນເຫຼົ່າໃດເຫຼົ່າໜຶ່ງພາດແລ້ວ ອະຣິຍະມັກມີອົງ ໘ ທີ່ໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງ ຊື່ວ່າ ເປັນອັນບຸກຄົນເຫຼົ່ານັ້ນພາດ ແລ້ວ ສະຕິປັດຖານ ໔ ປະການນີ້ ອັນບຸກຄົນເຫຼົ່າໃດເຫຼົ່າໜຶ່ງຜາຣົບແລ້ວ ອະຣິຍະມັກ ມີອົງ ໘ ທີ່ໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງ ຊື່ວ່າ ເປັນອັນບຸກຄົນເຫຼົ່ານັ້ນຜາຣົບແລ້ວ

**ວິຣັດທະສູດທີ ໓ ຈົບ**

# ໔. ພາວິຕະສູດ

## ວ່າດ້ວຍຜູ້ຈະເລີນສະຕິປັດຖານ

[໔໐໐] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສະຕິປັດຖານ ໔ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຖິງຝັ່ງນັ້ນຈາກຝັ່ງນີ້

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ

໓. ພິຈາລະນາເຫັນຈິດໃນຈິດ ฯລฯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸທັງຫຼາຍ ສະຕິປັດຖານ ໔ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຖິງຝັ່ງນັ້ນຈາກຝັ່ງນີ້

**ພາວິຕະສູດທີ ໔ ຈົບ**

# ໕. ສະຕິສູດ

## ວ່າດ້ວຍຜູ້ມີສະຕິສຳປະຊັນຍະ

[໔໐໑] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ພິກຂຸເພິ່ງມີສະຕິສຳປະຊັນຍະຢູ່ເທີ້ນ ນີ້ເປັນຄຳພ່ຳສອນຂອງເຮົາສຳລັບທ່ານທັງຫຼາຍ

ພິກຂຸຜູ້ມີສະຕິ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ฯລฯ
໓. ພິຈາລະນາເຫັນຈິດໃນຈິດ ฯລฯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸຜູ້ມີສະຕິ ເປັນແນວນີ້ແລ

ພິກຂຸຜູ້ມີສຳປະຊັນຍະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ມີເວທະນາຜາກົດເກີດຂຶ້ນ ຜາກົດເຂົ້າໄປຕັ້ງຢູ່ ຜາກົດເຖິງຄວາມດັບໄປ ມີວິຕົກຜາກົດເກີດຂຶ້ນ ຜາກົດເຂົ້າໄປຕັ້ງຢູ່ ຜາກົດເຖິງຄວາມດັບໄປ ມີສັນຍາຜາກົດເກີດຂຶ້ນ ຜາກົດເຂົ້າໄປຕັ້ງຢູ່ ຜາກົດເຖິງຄວາມດັບໄປ

ພິກຂຸຜູ້ມີສຳປະຊັນຍະ ເປັນແນວນີ້ແລ

ພິກຂຸທັງຫຼາຍ ພິກຂຸເພິ່ງມີສະຕິສຳປະຊັນຍະຢູ່ເທີ້ນ ນີ້ເປັນຄຳພ່ຳສອນຂອງເຮົາສຳລັບທ່ານທັງຫຼາຍ

**ສະຕິສູດທີ ໕ ຈົບ**

# ໖. ອັນຍາສູດ

## ວ່າດ້ວຍເຫດໃຫ້ບັນລຸອະຣະຫັດຕະຜົນ

[໔໐໔] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ສະຕິປັດຖານ ໔ ປະການນີ້

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ສະຕິປັດຖານ ໔ ປະການນີ້

ພິກຂຸທັງຫຼາຍ ຍ້ອນສະຕິປັດຖານ ໔ ປະການນີ້ທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເພິ່ງຫວັງຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼື ເມື່ອຍັງມີອຸປາທານ ເຫຼືອຢູ່ກໍຈັກເປັນພຣະອະນາຄາມີ

**ອັນຍາສູດທີ ໖ ຈົບ**

# ໗. ສັນທະສູດ

## ວ່າດ້ວຍຜູ້ລະສັນທະ

[໒໐໓] ພິກຂຸທັງຫຼາຍ ສະຕິປັດຖານ ໔ ປະການນີ້

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ເມື່ອທ່ານພິຈາລະນາເຫັນກາຍໃນກາຍ ຢູ່ ຍ່ອມລະສັນທະ(ຄວາມພໍໃຈ)ໃນກາຍນັ້ນໄດ້ ຍ້ອນລະສັນທະໄດ້ຈຶ່ງເຮັດອະມະຕະ(ນິບພານ)ໃຫ້ແຈ້ງ

໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ເມື່ອທ່ານພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ຍ່ອມລະສັນທະໃນເວທະນາທັງຫຼາຍ ຍ້ອນລະສັນທະໄດ້ຈຶ່ງເຮັດອະມະຕະໃຫ້ແຈ້ງ

໓. ພິຈາລະນາເຫັນຈິດໃນຈິດຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ເມື່ອທ່ານພິຈາລະນາເຫັນຈິດໃນຈິດຢູ່ ຍ່ອມລະສັນທະໃນຈິດ ຍ້ອນລະສັນທະໄດ້ຈຶ່ງເຮັດອະມະຕະໃຫ້ແຈ້ງ

໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້ ເມື່ອທ່ານພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ຍ່ອມລະສັນທະໃນທຳທັງຫຼາຍ ຍ້ອນລະສັນທະໄດ້ຈຶ່ງເຮັດອະມະຕະໃຫ້ແຈ້ງ

**ສັນທະສູດທີ ໗ ຈົບ**

# ໘. ປະຣິນຍາຕະສູດ

## ວ່າດ້ວຍຜູ້ກຳນົດຮູ້ສະຕິປັດຖານ

[໒໐໔] ພິກຂຸທັງຫຼາຍ ສະຕິປັດຖານ ໔ ປະການນີ້

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້ ເມື່ອທ່ານພິຈາລະນາເຫັນກາຍໃນກາຍຢູ່ ຍ່ອມກຳນົດຮູ້ກາຍ ຍ້ອນກຳນົດຮູ້ກາຍ ຈຶ່ງເຮັດອະມະຕະໃຫ້ແຈ້ງ

໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້ ເມື່ອທ່ານພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ຍ່ອມກຳນົດຮູ້ເວທະນາ ຍ້ອນກຳນົດຮູ້ເວທະນາ ຈຶ່ງເຮັດອະມະຕະໃຫ້ແຈ້ງ

໓. ພິຈາລະນາເຫັນຈິດໃນຈິດຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ເມື່ອທ່ານພິຈາລະນາເຫັນຈິດໃນຈິດຢູ່ ຍ່ອມກຳນົດຮູ້ຈິດ ຍ້ອນກຳນົດຮູ້ຈິດ ຈຶ່ງເຮັດອະມະຕະໃຫ້ແຈ້ງ

໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ເມື່ອທ່ານພິຈາລະນາເຫັນທຳໃນທຳທັງຫຼາຍ ຍ່ອມກຳນົດຮູ້ທຳ ຍ້ອນກຳນົດຮູ້ທຳ ຈຶ່ງເຮັດອະມະຕະໃຫ້ແຈ້ງ

**ປະຣິນຍາຕະສູດທີ ໗ ຈົບ**

## ໘. ພາວະນາສູດ

### ວ່າດ້ວຍການຈະເລີນສະຕິປັດຖານ

[໔໐໘] ພິກຂຸທັງຫຼາຍ ເຮົາຈັກສະແດງການຈະເລີນສະຕິປັດຖານ ໔ ປະການ ທ່ານທັງຫຼາຍຈົ່ງຟັງ

ການຈະເລີນສະຕິປັດຖານ ໔ ປະການ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸທັງຫຼາຍ ການຈະເລີນສະຕິປັດຖານ ໔ ປະການ ເປັນແນວນີ້ແລ

**ພາວະນາສູດທີ ໙ ຈົບ**

# ໑໐. ວິພັງຄະສູດ

## ວ່າດ້ວຍການຈຳແນກສະຕິປັດຖານ

[໔໐໖] ພິກຂຸທັງຫຼາຍ ເຮົາຈັກສະແດງສະຕິປັດຖານ ການຈະເລີນສະຕິປັດຖານແລະປະຕິປະທາທີ່ໃຫ້ເຖິງການຈະເລີນສະຕິປັດຖານແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ສະຕິປັດຖານ ເປັນແນວໃດ?
ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ນີ້ຮຽກວ່າ ສະຕິປັດຖານ

ການຈະເລີນສະຕິປັດຖານ ເປັນແນວໃດ?
ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນທຳເປັນເຫດເກີດໃນກາຍຢູ່ ພິຈາລະນາເຫັນທຳເປັນເຫດດັບໃນກາຍຢູ່ ພິຈາລະນາເຫັນທັງທຳເປັນເຫດເກີດທັງທຳ ເປັນເຫດດັບໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ເພື່ອກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້

໘. ພິຈາລະນາເຫັນທຳເປັນເຫດເກີດໃນເວທະນາທັງຫຼາຍຢູ່ ພິຈາລະນາເຫັນທຳເປັນເຫດດັບໃນເວທະນາທັງຫຼາຍຢູ່ ພິຈາລະນາເຫັນທັງທຳເປັນເຫດເກີດທັງທຳເປັນເຫດດັບໃນເວທະນາທັງຫຼາຍຢູ່ ຯລຯ

໓. ພິຈາລະນາເຫັນທຳເປັນເຫດເກີດໃນຈິດ ຯລຯ

໔. ພິຈາລະນາເຫັນທຳເປັນເຫດເກີດໃນທຳທັງຫຼາຍຢູ່ ພິຈາລະນາເຫັນທຳເປັນເຫດດັບໃນທຳທັງຫຼາຍຢູ່ ພິຈາລະນາເຫັນທັງທຳເປັນເຫດເກີດທັງທຳເປັນເຫດດັບໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ນີ້ຮຽກວ່າ ການຈະເລີນສະຕິປັດຖານ

ປະຕິປະທາທີ່ໃຫ້ເຖິງການຈະເລີນສະຕິປັດຖານ ເປັນແນວໃດ?

ຄື ອະຣິຍະມັກມີອົງ ໘ ໄດ້ແກ່

໑. ສຳມາທິດຖິ
໒. ສຳມາສັງກັບປະ
໓. ສຳມາວາຈາ
໔. ສຳມາກຳມັນຕະ
໕. ສຳມາອາຊີວະ
໖. ສຳມາວາຍາມະ
໗. ສຳມາສະຕິ
໘. ສຳມາສະມາທິ

ນີ້ຮຽກວ່າ ປະຕິປະທາທີ່ໃຫ້ເຖິງການຈະເລີນສະຕິປັດຖານ

**ວິພັງຄະສູດທີ ໑໐ ຈົບ**

**ອະນະນຸດສຸຕະວັກທີ ໔ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື

# ໕. ອະມະຕະວັກ

## ໝວດວ່າດ້ວຍອະມະຕະ

## ໑. ອະມະຕະສູດ

### ວ່າດ້ວຍອະມະຕະ

[໔໐໗] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງມີຈິດຕັ້ງໝັ້ນໃນສະຕິປັດຖານ ໔ ປະການຢູ່ເທີ້ນ ຢ່າມີຈິດບໍ່ຕັ້ງໝັ້ນຢູ່ເລີຍ ແລະ ອະມະຕະ (ນິບພານ) ເພິ່ງມີແກ່ທ່ານທັງຫຼາຍ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງມີຈິດຕັ້ງໝັ້ນໃນສະຕິປັດຖານ ໔ ປະການນີ້ຢູ່ເທີ້ນ ຢ່າມີຈິດບໍ່ຕັ້ງໝັ້ນຢູ່ເລີຍ ແລະ ອະມະຕະເພິ່ງມີແກ່ທ່ານທັງຫຼາຍ

**ອະມະຕະສູດທີ ໑ ຈົບ**

## ໒. ສະມຸທະຍະສູດ

### ວ່າດ້ວຍຄວາມເກີດແຫ່ງສະຕິປັດຖານ

[໔໐໘] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເຮົາຈັກສະແດງຄວາມເກີດ ແລະຄວາມດັບແຫ່ງສະຕິປັດຖານ ໔ ປະການ ທ່ານທັງຫຼາຍຈົ່ງຟັງ

ຄວາມເກີດແຫ່ງກາຍ ເປັນແນວໃດ?

ຄື ຍ້ອນອາຫານເກີດ ກາຍຈຶ່ງເກີດ ຍ້ອນອາຫານດັບ ກາຍຈຶ່ງດັບ ຍ້ອນຜັດສະເກີດ ເວທະນາຈຶ່ງເກີດ ຍ້ອນຜັດສະດັບ ເວທະນາຈຶ່ງດັບ ຍ້ອນນາມຮູບເກີດ ຈິດຈຶ່ງເກີດ ຍ້ອນນາມຮູບດັບ ຈິດຈຶ່ງດັບ ຍ້ອນມະນະສິການເກີດ ທຳຈຶ່ງເກີດ ຍ້ອນມະນະສິການດັບ ທຳຈຶ່ງດັບ

**ສະມຸທະຍະສູດທີ ໘ ຈົບ**

# ໙. ມັກຄະສູດ

## ວ່າດ້ວຍທາງດຽວ

[໔໐໙] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ສະໄໝໜຶ່ງ ເຮົາເມື່ອທຳອິດຕັດສະຮູ້ຢູ່ໃຕ້ຕົ້ນໄມ້ອະຊະປາລະນິໂຄດ ແຄມຝັ່ງແມ່ນ້ຳເນຣັນຊະຣາ ເຂດອຸຣຸເວລາ ຫຼີບຫຼີກຢູ່ໃນບ່ອນສະງັດໄດ້ເກີດຄວາມຮ່ຳເພິງຂຶ້ນມາວ່າ ທາງນີ້ເປັນທາງດຽວເພື່ອຄວາມມົດຈົດແຫ່ງສັດທັງຫຼາຍ ເພື່ອກ້າວລ່ວງໂສກະແລະປະຣິເທວະ ເພື່ອດັບທຸກແລະໂທມະນັດ ເພື່ອບັນລຸຍາຍະທຳ ເພື່ອເຮັດນິບພານໃຫ້ແຈ້ງ ຄື ສະຕິປັດຖານ ໔ ປະການ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸ

໑. ເພິ່ງພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ເພິ່ງພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ຯລຯ
໓. ເພິ່ງພິຈາລະນາເຫັນຈິດໃນຈິດຢູ່ ຯລຯ
໔. ເພິ່ງພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ທາງນີ້ເປັນທາງດຽວເພື່ອຄວາມມົດຈົດແຫ່ງສັດທັງຫຼາຍ ເພື່ອກ້າວລ່ວງໂສກະແລະປະຣິເທວະ ເພື່ອດັບທຸກແລະໂທມະນັດ ເພື່ອບັນລຸຍາຍະທຳ ເພື່ອເຮັດນິບພານໃຫ້ແຈ້ງ ຄື ສະຕິປັດຖານ ໔ ປະການ

ລຳດັບນັ້ນ ທ້າວສະຫຳບໍດີພົມຮູ້ຄວາມຮ່ຳເພິງຂອງເຮົາແລ້ວ ຈຶ່ງຫາຍໂຕຈາກພົມມະໂລກມາຜາກົດກົງໜ້າເຮົາ ປຽບຄືບຸຣຸດມີກຳລັງຢຽດແຂນອອກ ຫຼືຄູ້ແຂນເຂົ້າສັນນັ້ນ ແລ້ວແລ້ວພຣະອົງຫົ່ມຜ້າບ່ຽງບ່າຂ້າງໜຶ່ງ ປະນົມມືມາທາງເຮົາແລ້ວກ່າວວ່າ ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ເລື້ອງນີ້ເປັນແນວນັ້ນ ຂ້າແດ່ ພຣະສຸຄົດເຈົ້າ ເລື້ອງນີ້ເປັນແນວນັ້ນ ຂ້າແດ່ ພຣະອົງຜູ້ຈະເລີນທາງນີ້ເປັນທາງດຽວເພື່ອຄວາມມົດຈົດແຫ່ງສັດທັງຫຼາຍ ເພື່ອກ້າວລ່ວງໂສກະ ແລະປະຣິເທວະເພື່ອດັບທຸກແລະໂທມະນັດ ເພື່ອບັນລຸຍາຍະທຳ ເພື່ອເຮັດນິບພານໃຫ້ແຈ້ງ ຄື ສະຕິປັດຖານ ໔ ປະການ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸ

໑. ເພິ່ງພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ເພິ່ງພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ฯລฯ
໓. ເພິ່ງພິຈາລະນາເຫັນຈິດໃນຈິດ ฯລฯ
໔. ເພິ່ງພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ຂ້າແດ່ ພຣະອົງຜູ້ຈະເລີນ ທາງນີ້ເປັນທາງດຽວ ເພື່ອຄວາມມົດຈົດແຫ່ງສັດທັງຫຼາຍ ເພື່ອກ້າວລ່ວງໂສກະແລະປະຣິເທວະ ເພື່ອດັບທຸກແລະໂທມະນັດ ເພື່ອບັນລຸຍາຍະທຳ ເພື່ອເຮັດນິບພານໃຫ້ແຈ້ງ ຄື ສະຕິປັດຖານ ໔ ປະການ

ພິກຂຸທັງຫຼາຍ ທ້າວສະຫຳບໍດີພົມໄດ້ຂາບທູນຄຳນີ້ແລ້ວ ຈຶ່ງໄດ້ກ່າວຄາຖາປະພັນ ຕໍ່ໄປອີກວ່າ

ພຣະຜູ້ມີພຣະພາກເຈົ້າຜູ້ຊົງເຫັນທຳ
ອັນເປັນສ່ວນບ່ອນສຸດສິ້ນແຫ່ງຊາດ
ຊົງອະນຸເຄາະດ້ວຍຄວາມເກື້ອກູນ
ຊົງຮູ້ຈັກທາງອັນເປັນທາງດຽວ
ເຊິ່ງເຫຼົ່າບັນດິດໄດ້ຂ້າມມາກ່ອນແລ້ວ
ຈັກຂ້າມ ແລະກຳລັງຂ້າມໂອຄະໄດ້ດ້ວຍທາງນີ້

**ມັກຄະສູດທີ ໓ ຈົບ**

# ໔. ສະຕິສູດ

## ວ່າດ້ວຍຜູ້ມີສະຕິ

[໔໑໐] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ພິກຂຸເພິ່ງມີສະຕິຢູ່ເທີ້ນ ນີ້ເປັນຄຳພ່ຳສອນຂອງເຮົາສຳລັບທ່ານທັງຫຼາຍ

ພິກຂຸຜູ້ມີສະຕິ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸຜູ້ມີສະຕິ ເປັນແນວນີ້ແລ

ພິກຂຸເພິ່ງມີສະຕິຢູ່ເທີ້ນ ນີ້ເປັນຄຳພ່ຳສອນຂອງເຮົາສຳລັບທ່ານທັງຫຼາຍ

**ສະຕິສູດທີ ໔ ຈົບ**

# ໕. ກຸສະລະຣາສີສູດ

## ວ່າດ້ວຍກອງກຸສົນ

[໔໑໑] ພິກຂຸທັງຫຼາຍ ບຸກຄົນເມື່ອຈະກ່າວເຖິງກອງກຸສົນ ຈະກ່າວໃຫ້ຖືກຕ້ອງເພິ່ງກ່າວເຖິງສະຕິປັດຖານ ໔ ປະການ ຍ້ອນກອງກຸສົນທັງໝົດນີ້ກໍຄືສະຕິປັດຖານ ໔ ປະການ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້

ພິກຂຸທັງຫຼາຍ ບຸກຄົນເມື່ອຈະກ່າວເຖິງກອງກຸສົນ ຈະກ່າວໃຫ້ຖືກຕ້ອງ ເພິ່ງກ່າວເຖິງສະຕິປັດຖານ ໔ ປະການນີ້ ຍ້ອນກອງກຸສົນທັງໝົດນີ້ກໍຄືສະຕິປັດຖານ ໔ ປະການ

**ກຸສະລະຣາສີສູດທີ ໕ ຈົບ**

# ໖. ປາຕິໂມກຂະສັງວະຣະສູດ

## ວ່າດ້ວຍປາຕິໂມກຂະສັງວອນ

[໔໑໒] ຄັ້ງນັ້ນແລ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂອກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳແກ່ຂ້າພຣະອົງໂດຍຫຍໍ້ ເຊິ່ງຂ້າພຣະອົງໄດ້ຟັງແລ້ວ ຈະເພິ່ງຫຼີກອອກໄປຢູ່ຄົນດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍ ແລະໃຈຢູ່ເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸ ຍ້ອນເຫດນັ້ນ ທ່ານຈົ່ງເຮັດເບື້ອງຕົ້ນໃນກຸສົນທຳທັງຫຼາຍໃຫ້ມົດຈົດກ່ອນ

ອັນໃດ? ເປັນເບື້ອງຕົ້ນແຫ່ງກຸສົນທຳທັງຫຼາຍ

ຄື ໃນທຳວິໄນນີ້ ທ່ານຈົ່ງສັງລວມດ້ວຍສັງວອນໃນພຣະປາຕິໂມກ ພຽບພ້ອມດ້ວຍອາຈາຣະ (ມາຣະຍາດ) ແລະໂຄຈອນ (ການທ່ຽວໄປ) ມີປົກກະຕິເຫັນໄພໃນໂທດພຽງເລັກໜ້ອຍ ສະມາທານສຶກສາໃນສິກຂາບົດທັງຫຼາຍເທີ້ນ ເມື່ອໃດ ທ່ານຈັກສັງລວມດ້ວຍສັງວອນໃນພຣະປາຕິໂມກ ພຽບພ້ອມດ້ວຍອາຈາຣະ ແລະ ໂຄຈອນ ມີປົກກະຕິເຫັນໄພໃນໂທດພຽງເລັກໜ້ອຍ ສະມາທານສຶກສາໃນສິກຂາບົດທັງຫຼາຍ ເມື່ອນັ້ນ ທ່ານອາໄສສິນ ດຳລົງຢູ່ໃນສິນແລ້ວ ເພິ່ງຈະເລີນສະຕິປັດຖານ ໔ ປະການ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ໃນທຳວິໄນນີ້ ທ່ານ

໑. ຈົ່ງພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ຈົ່ງພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ຈົ່ງພິຈາລະນາເຫັນຈິດໃນຈິດ ຯລຯ
໔. ຈົ່ງພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະ ຕິ ກຳຈັດ ອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸ ເມື່ອໃດ ທ່ານອາໄສສິນ ດຳລົງຢູ່ໃນສິນແລ້ວຈັກຈະເລີນສະຕິປັດຖານ ໔ ປະ ການ ນີ້ແນວນີ້ ເມື່ອນັ້ນ ທ່ານເພິ່ງຫວັງຄວາມຈະເລີນໃນກຸສົນທຳທັງຫຼາຍ ຕະຫຼອດຄືນແລະວັນ ທີຈັກ ມາເຖິງ ບໍ່ມີຄວາມເສື່ອມເລີຍ

ລຳດັບນັ້ນ ພິກຂຸອົງນັ້ນ ຊົມຊື່ນຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າແລ້ວ ລຸກ ຈາກ ອາສະນະ ຖວາຍອະພິວາດ ທຳປະທັກສິນແລ້ວຈາກໄປ ຕໍ່ມາ ທ່ານກໍຫຼີກອອກໄປຢູ່ຄົນ ດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ບໍ່ດົນປານໃດໄດ້ເຮັດໃຫ້ແຈ້ງເຊິ່ງປະ ໂຫຍດປະເສີດ ອັນເປັນບ່ອນສຸດແຫ່ງພົມມະຈັນ ທີ່ເຫຼົ່າກຸນລະບຸດອອກຈາກເຮືອນບວດເປັນບັນ ພະຊິດ ໂດຍຖືກຕ້ອງປາຖະໜາດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ຮູ້ແຈ້ງວ່າ ຊາດ ໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນ ແນວນີ້ອີກຕໍ່ໄປ

ອັນໜຶ່ງ ພິກຂຸອົງນັ້ນ ໄດ້ເປັນພຣະອະຣະຫັນອີກອົງໜຶ່ງ ໃນບັນດາພຣະອະຣະຫັນທັງ ຫຼາຍ ດ້ວຍອາການຢ່າງນັ້ນ

**ປາຕິໂມກຂະສັງວະຣະສູດທີ ໖ ຈົບ**

# ៗ. ທຸດຈະຣິຕະສູດ

## ວ່າດ້ວຍການລະທຸດຈະຣິດ

[໔໑໓] ຄັ້ງນັ້ນ ພິກຂຸອົງໜຶ່ງ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຯລຯ ໄດ້ ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດ ຂໍພຣະຜູ້

ມີພຣະພາກເຈົ້າໂຜດສະແດງທຳແກ່ຂ້າພຣະອົງໂດຍຫຍໍ້ ເຊິ່ງຂ້າພຣະອົງໄດ້ຟັງແລ້ວ ຈະເພິ່ງຫຼີກອອກໄປຢູ່ຄົນດຽວ ບໍ່ພະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ດ້ວຍເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸ ຍ້ອນເຫດນັ້ນ ທ່ານຈົ່ງເຮັດເບື້ອງຕົ້ນໃນກຸສົນທຳທັງຫຼາຍໃຫ້ມົດຈົດກ່ອນ

ອັນໃດ? ເປັນເບື້ອງຕົ້ນແຫ່ງກຸສົນທຳທັງຫຼາຍ

ຄື ໃນທຳວິໄນນີ້ ທ່ານຈັກລະກາຍທຸດຈະຣິດແລ້ວ ຈະເລີນກາຍສຸດຈະຣິດ ຈັກລະວະຈີທຸດຈະຣິດແລ້ວ ຈະເລີນວະຈີສຸດຈະຣິດ ຈັກລະມະໂນທຸດຈະຣິດແລ້ວ ຈະເລີນມະໂນສຸດຈະຣິດ ເມື່ອໃດ ທ່ານຈັກລະກາຍທຸດຈະຣິດແລ້ວ ຈະເລີນກາຍສຸດຈະຣິດ ຈັກລະວະຈີທຸດຈະຣິດແລ້ວ ຈະເລີນວະຈີສຸດຈະຣິດ ຈັກລະມະໂນທຸດຈະຣິດແລ້ວ ຈະເລີນ ມະໂນສຸດຈະຣິດ ເມື່ອນັ້ນ ທ່ານອາໄສສິນ ດຳລົງຢູ່ໃນສິນແລ້ວເພິ່ງຈະເລີນສະຕິປັດຖານ ໔ ປະການ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ໃນທຳວິໄນນີ້ ທ່ານ

໑. ຈົ່ງພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ຈົ່ງພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ฯລฯ
໓. ຈົ່ງພິຈາລະນາເຫັນຈິດໃນຈິດ ฯລฯ
໔. ຈົ່ງພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ເມື່ອໃດ ທ່ານອາໄສສິນ ດຳລົງຢູ່ໃນສິນແລ້ວຈັກຈະເລີນສະຕິປັດຖານ ໔ ປະການນີ້ແນວນີ້ ເມື່ອນັ້ນ ທ່ານເພິ່ງຫວັງຄວາມຈະເລີນໃນກຸສົນທຳທັງຫຼາຍ ຕະຫຼອດຄືນແລະວັນທີຈັກມາເຖິງ ບໍ່ມີຄວາມເສື່ອມເລີຍ ฯລฯ

ອັນໜຶ່ງ ພິກຂຸອົງນັ້ນ ໄດ້ເປັນພຣະອະຣະຫັນອີກອົງໜຶ່ງໃນບັນດາ ພຣະອະຣະຫັນທັງ ຫຼາຍ

**ທຸດຈະຣິຕະສູດທີ ໗ ຈົບ**

# ៣. ມິດຕະສູດ

## ວ່າດ້ວຍການຊັກຊວນມິດໃຫ້ຈະເລີນສະຕິປັດຖານ

[໔໑໔] ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງອະນຸເຄາະຄົນເຫຼົ່າໃດ ແລະ ຄົນເຫຼົ່າໃດຈະເປັນມິດ ອຳມາດ ຍາດ ສາໂລຫິດ ກໍຕາມໃຫ້ຄວາມສຳຄັນຄຳທີ່ຄວນຮັບຟັງ ທ່ານທັງຫຼາຍເພິ່ງຊັກຊວນຄົນເຫຼົ່ານັ້ນ ໃຫ້ຕັ້ງໝັ້ນ ໃຫ້ດຳລົງຢູ່ໃນການຈະເລີນສະຕິປັດຖານ ໔ ປະການ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸທັງຫຼາຍ ທ່ານທັງຫຼາຍ ເພິ່ງອະນຸເຄາະຄົນເຫຼົ່າໃດ ແລະຄົນເຫຼົ່າໃດຈະເປັນມິດ ອຳມາດ ຍາດ ສາໂລຫິດກໍຕາມໃຫ້ຄວາມສຳຄັນຄຳທີ່ຄວນຮັບຟັງ ທ່ານທັງຫຼາຍເພິ່ງຊັກຊວນຄົນເຫຼົ່ານັ້ນໃຫ້ຕັ້ງໝັ້ນ ໃຫ້ດຳລົງຢູ່ໃນການຈະເລີນສະຕິປັດຖານ ໔ ປະການນີ້

**ມິດຕະສູດທີ ៣ ຈົບ**

# ໔. ເວທະນາສູດ

## ວ່າດ້ວຍເວທະນາ

[໔໑໕] ພິກຂຸທັງຫຼາຍ ເວທະນາ ໓ ປະການນີ້

ເວທະນາ ໓ ປະການ ອັນໃດແດ່ ຄື

໑. ສຸກຂະເວທະນາ
໒. ທຸກຂະເວທະນາ
໓. ອະທຸກຂະມະສຸກຂະເວທະນາ

ເວທະນາ ໓ ປະການນີ້

ພິກຂຸທັງຫຼາຍ ທ່ານທັງຫຼາຍ ເພິ່ງຈະເລີນສະຕິປັດຖານ ໔ ປະການ ເພື່ອກຳນົດຮູ້ເວທະນາ ໓ ປະການນີ້

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຈະເລີນສະຕິປັດຖານ ໔ ປະການນີ້ເພື່ອກຳນົດຮູ້ເວທະນາ ໓ ປະການນີ້

**ເວທະນາສູດທີ ໙ ຈົບ**

## ໑໐. ອາສະວະສູດ

### ວ່າດ້ວຍອາສະວະ

[໔໑໓] ພິກຂຸທັງຫຼາຍ ອາສະວະ ໓ ປະການນີ້

ອາສະວະ ໓ ປະການ ອັນໃດແດ່ ຄື

໑. ກາມາສະວະ
໒. ພະວາສະວະ
໓. ອະວິດຊາສະວະ

ອາສະວະ ໓ ປະການນີ້

ພິກຂຸທັງຫຼາຍເພິ່ງຈະເລີນສະຕິປັດຖານ ໔ ປະການເພື່ອລະອາສະວະ ໓ ປະການນີ້

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

໔. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ฯລฯ
໓. ພິຈາລະນາເຫັນຈິດໃນຈິດ ฯລฯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຈະເລີນສະຕິປັດຖານ ໔ ປະການນີ້ເພື່ອລະອາສະວະ ໓ ປະການນີ້

**ອາສະວະສູດທີ ໑໐ ຈົບ**

**ອົມຕະວັກທີ ໕ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ອະມະຕະສູດ
໓. ມັກຄະສູດ
໕. ກຸສະລະຣາສີສູດ
໗. ທຸດຈະຣິຕະສູດ
໙. ເວທະນາສູດ
໔. ສະມຸທະຍະສູດ
໔. ສະຕິສູດ
໖. ປາຕິໂມກຂະສັງວະຣະສູດ
໘. ມິດຕະສູດ
໑໐. ອາສະວະສູດ

# ໖. ຄັງຄາເປີຍຍາລະວັກ

## ໝວດວ່າດ້ວຍຄັງຄາເປີຍຍາລະ

# ໑-໑໔. ຄັງຄານະທີອາທິສຸດຕະທະວາທະສະກະ

## ວ່າດ້ວຍພຣະສູດ ໑໔ ສູດມີຄັງຄານະທີສູດເປັນຕົ້ນ

[໔໑໗-໔໔໘] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ແມ່ນ້ຳຄົງຄາໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອຈະເລີນສະຕິປັດຖານ ໔ ປະການ ເຮັດສະຕິປັດຖານ ໔ ປະການໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸເມື່ອຈະເລີນສະຕິປັດຖານ ໔ ປະການ ເຮັດສະຕິປັດຖານ ໔ ປະການໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວໃດ

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ฯລฯ
໓. ພິຈາລະນາເຫັນຈິດໃນຈິດ ฯລฯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸທັງຫຼາຍ ພິກຂຸເມື່ອຈະເລີນສະຕິປັດຖານ ໔ ປະການ ເຮັດສະຕິປັດຖານ ໔ ປະການໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວນີ້ແລ

ເພິ່ງເພີ່ມຂໍ້ຄວາມຕໍ່ຈາກນີ້ໄປໃຫ້ພິດສະດານ

**ຄັງຄານະທີອາທິສຸດຕະທະວາທະສະກະທີ ໑-໑໒ ຈົບ**

**ຄັງຄາເປີຍຍາລະວັກທີ ໖ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ປະຖົມປາຈີນນິນນະສູດ
໒-໕. ທຸຕິຍາທິປາຈີນນິນນະສຸດຕະຈະຕຸກກະ
໖. ສັດຖະປາຈີນນິນນະສູດ
໗. ປະຖົມສະມຸດທະນິນນະສູດ
໘-໑໒. ທຸຕິຍາທິສະມຸດທະນິນນະສຸດຕະປັນຈະກະ

# ໗. ອັບປະມາທະວັກ

## ໝວດວ່າດ້ວຍຄວາມບໍ່ພະໝາດ

## ໑-໑໐. ຕະຖາຄະຕາທິສູດ

## ວ່າດ້ວຍພຣະຕະຖາຄົດເປັນຕົ້ນ

[໔໒໙-໔໓໘] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສັດທັງຫຼາຍທີ່ບໍ່ມີຕີນ ມີສອງຕີນ ມີສີ່ຕີນ ຫຼື ມີຕີນຫຼາຍກໍຕາມ

(ເພິ່ງເພີ່ມຂໍ້ຄວາມຕໍ່ຈາກນີ້ໄປໃຫ້ພິດສະດານ)

**ຕະຖາຄະຕາທິສູດທີ ໑-໑໐ ຈົບ**

**ອັບປະມາທະວັກທີ ໗ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໙. ພະລະກະຣະນີຍະວັກ

## ໝວດວ່າດ້ວຍອຸປະມາດ້ວຍການງານທີ່ເພິ່ງເຮັດດ້ວຍກຳລັງ

## ໑-໑໒. ພະລາທິສູດ

## ວ່າດ້ວຍອຸປະມາດ້ວຍການງານທີ່ເພິ່ງເຮັດດ້ວຍກຳລັງເປັນຕົ້ນ

[໔໒໕-໔໓໐] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ການງານທີ່ເພິ່ງເຮັດດ້ວຍກຳລັງທັງໝົດ

(ເພິ່ງເພີ່ມຂໍ້ຄວາມຕໍ່ຈາກນີ້ໄປໃຫ້ພິດສະດານ)

**ພະລາທິສູດທີ ໑-໑໒ ຈົບ**

**ພະລະກະຣະນີຍະວັກທີ ໙ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໙. ເອສະນາວັກ

## ໝວດວ່າດ້ວຍການສະແຫວງຫາ

## ໑-໑໐. ເອສະນາທິສູດ

### ວ່າດ້ວຍການສະແຫວງຫາເປັນຕົ້ນ

[໔໕໑-໔໖໐] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ການສະແຫວງຫາ ໓ ປະການນີ້ ການສະແຫວງຫາ ໓ ປະການ ອັນໃດແດ່ ຄື

໑. ການສະແຫວງຫາການ

໒. ການສະແຫວງຫາພົບ

໓. ການສະແຫວງຫາພົມມະຈັນ

ເພິ່ງເພີ່ມຂໍ້ຄວາມຕໍ່ຈາກນີ້ໄປໃຫ້ພິດສະດານ

**ເອສະນາທິສູດທີ ໑-໑໐ ຈົບ**

**ເອສະນາວັກທີ ໙ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ເອສະນາສູດ

໒. ວິທາສູດ

໓. ອາສະວະສູດ

໔. ພະວະສູດ

໕. ທຸກຂະຕາສູດ

໖. ຂິລະສູດ

໗. ມະລະສູດ

໘. ນີຄະສູດ

໙. ເວທະນາສູດ

໑໐. ຕັນຫາສູດ

໑໑. ຕະສິນາສູດ

# ໑໐. ໂອຄະວັກ

## ໝວດວ່າດ້ວຍໂອຄະ

## ໑-໑໐. ອຸທະທຳພາຄິຍາທິສູດ

### ວ່າດ້ວຍອຸທະທຳພາຄິຍະສັງໂຍດເປັນຕົ້ນ

[໔໖໑-໔໗໐] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອຸດທຳພາຄິຍະສັງໂຍດ (ສັງໂຍດເບື້ອງສູງ) ໕ ປະການນີ້

ອຸດທຳພາຄິຍະສັງໂຍດ ໕ ປະການ ອັນໃດແດ່ ຄື

໑. ຣູບປະຣາຄະ

໒. ອະຣູບປະຣາຄະ

໓. ມານະ

໔. ອຸດທັດຈະ

໕. ອະວິດຊາ

ອຸດທຳພາຄິຍະສັງໂຍດ ໕ ປະການນີ້

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຈະເລີນສະຕິປັດຖານ ໔ ປະການເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະອຸດທຳພາຄິຍະສັງໂຍດ ໕ ປະການນີ້

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ

໓. ພິຈາລະນາເຫັນຈິດໃນຈິດ ຯລຯ

໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຈະເລີນສະຕິປັດຖານ ໔ ປະການນີ້ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະອຸດທຳພາຄິຍະສັງໂຍດ ໕ ປະການນີ້

**ອຸດທຳພາຄິຍາທິສູດທີ ໑-໑໐ ຈົບ**

(ບັນດິດເພິ່ງຂະຫຍາຍສະຕິປັດຖານະສັງຍຸດໃຫ້ພິດສະດານຄືມັກຄະສັງຍຸດ)

**ໂອຄະວັກທີ ໑໐ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



**ສະຕິປັດຖານະສັງຍຸດທີ ໓ ຈົບ**

# ໔. ອິນທະຣິຍະສັງຍຸດ

## ໑. ສຸດທິກະວັກ

### ໝວດວ່າດ້ວຍອິນຊີລ້ວນ

## ໑. ສຸດທິກະສູດ

### ວ່າດ້ວຍອິນຊີລ້ວນ

[໔໗໑] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຕັດດັ່ງນີ້ວ່າ ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີ (ອິນຊີຄືສັດທາ)
໒. ວິຣິຍິນຊີ (ອິນຊີຄືວິຣິຍະ)
໓. ສະຕິນຊີ (ອິນຊີຄືສະຕິ)
໔. ສະມາທິນຊີ (ອິນຊີຄືສະມາທິ)
໕. ປັນຍິນຊີ (ອິນຊີຄືປັນຍາ)

ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

**ສຸດທິກະສູດທີ ໑ ຈົບ**

## ໒. ປະຖົມໂສຕາປັນນະສູດ

### ວ່າດ້ວຍພຣະໂສດາບັນ ສູດທີ ໑

[໔໗໒] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີ
໒. ສະຕິນຊີ
໕. ປັນຍິນຊີ
໔. ວິຣິຍິນຊີ
໔. ສະມາທິນຊີ

ພິກຂຸທັງຫຼາຍ ເມື່ອໃດ ອະຣິຍະສາວົກຮູ້ແຈ້ງຄຸນ ໂທດ ແລະເຄື່ອງສະບັດອອກຈາກອິນຊີ ໕ ປະການນີ້ຕາມຄວາມເປັນຈິງ ເມື່ອນັ້ນ ອະຣິຍະສາວົກນີ້ເຮົາກ່າວວ່າ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

**ປະຖົມໂສຕາປັນນະສູດທີ ໔ ຈົບ**

# ໒. ທຸຕິຍະໂສຕາປັນນະສູດ

## ວ່າດ້ວຍພຣະໂສດາບັນ ສູດທີ ໔

[໔໗໒] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີ
໒. ສະຕິນຊີ
໕. ປັນຍິນຊີ
໔. ວິຣິຍິນຊີ
໔. ສະມາທິນຊີ

ພິກຂຸທັງຫຼາຍ ເມື່ອໃດ ອະຣິຍະສາວົກຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກອິນຊີ ໕ ປະການນີ້ຕາມຄວາມເປັນຈິງ ເມື່ອນັ້ນ ອະຣິຍະສາວົກນີ້ເຮົາກ່າວວ່າ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

**ທຸຕິຍະໂສຕາປັນນະສູດທີ ໒ ຈົບ**

# ໔. ປະຖົມອະຣະຫັນຕະສູດ

## ວ່າດ້ວຍພຣະອະຣະຫັນ ສູດທີ ໑

[໔໗໔] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີ        ໒. ວິຣິຍິນຊີ
໓. ສະຕິນຊີ        ໔. ສະມາທິນຊີ
໕. ປັນຍິນຊີ

ພິກຂຸທັງຫຼາຍ ເມື່ອໃດ ພິກຂຸຮູ້ແຈ້ງຄຸນ ໂທດ ແລະເຄື່ອງສະບັດອອກຈາກອິນຊີ ໕ ປະການນີ້ຕາມຄວາມເປັນຈິງ ເປັນຜູ້ລຸດພົ້ນຍ້ອນບໍ່ຖືໝັ້ນ ເມື່ອນັ້ນ ພິກຂຸນີ້ ເຮົາກ່າວວ່າ ເປັນອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາຣະໄດ້ແລ້ວ ບັນລຸປະໂຫຍດຕົນ ໂດຍລຳດັບແລ້ວ ສິ້ນພະວະສັງໂຍດ[๑]ແລ້ວ ລຸດພົ້ນຍ້ອນຮູ້ໂດຍຖືກຕ້ອງ

**ປະຖົມອະຣະຫັນຕະສູດທີ ໔ ຈົບ**

# ໕. ທຸຕິຍະອະຣະຫັນຕະສູດ

## ວ່າດ້ວຍພຣະອະຣະຫັນ ສູດທີ ໒

[໔໗໕] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີ        ໒. ວິຣິຍິນຊີ
໓. ສະຕິນຊີ        ໔. ສະມາທິນຊີ
໕. ປັນຍິນຊີ

ພິກຂຸທັງຫຼາຍ ເມື່ອໃດ ພິກຂຸຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກອິນຊີ ໕ ປະການນີ້ຕາມຄວາມເປັນຈິງ ເປັນຜູ້ລຸດພົ້ນຍ້ອນບໍ່

ຖືໝັ້ນ ເມື່ອນັ້ນ ພິກຂຸນີ້ເຮົາກ່າວວ່າ ເປັນອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດ ກິດທີ່ຄວນເຮັດສຳເລັດແລ້ວ ປົງພາຣະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນຍ້ອນຮູ້ໂດຍຖືກຕ້ອງ

**ທຸຕິຍະອະຣະຫັນຕະສູດທີ ໕ ຈົບ**

# ໙. ປະຖົມສະມະນະພາມມະນະສູດ

## ວ່າດ້ວຍສະມະນະພາມ ສູດທີ ໑

[໔໗໙] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີ ໒. ວິຣິຍິນຊີ
໓. ສະຕິນຊີ ໔. ສະມາທິນຊີ
໕. ປັນຍິນຊີ

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງບໍ່ຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນໂທດ ແລະ ເຄື່ອງສະບັດອອກຈາກອິນຊີ ໕ ປະການນີ້ຕາມຄວາມເປັນຈິງ ສະມະນະ ຫຼື ພາມເຫຼົ່ານັ້ນ ເຮົາບໍ່ຈັດວ່າເປັນສະມະນະໃນໝູ່ສະມະນະ ບໍຈັດວ່າເປັນພາມໃນໝູ່ພາມ ທັງທ່ານເຫຼົ່ານັ້ນກໍບໍ່ເຮັດໃຫ້ແຈ້ງປະໂຫຍດແຫ່ງຄວາມເປັນສະມະນະ ຫຼື ປະໂຫຍດແຫ່ງຄວາມເປັນພາມດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ສ່ວນສະມະນະ ຫຼື ພາມເຫຼົ່າໃດເຫຼົ່າໜຶ່ງ ຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນໂທດ ແລະ ເຄື່ອງສະບັດອອກຈາກອິນຊີ ໕ ປະການນີ້ຕາມຄວາມເປັນຈິງ ສະມະນະ ຫຼື ພາມເຫຼົ່ານັ້ນເຮົາຈັດວ່າເປັນສະມະນະໃນໝູ່ສະມະນະ ແລະ ຈັດວ່າເປັນພາມໃນໝູ່ພາມ ທັງທ່ານເຫຼົ່ານັ້ນກໍເຮັດໃຫ້ແຈ້ງປະໂຫຍດແຫ່ງຄວາມເປັນສະມະນະ ແລະ ປະໂຫຍດແຫ່ງຄວາມເປັນພາມດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

**ປະຖົມສະມະນະພາມມະນະສູດທີ ໙ ຈົບ**

# ໑໐. ທຸຕິຍະສະມະນະພາມມະນະສູດ

## ວ່າດ້ວຍສະມະນະພາມ ສູດທີ ໒

[໔໘໐] ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງບໍ່ຮູ້ແຈ້ງສັດທິນຊີ ຄວາມເກີດແຫ່ງສັດທິນຊີ ຄວາມດັບແຫ່ງສັດທິນຊີ ແລະປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັດທິນຊີ ບໍ່ຮູ້ແຈ້ງວິຣິຍິນຊີ ຯລຯ ບໍ່ຮູ້ແຈ້ງສະຕິນຊີ ຯລຯ ບໍ່ຮູ້ແຈ້ງສະມາທິນຊີ ຯລຯ ບໍ່ຮູ້ແຈ້ງປັນຍິນຊີ ຄວາມເກີດແຫ່ງປັນຍິນຊີ ຄວາມດັບແຫ່ງປັນຍິນຊີ ແລະປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງປັນ

ຍິນຊີ ສະມະນະຫຼືພາມເຫຼົ່ານັ້ນເຮົາບໍ່ຈັດວ່າເປັນສະມະນະໃນໝູ່ສະມະນະ ບໍຈັດວ່າເປັນພາມໃນໝູ່ພາມ ທັງທ່ານເຫຼົ່ານັ້ນກໍບໍ່ເຮັດໃຫ້ແຈ້ງປະໂຫຍດແຫ່ງຄວາມເປັນສະມະນະ ຫຼື ປະໂຫຍດແຫ່ງຄວາມເປັນພາມດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ສ່ວນສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງສັດທິນຊີ ຄວາມເກີດແຫ່ງສັດທິນຊີ ຄວາມດັບແຫ່ງສັດທິນຊີ ແລະປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສັດທິນຊີ ຮູ້ແຈ້ງວິຣິຍິນຊີ ຄວາມເກີດແຫ່ງວິຣິຍິນຊີ ຄວາມດັບແຫ່ງວິຣິຍິນຊີ ແລະປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງວິຣິຍິນຊີ ຮູ້ແຈ້ງສະຕິນຊີ ຯລຯ ຮູ້ແຈ້ງສະມາທິນຊີ ຯລຯ ຮູ້ແຈ້ງປັນຍິນຊີ ຄວາມເກີດແຫ່ງປັນຍິນຊີ ຄວາມດັບແຫ່ງປັນຍິນຊີ ແລະປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງປັນຍິນຊີ ສະມະນະຫຼືພາມເຫຼົ່ານັ້ນ ເຮົາຈັດວ່າເປັນສະມະນະໃນໝູ່ສະມະນະ ແລະຈັດວ່າເປັນພາມໃນໝູ່ພາມ ທັງທ່ານເຫຼົ່ານັ້ນ ກໍເຮັດໃຫ້ແຈ້ງປະໂຫຍດແຫ່ງຄວາມເປັນສະມະນະ ແລະປະໂຫຍດແຫ່ງຄວາມເປັນພາມດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

**ທຸຕິຍະສະມະນະພາມມະນະສູດທີ ໗ ຈົບ**

## ໘. ທັດຖັບພະສູດ

### ວ່າດ້ວຍການເຫັນອິນຊີໃນທຳຕ່າງ ໆ

[໔໗໘] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້
ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີ ຯລຯ ໕. ປັນຍິນຊີ

ເພິ່ງເຫັນສັດທິນຊີໄດ້ຢູ່ໃສ
ເພິ່ງເຫັນໄດ້ໃນອົງເຄື່ອງບັນລຸໂສດາ ໔ ປະການ ເພິ່ງເຫັນສັດທິນຊີໄດ້ໃນບ່ອນນີ້

ເພິ່ງເຫັນວິຣິຍິນຊີໄດ້ຢູ່ໃສ
ເພິ່ງເຫັນໄດ້ໃນສຳມັບປະທານ ໔ ປະການ ເພິ່ງເຫັນວິຣິຍິນຊີໄດ້ໃນບ່ອນນີ້

ເພິ່ງເຫັນສະຕິນຊີໄດ້ທີ່ໃດ
ເພິ່ງເຫັນໄດ້ໃນສະຕິປັດຖານ ໔ ປະການ ເພິ່ງເຫັນສະຕິນຊີໄດ້ໃນບ່ອນນີ້

ເພິ່ງເຫັນສະມາທິນຊີ ໄດ້ຢູ່ໃສ
ເພິ່ງເຫັນໄດ້ໃນຊານ ໔ ປະການ ເພິ່ງເຫັນສະມາທິນຊີ ໄດ້ໃນທີ່ນີ້

ເພິ່ງເຫັນປັນຍິນຊີ ໄດ້ຢູ່ໄສ
ເພິ່ງເຫັນໄດ້ໃນອະຣິຍະສັດ ໔ ປະການ ເພິ່ງເຫັນປັນຍິນຊີ ໄດ້ໃນບ່ອນນີ້

ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

**ຫັດຖັບພະສູດທີ ៧ ຈົບ**

# ໘. ປະຖົມວິພັງຄະສູດ

## ວ່າດ້ວຍການຈຳແນກອິນຊີ ສູດທີ ໑

[໔໗໘] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີ ໆລໆ ໕. ປັນຍິນຊີ

ສັດທິນຊີ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ມີສັດທາ ເຊື່ອພຣະປັນຍາຕັດສະຣູ້ຂອງຕະຖາຄົດວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງ ໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນ ເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາ ແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ນີ້ຮຽກວ່າ ສັດທິນຊີ

ວິຣິຍິນຊີ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ຜາຣົບຄວາມພຽນ ເພື່ອລະອະກຸສົນທຳ ເຂົ້າເຖິງກຸສົນທຳ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນ ໝັ້ນຄົງ ບໍ່ຖິ້ມເບົາໃນກຸສົນທຳຢູ່ ນີ້ຮຽກວ່າ ວິຣິຍິນຊີ

ສະຕິນຊີ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ມີສະຕິ ປະກອບດ້ວຍສະຕິປັນຍາເປັນເຄື່ອງຮັກສາຕົນຢ່າງຍິ່ງ ລະລຶກເຖິງສິ່ງທີ່ເຮັດ ຄຳທີ່ໄດ້ເວົ້າໄວ້ດົນແດ່ ນີ້ຮຽກວ່າ ສະຕິນຊີ

ສະມາທິນຊີ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ ເຮັດນິບພານໃຫ້ເປັນອາລົມແລ້ວ ໄດ້ສະມາທິ ໄດ້ເອກັກຄະຕາຈິດ ນີ້ຮຽກວ່າ ສະມາທິນຊີ

ປັນຍິນຊີ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ມີປັນຍາ ປະກອບດ້ວຍປັນຍາເປັນເຄື່ອງ ພິຈາລະນາເຫັນທັງຄວາມເກີດ ແລະຄວາມດັບອັນເປັນອະຣິຍະ ທຳລາຍກິເລດ ໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງ ນີ້ຮຽກວ່າ ປັນຍິນຊີ

ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

**ປະຖົມວິພັງຄະສູດທີ ໗ ຈົບ**

# ໑໐. ທຸຕິຍະວິພັງຄະສູດ

## ວ່າດ້ວຍການຈຳແນກອິນຊີ ສູດທີ ໘

[໔໘໐] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີ ຯລຯ ໕. ປັນຍິນຊີ

ສັດທິນຊີ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ມີສັດທາ ເຊື່ອພຣະປັນຍາຕັດສະຣູ້ຂອງຕະຖາຄົດວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ນີ້ຮຽກວ່າ ສັດທິນຊີ

ວິຣິຍິນຊີ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ພາຣົບຄວາມພຽນ ເພື່ອລະອະກຸສົນທຳ ເຂົ້າເຖິງກຸສົນທຳ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນ ໝັ້ນຄົງ ບໍ່ຖືເບົາໃນກຸສົນທຳ

ທ່ານສ້າງສັນທະ ພະຍາຍາມ ພາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອປ້ອງກັນບາບອະກຸສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ

ທ່ານສ້າງສັນທະ ພະຍາຍາມ ພາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອລະບາບອະກຸສົນທຳທີ່ເກີດຂຶ້ນແລ້ວ

ທ່ານສ້າງສັນທະ ພະຍາຍາມ ພາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອທຳກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ

ທ່ານສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອຄວາມດຳລົງຢູ່ ບໍ່ເລືອນຫາຍ ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ

ນີ້ຮຽກວ່າ ວິຣິຍິນຊີ

ສະຕິນຊີ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ມີສະຕິ ປະກອບດ້ວຍສະຕິປັນຍາເປັນເຄື່ອງຮັກສາຕົນຢ່າງຍິ່ງ ລະລຶກເຖິງສິ່ງທີ່ເຮັດ ຄຳທີ່ໄດ້ເວົ້າໄວ້ດົນແດ່

ທ່ານພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ ພິຈາລະນາເຫັນຈິດໃນຈິດ ຯລຯ ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ນີ້ຮຽກວ່າ ສະຕິນຊີ

ສະມາທິນຊີ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເຮັດນິບພານໃຫ້ເປັນອາລົມ ໄດ້ສະມາທິ ໄດ້ເອກັຄຄະຕາຈິດ ທ່ານສະຫງັດຈາກກາມແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກວິຈານ ມີປີຕິແລະສຸກອັນເກີດຈາກວິເວກຢູ່ ຍ້ອນວິຕົກວິຈານສະງົບລະງັບໄປ ບັນລຸທຸຕິຍະຊານມີຄວາມຜ່ອງໃສພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິແລະສຸກອັນເກີດຈາກສະມາທິຢູ່ ຍ້ອນປີຕິຈາງຄາຍອອກ ທ່ານມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ທ່ານບັນລຸຈະຕຸດຖະຊານທີ່ບໍ່ມີທຸກແລະບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່

ນີ້ຮຽກວ່າ ສະມາທິນຊີ

ປັນຍິນຊີ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ມີປັນຍາ ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນທັງຄວາມເກີດ ແລະຄວາມດັບອັນເປັນອະຣິຍະ ທຳລາຍກິເລດ ໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງ ທ່ານຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

ນີ້ຮຽກວ່າ ປັນຍິນຊີ

ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

**ທຸຕິຍະວິພັງຄະສູດທີ ໑໐ ຈົບ**

**ສຸດທິກະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໔. ມຸທຸຕະຣະວັກ

### ໝວດວ່າດ້ວຍອິນຊີທີ່ອ່ອນກວ່າ

## ໑. ປະຕິລາພະສູດ

### ວ່າດ້ວຍການໄດ້ອິນຊີ

[໔໘໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີ ฯລฯ ໕. ປັນຍິນຊີ

ສັດທິນຊີ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ມີສັດທາ ເຊື່ອພຣະປັນຍາຕັດສະຣູ້ຂອງຕະຖາຄົດວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີ

ເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາ ແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ

ນີ້ຮຽກວ່າ ສັດທິນຊີ

ວິຣິຍິນຊີ ເປັນແນວໃດ?

ຄື ອະຣິຍະສາວົກພາຣົບສຳມັບປະທານ ໔ ປະການ ຍ່ອມໄດ້ຄວາມພຽນ

ນີ້ຮຽກວ່າ ວິຣິຍິນຊີ

ສະຕິນຊີ ເປັນແນວໃດ?

ຄື ອະຣິຍະສາວົກຜາຣົບສະຕິປັດຖານ ໔ ປະການ ຍ່ອມໄດ້ສະຕິ

ນີ້ຮຽກວ່າ ສະຕິນຊີ

ສະມາທິນຊີ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເຮັດນິບພານໃຫ້ເປັນອາລົມແລ້ວ ໄດ້ສະມາທິ ໄດ້ເອກັກຄະຕາຈິດ

ນີ້ຮຽກວ່າ ສະມາທິນຊີ

ປັນຍິນຊີ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ເປັນຜູ້ມີປັນຍາ ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນທັງຄວາມເກີດແລະຄວາມດັບອັນເປັນອະຣິຍະ ທຳລາຍກິເລດ ໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງ

ນີ້ຮຽກວ່າ ປັນຍິນຊີ

ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

**ປະຕິລາພະສູດທີ ໑ ຈົບ**

# ໘. ປະຖົມສັງຂິດຕະສູດ

## ວ່າດ້ວຍຜົນແຫ່ງອິນຊີໂດຍຫຍໍ້ ສູດທີ ໑

[໔໗໘] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີ ຯລຯ ໕. ປັນຍິນຊີ

ອິນຊີ ໕ ປະການນີ້

ພິກຂຸທັງຫຼາຍ ບຸກຄົນ

໑. ເປັນພຣະອະຣະຫັນ ຍ້ອນມີອິນຊີ ໕ ປະການນີ້ຄົບຖ້ວນບໍລິບູນ

໒. ເປັນພຣະອະນາຄາມີ ຍ້ອນມີອິນຊີອ່ອນກວ່າພຣະອະຣະຫັນນັ້ນ
໓. ເປັນພຣະສະກະທາຄາມີ ຍ້ອນມີອິນຊີອ່ອນກວ່າພຣະອະນາຄາມີນັ້ນ
໔. ເປັນພຣະໂສດາບັນ ຍ້ອນມີອິນຊີອ່ອນກວ່າພຣະສະກະທາຄາມີນັ້ນ
໕. ເປັນພຣະໂສດາບັນຜູ້ທຳມານຸສາຣີຍ້ອນມີອິນຊີອ່ອນກວ່າພຣະໂສດາບັນນັ້ນ
໖. ເປັນພຣະໂສດາບັນຜູ້ສັດທານຸສາຣີຍ້ອນມີອິນຊີອ່ອນກວ່າພຣະໂສດາບັນຜູ້ທຳມານຸສາຣີນັ້ນ

**ປະຖົມສັງຂິດຕະສູດທີ່ ໒ ຈົບ**

# ໓. ທຸຕິຍະສັງຂິດຕະສູດ

## ວ່າດ້ວຍຜົນແຫ່ງອິນຊີໂດຍຫຍໍ້ ສູດທີ່ ໒

[໔໗໓] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີ ຯລຯ ໕. ປັນຍິນຊີ

ອິນຊີ ໕ ປະການນີ້

ພິກຂຸທັງຫຼາຍ ບຸກຄົນ

໑. ເປັນພຣະອະຣະຫັນ ຍ້ອນມີອິນຊີ ໕ ປະການນີ້ຄົບຖ້ວນບໍລິບູນ
໒. ເປັນພຣະອະນາຄາມີ ຍ້ອນມີອິນຊີອ່ອນກວ່າພຣະອະຣະຫັນນັ້ນ
໓. ເປັນພຣະສະກະທາຄາມີ ຍ້ອນມີອິນຊີອ່ອນກວ່າພຣະອະນາຄາມີນັ້ນ
໔. ເປັນພຣະໂສດາບັນ ຍ້ອນມີອິນຊີອ່ອນກວ່າພຣະສະກະທາຄາມີນັ້ນ
໕. ເປັນພຣະໂສດາບັນຜູ້ທຳມານຸສາຣີຍ້ອນມີອິນຊີອ່ອນກວ່າພຣະໂສດາບັນນັ້ນ
໖. ເປັນພຣະໂສດາບັນຜູ້ສັດທານຸສາຣີຍ້ອນມີອິນຊີອ່ອນກວ່າພຣະໂສດາບັນຜູ້ທຳມານຸສາຣີນັ້ນ

ພິກຂຸທັງຫຼາຍ ຄວາມແຕກຕ່າງແຫ່ງຜົນຍ່ອມມີຍ້ອນຄວາມແຕກຕ່າງແຫ່ງອິນຊີ ຄວາມແຕກຕ່າງແຫ່ງບຸກຄົນຍ່ອມມີຍ້ອນຄວາມແຕກຕ່າງແຫ່ງຜົນ ແນວນີ້

**ທຸຕິຍະສັງຂິດຕະສູດທີ່ ໓ ຈົບ**

# ໔. ຕະຕິຍະສັງຂິດຕະສູດ

## ວ່າດ້ວຍຜົນແຫ່ງອິນຊີໂດຍຫຍໍ້ ສູດທີ ໓

[໔໗໔] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີ ຯລຯ ໕. ປັນຍິນຊີ

ອິນຊີ ໕ ປະການນີ້

ພິກຂຸທັງຫຼາຍ ບຸກຄົນ

໑. ເປັນພຣະອະຣະຫັນຍ້ອນມີອິນຊີ ໕ ປະການນີ້ຄົບຖ້ວນບໍລິບູນ
໒. ເປັນພຣະອະນາຄາມີຍ້ອນມີອິນຊີອ່ອນກວ່າພຣະອະຣະຫັນນັ້ນ
໓. ເປັນພຣະສະກະທາຄາມີຍ້ອນມີອິນຊີອ່ອນກວ່າພຣະອະນາຄາມີນັ້ນ
໔. ເປັນພຣະໂສດາບັນຍ້ອນມີອິນຊີອ່ອນກວ່າພຣະສະກະທາຄາມີນັ້ນ
໕. ເປັນພຣະໂສດາບັນຜູ້ທຳມານຸສາຣີຍ້ອນມີອິນຊີອ່ອນກວ່າພຣະໂສດາບັນນັ້ນ
໖. ເປັນພຣະໂສດາບັນຜູ້ສັດທານຸສາຣີຍ້ອນມີອິນຊີອ່ອນກວ່າພຣະໂສດາບັນຜູ້ທຳມານຸສາຣີນັ້ນ

ບຸກຄົນຜູ້ພໍ່າເພັງອະຣະຫັດຕະມັກໃຫ້ບໍລິບູນ ຍ່ອມໄດ້ບັນລຸອະຣະຫັດຕະຜົນ ບຸກຄົນຜູ້ພໍ່າເພັງມັກທັງ ໓ (ທີ່ເຫຼືອໃຫ້ບໍລິບູນ) ຍ່ອມໄດ້ບັນລຸຜົນທັງ ໓ ດັ່ງກ່າວນີ້ ພິກຂຸທັງຫຼາຍ ເຮົາກ່າວອິນຊີ ໕ ປະການວ່າບໍ່ເປັນໝັນເລີຍ

**ຕະຕິຍະສັງຂິດຕະສູດທີ ໔ ຈົບ**

# ໕. ປະຖົມວິດຖາຣະສູດ

## ວ່າດ້ວຍຜົນແຫ່ງອິນຊີໂດຍພິດສະດານ ສູດທີ ໑

[໔໗໕] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີ ໗ລ໗ ໕. ປັນຍິນຊີ

ອິນຊີ ໕ ປະການນີ້

ພິກຂຸທັງຫຼາຍ ບຸກຄົນ

໑. ເປັນພຣະອະຣະຫັນຍ້ອນອິນຊີ ໕ ປະການນີ້ຄົບຖ້ວນບໍລິບູນ
໒. ເປັນພຣະອະນາຄາມີຜູ້ອັນຕະຣາປະຣິນິບພາຍີຍ້ອນມີອິນຊີອ່ອນກວ່າພຣະອະຣະຫັນນັ້ນ
໓. ເປັນພຣະອະນາຄາມີຜູ້ອຸປະຫັດຈະປະຣິນິບພາຍີຍ້ອນມີອິນຊີອ່ອນກວ່າພຣະອະນາຄາມີຜູ້ອັນຕະຣາປະຣິນິບພາຍີນັ້ນ
໔. ເປັນພຣະອະນາຄາມີຜູ້ອະສັງຂາຣະປະຣິນິບພາຍີຍ້ອນມີອິນຊີອ່ອນກວ່າພຣະອະນາຄາມີຜູ້ອຸປະຫັດຈະປະຣິນິບພາຍີນັ້ນ
໕. ເປັນພຣະອະນາຄາມີຜູ້ສະສັງຂາຣະປະຣິນິບພາຍີຍ້ອນມີອິນຊີອ່ອນກວ່າພຣະອະນາຄາມີຜູ້ອະສັງຂາຣະປະຣິນິບພາຍີນັ້ນ
໖. ເປັນພຣະອະນາຄາມີຜູ້ອຸດທັງໂສໂຕອະກະນິດຖະຄາມີຍ້ອນມີອິນຊີອ່ອນກວ່າພຣະອະນາຄາມີຜູ້ສະສັງຂາຣະປະຣິນິບພາຍີນັ້ນ
໗. ເປັນພຣະສະກະທາຄາມີຍ້ອນມີອິນຊີອ່ອນກວ່າພຣະອະນາຄາມີຜູ້ອຸທທັງໂສໂຕອະກະນິຕຖະຄາມີນັ້ນ
໘. ເປັນພຣະໂສດາບັນຍ້ອນມີອິນຊີອ່ອນກວ່າພຣະສະກະທາຄາມີນັ້ນ
໙. ເປັນພຣະໂສດາບັນຜູ້ທຳມານຸສາຣີຍ້ອນມີອິນຊີອ່ອນກວ່າພຣະໂສດາບັນ ນັ້ນ
໑໐. ເປັນພຣະໂສດາບັນຜູ້ສັດທານຸສາຣີຍ້ອນມີອິນຊີອ່ອນກວ່າພຣະໂສດາບັນ ຜູ້ທຳມານຸສາຣີນັ້ນ

**ປະຖົມວິດຖາຣະສູດທີ ໕ ຈົບ**

# ໖. ທຸຕິຍະວິດຖາຣະສູດ

## ວ່າດ້ວຍຜົນແຫ່ງອິນຊີໂດຍພິດສະດານ ສູດທີ ໒

[໔໘໖] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ອັນໃດແດ່ ຄື

๑. สัดทินซิ ๆลๆ ๕. ปันยินซิ

อินซิ ๕ ปะกานนี้

พิภิกขุทั้งหลาย บุกคน

๑. เป็นพระอะระหันย่อมมีอินซิ ๕ ปะกานนี้คบถ้วนบํลิบูน
๒. เป็นพระอะนาคามีผู้อันตะราปะรินิบพายีย่อมมีอินซิอ่อนกว่าพระอะระหันนั้น
๓. เป็นพระอะนาคามีผู้อุปะหัดจะปะรินิบพายีย่อมมีอินซิอ่อนกว่าพระอะนาคามีผู้อันตะราปะรินิบพายีนั้น
๔. เป็นพระอะนาคามีผู้อะสังขาระปะรินิบพายีย่อมมีอินซิอ่อนกว่าพระอะนาคามีผู้อุปะหัดจะปะรินิบพายีนั้น
๕. เป็นพระอะนาคามีผู้สะสังขาระปะรินิบพายีย่อมมีอินซิอ่อนกว่าพระอะนาคามีผู้อะสังขาระปะรินิบพายีนั้น
๖. เป็นพระอะนาคามีผู้อุดทังโสโตอะกะนิดถะคามีย่อมมีอินซิอ่อนกว่าพระอะนาคามีผู้สะสังขาระปะรินิบพายีนั้น
๗. เป็นพระสะกะทาคามีย่อมมีอินซิอ่อนกว่าพระอะนาคามีผู้อุทธังโสโตอะกะนิตถะคามีนั้น
๘. เป็นพระโสดาบันย่อมมีอินซิอ่อนกว่าพระสะกะทาคามีนั้น
๙. เป็นพระโสดาบันผู้ทำมานุสาริย่อมมีอินซิอ่อนกว่าพระโสดาบัน นั้น
๑๐. เป็นพระโสดาบันผู้สัดทานุสาริย่อมมีอินซิอ่อนกว่าพระโสดาบัน ผู้ทำมานุสารินั้น

พิภิกขุทั้งหลาย ความแตกต่างแห่งผินย่อมมีย้อนความแตกต่างแห่งอินซิ ความแตกต่างแห่งบุกคนย่อมมีย้อนความแตกต่างแห่งผิน แนวนี้

**ทุติยะวิดถาระสูดที่ ๒ จบ**

# ๓. ตะติยะวิดถาระสูด

## ว่าด้วยผินแห่งอินซิโดยพิดสะดาน สูดที่ ๓

[๔๙๓] พิภิกขุทั้งหลาย อินซิ ๕ ปะกานนี้

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີ ຯລຯ ໕. ປັນຍິນຊີ

ອິນຊີ ໕ ປະການນີ້

ພິກຂຸທັງຫຼາຍ ບຸກຄົນ

໑. ເປັນພຣະອະຣະຫັນຍ້ອນມີອິນຊີ ໕ ປະການນີ້ຄົບຖ້ວນບໍລິບູນ
໒. ເປັນພຣະອະນາຄາມີຜູ້ອັນຕະຣາປະຣິນິບພາຍີຍ້ອນມີອິນຊີອ່ອນກວ່າພຣະອະຣະຫັນນັ້ນ
໓. ເປັນພຣະອະນາຄາມີຜູ້ອຸປະຫັດຈະປະຣິນິບພາຍີຍ້ອນມີອິນຊີອ່ອນກວ່າພຣະອະນາຄາມີຜູ້ອັນຕະຣາປະຣິນິບພາຍີນັ້ນ
໔. ເປັນພຣະອະນາຄາມີຜູ້ອະສັງຂາຣະປະຣິນິບພາຍີຍ້ອນມີອິນຊີອ່ອນກວ່າພຣະອະນາຄາມີຜູ້ອຸປະຫັດຈະປະຣິນິບພາຍີນັ້ນ
໕. ເປັນພຣະອະນາຄາມີຜູ້ສະສັງຂາຣະປະຣິນິບພາຍີຍ້ອນມີອິນຊີອ່ອນກວ່າພຣະອະນາຄາມີຜູ້ອະສັງຂາຣະປະຣິນິບພາຍີນັ້ນ
໖. ເປັນພຣະອະນາຄາມີຜູ້ອຸດທັງໂສໂຕອະກະນິດຖະຄາມີຍ້ອນມີອິນຊີອ່ອນກວ່າພຣະອະນາຄາມີຜູ້ສະສັງຂາຣະປະຣິນິບພາຍີນັ້ນ
໗. ເປັນພຣະສະກະທາຄາມີຍ້ອນມີອິນຊີອ່ອນກວ່າພຣະອະນາຄາມີຜູ້ອຸທທັງໂສໂຕອະກະນິຕຖະຄາມີນັ້ນ
໘. ເປັນພຣະໂສດາບັນຍ້ອນມີອິນຊີອ່ອນກວ່າພຣະສະກະທາຄາມີນັ້ນ
໙. ເປັນພຣະໂສດາບັນຜູ້ທຳມານຸສາຣີຍ້ອນມີອິນຊີອ່ອນກວ່າພຣະໂສດາບັນນັ້ນ
໑໐. ເປັນພຣະໂສດາບັນຜູ້ສັດທານຸສາຣີຍ້ອນມີອິນຊີອ່ອນກວ່າພຣະໂສດາບັນ ຜູ້ທຳມານຸສາຣີນັ້ນ

ບຸກຄົນຜູ້ພ່ຳເພັງອະຣະຫັຕຕະມັກໃຫ້ບໍລິບູນ ຍ່ອມໄດ້ບັນລຸອະຣະຫັດຕະຜົນ ບຸກຄົນຜູ້ພ່ຳເພັງມັກທັງ ໓ (ທີ່ເຫຼືອໃຫ້ບໍລິບູນ) ຍ່ອມໄດ້ບັນລຸຜົນທັງ ໓ ດັ່ງກ່າວນີ້ ພິກຂຸທັງຫຼາຍ ເຮົາກ່າວອິນຊີ ໕ ປະການວ່າບໍ່ເປັນໝັນເລີຍ

**ຕະຕິຍະວິດຖາຣະສູດທີ ໗ ຈົບ**

# ໙. ປະຕິປັນນະສູດ

## ວ່າດ້ວຍຜົນແຫ່ງການປະຕິບັດຕາມລຳດັບອິນຊີ

[໔໙໙] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີ ໗ລ໗ ໕. ປັນຍິນຊີ

ອິນຊີ ໕ ປະການນີ້

ພິກຂຸທັງຫຼາຍ ບຸກຄົນ

໑. ເປັນພຣະອະຣະຫັນຍ້ອນມີອິນຊີ ໕ ປະການນີ້ຄົບຖ້ວນບໍລິບູນ
໒. ເປັນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນຍ້ອນມີອິນຊີອ່ອນກວ່າພຣະອະຣະຫັນນັ້ນ
໓. ເປັນພຣະອະນາຄາມີຍ້ອນມີອິນຊີອ່ອນກວ່າຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນນັ້ນ
໔. ເປັນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມີຜົນຍ້ອນມີອິນຊີອ່ອນກວ່າພຣະອະນາຄາມີນັ້ນ
໕. ເປັນພຣະສະກະທາຄາມີຍ້ອນມີອິນຊີອ່ອນກວ່າຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງອະນາຄາມີຜົນນັ້ນ
໖. ເປັນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມີຜົນຍ້ອນມີອິນຊີອ່ອນກວ່າພຣະສະກະທາຄາມີນັ້ນ
໗. ເປັນພຣະໂສດາບັນຍ້ອນມີອິນຊີອ່ອນກວ່າຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງສະກະທາຄາມີຜົນນັ້ນ
໘. ເປັນຜູ້ປະຕິບັດເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນຍ້ອນມີອິນຊີອ່ອນກວ່າພຣະໂສດາບັນນັ້ນ

ພິກຂຸທັງຫຼາຍ ຜູ້ໃດບໍ່ມີອິນຊີ ໕ ປະການນີ້ໂດຍປະການທັງປວງ ຜູ້ນັ້ນເຮົາກ່າວວ່າເປັນຜູ້ເຫີນຫ່າງ ຢູ່ໃນຝ່າຍປຸຖຸຊົນ

**ປະຕິປັນນະສູດທີ ໙ ຈົບ**

# ໙. ສຳປັນນະສູດ

## ວ່າດ້ວຍຜູ້ສົມບູນດ້ວຍອິນຊີ

[໔໗໙] ຄັ້ງນັ້ນແລ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

ຂ້າແດ່ພຣະອົງຜູ້ຈະເລີນ ພຣະອົງຕັດວ່າ ຜູ້ສົມບູນດ້ວຍອິນຊີ ຜູ້ສົມບູນດ້ວຍອິນຊີ ດ້ວຍເຫດພຽງທໍ່ໃດນໍ ພິກຂຸຈຶ່ງຊື່ວ່າເປັນຜູ້ສົມບູນດ້ວຍອິນຊີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸ ພິກຂຸໃນທຳວິໄນນີ້ຈະເລີນສັດທິນຊີໃຫ້ເຖິງຄວາມສະງົບ ໃຫ້ເຖິງຄວາມຕັດສະຮູ້ ຈະເລີນວິຣິຍິນຊີທີ່ໃຫ້ເຖິງຄວາມສະງົບ ໃຫ້ເຖິງຄວາມຕັດສະຮູ້ ຈະເລີນສະຕິນຊີທີ່ໃຫ້ເຖິງຄວາມສະງົບ ໃຫ້ເຖິງຄວາມຕັດສະຮູ້ ຈະເລີນສະມາທິນຊີ ທີ່ໃຫ້ເຖິງຄວາມສະງົບ ໃຫ້ເຖິງຄວາມຕັດສະຮູ້ ຈະເລີນປັນຍິນຊີ ທີ່ໃຫ້ເຖິງຄວາມສະງົບ ໃຫ້ເຖິງຄວາມຕັດສະຮູ້ ດ້ວຍເຫດພຽງທໍ່ນີ້ແລ ພິກຂຸຈຶ່ງຊື່ວ່າ ເປັນຜູ້ສົມບູນດ້ວຍອິນຊີ

**ສຳປັນນະສູດທີ ໙ ຈົບ**

# ໑໐. ອາສະວັກຂະຍະສູດ

## ວ່າດ້ວຍທຳເປັນເຫດໃຫ້ສິ້ນອາສະວະ

[໔໘໐] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້
ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີ ຯລຯ ໕. ປັນຍິນຊີ

ອິນຊີ ໕ ປະການນີ້

ພິກຂຸທັງຫຼາຍ ພິກຂຸເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນຫາອາສະວະບໍ່ໄດ້ຍ້ອນອາສະວະທັງຫຼາຍສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ຍ້ອນອິນຊີ ໕ ປະການນີ້ທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ

**ອາສະວັກຂະຍະສູດທີ ໑໐ ຈົບ**

**ມຸທຸຕະຣະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໒. ສະລິນທະຣິຍະວັກ

### ໝວດວ່າດ້ວຍອິນຊີ ໖

## ໑. ປຸນັບພະວະສູດ

### ວ່າດ້ວຍເຫດທີ່ເຮັດໃຫ້ບໍ່ມີພົບໃໝ່

[໔໙໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້ ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີ ຯລຯ ໕. ປັນຍິນຊີ

ພິກຂຸທັງຫຼາຍ ຕາບໃດເຮົາຍັງບໍ່ຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກອິນຊີ ໕ ປະການນີ້ຕາມຄວາມເປັນຈິງ ຕາບນັ້ນເຮົາຍັງບໍ່ຢັ້ງຢືນວ່າ ເປັນຜູ້ຕັດສະຣູ້ສຳມາສຳໂພທິຍານອັນປະເສີດໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດ ພ້ອມທັງສະມະນະພາມ ເທວະດາແລະມະນຸດ

ແຕ່ເມື່ອໃດ ເຮົາຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກອິນຊີ ໕ ປະການນີ້ຕາມຄວາມເປັນຈິງ ເມື່ອນັ້ນ ເຮົາຈຶ່ງຢັ້ງຢືນວ່າ ເປັນຜູ້ຕັດສະຣູ້ສຳມາສຳໂພທິຍານອັນປະເສີດໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດ ພ້ອມທັງສະມະນະພາມ ເທວະດາແລະມະນຸດ

ອັນໜຶ່ງ ຍານທັດສະນະ[១]ເກີດຂຶ້ນແລ້ວແກ່ເຮົາວ່າ ວິມຸດຕິຂອງເຮົາບໍ່ກຳເຮີບ ຊາດນີ້ເປັນຊາດສຸດທ້າຍ ບັດນີ້ພົບໃໝ່ບໍ່ມີອີກ

**ປຸນັບພະວະສູດທີ ໑ ຈົບ**

# ໘. ຊີວິຕິນທະຣິຍະສູດ

## ວ່າດ້ວຍຊີວິຕິນຊີ

[໔໙໘] ພິກຂຸທັງຫຼາຍ ອິນຊີ ໓ ປະການນີ້

ອິນຊີ ໓ ປະການ ອັນໃດແດ່ ຄື

໑. ອິດຖິນຊີ (ອິນຊີຄືອິດຖີພາວະ)
໒. ປຸຣິສິນຊີ (ອິນຊີຄືປຸຣິສະພາວະ)
໓. ຊີວິຕິນຊີ (ອິນຊີຄືຊີວິດ)

ອິນຊີ ໓ ປະການນີ້

**ຊີວິຕິນທະຣິຍະສູດທີ ໘ ຈົບ**

# ໙. ອັນຍິນທະຣິຍະສູດ

## ວ່າດ້ວຍອັນຍິນຊີ

[໔໙໙] ພິກຂຸທັງຫຼາຍ ອິນຊີ ໓ ປະການນີ້

ອິນຊີ ໓ ປະການ ອັນໃດແດ່ ຄື

໑. ອະນັນຍາຕັນຍັດສາມີຕິນຊີ (ອິນຊີຂອງທ່ານຜູ້ປະຕິບັດດ້ວຍມຸ້ງວ່າ ເຮົາຈັກຮູ້ສັດຈະທຳທີ່ບໍ່ໄດ້ຮູ້)
໒. ອັນຍິນຊີ (ອິນຊີຄືປັນຍາອັນຮູ້ທົ່ວເຖິງ)
໓. ອັນຍາຕາວິນຊີ (ອິນຊີຂອງທ່ານຜູ້ຮູ້ທົ່ວເຖິງແລ້ວ)

ອິນຊີ ໓ ປະການນີ້

**ອັນຍິນທະຣິຍະສູດທີ ໙ ຈົບ**

# ໔. ເອກະພີຊີສູດ

## ວ່າດ້ວຍພຣະເອກະພີຊີໂສດາບັນ

[໔໙໔] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີ ຯລຯ ໕. ປັນຍິນຊີ

ອິນຊີ ໕ ປະການນີ້

ພິກຂຸທັງຫຼາຍ ບຸກຄົນ

໑. ເປັນພຣະອະຣະຫັນຍ້ອນມີອິນຊີ ໕ ປະການນີ້ຄົບຖ້ວນບໍລິບູນ
໒. ເປັນພຣະອະນາຄາມີຜູ້ອັນຕະຣາປະຣິນິບພາຍີຍ້ອນມີອິນຊີອ່ອນກວ່າພຣະອະຣະຫັນນັ້ນ
໓. ເປັນພຣະອະນາຄາມີຜູ້ອຸປະຫັດຈະປະຣິນິບພາຍີ ຍ້ອນມີອິນຊີອ່ອນກວ່າພຣະອະນາຄາມີຜູ້ອັນຕະຣາປະຣິນິບພາຍີນັ້ນ
໔. ເປັນພຣະອະນາຄາມີຜູ້ອະສັງຂາຣະປະຣິນິບພາຍີຍ້ອນມີອິນຊີອ່ອນກວ່າພຣະອະນາຄາມີຜູ້ອຸປະຫັດຈະປະຣິນິບພາຍີນັ້ນ
໕. ເປັນພຣະອະນາຄາມີຜູ້ສະສັງຂາຣະປະຣິນິບພາຍີຍ້ອນມີອິນຊີອ່ອນກວ່າພຣະອະນາຄາມີຜູ້ອະສັງຂາຣະປະຣິນິບພາຍີນັ້ນ
໖. ເປັນພຣະອະນາຄາມີຜູ້ອຸດທັງໂສໂຕອະກະນິດຖະຄາມີຍ້ອນມີອິນຊີອ່ອນກວ່າພຣະອະນາຄາມີຜູ້ສະສັງຂາຣະປະຣິນິບພາຍີນັ້ນ
໗. ເປັນພຣະສະກະທາຄາມີຍ້ອນມີອິນຊີອ່ອນກວ່າພຣະອະນາຄາມີຜູ້ອຸດທັງໂສໂຕອະກະນິຕຖະຄາມີນັ້ນ
໘. ເປັນພຣະເອກະພີຊີໂສດາບັນ ຍ້ອນມີອິນຊີອ່ອນກວ່າພຣະສະກະທາຄາມີນັ້ນ
໙. ເປັນພຣະໂກລັງໂກລະໂສດາບັນ ຍ້ອນມີອິນຊີອ່ອນກວ່າພຣະເອກະພີຊີໂສດາບັນນັ້ນ
໑໐. ເປັນພຣະສັດຕັກຂັດຕຸປະຣະມະໂສດາບັນ໌ຍ້ອນມີອິນຊີອ່ອນກວ່າພຣະໂກລັງໂກລະໂສດາບັນນັ້ນ
໑໑. ເປັນພຣະໂສດາບັນຜູ້ທຳມານຸສາຣີຍ້ອນມີອິນຊີອ່ອນກວ່າພຣະສັດຕັກຂັດຕຸປະຣະມະໂສດາບັນນັ້ນ

໑໔. ເປັນພຣະໂສດາບັນຜູ້ສັດທານຸສາຣີຍ້ອນມີອິນຊີອ່ອນກວ່າພຣະໂສດາບັນຜູ້ທຳມານຸສາຣີນັ້ນ

**ເອກະພີຊີສູດທີ ໔ ຈົບ**

# ໕. ສຸດທະສູດ

## ວ່າດ້ວຍອິນຊີລ້ວນ

[໔໙໕] ພິກຂຸທັງຫຼາຍ ອິນຊີ ໖ ປະການນີ້

ອິນຊີ ໖ ປະການ ອັນໃດແດ່ ຄື

໑. ຈັກຂຸນຊີ (ອິນຊີຄືຈັກຂຸປະສາດ)
໒. ໂສຕິນຊີ (ອິນຊີຄືໂສຕະປະສາດ)
໓. ຄານິນຊີ (ອິນຊີຄືຄານະປະສາດ)
໔. ຊິວຫິນຊີ (ອິນຊີຄືຊິວຫາປະສາດ)
໕. ກາຍິນຊີ (ອິນຊີຄືກາຍປະສາດ)
໖. ມະນິນຊີ (ອິນຊີຄືໃຈ)

ອິນຊີ ໖ ປະການນີ້

**ສຸດທະສູດທີ ໕ ຈົບ**

# ໖. ໂສຕາປັນນະສູດ

## ວ່າດ້ວຍພຣະໂສດາບັນ

[໔໙໖] ພິກຂຸທັງຫຼາຍ ອິນຊີ ໖ ປະການນີ້

ອິນຊີ ໖ ປະການ ອັນໃດແດ່ ຄື

໑. ຈັກຂຸນຊີ ໒. ໂສຕິນຊີ
໓. ຄານິນຊີ ໔. ຊິວຫິນຊີ
໕. ກາຍິນຊີ ໖. ມະນິນຊີ

ພິກຂຸທັງຫຼາຍ ເມື່ອໃດ ອະຣິຍະສາວົກຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງ ສະບັດອອກຈາກອິນຊີ ໖ ປະການນີ້ຕາມຄວາມເປັນຈິງ ເມື່ອນັ້ນ ອະຣິຍະສາວົກນີ້ເຮົາກ່າວ ວ່າ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

**ໂສຕາປັນນະສູດທີ ໖ ຈົບ**

## ໗. ອະຣະຫັນຕະສູດ

### ວ່າດ້ວຍພຣະອະຣະຫັນ

[໔໙໗] ພິກຂຸທັງຫຼາຍ ອິນຊີ ໖ ປະການນີ້

ອິນຊີ ໖ ປະການ ອັນໃດແດ່ ຄື

໑. ຈັກຂຸນຊີ　　໔. ໂສຕິນຊີ
໒. ຄານິນຊີ　　໕. ຊິວຫິນຊີ
໓. ກາຍິນຊີ　　໖. ມະນິນຊີ

ພິກຂຸທັງຫຼາຍ ເມື່ອໃດ ພິກຂຸຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງກຳຈັດອອກຈາກອິນຊີ ໖ ປະການນີ້ຕາມຄວາມເປັນຈິງ ເປັນຜູ້ລຸດພົ້ນຍ້ອນບໍ່ຖືໝັ້ນ ເມື່ອນັ້ນ ພິກຂຸນີ້ເຮົາກ່າວວ່າ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາຣະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນຍ້ອນຮູ້ໂດຍຖືກຕ້ອງ

**ອະຣະຫັນຕະສູດທີ ໗ ຈົບ**

## ໘. ສຳມັດທະສູດ

### ວ່າດ້ວຍເຫດທີ່ເຮັດໃຫ້ເປັນພຣະສຳມາສຳພຸດທະເຈົ້າ

[໔໙໘] ພິກຂຸທັງຫຼາຍ ອິນຊີ ໖ ປະການນີ້

ອິນຊີ ໖ ປະການ ອັນໃດແດ່ ຄື

໑. ຈັກຂຸນຊີ　　໔. ໂສຕິນຊີ
໒. ຄານິນຊີ　　໕. ຊິວຫິນຊີ

໕. ກາຍິນຊີ ໖. ມະນິນຊີ

ພິກຂຸທັງຫຼາຍ ຕາບໃດ ເຮົາຍັງບໍ່ຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກອິນຊີ ໖ ປະການນີ້ຕາມຄວາມເປັນຈິງ ຕາບນັ້ນ ເຮົາຍັງບໍ່ຢັ້ງຢືນວ່າ ເປັນຜູ້ຕັດສະຮູ້ສຳມາສຳໂພທິຍານອັນປະເສີດໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດ ພ້ອມທັງສະມະນະພາມ ເທວະດາແລະມະນຸດ

ແຕ່ເມື່ອໃດ ເຮົາຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກອິນຊີ ໖ ປະການນີ້ຕາມຄວາມເປັນຈິງ ເມື່ອນັ້ນ ເຮົາຈຶ່ງຢັ້ງຢືນວ່າ ເປັນຜູ້ຕັດສະຮູ້

ສຳມາສຳໂພທິຍານອັນປະເສີດໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດ ພ້ອມທັງສະມະນະພາມ ເທວະດາແລະມະນຸດ

ອັນໜຶ່ງ ຍານທັດສະນະເກີດຂຶ້ນແລ້ວແກ່ເຮົາວ່າ ວິມຸດຕິຂອງເຮົາບໍ່ກຳເຣີບ ຊາດນີ້ເປັນຊາດສຸດທ້າຍ ບັດນີ້ພົບໃໝ່ບໍ່ມີອີກ

**ສຳມັດທະສູດທີ ໗ ຈົບ**

# ໘. ປະຖົມສະມະນະພາມມະນະສູດ

## ວ່າດ້ວຍສະມະນະພາມ ສູດທີ ໑

[໔໘໘] ພິກຂຸທັງຫຼາຍ ອິນຊີ ໖ ປະການນີ້

ອິນຊີ ໖ ປະການ ອັນໃດແດ່ ຄື

໑. ຈັກຂຸນຊີ ໒. ໂສຕິນຊີ
໓. ຄານິນຊີ ໔. ຊິວຫິນຊີ
໕. ກາຍິນຊີ ໖. ມະນິນຊີ

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ບໍ່ຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະ ເຄື່ອງສະບັດອອກຈາກອິນຊີ ໖ ປະການນີ້ຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່ານັ້ນເຮົາບໍ່ຈັດວ່າເປັນສະມະນະໃນໝູ່ສະມະນະ ບໍຈັດວ່າເປັນພາມໃນໝູ່ພາມ ທັງທ່ານເຫຼົ່ານັ້ນກໍບໍ່ເຮັດໃຫ້ແຈ້ງປະໂຫຍດແຫ່ງຄວາມເປັນສະມະນະ ຫຼື ປະໂຫຍດແຫ່ງຄວາມເປັນພາມດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ສ່ວນສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກອິນຊີ ໖ ປະການນີ້ຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່ານັ້ນເຮົາຈັດວ່າເປັນສະມະນະໃນໝູ່ສະມະນະແລະຈັດວ່າເປັນພາມໃນໝູ່ພາມ ທັງທ່ານເຫຼົ່ານັ້ນກໍເຮັດໃຫ້ແຈ້ງປະໂຫຍດແຫ່ງຄວາມເປັນສະມະນະ ແລະປະໂຫຍດແຫ່ງຄວາມເປັນພາມດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

**ປະຖົມສະມະນະພາມມະນະສູດທີ ໗ ຈົບ**

# ໑໐. ທຸຕິຍະສະມະນະພາມມະນະສູດ

## ວ່າດ້ວຍສະມະນະພາມ ສູດທີ ໘

[໕໐໐] ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງບໍ່ຮູ້ແຈ້ງ

ຈັກຂຸນຊິຄວາມເກີດແຫ່ງຈັກຂຸນຊີ ຄວາມດັບແຫ່ງຈັກຂຸນຊີ ແລະປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຈັກຂຸນຊີ ບໍ່ຮູ້ແຈ້ງໂສຕິນຊີ ฯລฯ ຄານິນຊີ ฯລฯ ຊິວຫິນຊີ ฯລฯ ກາຍິນຊີ ฯລฯ ບໍ່ຮູ້ແຈ້ງມະນິນຊີ ຄວາມເກີດແຫ່ງມະນິນຊີ ຄວາມດັບແຫ່ງມະນິນຊີ ແລະປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງມະນິນຊີ ສະມະນະຫຼືພາມເຫຼົ່ານັ້ນ ເຮົາບໍ່ຈັດວ່າເປັນສະມະນະໃນໝູ່ສະມະນະບໍຈັດວ່າເປັນພາມໃນໝູ່ພາມ ທັງທ່ານເຫຼົ່ານັ້ນກໍບໍ່ເຮັດໃຫ້ແຈ້ງປະໂຫຍດແຫ່ງຄວາມເປັນສະມະນະຫຼືປະໂຫຍດແຫ່ງຄວາມເປັນພາມ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ສ່ວນສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງຈັກຂຸນຊີ ຄວາມເກີດແຫ່ງຈັກຂຸນຊີ ຄວາມດັບແຫ່ງຈັກຂຸນຊີ ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງຈັກຂຸນຊີ ຮູ້ແຈ້ງໂສຕິນຊີ ฯລฯ ຄານິນຊີ ฯລฯ ຊິວຫິນຊີ ฯລฯ ກາຍິນຊີ ฯລฯ ຮູ້ແຈ້ງມະນິນຊີ ຄວາມເກີດແຫ່ງມະນິນຊີ ຄວາມດັບແຫ່ງມະນິນຊີ ປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງມະນິນຊີ ສະມະນະຫຼືພາມເຫຼົ່ານັ້ນເຮົາຈັດວ່າເປັນສະມະນະໃນໝູ່ສະມະນະ ແລະຈັດວ່າເປັນພາມໃນໝູ່ພາມ ທັງທ່ານເຫຼົ່ານັ້ນກໍເຮັດໃຫ້ແຈ້ງປະໂຫຍດແຫ່ງຄວາມເປັນສະມະນະ ແລະປະໂຫຍດແຫ່ງຄວາມເປັນພາມດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

**ທຸຕິຍະສະມະນະພາມມະນະສູດທີ ໑໐ ຈົບ**

**ສະລົບທະຣິຍະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໔. ສຸຂິນທະຣິຍະວັກ

## ໝວດວ່າດ້ວຍສຸຂິນຊີ

## ໑. ສຸດທິກະສູດ

### ວ່າດ້ວຍອິນຊີລ້ວນ

[໕໐໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສຸຂິນຊີ (ອິນຊີຄືສຸກຂະເວທະນາ)
໔. ທຸກຂິນຊີ (ອິນຊີຄືທຸກຂະເວທະນາ)
໓. ໂສມະນັດສິນຊີ (ອິນຊີຄືໂສມະນັດສເວທະນາ)
໔. ໂທມະນັດສິນຊີ (ອິນຊີຄືໂທມະນັສສະເວທະນາ)
໕. ອຸເປກຂິນຊີ (ອິນຊີຄືອຸເປກຂາ)

ອິນຊີ ໕ ປະການນີ້ແລ

**ສຸດທິກະສູດທີ ໑ ຈົບ**

## ໔. ໂສຕາປັນນະສູດ

### ວ່າດ້ວຍພຣະໂສດາບັນ

[໕໐໔] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສຸຂິນຊີ ໔. ທຸກຂິນຊີ
໓. ໂສມະນັດສິນຊີ ໔. ໂທມະນັດສິນຊີ
໕. ອຸເປກຂິນຊີ

ພິກຂຸທັງຫຼາຍ ເມື່ອໃດ ອະຣິຍະສາວົກຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງ ສະບັດອອກຈາກອິນຊີ ໕ ປະການນີ້ຕາມຄວາມເປັນຈິງ ເມື່ອນັ້ນ ອະຣິຍະສາວົກນີ້ເຮົາກ່າວວ່າ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

**ໂສຕາປັນນະສູດທີ ໔ ຈົບ**

# ໓. ອະຣະຫັນຕະສູດ

## ວ່າດ້ວຍພຣະອະຣະຫັນ

[໕໐໓] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສຸຂິນຊີ ໔. ທຸກຂິນຊີ
໓. ໂສມະນັດສິນຊີ ໔. ໂທມະນັດສິນຊີ
໕. ອຸເປກຂິນຊີ

ພິກຂຸທັງຫຼາຍ ເມື່ອໃດ ພິກຂຸຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກອິນຊີ ໕ ປະການນີ້ຕາມຄວາມເປັນຈິງ ເປັນຜູ້ລຸດພົ້ນຍ້ອນບໍ່ຖືໝັ້ນ ເມື່ອນັ້ນ ພິກຂຸນີ້ເຮົາກ່າວວ່າ ເປັນອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາຣະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດ ແລ້ວລຸດພົ້ນຍ້ອນຮູ້ໂດຍຖືກຕ້ອງ

**ອະຣະຫັນຕະສູດທີ ໓ ຈົບ**

# ໔. ປະຖົມສະມະນະພາມມະນະສູດ

## ວ່າດ້ວຍສະມະນະພາມ ສູດທີ ໑

[໕໐໔] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສຸຂິນຊີ ໒. ທຸກຂິນຊີ
໓. ໂສມະນັດສິນຊີ ໔. ໂທມະນັດສິນຊີ
໕. ອຸເປກຂິນຊີ

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງບໍ່ຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກອິນຊີ ໕ ປະການນີ້ຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່ານັ້ນເຮົາບໍ່ຈັດວ່າເປັນສະມະນະໃນໝູ່ສະມະນະ ບໍຈັດວ່າເປັນພາມໃນໝູ່ພາມ ທັງທ່ານເຫຼົ່ານັ້ນກໍບໍ່ເຮັດໃຫ້ແຈ້ງປະໂຫຍດແຫ່ງຄວາມເປັນສະມະນະ ຫຼື ປະໂຫຍດແຫ່ງຄວາມເປັນພາມດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ສ່ວນສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງຄວາມເກີດ ຄວາມດັບ ຄຸນ ໂທດ ແລະເຄື່ອງສະບັດອອກຈາກອິນຊີ ໕ ປະການນີ້ຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່ານັ້ນ ເຮົາຈັດວ່າເປັນສະມະນະໃນໝູ່ສະມະນະ ຫຼື ຈັດວ່າເປັນພາມໃນໝູ່ ພາມ ທັງທ່ານເຫຼົ່ານັ້ນກໍເຮັດໃຫ້ແຈ້ງປະໂຫຍດແຫ່ງຄວາມເປັນສະມະນະ ແລະ ປະໂຫຍດແຫ່ງຄວາມເປັນພາມດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

**ປະຖົມສະມະນະພາມມະນະສູດທີ ໔ ຈົບ**

# ໕. ທຸຕິຍະສະມະນະພາມມະນະສູດ

## ວ່າດ້ວຍສະມະນະພາມ ສູດທີ ໕

[໕໐໕] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສຸຂິນຊີ ໒. ທຸກຂິນຊີ
໓. ໂສມະນັດສິນຊີ ໔. ໂທມະນັດສິນຊີ
໕. ອຸເປກຂິນຊີ

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງບໍ່ຮູ້ແຈ້ງສຸຂິນຊີ ຄວາມເກີດແຫ່ງສຸຂິນຊີ ຄວາມດັບແຫ່ງສຸຂິນຊີ ແລະປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສຸຂິນຊີ ບໍ່ຮູ້ແຈ້ງທຸກຂິນຊີ ຯລຯ ບໍ່ຮູ້ແຈ້ງໂສມະນັດສິນຊີ ຯລຯ ບໍ່ຮູ້ແຈ້ງໂທມະນັດສິນຊີ ຯລຯ ບໍ່ຮູ້ແຈ້ງອຸເປກຂິນຊີ ຄວາມເກີດ

ແຫ່ງອຸເປກຂິນຊີຄວາມດັບແຫ່ງອຸເປກຂິນຊີ ແລະປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງອຸເປກຂິນຊີ ສະມະນະ ຫຼືພາມເຫຼົ່ານັ້ນເຮົາບໍ່ຈັດວ່າເປັນສະມະນະໃນໝູ່ສະມະນະ ບໍຈັດວ່າເປັນພາມໃນໝູ່ພາມ ທັງທ່ານເຫຼົ່ານັ້ນກໍບໍ່ເຮັດໃຫ້ແຈ້ງປະໂຫຍດແຫ່ງຄວາມເປັນສະມະນະ ຫຼື ປະໂຫຍດແຫ່ງຄວາມເປັນພາມດ້ວຍ ປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ສ່ວນສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງສຸຂິນຊີ ຮູ້ແຈ້ງຄວາມເກີດແຫ່ງສຸຂິນຊີ ຄວາມດັບແຫ່ງສຸຂິນຊີ ແລະປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງສຸຂິນຊີ ຮູ້ແຈ້ງທຸກຂິນຊີ ฯລฯ ຮູ້ແຈ້ງໂສມະນັດສິນຊີ ฯລฯ ຮູ້ແຈ້ງໂທມະນັດສິນຊີ ฯລฯ ຮູ້ແຈ້ງອຸເປກຂິນຊີ ຄວາມເກີດແຫ່ງອຸເປກຂິນຊີ ຄວາມດັບແຫ່ງອຸເປກຂິນຊີ ແລະປະຕິປະທາທີ່ໃຫ້ເຖິງຄວາມດັບແຫ່ງອຸເປກຂິນຊີ ສະມະນະຫຼືພາມເຫຼົ່ານັ້ນເຮົາຈັດວ່າເປັນສະມະນະໃນໝູ່ສະມະນະ ຫຼື ຈັດວ່າເປັນພາມໃນໝູ່ພາມທັງທ່ານເຫຼົ່ານັ້ນ ກໍເຮັດໃຫ້ແຈ້ງປະໂຫຍດແຫ່ງຄວາມເປັນສະມະນະແລະປະໂຫຍດແຫ່ງຄວາມເປັນພາມດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

**ທຸຕິຍະສະມະນະພາມມະນະສູດທີ່ ໕ ຈົບ**

# ໖. ປະຖົມວິພັງຄະສູດ

## ວ່າດ້ວຍການຈຳແນກອິນຊີ ສູດທີ່ ໑

[໕໐໖] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສຸຂິນຊີ
໒. ທຸກຂິນຊີ
໓. ໂສມະນັດສິນຊີ
໔. ໂທມະນັດສິນຊີ
໕. ອຸເປກຂິນຊີ

ສຸຂິນຊີ ເປັນແນວໃດ?

ຄື ຄວາມສຸກທາງກາຍ ຄວາມສຸກສະບາຍທາງກາຍ ຄວາມສະເຫວີຍອາລົມທີ່ເປັນສຸກສຸກສະບາຍ ອັນເກີດຈາກກາຍສຳຜັດ

ນີ້ຮຽກວ່າ ສຸຂິນຊີ

ທຸກຂິນຊີ ເປັນແນວໃດ?

ຄື ຄວາມທຸກທາງກາຍ ຄວາມບໍ່ສຸກສະບາຍທາງກາຍ ຄວາມສະເຫວີຍອາລົມທີ່ເປັນທຸກບໍ່ສຸກສະບາຍ ອັນເກີດຈາກກາຍສຳຜັດ

ນີ້ຮຽກວ່າ ທຸກຂິນຊີ

ໂສມະນັດສິນຊີ ເປັນແນວໃດ?

ຄື ຄວາມສຸກທາງໃຈ ຄວາມສຸກສະບາຍທາງໃຈ ຄວາມສະເຫວີຍອາລົມທີ່ເປັນສຸກ ສຸກສະບາຍ ອັນເກີດຈາກມະໂນສຳຜັດ

ນີ້ຮຽກວ່າ ໂສມະນັດສິນຊີ

ໂທມະນັດສິນຊີ ເປັນແນວໃດ?

ຄື ຄວາມທຸກທາງໃຈ ຄວາມບໍ່ສຸກສະບາຍທາງໃຈ ຄວາມສະເຫວີຍອາລົມທີ່ເປັນທຸກບໍ່ສຸກສະບາຍ ອັນເກີດຈາກມະໂນສຳຜັດ

ນີ້ຮຽກວ່າ ໂທມະນັດສິນຊີ

ອຸເປກຂິນຊີ ເປັນແນວໃດ?

ຄື ຄວາມສະເຫວີຍອາລົມທາງກາຍຫຼືທາງໃຈທີ່ສຸກສະບາຍກໍບໍ່ແມ່ນ ບໍ່ສຸກສະບາຍກໍບໍ່ແມ່ນ

ນີ້ຮຽກວ່າ ອຸເປກຂິນຊີ

ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້ແລ

**ປະຖົມວິພັງຄະສູດທີ ໗ ຈົບ**

# ໗. ທຸຕິຍະວິພັງຄະສູດ

## ວ່າດ້ວຍການຈຳແນກອິນຊີ ສູດທີ ໘

[໕໐໗] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສຸຂິນຊີ
໒. ທຸກຂິນຊີ
໓. ໂສມະນັດສິນຊີ
໔. ໂທມະນັດສິນຊີ
໕. ອຸເປກຂິນຊີ

ສຸຂິນຊີ ເປັນແນວໃດ?

ຄື ຄວາມສຸກທາງກາຍ ຄວາມສຸກສະບາຍທາງກາຍ ຄວາມສະເຫວີຍອາລົມທີ່ເປັນສຸກ ສຸກສະບາຍ ອັນເກີດຈາກກາຍສຳຜັດ

ນີ້ຮຽກວ່າ ສຸຂິນຊີ

ທຸກຂິນຊີ ເປັນແນວໃດ?

ຄື ຄວາມທຸກທາງກາຍ ຄວາມບໍ່ສຸກສະບາຍທາງກາຍ ຄວາມສະເຫວີຍອາລົມທີ່ເປັນທຸກ ບໍ່ສຸກສະບາຍ ອັນເກີດຈາກກາຍສຳຜັດ

ນີ້ຮຽກວ່າ ທຸກຂິນຊີ

ໂສມະນັດສິນຊີ ເປັນແນວໃດ?

ຄື ຄວາມສຸກທາງໃຈ ຄວາມສຸກສະບາຍທາງໃຈ ຄວາມສະເຫວີຍອາລົມທີ່ເປັນສຸກ ສຸກສະບາຍ ອັນເກີດຈາກມະໂນສຳຜັດ

ນີ້ຮຽກວ່າ ໂສມະນັດສິນຊີ

ໂທມະນັດສິນຊີ ເປັນແນວໃດ?

ຄື ຄວາມທຸກທາງໃຈ ຄວາມບໍ່ສຸກສະບາຍທາງໃຈ ຄວາມສະເຫວີຍອາລົມທີ່ເປັນທຸກບໍ່ສຸກສະບາຍ ອັນເກີດຈາກມະໂນສຳຜັດ

ນີ້ຮຽກວ່າ ໂທມະນັດສິນຊີ

ອຸເປກຂິນຊີ ເປັນແນວໃດ?

ຄື ຄວາມສະເຫວີຍອາລົມທາງກາຍຫຼືທາງໃຈທີ່ສຸກສະບາຍກໍບໍ່ແມ່ນ ບໍ່ສຸກສະບາຍກໍບໍ່ແມ່ນ

ນີ້ຮຽກວ່າ ອຸເປກຂິນຊີ

ໃນອິນຊີ ໕ ປະການນັ້ນ ສຸຂິນຊີແລະໂສມະນັດສິນຊີ ເພິ່ງເຫັນວ່າ ເປັນສຸກຂະເວທະນາ ທຸກຂິນຊີ ແລະໂທມະນັດສິນຊີ ເພິ່ງເຫັນວ່າເປັນທຸກຂະເວທະນາ ອຸເປກຂິນຊີ ເພິ່ງເຫັນວ່າເປັນອະທຸກຂະມະສຸກຂະເວທະນາ

ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

**ທຸຕິຍະວິພັງຄະສູດທີ ໗ ຈົບ**

## ໘. ຕະຕິຍະວິພັງຄະສູດ

### ວ່າດ້ວຍການຈຳແນກອິນຊີ ສູດທີ ໘

[໕໐໘] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສຸຂິນຊີ ໒. ທຸກຂິນຊີ
໓. ໂສມະນັດສິນຊີ ໔. ໂທມະນັດສິນຊີ
໕. ອຸເປກຂິນຊີ

ສຸຂິນຊີ ເປັນແນວໃດ?

ຄື ຄວາມສຸກທາງກາຍ ຄວາມສຸກສະບາຍທາງກາຍ ຄວາມສະເຫວີຍອາລົມທີ່ເປັນສຸກ ສຸກສະບາຍ ອັນເກີດຈາກກາຍສຳຜັດ

ນີ້ຮຽກວ່າ ສຸຂິນຊີ

ທຸກຂິນຊີ ເປັນແນວໃດ?

ຄື ຄວາມທຸກທາງກາຍ ຄວາມບໍ່ສຸກສະບາຍທາງກາຍ ຄວາມສະເຫວີຍອາລົມທີ່ເປັນທຸກ ບໍ່ສຸກສະບາຍ ອັນເກີດຈາກກາຍສຳຜັດ

ນີ້ຮຽກວ່າ ທຸກຂິນຊີ

ໂສມະນັດສິນຊີ ເປັນແນວໃດ?

ຄື ຄວາມສຸກທາງໃຈ ຄວາມສຸກສະບາຍທາງໃຈ ຄວາມສະເຫວີຍອາລົມທີ່ເປັນສຸກ ສຸກສະບາຍ ອັນເກີດຈາກມະໂນສຳຜັດ

ນີ້ຮຽກວ່າ ໂສມະນັດສິນຊີ

ໂທມະນັດສິນຊີ ເປັນແນວໃດ?

ຄື ຄວາມທຸກທາງໃຈ ຄວາມບໍ່ສຸກສະບາຍທາງໃຈ ຄວາມສະເຫວີຍອາລົມທີ່ເປັນທຸກ ບໍ່ສຸກສະບາຍ ອັນເກີດຈາກມະໂນສຳຜັດ

ນີ້ຮຽກວ່າ ໂທມະນັດສິນຊີ

ອຸເປກຂິນຊີ ເປັນແນວໃດ?

ຄື ຄວາມສະເຫວີຍອາລົມທາງກາຍຫຼືທາງໃຈທີ່ສຸກສະບາຍກໍບໍ່ແມ່ນ ບໍ່ສຸກສະບາຍກໍບໍ່ແມ່ນ

ນີ້ຮຽກວ່າ ອຸເປກຂິນຊີ

ໃນອິນຊີ ໕ ປະການນັ້ນ ສຸຂິນຊີ ແລະໂສມະນັດສິນຊີ ເພິ່ງເຫັນວ່າ ເປັນສຸກຂະເວທະນາທຸກຂິນຊີ ແລະໂທມະນັດສິນຊີ ເພິ່ງເຫັນວ່າ ເປັນທຸກຂະເວທະນາອຸເປກຂິນຊີ ເພິ່ງເຫັນວ່າເປັນອະທຸກຂະມະສຸກຂະເວທະນາ

ອິນຊີ ໕ ປະການນີ້ ເປັນ ໕ ປະການແລ້ວຫຍໍ້ເປັນ ໓ ປະການ ເປັນ ໓ ປະການ ແລ້ວຂະຫຍາຍອອກເປັນ ໕ ປະການໂດຍປະຣິຍາຍ ດ້ວຍປະການຢ່າງນີ້

**ຕະຕິຍະວິພັງຄະສູດທີ ໘ ຈົບ**

# ໗. ກັດໂຖປະມະສູດ

## ວ່າດ້ວຍອຸປະມາດ້ວຍໄມ້ສຽດສີກັນ

[໕໐໗] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສຸຂິນຊີ
໒. ໂສມະນັດສິນຊີ
໓. ອຸເປກຂິນຊີ
໔. ທຸກຂິນຊີ
໔. ໂທມະນັດສິນຊີ

ພິກຂຸທັງຫຼາຍ ສຸຂິນຊີເກີດຂຶ້ນຍ້ອນອາໄສຜັດສະອັນເປັນບ່ອນຕັ້ງແຫ່ງສຸກຂະເວທະນາ ພິກຂຸນັ້ນມີສຸກກໍຮູ້ແຈ້ງວ່າ ເຮົາມີສຸກ ຍ້ອນຜັດສະອັນເປັນບ່ອນຕັ້ງແຫ່ງສຸກຂະເວທະນານັ້ນດັບໄປ ທ່ານກໍຮູ້ແຈ້ງວ່າ ສຸຂິນຊີທີ່ເກີດຂຶ້ນຍ້ອນອາໄສຜັດສະອັນເປັນບ່ອນຕັ້ງແຫ່ງສຸກຂະເວທະນາທີ່ສະເຫວີຍຢູ່ ອັນເກີດຈາກຜັດສະນັ້ນດັບໄປ ຄື ສະງົບໄປ

ທຸກຂິນຊີເກີດຂຶ້ນຍ້ອນອາໄສຜັດສະອັນເປັນບ່ອນຕັ້ງແຫ່ງທຸກຂະເວທະນາ ພິກຂຸນັ້ນມີທຸກກໍຮູ້ແຈ້ງວ່າ ເຮົາມີທຸກ ຍ້ອນຜັດສະອັນເປັນບ່ອນຕັ້ງແຫ່ງທຸກຂະເວທະນານັ້ນດັບໄປ ທ່ານກໍຮູ້ແຈ້ງວ່າ ທຸກຂິນຊີທີ່ເກີດຂຶ້ນຍ້ອນອາໄສຜັດສະອັນເປັນບ່ອນຕັ້ງແຫ່ງທຸກຂະເວທະນາທີ່ສະເຫວີຍຢູ່ ອັນເກີດຈາກຜັດສະນັ້ນດັບໄປ ຄືສະງົບໄປ

ໂສມະນັດສິນຊີເກີດຂຶ້ນຍ້ອນອາໄສຜັດສະອັນເປັນບ່ອນຕັ້ງແຫ່ງໂສມະນັດສເວທະນາ ພິກຂຸນັ້ນ ສະບາຍໃຈກໍຮູ້ແຈ້ງວ່າ ເຮົາສະບາຍໃຈ ຍ້ອນຜັດສະອັນເປັນບ່ອນຕັ້ງແຫ່ງໂສມະນັດສເວທະນານັ້ນດັບໄປ ທ່ານກໍຮູ້ແຈ້ງວ່າ ໂສມະນັດສິນຊີທີ່ເກີດຂຶ້ນຍ້ອນອາໄສຜັດສະອັນເປັນບ່ອນຕັ້ງແຫ່ງໂສມະນັດສເວທະນາທີ່ສະເຫວີຍຢູ່ອັນເກີດຈາກຜັດສະນັ້ນດັບໄປ ຄື ສະງົບໄປ

ໂທມະນັດສິນຊີເກີດຂຶ້ນຍ້ອນອາໄສຜັດສະອັນເປັນບ່ອນຕັ້ງແຫ່ງໂທມະນັສສະເວທະນາ ພິກຂຸ ນັ້ນບໍ່ສະບາຍໃຈກໍຮູ້ແຈ້ງວ່າ ເຮົາບໍ່ສະບາຍໃຈ ຍ້ອນຜັດສະອັນເປັນບ່ອນຕັ້ງແຫ່ງໂທມະນັສສະເວທະນານັ້ນດັບໄປ ທ່ານກໍຮູ້ແຈ້ງວ່າ ໂທມະນັດສິນຊີທີ່ເກີດຂຶ້ນຍ້ອນອາໄສຜັດສະອັນ

ເປັນບ່ອນຕັ້ງແຫ່ງໂທມະນັສສະເວທະນາທີ່ສະເຫວີຍຢູ່ອັນເກີດຈາກຜັດສະນັ້ນດັບໄປຄືສະງົບໄປ

ອຸເປກຂິນຊີເກີດຂຶ້ນຍ້ອນອາໄສຜັດສະອັນເປັນບ່ອນຕັ້ງແຫ່ງອຸເປກຂາເວທະນາ ພິກຂຸນັ້ນວາງເສີຍກໍຮູ້ແຈ້ງວ່າ ເຮົາວາງເສີຍ ຍ້ອນຜັດສະອັນເປັນບ່ອນຕັ້ງແຫ່ງອຸເປກຂາເວທະນານັ້ນດັບໄປ ທ່ານກໍຮູ້ແຈ້ງວ່າ ອຸເປກຂິນຊີທີ່ເກີດຂຶ້ນຍ້ອນອາໄສຜັດສະອັນເປັນບ່ອນຕັ້ງແຫ່ງອຸເປກຂາເວທະນາ ທີ່ສະເຫວີຍຢູ່ອັນເກີດຈາກຜັດສະນັ້ນດັບໄປ ຄື ສະງົບໄປ

ພິກຂຸທັງຫຼາຍ ຍ້ອນໄມ້ ໒ ອັນສຽດສີກັນຈຶ່ງເກີດຄວາມຮ້ອນ ລຸກເປັນໄຟຂຶ້ນ ຍ້ອນແຍກໄມ້ ໒ ອັນນັ້ນ ອອກຈາກກັນ ຄວາມຮ້ອນທີ່ເກີດຈາກການສຽດສີນັ້ນກໍດັບໄປ ລະງັບໄປ ແມ່ນສັນໃດ ສຸຂິນຊີກໍຄືກັນສັນນັ້ນ ເກີດຂຶ້ນຍ້ອນອາໄສຜັດສະອັນເປັນບ່ອນຕັ້ງແຫ່ງສຸກຂະເວທະນາ ພິກຂຸນັ້ນ ມີສຸກກໍຮູ້ແຈ້ງວ່າ ເຮົາມີສຸກ ຍ້ອນຜັດສະອັນເປັນບ່ອນຕັ້ງແຫ່ງສຸກຂະເວທະນາ ນັ້ນດັບໄປ ທ່ານກໍຮູ້ແຈ້ງວ່າ ສຸຂິນຊີທີ່ເກີດຂຶ້ນ ຍ້ອນອາໄສຜັດສະອັນເປັນບ່ອນຕັ້ງແຫ່ງສຸກຂະເວທະນາທີ່ສະເຫວີຍຢູ່ອັນເກີດຈາກຜັດສະນັ້ນດັບໄປ ລະງັບໄປ ທຸກຂິນຊີເກີດຂຶ້ນຍ້ອນອາໄສຜັດສະອັນເປັນບ່ອນຕັ້ງແຫ່ງທຸກຂະເວທະນາ ຯລຯ ໂສມະນັດສິນຊີເກີດຂຶ້ນຍ້ອນອາໄສຜັດສະອັນເປັນບ່ອນຕັ້ງແຫ່ງໂສມະນັດສເວທະນາ ຯລຯ ໂທມະນັດສິນຊີເກີດຂຶ້ນຍ້ອນອາໄສຜັດສະອັນເປັນບ່ອນຕັ້ງແຫ່ງໂທມະນັສສະເວທະນາ ຯລຯ ອຸເປກຂິນຊີເກີດຂຶ້ນຍ້ອນອາໄສຜັດສະອັນເປັນບ່ອນຕັ້ງແຫ່ງອຸເປກຂາເວທະນາ ພິກຂຸນັ້ນວາງເສີຍກໍຮູ້ແຈ້ງວ່າ ເຮົາວາງເສີຍຍ້ອນຜັດສະອັນເປັນບ່ອນຕັ້ງແຫ່ງອຸເປກຂາເວທະນານັ້ນດັບໄປ ທ່ານກໍຮູ້ແຈ້ງວ່າ ອຸເປກຂິນຊີທີ່ເກີດຂຶ້ນຍ້ອນອາໄສຜັດສະອັນເປັນບ່ອນຕັ້ງແຫ່ງອຸເປກຂາເວທະນາ ທີ່ສະເຫວີຍຢູ່ອັນເກີດຈາກຜັດສະນັ້ນດັບໄປ ລະງັບໄປ

**ກັດໂຖປະມະສູດທີ ໙ ຈົບ**

## ໑໐. ອຸປະປະຕິປາຕິກະສູດ

### ວ່າດ້ວຍອິນຊີທີ່ເກີດສັບລຳດັບກັນ

[໕໑໐] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສຸຂິນຊີ
໒. ທຸກຂິນຊີ
໓. ໂສມະນັດສິນຊີ
໔. ໂທມະນັດສິນຊີ
໕. ອຸເປກຂິນຊີ

ເມື່ອພິກຂຸໃນທຳວິໄນນີ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ທຸກຂິນຊີຍ່ອມເກີດຂຶ້ນ ທ່ານຮູ້ແຈ້ງວ່າ ທຸກຂິນຊີນີ້ເກີດຂຶ້ນແກ່ເຮົາ ແລະທຸກຂິນຊີນັ້ນ ມີເຄື່ອງໝາຍ ມີເຫດ ມີສິ່ງປຸງແຕ່ງ ມີປັດໄຈ ທັງເປັນໄປບໍ່ໄດ້ເລີຍທີ່ທຸກຂິນຊີນັ້ນເຊິ່ງບໍ່ມີເຄື່ອງໝາຍ ບໍ່ມີເຫດ ບໍ່ມີສິ່ງປຸງແຕ່ງ ບໍ່ມີປັດໄຈ ຈັກເກີດຂຶ້ນ ທ່ານຮູ້ແຈ້ງທຸກຂິນຊີ ຮູ້ແຈ້ງຄວາມເກີດແຫ່ງທຸກຂິນຊີ ຮູ້ແຈ້ງຄວາມດັບແຫ່ງທຸກຂິນຊີ ແລະ ຮູ້ແຈ້ງທີ່ດັບໄປບໍ່ເຫຼືອແຫ່ງທຸກຂິນຊີທີ່ເກີດຂຶ້ນແລ້ວ ທຸກຂິນຊີທີ່ເກີດຂຶ້ນແລ້ວຍ່ອມດັບໄປບໍ່ເຫຼືອໃນຢູ່ໄສ

ຄື ພິກຂຸໃນທຳວິໄນນີ້ ສະຫງັດຈາກກາມແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານ ທີ່ມີວິຕົກ ວິຈານ ປີຕິແລະສຸກທີ່ເກີດຈາກວິເວກຢູ່ ທຸກຂິນຊີທີ່ເກີດຂຶ້ນແລ້ວຍ່ອມດັບໄປບໍ່ເຫຼືອໃນປະຖົມຊານນີ້

ພິກຂຸນີ້ເຮົາກ່າວວ່າ ຮູ້ຄວາມດັບແຫ່ງທຸກຂິນຊີແລ້ວ ນ້ອມຈິດໄປເພື່ອຄວາມເປັນແນວນັ້ນ ເມື່ອພິກຂຸໃນທຳວິໄນນີ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ໂທມະນັດສິນຊີຍ່ອມເກີດຂຶ້ນ ທ່ານຮູ້ແຈ້ງວ່າ ໂທມະນັດສິນຊີນີ້ເກີດຂຶ້ນແກ່ເຮົາ ແລະໂທມະນັດສິນຊີນັ້ນມີເຄື່ອງໝາຍ ມີເຫດ ມີສິ່ງປຸງແຕ່ງ ມີປັດໄຈ ທັງເປັນໄປບໍ່ໄດ້ເລີຍ ທີ່ໂທມະນັດສິນຊີນັ້ນ ເຊິ່ງບໍ່ມີເຄື່ອງໝາຍ ບໍ່ມີເຫດ ບໍ່ມີສິ່ງປຸງແຕ່ງ ບໍ່ມີປັດໄຈ ຈັກເກີດຂຶ້ນ ທ່ານຮູ້ແຈ້ງໂທມະນັດສິນຊີ ຮູ້ແຈ້ງຄວາມເກີດແຫ່ງໂທມະນັດສິນຊີ ຮູ້ແຈ້ງຄວາມດັບແຫ່ງໂທມະນັດສິນຊີ ແລະຮູ້ແຈ້ງທີ່ດັບໄປບໍ່ເຫຼືອແຫ່ງໂທມະນັດສິນຊີທີ່ເກີດຂຶ້ນແລ້ວໂທມະນັດສິນຊີທີ່ເກີດຂຶ້ນແລ້ວຍ່ອມດັບໄປບໍ່ເຫຼືອໃນຢູ່ໄສ ຄື ພິກຂຸໃນທຳວິໄນນີ້ ຍ້ອນວິຕົກວິຈານສະງົບລະງັບໄປ ບັນລຸທຸຕິຍະຊານທີ່ມີຄວາມຜ່ອງໃສພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກບໍ່ມີວິຈານ ມີແຕ່ປີຕິ ແລະສຸກອັນເກີດຈາກສະມາທິຢູ່ ໂທມະນັດສິນຊີທີ່ເກີດຂຶ້ນແລ້ວຍ່ອມດັບໄປບໍ່ເຫຼືອໃນທຸຕິຍະຊານນີ້

ພິກຂຸນີ້ເຮົາກ່າວວ່າ ຮູ້ຄວາມດັບແຫ່ງໂທມະນັດສິນຊີແລ້ວນ້ອມຈິດໄປເພື່ອຄວາມເປັນແນວນັ້ນ ເມື່ອພິກຂຸໃນທຳວິໄນນີ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ສຸຂິນຊີຍ່ອມເກີດຂຶ້ນ ທ່ານຮູ້ແຈ້ງວ່າ ສຸຂິນຊີນີ້ເກີດຂຶ້ນແກ່ເຮົາ ແລະສຸຂິນຊີນັ້ນ ມີເຄື່ອງໝາຍ ມີເຫດ ມີສິ່ງປຸງແຕ່ງ ມີປັດໄຈ ທັງເປັນໄປບໍ່ໄດ້ເລີຍທີ່ສຸຂິນຊີນັ້ນເຊິ່ງບໍ່ມີເຄື່ອງໝາຍ ບໍ່ມີເຫດ ບໍ່ມີສິ່ງປຸງແຕ່ງ ບໍ່ມີປັດໄຈ ຈັກເກີດຂຶ້ນ ທ່ານຮູ້ແຈ້ງສຸຂິນຊີ ຮູ້ແຈ້ງຄວາມເກີດແຫ່ງສຸຂິນຊີ ຮູ້ແຈ້ງຄວາມດັບແຫ່ງສຸຂິນຊີ ແລະຮູ້ແຈ້ງທີ່ດັບໄປບໍ່ເຫຼືອແຫ່ງ ສຸຂິນຊີທີ່ເກີດຂຶ້ນແລ້ວ ສຸຂິນຊີທີ່ເກີດຂຶ້ນແລ້ວຍ່ອມດັບໄປບໍ່ເຫຼືອໃນຢູ່ໄສ ຄື ພິກຂຸໃນທຳວິໄນນີ້ຍ້ອນປີຕິຈາງຄາຍອອກ ມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ ສຸຂິນຊີທີ່ເກີດຂຶ້ນແລ້ວຍ່ອມດັບໄປບໍ່ເຫຼືອໃນຕະຕິຍະຊານນີ້

ພິກຂຸນີ້ເຮົາກ່າວວ່າ ຮູ້ຄວາມດັບແຫ່ງສຸຂິນຊີແລ້ວນ້ອມຈິດໄປເພື່ອຄວາມເປັນແນວນັ້ນ

ເມື່ອພິກຂຸໃນທຳວິໄນນີ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ໂສມະນັດສິນຊີຍ່ອມເກີດຂຶ້ນ ທ່ານຮູ້ແຈ້ງວ່າ ໂສມະນັດສິນຊີນີ້ເກີດຂຶ້ນແກ່ເຮົາ ແລະໂສມະນັດສິນຊີນັ້ນມີເຄື່ອງໝາຍ ມີເຫດ ມີສິ່ງປຸງແຕ່ງ ມີປັດໄຈ ທັງເປັນໄປບໍ່ໄດ້ເລີຍທີ່ ໂສມະນັດສິນຊີນັ້ນເຊິ່ງບໍ່ມີເຄື່ອງໝາຍ ບໍ່ມີເຫດ ບໍ່ມີສິ່ງປຸງແຕ່ງ ບໍ່ມີປັດໄຈ ຈັກເກີດຂຶ້ນ ທ່ານຮູ້ແຈ້ງໂສມະນັດສິນຊີ ຮູ້ແຈ້ງຄວາມເກີດແຫ່ງໂສມະນັດສິນຊີ ຮູ້ແຈ້ງຄວາມດັບແຫ່ງໂສມະນັດສິນຊີ ແລະຮູ້ແຈ້ງທີ່ດັບໄປບໍ່ເຫຼືອແຫ່ງໂສມະນັດສິນຊີທີ່ເກີດຂຶ້ນແລ້ວ ໂສມະນັດສິນຊີທີ່ເກີດຂຶ້ນແລ້ວຍ່ອມດັບໄປບໍ່ເຫຼືອໃນຢູ່ໄສ ຄື ພິກຂຸໃນທຳວິໄນນີ້ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ໂສມະນັດສິນຊີທີ່ເກີດຂຶ້ນແລ້ວຍ່ອມດັບໄປບໍ່ເຫຼືອໃນຈະຕຸດຖະຊານນີ້

ພິກຂຸນີ້ເຮົາກ່າວວ່າ ຮູ້ຄວາມດັບແຫ່ງໂສມະນັດສິນຊີແລ້ວນ້ອມຈິດໄປເພື່ອຄວາມເປັນແນວນັ້ນ ເມື່ອພິກຂຸໃນທຳວິໄນນີ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ອຸເປກຂິນຊີຍ່ອມເກີດຂຶ້ນ ທ່ານຮູ້ແຈ້ງວ່າ ອຸເປກຂິນຊີນີ້ເກີດຂຶ້ນແກ່ເຮົາ ແລະ ອຸເປກຂິນຊີນັ້ນມີເຄື່ອງໝາຍມີເຫດ ມີສິ່ງປຸງແຕ່ງ ມີປັດໄຈ ທັງເປັນໄປບໍ່ໄດ້ເລີຍທີ່ ອຸເປກຂິນຊີນັ້ນເຊິ່ງບໍ່ມີເຄື່ອງໝາຍ ບໍ່ມີເຫດ ບໍ່ມີສິ່ງປຸງແຕ່ງ ບໍ່ມີປັດໄຈ ຈັກເກີດຂຶ້ນ ທ່ານຮູ້ແຈ້ງອຸເປກຂິນຊີ ຮູ້ແຈ້ງຄວາມເກີດແຫ່ງອຸເປກຂິນຊີ ຮູ້ແຈ້ງຄວາມດັບແຫ່ງອຸເປກຂິນຊີ ແລະຮູ້ແຈ້ງທີ່ດັບໄປບໍ່ເຫຼືອແຫ່ງອຸເປກຂິນຊີທີ່ເກີດຂຶ້ນແລ້ວ ອຸເປກຂິນຊີທີ່ເກີດຂຶ້ນແລ້ວຍ່ອມດັບໄປບໍ່ເຫຼືອບ່ອນໃດ ລຄື ພິກຂຸໃນທຳວິໄນນີ້ ກ້າວລ່ວງເນວະສັນຍານາສັນຍາຍະຕະນະຊານໂດຍປະການທັງປວງແລ້ວ ເຂົ້າສັນຍາເວທະຍິຕະນິໂຣດສະມາບັດຢູ່ ອຸເປກຂິນຊີທີ່ເກີດຂຶ້ນແລ້ວຍ່ອມດັບບໍ່ເຫຼືອໃນສັນຍາເວທະຍິຕະນິໂຣດສະມາບັດນີ້ ພິກຂຸນີ້ເຮົາກ່າວວ່າ ຮູ້ຄວາມດັບແຫ່ງອຸເປກຂິນຊີແລ້ວນ້ອມຈິດໄປເພື່ອຄວາມເປັນແນວນັ້ນ

**ອຸປະປະຕິປາຕິກະສູດທີ ໑໐ ຈົບ**

**ສຸຂິນທະຣິຍະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໕. ຊະຣາວັກ

## ໝວດວ່າດ້ວຍຄວາມແກ່

## ໑. ຊະຣາທຳມະສູດ

### ວ່າດ້ວຍຜູ້ມີຄວາມແກ່

[໕໑໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ຜາສາດຂອງນາງວິສາຂາມິຄາຣະມາຕາ ໃນບຸບພາຣາມ ເຂດເມືອງສາວັດຖີ ເມື່ອໃນເວລາຄ່ຳ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກບ່ອນຫຼີບຫຼີກ ປະທັບນັ່ງຜິງພຣະປຣິດສະດາງໃຫ້ແດດທີ່ສ່ອງມາຈາກທິດຕາເວັນຕົກ

ຄັ້ງນັ້ນ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດ ແລ້ວບີບນວດພຣະວໍຣະກາຍຂອງພຣະຜູ້ມີພຣະພາກເຈົ້າ ດ້ວຍຝາມືພ້ອມຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ບັດນີ້ພຣະສະຫວີວັນຂອງພຣະຜູ້ມີພຣະພາກເຈົ້າບໍ່ບໍລິສຸດຜຸດຜ່ອງຄືແຕ່ກ່ອນ ພຣະອະໄວຍະວະທຸກສ່ວນກໍຫ່ຽວຍານ ເປັນກຽວ ພຣະວໍຣະກາຍກໍຄ້ອມໄປທາງໜ້າ ແລະພຣະອິນຊີທັງຫຼາຍ ຄື ຈັກຂຸນຊີ ໂສຕິນຊີ ຄານິນຊີ ຊິວຫິນຊີ ກາຍິນຊີ ກໍຜາກົດແປປ່ຽນໄປ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ຈິງແນວນັ້ນ ອານົນ ຄວາມແກ່ມີຢູ່ໃນຄວາມເປັນໜຸ່ມສາວ ຄວາມເຈັບໄຂ້ມີຢູ່ໃນຄວາມບໍ່ມີພະຍາດ ຄວາມຕາຍກໍມີຢູ່ໃນຊີວິດ ຜິວພັນບໍ່ບໍລິສຸດຜຸດຜ່ອງຄືແຕ່ກ່ອນ ອະໄວຍະວະທຸກສ່ວນກໍຫ່ຽວຍານເປັນກຽວ ກາຍກໍຄ້ອມໄປທາງໜ້າ ແລະອິນຊີທັງຫຼາຍ ຄື ຈັກຂຸນຊີ ໂສຕິນຊີ ຄານິນຊີ ຊິວຫິນຊີ ກາຍິນຊີ ກໍຜາກົດແປປ່ຽນໄປ

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາໄດ້ຕັດພຣະດຳຣັດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

ເຖິງທ່ານຈະຕິຄວາມແກ່ທີ່ຊົ່ວຊາມ
ຈະຕິຄວາມແກ່ທີ່ເຮັດໃຫ້ຜິວພັນຊາມໄປໄດ້ພຽງໃດ
ຮູບທີ່ໜ້າເພິ່ງພໍໃຈກໍຄົງຖືກຄວາມແກ່ຍ່ຳຍີພຽງນັ້ນ
ແມ່ນຜູ້ໃດເພິ່ງມີຊີວິດຢູ່ເຖິງ ໑໐໐ ປີ
ຜູ້ນັ້ນກໍມີຄວາມຕາຍຢູ່ເບື້ອງໜ້າ
ຄວາມຕາຍບໍ່ລະເວັ້ນໃຜ ໆ ຍ່ອມຍ່ຳຍີສັດທັງໝົດຢ່າງແນ່ນອນ

**ຊະຣາທຳມະສູດທີ ໑ ຈົບ**

# ໘. ອຸນນາພະພາມມະນະສູດ

## ວ່າດ້ວຍອຸນນາພະພາມ

[໕໑໘] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ຄັ້ງນັ້ນແລ ພາມຊື່ອຸນນາພະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ທ່ານພຣະໂຄດົມ ອິນຊີ ໕ ປະການນີ້ ມີອາລົມຕ່າງກັນ ມີໂຄຈອນຕ່າງກັນ ບໍ່ສະເຫວີຍອາລົມອັນເປັນໂຄຈອນຂອງກັນແລະກັນ

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ຈັກຂຸນຊີ
໒. ໂສຕິນຊີ
໓. ຄານິນຊີ
໔. ຊິວຫິນຊີ
໕. ກາຍິນຊີ

ທ່ານພຣະໂຄດົມ ອັນໃດເປັນທີ່ຢຶດໜ່ຽວຂອງອິນຊີ ໕ ປະການນີ້ທີ່ມີອາລົມຕ່າງກັນ ມີໂຄຈອນຕ່າງກັນ ບໍ່ສະເຫວີຍອາລົມອັນເປັນໂຄຈອນຂອງກັນແລະກັນ ແລະອັນໃດນໍ? ຍ່ອມສະເຫວີຍອາລົມອັນເປັນໂຄຈອນຂອງອິນຊີ ໕ ປະການນີ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພາມ ອິນຊີ ໕ ປະການນີ້ ມີອາລົມຕ່າງກັນ ມີໂຄຈອນຕ່າງກັນ ບໍ່ສະເຫວີຍອາລົມອັນເປັນໂຄຈອນຂອງກັນແລະກັນ

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ຈັກຂຸນຊີ
໒. ໂສຕິນຊີ
໓. ຄານິນຊີ
໔. ຊິວຫິນຊີ
໕. ກາຍິນຊີ

ພາມ ໃຈເປັນທີ່ຢຶດໜ່ຽວຂອງອິນຊີ ໕ ປະການນີ້ທີ່ມີອາລົມຕ່າງກັນ ມີໂຄຈອນຕ່າງກັນ ບໍ່ສະເຫວີຍອາລົມອັນເປັນໂຄຈອນຂອງກັນແລະກັນ ແລະໃຈຍ່ອມສະເຫວີຍອາລົມອັນເປັນໂຄຈອນຂອງອິນຊີ ໕ ປະການນີ້

ທ່ານພຣະໂຄດົມ ອັນໃດ? ເປັນທີ່ຍຶດໜ່ຽວຂອງໃຈ
ພາມ ສະຕິເປັນທີ່ຍຶດໜ່ຽວຂອງໃຈ
ທ່ານພຣະໂຄດົມ ອັນໃດ? ເປັນທີ່ຍຶດໜ່ຽວຂອງສະຕິ
ພາມ ວິມຸດຕິ? ເປັນທີ່ຍຶດໜ່ຽວຂອງສະຕິ
ທ່ານພຣະໂຄດົມ ອັນໃດ? ເປັນທີ່ຍຶດໜ່ຽວຂອງວິມຸດຕິ
ພາມ ນິບພານເປັນທີ່ຍຶດໜ່ຽວຂອງວິມຸດຕິ
ທ່ານພຣະໂຄດົມ ອັນໃດ? ເປັນທີ່ຍຶດໜ່ຽວຂອງນິບພານ

ພາມ ທ່ານລ່ວງເລີຍບັນຫາໄປ ບໍ່ສາມາດກຳນົດບ່ອນສຸດແຫ່ງບັນຫາໄດ້ ດ້ວຍວ່າ ພົມມະຈັນທີ່ບຸກຄົນຢູ່ຈົບແລ້ວ ຢັ່ງລົງສູ່ນິບພານ ມີນິບພານເປັນເບື້ອງໜ້າ ມີນິບພານເປັນບ່ອນສຸດ

ລຳດັບນັ້ນ ອຸນນາພະພາມຊົມຊື່ນຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າແລ້ວ ລຸກຈາກບ່ອນນັ່ງ ຖວາຍອະພິວາດ ທຳປະທັກສິນແລ້ວຈາກໄປ

ເມື່ອອຸນນາພະພາມຈາກໄປໄດ້ບໍ່ດົນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດ ວ່າ

ພິກຂຸທັງຫຼາຍ ປຽບຄືເຮືອນຍອດຫຼືສາລາເຮືອນຍອດ ມີໜ້າຕ່າງຢູ່ດ້ານທິດຕາເວັນອອກ ເມື່ອດວງອາທິດຂຶ້ນ ແສງ (ດວງອາທິດ) ສ່ອງເຂົ້າໄປທາງໜ້າຕ່າງ ຈະຜາກົດຢູ່ໄສ

ຢູ່ຝາດ້ານທິດຕາເວັນຕົກ ຂ້ານ້ອຍ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍຄືກັນສັນນັ້ນ ສັດທາໃນຕະຖາຄົດຂອງອຸນນາພະພາມຕັ້ງໝັ້ນຢັ່ງຮາກລົງແລ້ວໝັ້ນຄົງ ອັນສະມະນະຫຼືພາມ ເທວະດາຫຼືມານ ພົມຫຼືໃຜ ໆ ໃນໂລກໃຫ້ຫວັ່ນໄຫວບໍ່ໄດ້ ຖ້າອຸນນາພະພາມເພິ່ງທຳກາລະໃນເວລານີ້ແລ້ວ ຍ່ອມບໍ່ມີສັງໂຍດທີ່ເປັນເຄື່ອງປະກອບໃຫ້ອຸນນາພະພາມຕ້ອງມາສູ່ໂລກນີ້ອີກ

**ອຸນນາພະພາມມະນະສູດທີ ໔ ຈົບ**

## ໙. ສາເກດສູດ

### ວ່າດ້ວຍພຣະທຳເທດສະໜາທີ່ເມືອງສາເກດ

[໕໑໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ປ່າອັນຊະນະວັນ ສະຖານທີ່ພຣະຣາດຊະທານ ອະໄພແກ່ໝູ່ເນື້ອ ເຂດເມືອງສາເກດໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດຖາມວ່າ ພິກຂຸທັງຫຼາຍ ເຫດທີ່ອິນຊີ ໕ ປະການອາໄສແລ້ວກາຍເປັນພະລະ ໕ ປະການ ແລະທີ່ພະລະ ໕ ປະການອາໄສແລ້ວກາຍເປັນອິນຊີ ໕ ປະການ ມີຢູ່ບໍ

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ມີພຣະຜູ້ມີພຣະພາກເຈົ້າເປັນຜູ້ນຳ ມີພຣະຜູ້ມີພຣະພາກເຈົ້າເປັນບ່ອນເພິ່ງ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ສະເພາະພຣະຜູ້ມີພຣະພາກເຈົ້າທໍ່ນັ້ນຈະຊົງອະທິບາຍເນື້ອຄວາມແຫ່ງພຣະພາສິດນັ້ນໃຫ້ແຈ່ມແຈ້ງໄດ້ ພິກຂຸທັງຫຼາຍ ຟັງຕໍ່ຈາກພຣະຜູ້ມີພຣະພາກເຈົ້າແລ້ວຈັກຊົງຈຳໄວ້

ພິກຂຸທັງຫຼາຍ ເຫດທີ່ອິນຊີ ໕ ປະການອາໄສແລ້ວກາຍເປັນພະລະ ໕ ປະການ ແລະທີ່ພະລະ ໕ ປະການອາໄສແລ້ວກາຍເປັນອິນຊີ ໕ ປະການມີຢູ່ ເຫດທີ່ອິນຊີ ໕ ປະການອາໄສແລ້ວກາຍເປັນພະລະ ໕ ປະການ ແລະ ທີ່ພະລະ ໕ ປະການອາໄສແລ້ວກາຍເປັນອິນຊີ ໕ ປະການ ເປັນແນວໃດ?

ຄື ສິ່ງໃດເປັນສັດທິນຊີ ສິ່ງນັ້ນເປັນສັດທາພະລະ ສິ່ງໃດເປັນສັດທາພະລະ ສິ່ງນັ້ນເປັນສັດທິນຊີ ສິ່ງໃດເປັນວິຣິຍິນຊີ ສິ່ງນັ້ນເປັນວິຣິຍະພະລະ ສິ່ງໃດເປັນວິຣິຍະພະລະ ສິ່ງນັ້ນເປັນວິຣິຍິນຊີ ສິ່ງໃດເປັນສະຕິນຊີ ສິ່ງນັ້ນເປັນສະຕິພະລະ ສິ່ງໃດເປັນສະຕິພະລະ ສິ່ງນັ້ນເປັນສະຕິນຊີ ສິ່ງໃດເປັນສະມາທິນຊີ ສິ່ງນັ້ນເປັນສະມາທິພະລະ ສິ່ງໃດເປັນສະມາທິພະລະ ສິ່ງນັ້ນເປັນສະມາທິນຊີ ສິ່ງໃດເປັນປັນຍິນຊີ ສິ່ງນັ້ນເປັນປັນຍາພະລະ ສິ່ງໃດເປັນປັນຍາພະລະ ສິ່ງນັ້ນເປັນປັນຍິນຊີ

ພິກຂຸທັງຫຼາຍ ແມ່ນ້ຳໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ກາງແມ່ນ້ຳນັ້ນມີເກາະ ເຫດທີ່ຈະໃຫ້ນັບວ່າແມ່ນ້ຳນັ້ນມີກະແສດຽວມີຢູ່ ແລະເຫດທີ່ຈະໃຫ້ນັບວ່າແມ່ນ້ຳນັ້ນມີ ໒ ກະແສກໍມີຢູ່

ເຫດທີ່ຈະໃຫ້ນັບວ່າແມ່ນ້ຳນັ້ນມີກະແສດຽວ ເປັນແນວໃດ?

ຄື ນ້ຳທີ່ຢູ່ສຸດທິດຕາເວັນອອກ ແລະສຸດທິດຕາເວັນຕົກຂອງເກາະນັ້ນ ນີ້ແລ ຄືເຫດທີ່ໃຫ້ນັບວ່າແມ່ນ້ຳນັ້ນມີກະແສດຽວ

ເຫດທີ່ຈະໃຫ້ນັບວ່າແມ່ນ້ຳນັ້ນມີ ໒ ກະແສ ເປັນແນວໃດ?

ຄື ນ້ຳທີ່ຢູ່ສຸດທິດເໜືອແລະສຸດທິດໃຕ້ຂອງເກາະນັ້ນ ນີ້ແລ ຄືເຫດທີ່ໃຫ້ນັບວ່າແມ່ນ້ຳນັ້ນມີ ໒ ກະແສ ແມ່ນສັນໃດ

ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສິ່ງໃດເປັນສັດທິນຊີ ສິ່ງນັ້ນເປັນສັດທາພະລະ ສິ່ງໃດເປັນ ສັດທາພະລະ ສິ່ງນັ້ນເປັນສັດທິນຊີ ສິ່ງໃດເປັນວິຣິຍິນຊີ ສິ່ງນັ້ນເປັນວິຣິຍະພະລະ ສິ່ງໃດເປັນວິຣິຍະພະລະ ສິ່ງນັ້ນເປັນວິຣິຍິນຊີ ສິ່ງໃດເປັນສະຕິນຊີ ສິ່ງນັ້ນເປັນສະຕິພະລະ ສິ່ງໃດເປັນສະຕິພະລະ ສິ່ງນັ້ນເປັນສະຕິນຊີ ສິ່ງໃດເປັນສະມາທິນຊີ ສິ່ງນັ້ນເປັນສະມາທິພະລະ ສິ່ງໃດເປັນສະມາທິພະລະ ສິ່ງນັ້ນເປັນສະມາທິນຊີ ສິ່ງໃດເປັນປັນຍິນຊີ ສິ່ງນັ້ນເປັນປັນຍາພະລະ ສິ່ງໃດເປັນປັນຍາພະລະ ສິ່ງນັ້ນເປັນປັນຍິນຊີ

ພິກຂຸເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນຫາອາສະວະບໍ່ໄດ້ຍ້ອນອາສະວະທັງຫຼາຍ ສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ຍ້ອນອິນຊີ ໕ ປະການທີ່ພິກຂຸນັ້ນຈະເລີນ ເຮັດໃຫ້ຫຼາຍແລ້ວ

**ສາເກດສູດທີ ໓ ຈົບ**

# ໔. ປຸບພະໂກດຖະກະສູດ

## ວ່າດ້ວຍພຣະທຳເທດສະໜາທີ່ປຸບພະໂກດຖະກະ

[໕໑໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ປຸບພະໂກດຖະກະ ເຂດເມືອງສາວັດຖີໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກທ່ານພຣະສາຣີບຸດມາຕັດ ວ່າ

ສາຣີບຸດ ທ່ານເຊື່ອບໍວ່າ ສັດທິນຊີທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມຢັ່ງລົງສູ່ອະມະຕະ ມີອະມະຕະເປັນທີ່ໄປໃນເບື້ອງໜ້າ ມີອະມະຕະເປັນບ່ອນສຸດ ຯລຯ ປັນຍິນຊີ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມຢັ່ງລົງສູ່ອະມະຕະ ມີອະມະຕະເປັນທີ່ໄປໃນເບື້ອງໜ້າ ມີອະມະຕະເປັນບ່ອນສຸດ

ຂ້າແດ່ ພຣະອົງຜູ້ຈະເລີນ ຂໍ້ນີ້ ຊົນເຫຼົ່າໃດບໍ່ຮູ້ ບໍ່ເຫັນ ບໍ່ເຂົ້າໃຈ ບໍ່ໄດ້ເຮັດໃຫ້ແຈ້ງ ບໍ່ໄດ້ສຳຜັດດ້ວຍປັນຍາ ຊົນເຫຼົ່ານັ້ນ ເພິ່ງເຖິງຄວາມເຊື່ອຕໍ່ຜູ້ອື່ນໃນຂໍ້ນັ້ນວ່າ ສັດທິນຊີ ຯລຯ ປັນຍິນຊີ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະເປັນບ່ອນສຸດ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍ້ນີ້ ຊົນເຫຼົ່າໃດຮູ້ ເຫັນ ເຂົ້າໃຈ ເຮັດໃຫ້ແຈ້ງ ສຳຜັດດ້ວຍປັນຍາແລ້ວ ຊົນເຫຼົ່ານັ້ນ ຍ່ອມບໍ່ມີຄວາມສົງໄສ ບໍ່ມີຄວາມແຄງໃຈໃນຂໍ້ນັ້ນເລີຍວ່າ ສັດທິນຊີ ຯລຯ ປັນຍິນຊີ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະເປັນບ່ອນສຸດ ກໍຂໍ້ນັ້ນ ຂ້າພຣະອົງຮູ້ ເຫັນ ເຂົ້າໃຈ ເຮັດ

ໃຫ້ແຈ້ງ ສຳຜັດດ້ວຍປັນຍາແລ້ວ ຂ້າພຣະອົງບໍ່ມີຄວາມສົງໄສ ບໍ່ມີຄວາມແຄງໃຈໃນຂໍ້ນັ້ນວ່າ ສັດທິນຊີ ຯລຯ ປັນຍິນຊີ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະເປັນບ່ອນສຸດ

ດີແລ້ວ ດີແລ້ວ ສາຣີບຸດ ຂໍ້ນີ້ຊົນເຫຼົ່າໃດບໍ່ຮູ້ ບໍ່ເຫັນ ບໍ່ເຂົ້າໃຈ ບໍ່ໄດ້ເຮັດໃຫ້ແຈ້ງ ບໍ່ໄດ້ສຳຜັດດ້ວຍປັນຍາ ຊົນເຫຼົ່ານັ້ນ ເພິ່ງດຳເນີນໄປດ້ວຍຄວາມເຊື່ອຕໍ່ຜູ້ອື່ນໃນຂໍ້ນັ້ນວ່າ ສັດທິນຊີທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະເປັນບ່ອນສຸດ ຯລຯ ປັນຍິນຊີ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະເປັນບ່ອນສຸດ ຂໍ້ນີ້ ຊົນເຫຼົ່າໃດຮູ້ ເຫັນ ເຂົ້າໃຈ ເຮັດໃຫ້ແຈ້ງ ໄດ້ສຳຜັດດ້ວຍປັນຍາ ຊົນເຫຼົ່ານັ້ນ ໝົດຄວາມຣະແວງສົງໄສໃນຂໍ້ນັ້ນວ່າ ສັດທິນຊີທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະເປັນບ່ອນສຸດ ຯລຯ ປັນຍິນຊີ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະເປັນບ່ອນສຸດ

**ປຸບພະໂກດຖະກະສູດທີ ๔ ຈົບ**

# ๕. ປະຖົມປຸບພາຣາມະສູດ

## ວ່າດ້ວຍພຣະທຳເທດສະໜາທີ່ບຸບພາຣາມ ສູດທີ ๑

[๕๑๕] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ຜາສາດຂອງນາງວິສາຂາມິຄາຣະມາຕາ ໃນບຸບພາຣາມ ເຂດເມືອງສາວັດຖີໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດຖາມວ່າ ພິກຂຸທັງຫຼາຍ ພິກຂຸຂີນາສົບພະຍາກອນອະຣະຫັດຕະຜົນວ່າ ເຮົາຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ຍ້ອນອິນຊີທໍ່ໃດທີ່ພິກຂຸຂີນາສົບຈະເລີນ ເຮັດໃຫ້ຫຼາຍແລ້ວ

ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍ ມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ພິກຂຸທັງຫຼາຍ ພິກຂຸຂີນາສົບພະຍາກອນອະຣະຫັດຕະຜົນວ່າ ເຮົາຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ຍ້ອນອິນຊີແນວໜຶ່ງທີ່ພິກຂຸຂີນາສົບຈະເລີນ ເຮັດໃຫ້ຫຼາຍແລ້ວ

ອິນຊີແນວໜຶ່ງ ຄືອັນໃດ?

ຄື ປັນຍິນຊີ ສັດທາທີ່ເປັນໄປຕາມປັນຍາ ວິຣິຍະທີ່ເປັນໄປຕາມປັນຍາ ສະຕິທີ່ເປັນໄປຕາມປັນຍາ ສະມາທິທີ່ເປັນໄປຕາມປັນຍາຂອງອະຣິຍະສາວົກຜູ້ມີປັນຍາຍ່ອມຕັ້ງໝັ້ນ

ພິກຂຸຂີນາສົບພະຍາກອນອະຣະຫັດຕະຜົນວ່າ ເຮົາຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ຍ້ອນອິນຊີແນວໜຶ່ງນີ້ທີ່ພິກຂຸຂີນາສົບຈະເລີນ ເຮັດໃຫ້ຫຼາຍແລ້ວ

**ປະຖົມປຸບພາຣາມະສູດທີ ໕ ຈົບ**

# ໖. ທຸຕິຍະປຸບພາຣາມະສູດ

## ວ່າດ້ວຍພຣະທຳເທດສະໜາທີ່ບຸບພາຣາມ ສູດທີ ໘

[໕໑໖] ຕົ້ນເລື້ອງຄືສູດທີ ໕

ພິກຂຸທັງຫຼາຍ ພິກຂຸຂີນາສົບພະຍາກອນອະຣະຫັດຜົນວ່າ ເຮົາຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ຍ້ອນອິນຊີທີ່ໃດທີ່ພິກຂຸຂີນາສົບຈະເລີນ ເຮັດໃຫ້ຫຼາຍແລ້ວ

ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍ ມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ໆລໆ

ພິກຂຸທັງຫຼາຍ ພິກຂຸຂີນາສົບພະຍາກອນອະຣະຫັດຜົນວ່າ ເຮົາຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ຍ້ອນອິນຊີ ໒ ປະການທີ່ພິກຂຸຂີນາສົບຈະເລີນ ເຮັດໃຫ້ຫຼາຍແລ້ວ

ອິນຊີ ໒ ປະການ ອັນໃດແດ່ ຄື

໑. ປັນຍາທີ່ເປັນອະຣິຍະ ໒. ວິມຸດຕິທີ່ເປັນອະຣິຍະ

ປັນຍາທີ່ເປັນອະຣິຍະເປັນປັນຍິນຊີ ວິມຸດຕິທີ່ເປັນອະຣິຍະເປັນສະມາທິນຊີ

ພິກຂຸຂີນາສົບພະຍາກອນອະຣະຫັດຕະຜົນວ່າ ເຮົາຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ຍ້ອນອິນຊີ ໒ ປະການນີ້ທີ່ພິກຂຸຂີນາສົບຈະເລີນ ເຮັດໃຫ້ຫຼາຍແລ້ວ

**ທຸຕິຍະປຸບພາຣາມະສູດທີ ໖ ຈົບ**

# ໗. ຕະຕິຍະປຸບພາຣາມະສູດ

## ວ່າດ້ວຍພຣະທຳເທດສະໜາທີ່ບຸບພາຣາມ ສູດທີ ໓

[໕໑໗] ຕົ້ນເລື້ອງຄືສູດທີ ໕

ພິກຂຸທັງຫຼາຍ ພິກຂຸຂີນາສົບພະຍາກອນອະຣະຫັດຕະຜົນວ່າ ເຮົາຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແບບນີ້ອີກຕໍ່ໄປ ຍ້ອນອິນຊີທີ່ໃດທີ່ພິກຂຸຂີນາສົບຈະເລີນ ເຮັດໃຫ້ຫຼາຍແລ້ວ

ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍ ມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ۔ລ۔

ພິກຂຸທັງຫຼາຍ ພິກຂຸຂີນາສົບພະຍາກອນອະຣະຫັດຕະຜົນວ່າ ເຮົາຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແບບນີ້ອີກຕໍ່ໄປ ຍ້ອນອິນຊີ ໔ ປະການທີ່ພິກຂຸຂີນາສົບຈະເລີນ ເຮັດໃຫ້ຫຼາຍແລ້ວ

ອິນຊີ ໔ ປະການ ອັນໃດແດ່ ຄື

໑. ວິຣິຍິນຊີ ໒. ສະຕິນຊີ
໓. ສະມາທິນຊີ ໔. ປັນຍິນຊີ

ພິກຂຸຂີນາສົບພະຍາກອນອະຣະຫັດຜົນວ່າ ເຮົາຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແບບນີ້ອີກຕໍ່ໄປ ຍ້ອນອິນຊີ ໔ ປະການນີ້ທີ່ພິກຂຸຂີນາສົບຈະເລີນ ເຮັດໃຫ້ຫຼາຍແລ້ວ

**ຕະຕິຍະປຸບພາຣາມະສູດທີ ໗ ຈົບ**

# ໘. ຈະຕຸດຖະປຸບພາຣາມະສູດ

## ວ່າດ້ວຍພຣະທຳເທດສະໜາທີ່ບຸບພາຣາມ ສູດທີ ໔

[໕໑໘] ຕົ້ນເລື້ອງຄືສູດທີ ໕

ພິກຂຸທັງຫຼາຍ ພິກຂຸຂີນາສົບພະຍາກອນອະຣະຫັດຕະຜົນວ່າ ເຮົາຮູ້ແຈ້ງວ່າ ຊາດໝົດ

ແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ຍ້ອນອິນຊີທີ່ໃດທີ່ພິກຂຸຂີນາສົບຈະເລີນ ເຮັດໃຫ້ຫຼາຍແລ້ວ

ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍ ມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ພິກຂຸທັງຫຼາຍ ພິກຂຸຂີນາສົບພະຍາກອນອະຣະຫັດຕະຜົນວ່າ ເຮົາຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ຍ້ອນອິນຊີ ໕ ປະການທີ່ພິກຂຸຂີນາສົບຈະເລີນ ເຮັດໃຫ້ຫຼາຍແລ້ວ

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີ
໒. ວິຣິຍິນຊີ
໓. ສະຕິນຊີ
໔. ສະມາທິນຊີ
໕. ປັນຍິນຊີ

ພິກຂຸຂີນາສົບພະຍາກອນອະຣະຫັດຕະຜົນວ່າ ເຮົາຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ຍ້ອນອິນຊີ ໕ ປະການນີ້ທີ່ພິກຂຸຂີນາສົບຈະເລີນ ເຮັດໃຫ້ຫຼາຍແລ້ວ

**ຈະຕຸດຖະປຸບພາຣາມະສູດທີ ໗ ຈົບ**

# ໘. ປິນໂທລະພາຣະທະວາຊະສູດ

## ວ່າດ້ວຍພຣະປິນໂທລະພາຣະທະວາຊະ

[໕໑໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໂຄສິຕາຣາມ ເຂດເມືອງໂກສຳພີ ສະໄໝນັ້ນ ທ່ານພຣະປິນໂທລະພາຣະທະວາຊະໄດ້ພະຍາກອນອະຣະຫັດຕະຜົນວ່າ ເຮົາຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບ ພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ຄັ້ງນັ້ນ ພິກຂຸຈຳນວນຫຼາຍເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ທ່ານພຣະປິນໂທລະພາຣະທະວາຊະພະຍາກອນອະຣະຫັດ

ຕະຜີນວ່າ ເຮົາຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ທ່ານພຣະປີນໂທລະພາຣະທະວາຊະເຫັນອຳນາດປະໂຫຍດອັນໃດ ຈຶ່ງພະຍາກອນອະຣະຫັດຕະຜີນວ່າ ເຮົາຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸປີນໂທລະພາຣະທະວາຊະພະຍາກອນອະຣະຫັດຕະຜີນວ່າ ເຮົາຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ຍ້ອນອິນຊີ ໓ ປະການທີ່ ພິກຂຸປີນໂທລະພາຣະທະວາຊະຈະເລີນ ເຮັດໃຫ້ຫຼາຍແລ້ວ

ອິນຊີ ໓ ປະການ ອັນໃດແດ່ ຄື

໑. ສັດທິນຊີ
໒. ສະມາທິນຊີ
໓. ປັນຍິນຊີ

ພິກຂຸປີນໂທລະພາຣະທະວາຊະພະຍາກອນອະຣະຫັດຕະຜີນວ່າ ເຮົາຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບ ພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ ຍ້ອນອິນຊີ ໓ ປະການນີ້ທີ່ພິກຂຸປີນໂທລະພາຣະທະວາຊະຈະເລີນ ເຮັດໃຫ້ຫຼາຍແລ້ວ

ອິນຊີ ໓ ປະການນີ້ມີອັນໃດ ເປັນບ່ອນສຸດ
ຄື ມີຄວາມສິ້ນໄປເປັນບ່ອນສຸດ
ອັນໃດມີຄວາມສິ້ນໄປເປັນບ່ອນສຸດ
ຄື ຊາດ ຊະຣາ ແລະມໍລະນະມີຄວາມສິ້ນໄປເປັນບ່ອນສຸດ

ພິກຂຸປີນໂທລະພາຣະທະວາຊະພິຈາລະນາເຫັນວ່າ ຊາດ ຊະຣາ ແລະມໍລະນະສິ້ນໄປ ຈຶ່ງພະຍາກອນອະຣະຫັດຕະຜີນວ່າ ເຮົາຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ

**ປີນໂທລະພາຣະທະວາຊະສູດທີ ໗ ຈົບ**

# ໑໐. ອາປະນະສູດ

## ວ່າດ້ວຍພຣະທຳເທດສະໜາທີ່ອາປະນະນິຄົມ

[໕໔໐] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນິຄົມຂອງຊາວອັງຄະຊື່ອາປະນະ ແຄວັນອັງຄະໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກທ່ານພຣະສາຣີບຸດມາຕັດວ່າ ສາຣີບຸດ ອະຣິຍະສາວົກໃດມີສັດທາໝັ້ນຄົງ ເຫຼື້ອມໃສຍິ່ງໃນຕະຖາຄົດ ອະຣິຍະສາວົກນັ້ນບໍ່ເພິ່ງສົງໄສຫຼືເຄືອບແຄງໃນຕະຖາຄົດຫຼືໃນຄຳສອນຂອງຕະຖາຄົດ

ທ່ານພຣະສາຣີບຸດຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອະຣິຍະສາວົກໃດມີສັດທາໝັ້ນຄົງ ເຫຼື້ອມໃສຢ່າງຍິ່ງໃນພຣະຕະຖາຄົດ ພຣະອະຣິຍະສາວົກນັ້ນ ບໍ່ເພິ່ງສົງໄສຫຼືເຄືອບແຄງໃນພຣະຕະຖາຄົດ ຫຼື ໃນຄຳສອນຂອງພຣະຕະຖາຄົດ

ອັນໜຶ່ງ ພຣະອະຣິຍະສາວົກຜູ້ມີສັດທາ ເພິ່ງຫວັງໄດ້ວ່າຈັກເປັນຜູ້ຜາຣົບຄວາມພຽນເພື່ອລະອະກຸສົນທຳ ເຂົ້າເຖິງກຸສົນທຳ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖືເບົາໃນກຸສົນທຳຢູ່ ກໍວິຣິຍະຂອງພຣະອະຣິຍະສາວົກນັ້ນ ເພິ່ງຈັດເປັນວິຣິຍິນຊີ

ອັນໜຶ່ງ ພຣະອະຣິຍະສາວົກຜູ້ມີສັດທາ ຜາຣົບຄວາມພຽນ ເພິ່ງຫວັງໄດ້ວ່າຈັກເປັນຜູ້ມີສະຕິ ປະກອບດ້ວຍສະຕິປັນຍາເປັນເຄື່ອງຮັກສາຕົນຢ່າງຍິ່ງ ລະລຶກເຖິງສິ່ງທີ່ເຮັດ ຄຳທີ່ໄດ້ເວົ້າໄວ້ດົນແດ່ ກໍສະຕິຂອງພຣະອະຣິຍະສາວົກນັ້ນເພິ່ງຈັດເປັນສະຕິນຊີ

ອັນໜຶ່ງ ພຣະອະຣິຍະສາວົກຜູ້ມີສັດທາ ຜາຣົບຄວາມພຽນ ມີສະຕິໝັ້ນຄົງ ເພິ່ງຫວັງໄດ້ວ່າຈັກເຮັດນິບພານໃຫ້ເປັນອາລົມ ໄດ້ສະມາທິ ໄດ້ເອກັກຄະຕາຈິດ ກໍສະມາທິຂອງພຣະອະຣິຍະສາວົກນັ້ນ ເພິ່ງຈັດເປັນສະມາທິນຊີ

ອັນໜຶ່ງ ພຣະອະຣິຍະສາວົກຜູ້ມີສັດທາ ຜາຣົບຄວາມພຽນ ມີສະຕິໝັ້ນຄົງ ມີຈິດຕັ້ງໝັ້ນເພິ່ງຫວັງໄດ້ວ່າ ຈັກຮູ້ແຈ້ງວ່າ ສົງສານມີບ່ອນສຸດແລະເບື້ອງຕົ້ນກຳນົດຮູ້ບໍ່ໄດ້ ເບື້ອງຕົ້ນແລະບ່ອນສຸດບໍ່ຜາກົດແກ່ເຫຼົ່າສັດຜູ້ມີອະວິດຊາອັດກັ້ນ ມີຕັນຫາມັດໄວ້ ແລ່ນໄປ ທ່ອງທ່ຽວໄປ ສ່ວນຄວາມດັບກອງແຫ່ງຄວາມມືດຄືອະວິດຊາບໍ່ໃຫ້ເຫຼືອດ້ວຍວິຣາຄະ ນີ້ເປັນທາງອັນສະງົບ ນີ້ເປັນທາງອັນປະນີດ ຄື ຄວາມລະງັບສັງຂານທັງປວງ ຄວາມສະລະຄືນອຸປະທິທັງປວງ ຄວາມສິ້ນຕັນຫາ ຄວາມສິ້ນກຳໜັດ ຄວາມດັບ ນິບພານ ກໍປັນຍາຂອງພຣະອະຣິຍະສາວົກນັ້ນເພິ່ງຈັດເປັນປັນຍິນຊີ

ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອະຣິຍະສາວົກຜູ້ມີສັດທານັ້ນພະຍາຍາມແນວນີ້ ເມື່ອພະ

ຍາຍາມແລ້ວຣະນຶກແບບນີ້ ເມື່ອຣະນຶກແລ້ວຕັ້ງໝັ້ນແບບນີ້ ເມື່ອຕັ້ງໝັ້ນແລ້ວຮູ້ແຈ້ງແບບນີ້ ເມື່ອຮູ້ແຈ້ງແລ້ວຍ່ອມເຊື່ອໝັ້ນແບບນີ້ວ່າ ນີ້ແລ ຄືທຳທີ່ເຮົາໄດ້ຟັງມາກ່ອນ ບັດນີ້ເຮົາຖືກຕ້ອງດ້ວຍນາມກາຍນັ້ນຢູ່ ແລະເຫັນແຈ້ງແທງຕະຫຼອດດ້ວຍປັນຍາ ກໍສັດທາຂອງພຣະອະຣິຍະສາວົກນັ້ນເພິ່ງຈັດເປັນສັດທິນຊີ

ດີແລ້ວ ດີແລ້ວ ສາຣີບຸດ ອະຣິຍະສາວົກໃດມີສັດທາໝັ້ນຄົງ ເຫຼື້ອມໃສຢ່າງຍິ່ງໃນຕະຖາຄົດ ອະຣິຍະສາວົກນັ້ນບໍ່ເພິ່ງສົງໄສ ຫຼື ເຄືອບແຄງໃນຕະຖາຄົດຫຼືໃນຄຳສອນຂອງຕະຖາຄົດດ້ວຍວ່າ ອະຣິຍະສາວົກຜູ້ມີສັດທາເພິ່ງຫວັງໄດ້ວ່າ ຈັກເປັນຜູ້ພາຣົບຄວາມພຽນເພື່ອລະອະກຸສົນທຳເພື່ອໃຫ້ກຸສົນທຳເກີດ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນ ໝັ້ນຄົງ ບໍ່ຖີ້ມເບົາໃນກຸສົນ-ທຳທັງຫຼາຍຢູ່ ກໍວິຣິຍະຂອງອະຣິຍະສາວົກນັ້ນເພິ່ງຈັດເປັນວິຣິຍິນຊີ

ອັນໜຶ່ງ ອະຣິຍະສາວົກຜູ້ມີສັດທາ ພາຣົບຄວາມພຽນ ເພິ່ງຫວັງໄດ້ວ່າ ຈັກເປັນຜູ້ມີສະຕິປະກອບດ້ວຍສະຕິປັນຍາເປັນເຄື່ອງຮັກສາຕົນຢ່າງຍິ່ງ ລະລຶກເຖິງສິ່ງທີ່ເຮັດ ຄຳທີ່ໄດ້ເວົ້າໄວ້ດົນແດ່ ກໍສະຕິຂອງອະຣິຍະສາວົກນັ້ນເພິ່ງຈັດເປັນສະຕິນຊີ

ອັນໜຶ່ງ ອະຣິຍະສາວົກຜູ້ມີສັດທາ ພາຣົບຄວາມພຽນ ມີສະຕິໝັ້ນຄົງ ເພິ່ງຫວັງໄດ້ວ່າຈັກຍຶດນິບພານໃຫ້ເປັນອາລົມ ໄດ້ສະມາທິ ໄດ້ເອກັກຄະຕາຈິດ ກໍສະມາທິຂອງອະຣິຍະສາວົກນັ້ນເພິ່ງຈັດເປັນສະມາທິນຊີ

ອັນໜຶ່ງ ອະຣິຍະສາວົກຜູ້ມີສັດທາ ພາຣົບຄວາມພຽນ ມີສະຕິໝັ້ນຄົງ ມີຈິດຕັ້ງໝັ້ນ ເພິ່ງຫວັງໄດ້ວ່າ ຈັກຮູ້ແຈ້ງວ່າ ສົງສານມີບ່ອນສຸດແລະເບື້ອງຕົ້ນກຳນົດຮູ້ບໍ່ໄດ້ ເບື້ອງຕົ້ນແລະບ່ອນສຸດບໍ່ພາກົດແກ່ເຫຼົ່າສັດຜູ້ມີອະວິດຊາອັດກັ້ນ ມີຕັນຫາມັດໄວ້ ແລ່ນໄປ ທ່ອງທ່ຽວໄປ

ສ່ວນຄວາມດັບກອງແຫ່ງຄວາມມືດຄືອະວິດຊາບໍ່ໃຫ້ເຫຼືອດ້ວຍວິຣາຄະ ນີ້ເປັນທາງອັນສະງົບ ນີ້ເປັນທາງອັນປະນີດ ຄື ຄວາມລະງັບສັງຂານທັງປວງ ຄວາມສະລະຄືນອຸປະທິທັງປວງ ຄວາມສິ້ນຕັນຫາ ຄວາມສິ້ນກຳໜັດ ຄວາມດັບ ນິບພານ ກໍປັນຍາຂອງອະຣິຍະສາວົກນັ້ນເພິ່ງຈັດເປັນປັນຍິນຊີ

ສາຣີບຸດ ອະຣິຍະສາວົກຜູ້ມີສັດທານັ້ນພະຍາຍາມແບບນີ້ ເມື່ອພະຍາຍາມແລ້ວຣະນຶກແບບນີ້ ເມື່ອຣະນຶກແລ້ວຕັ້ງໝັ້ນແບບນີ້ ເມື່ອຕັ້ງໝັ້ນແລ້ວຮູ້ແຈ້ງແບບນີ້ ເມື່ອຮູ້ແຈ້ງແລ້ວຍ່ອມ ເຊື່ອໝັ້ນແບບນີ້ວ່າ ນີ້ແລ ຄືທຳທີ່ເຮົາໄດ້ຟັງມາກ່ອນ ບັດນີ້ເຮົາຖືກຕ້ອງດ້ວຍນາມກາຍນັ້ນຢູ່ ແລະເຫັນແຈ້ງແທງຕະຫຼອດດ້ວຍປັນຍາ ກໍສັດທາຂອງອະຣິຍະສາວົກນັ້ນເພິ່ງຈັດເປັນສັດທິນຊີ

**ອາປະນະສູດທີ ໑໐ ຈົບ**

**ຊະຣາວັກທີ ໕ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໖. ສູກະຣະຂະຕະວັກ

## ໝວດວ່າດ້ວຍຖ້ຳສຸກະຣະຂາຕາ

## ໑. ສາລະສູດ

### ວ່າດ້ວຍພຣະທຳເທດສະໜາທີ່ໝູ່ບ້ານພຣາມຊື່ສາລາ

[໕໔໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໝູ່ບ້ານພາມຊື່ສາລາ ແຄວັນໂກສົນໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດ ວ່າ

ພິກຂຸທັງຫຼາຍ ສັດເດຍຣັດສານເຫຼົ່າໃດເຫຼົ່າໜຶ່ງ ພະຍາຣາດຊະສີຊາວໂລກກ່າວວ່າເລີດກວ່າສັດເດຍຣັດສານເຫຼົ່ານັ້ນ ຍ້ອນພະລະກຳລັງ ຄວາມໄວ ຄວາມກ້າ ແມ່ນສັນໃດ ໂພທິປັກຂິຍະທຳເຫຼົ່າໃດເຫຼົ່າໜຶ່ງ ປັນຍິນຊີບັນດິດກ່າວວ່າເລີດກວ່າໂພທິປັກຂິຍະທຳເຫຼົ່ານັ້ນ ຍ້ອນເປັນໄປເພື່ອຄວາມຕັດສະຣູ້ ກໍຄືກັນສັນນັ້ນ

ໂພທິປັກຂິຍະທຳ ອັນໃດແດ່ ຄື

| | | |
|---|---|---|
| ສັດທິນຊີ | ເປັນໂພທິປັກຂິຍະທຳ | ຍ່ອມເປັນໄປເພື່ອຄວາມຕັດສະຣູ້ |
| ວິຣິຍິນຊີ | ເປັນໂພທິປັກຂິຍະທຳ | ຍ່ອມເປັນໄປເພື່ອຄວາມຕັດສະຣູ້ |
| ສະຕິນຊີ | ເປັນໂພທິປັກຂິຍະທຳ | ຍ່ອມເປັນໄປເພື່ອຄວາມຕັດສະຣູ້ |
| ສະມາທິນຊີ | ເປັນໂພທິປັກຂິຍະທຳ | ຍ່ອມເປັນໄປເພື່ອຄວາມຕັດສະຣູ້ |
| ປັນຍິນຊີ | ເປັນໂພທິປັກຂິຍະທຳ | ຍ່ອມເປັນໄປເພື່ອຄວາມຕັດສະຣູ້ |

ພິກຂຸທັງຫຼາຍ ສັດເດຍຣັດສານເຫຼົ່າໃດເຫຼົ່າໜຶ່ງ ພະຍາຣາດຊະສີຊາວໂລກກ່າວວ່າເລີດກວ່າສັດເຫຼົ່ານັ້ນ ຍ້ອນພະລະກຳລັງ ຄວາມໄວ ຄວາມກ້າ ແມ່ນສັນໃດ ໂພທິປັກຂິຍະທຳເຫຼົ່າໃດເຫຼົ່າໜຶ່ງ ປັນຍິນຊີ ບັນດິດກ່າວວ່າເລີດກວ່າໂພທິປັກຂິຍະທຳເຫຼົ່ານັ້ນ ຍ້ອນເປັນໄປເພື່ອຄວາມຕັດສະຣູ້ ກໍຄືກັນສັນນັ້ນ

**ສາລະສູດທີ ໑ ຈົບ**

## ໘. ມັນລະກະສູດ

### ວ່າດ້ວຍພຣະທຳເທດສະໜາທີ່ນິຄົມຂອງຊາວມັນລະ

[໕໘໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ນິຄົມຂອງຊາວມັນລະຊື່ ອຸຣຸເວລະກັປປະແຄວັນ ມັນລະໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ອະຣິຍະຍານຍັງບໍ່ເກີດຂຶ້ນແກ່ອະຣິຍະສາວົກພຽງໃດ ອິນຊີ ໕ ປະການ ກໍຊື່ວ່າ ຍັງບໍ່ຕັ້ງໝັ້ນ ບໍ່ຢັ່ງລົງພຽງນັ້ນ ແຕ່ເມື່ອໃດ ອະຣິຍະຍານເກີດຂຶ້ນແກ່ອະຣິຍະສາວົກ ເມື່ອນັ້ນ ອິນຊີ ໕ ປະການກໍຊື່ວ່າຍ່ອມຕັ້ງໝັ້ນ ຍ່ອມຢັ່ງລົງ

ພິກຂຸທັງຫຼາຍ ຍອດຂອງເຮືອນຍອດເຂົາຍັງບໍ່ຍົກຂຶ້ນພຽງໃດ ກອນທັງຫຼາຍກໍຊື່ວ່າຍັງບໍ່ໄດ້ຕັ້ງ ຍັງບໍ່ໄດ້ໃສ່ພຽງນັ້ນ ແຕ່ເມື່ອໃດ ຍອດຂອງເຮືອນເຂົາຍົກຂຶ້ນແລ້ວ ເມື່ອນັ້ນ ກອນທັງຫຼາຍກໍຊື່ວ່າໄດ້ຕັ້ງ ໄດ້ໃສ່ໄວ້ ແມ່ນສັນໃດ ອະຣິຍະຍານກໍຄືກັນສັນນັ້ນ ຍັງບໍ່ເກີດຂຶ້ນແກ່ອະຣິຍະສາວົກພຽງໃດ ອິນຊີ ໕ ປະການກໍຊື່ວ່າ ຍັງບໍ່ຕັ້ງໝັ້ນ ບໍ່ຢັ່ງລົງ ພຽງນັ້ນ ແຕ່ເມື່ອໃດ ອະຣິຍະຍານເກີດຂຶ້ນແກ່ອະຣິຍະສາວົກ ເມື່ອນັ້ນ ອິນຊີ ໕ ປະການ

ກໍຊື່ວ່າຍ່ອມຕັ້ງໝັ້ນ ຍ່ອມຢັ່ງລົງ

ອິນຊີ ໕ ປະການ ອັນໃດແດ່ ຄື

| | |
|---|---|
| ໑. ສັດທິນຊີ | ໒. ວິຣິຍິນຊີ |
| ໓. ສະຕິນຊີ | ໔. ສະມາທິນຊີ |

ພິກຂຸທັງຫຼາຍ ສັດທາທີ່ເປັນໄປຕາມປັນຍາ ວິຣິຍະທີ່ເປັນໄປຕາມປັນຍາ ສະຕິທີ່ເປັນໄປຕາມປັນຍາ ສະມາທິທີ່ເປັນໄປຕາມປັນຍາຂອງອະຣິຍະສາວົກຜູ້ມີປັນຍາ ຍ່ອມຕັ້ງໝັ້ນ

**ມັນລະກະສູດທີ ໘ ຈົບ**

# ໓. ເສຂະສູດ

## ວ່າດ້ວຍພຣະເສຂະແລະພຣະອະເສຂະ

[໕໘໓] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໂຄສິຕາຣາມ ເຂດເມືອງໂກສຳພີ

ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ເຫດທີ່ໃຫ້ພິກຂຸຜູ້ເປັນເສຂະອາໄສແລ້ວຕັ້ງຢູ່ໃນເສຂະພູມ ຮູ້ແຈ້ງວ່າ ເຮົາເປັນພຣະເສຂະ ແລະທີ່ໃຫ້ພິກຂຸຜູ້ເປັນອະເສຂະອາໄສແລ້ວຕັ້ງຢູ່ໃນອະເສຂະພູມ ຮູ້ແຈ້ງວ່າ ເຮົາເປັນພຣະອະເສຂະມີຢູ່ບໍ?

ພິກຂຸທັງຫຼາຍ ຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ

ພິກຂຸທັງຫຼາຍ ເຫດທີ່ໃຫ້ພິກຂຸຜູ້ເປັນເສຂະອາໄສແລ້ວຕັ້ງຢູ່ໃນເສຂະພູມ ຮູ້ແຈ້ງວ່າ ເຮົາເປັນພຣະເສຂະ ແລະທີ່ໃຫ້ພິກຂຸຜູ້ເປັນອະເສຂະອາໄສແລ້ວຕັ້ງຢູ່ໃນອະເສຂະພູມ ຮູ້ແຈ້ງວ່າ ເຮົາເປັນພຣະອະເສຂະມີຢູ່

ເຫດທີ່ໃຫ້ພິກຂຸຜູ້ເປັນເສຂະອາໄສແລ້ວຕັ້ງຢູ່ໃນເສຂະພູມ ຮູ້ແຈ້ງວ່າ ເຮົາເປັນພຣະເສຂະເປັນແນວໃດ?

ຄື ພິກຂຸຜູ້ເປັນເສຂະໃນທຳວິໄນນີ້ຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

ເຫດທີ່ໃຫ້ພິກຂຸຜູ້ເປັນເສຂະອາໄສແລ້ວຕັ້ງຢູ່ໃນເສຂະພູມ ຮູ້ແຈ້ງວ່າ ເຮົາເປັນພຣະເສຂະເປັນແນວນີ້ແລ

ອີກປະການໜຶ່ງ ພິກຂຸຜູ້ເປັນເສຂະພິຈາລະນາເຫັນວ່າ ສະມະນະຫຼືພາມອື່ນນອກສາດສະໜານີ້ຜູ້ທີ່ສະແດງທຳຈິງແທ້ແນ່ນອນ ຄື ພຣະຜູ້ມີພຣະພາກເຈົ້າມີຢູ່ບໍ? ທ່ານຮູ້ແຈ້ງວ່າ ສະມະນະ ຫຼື ພາມອື່ນນອກສາດສະໜານີ້ຜູ້ທີ່ສະແດງທຳຈິງແທ້ແນ່ນອນຄື ພຣະຜູ້ມີພຣະພາກເຈົ້າບໍ່ມີເລີຍ

ເຫດທີ່ໃຫ້ພິກຂຸຜູ້ເປັນເສຂະອາໄສແລ້ວຕັ້ງຢູ່ໃນເສຂະພູມ ຮູ້ແຈ້ງວ່າ ເຮົາເປັນພຣະເສຂະເປັນແນວນີ້ແລ

ອີກປະການໜຶ່ງ ພິກຂຸຜູ້ເປັນເສຂະຍ່ອມຮູ້ແຈ້ງອິນຊີ ໕ ປະການ ຄື

໑. ສັດທິນຊີ ໒. ສະຕິນຊີ ໓. ສະມາທິນຊີ ໔. ວິຣິຍິນຊີ ໕. ປັນຍິນຊີ

| | |
|---|---|
| ໑. ສັດທິນຊີ | ໔. ວິຣິຍິນຊີ |
| ໒. ສະຕິນຊີ | ໔. ສະມາທິນຊີ |
| ໕. ປັນຍິນຊີ | |

ອິນຊີ ໕ ປະການເຊິ່ງມີຄະຕິ ມີຄວາມເປັນເລີດ ມີຜົນ ແລະມີບ່ອນສຸດ ທ່ານຍັງບໍ່ຖືກຕ້ອງດ້ວຍນາມກາຍ ແຕ່ເຫັນແຈ້ງແທງຕະຫຼອດດ້ວຍປັນຍາ

ເຫດທີ່ໃຫ້ພິກຂຸຜູ້ເປັນເສຂະອາໄສແລ້ວຕັ້ງຢູ່ໃນເສຂະພູມ ຮູ້ແຈ້ງວ່າ ເຮົາເປັນພຣະເສຂະເປັນແນວນີ້ແລ

ເຫດທີ່ໃຫ້ພິກຂຸຜູ້ເປັນອະເສຂະອາໄສແລ້ວຕັ້ງຢູ່ໃນອະເສຂະພູມ ຮູ້ແຈ້ງວ່າ ເຮົາເປັນພຣະອະເສຂະ ເປັນແນວໃດ?

ຄື ພິກຂຸຜູ້ເປັນອະເສຂະໃນທຳວິໄນນີ້ຍ່ອມຮູ້ແຈ້ງອິນຊີ ໕ ປະການ ຄື

| | |
|---|---|
| ໑. ສັດທິນຊີ | ໔. ວິຣິຍິນຊີ |
| ໒. ສະຕິນຊີ | ໔. ສະມາທິນຊີ |
| ໕. ປັນຍິນຊີ | |

ອິນຊີ ໕ ປະການເຊິ່ງມີຄະຕິ ມີຄວາມເປັນເລີດ ມີຜົນ ແລະມີບ່ອນສຸດ ທ່ານຍັງບໍ່ຖືກຕ້ອງດ້ວຍນາມກາຍ ແຕ່ເຫັນແຈ້ງແທງຕະຫຼອດດ້ວຍປັນຍາ

ເຫດທີ່ໃຫ້ພິກຂຸຜູ້ເປັນອະເສຂະອາໄສແລ້ວຕັ້ງຢູ່ໃນອະເສຂະພູມ ຮູ້ແຈ້ງວ່າ ເຮົາເປັນ

ພຣະອະເສຂະ ເປັນແນວນີ້ແລ

ອີກປະການໜຶ່ງ ພິກຂຸຜູ້ເປັນອະເສຂະຍ່ອມຮູ້ແຈ້ງອິນຊີ ໖ ປະການ ຄື

| | |
|---|---|
| ໑. ຈັກຂຸນຊີ | ໔. ໂສຕິນຊີ |
| ໒. ຄານິນຊີ | ໔. ຊິວຫິນຊີ |
| ໕. ກາຍິນຊີ | ໖. ມະນິນຊີ |

ທ່ານຮູ້ແຈ້ງວ່າ ອິນຊີ ໖ ປະການນີ້ຈັກດັບທຸກສິ່ງໂດຍອາການທັງໝົດທຸກຢ່າງບໍ່ເຫຼືອໂດຍປະການທັງປວງ ແລະອິນຊີ ໖ ປະການອື່ນກໍຈັກບໍ່ເກີດໃນພົບໃດ ໆ

ເຫດທີ່ໃຫ້ພິກຂຸຜູ້ເປັນອະເສຂະອາໄສແລ້ວຕັ້ງຢູ່ໃນອະເສຂະພູມ ຮູ້ແຈ້ງວ່າ ເຮົາເປັນພຣະອະເສຂະ ເປັນແນວນີ້ແລ

**ເສຂະສູຕທີ ໓ ຈົບ**

# ໔. ປະທະສູດ

## ວ່າດ້ວຍອຸປະມາດ້ວຍຮອຍຕີນສັດ

[໔໘໔] ພິກຂຸທັງຫຼາຍ ຮອຍຕີນຂອງສັດທີ່ທ່ຽວໄປເທິງແຜ່ນດິນທັງໝົດລວມລົງໃນຮອຍຕີນຊ້າງ ຮອຍຕີນຊ້າງຊາວໂລກກ່າວວ່າເລີດກວ່າຮອຍຕີນເຫຼົ່ານັ້ນ ຍ້ອນເປັນຮອຍໃຫຍ່ ແມ່ນສັນໃດ ບົດແຫ່ງທຳເຫຼົ່າໃດເຫຼົ່າໜຶ່ງຍ່ອມເປັນໄປເພື່ອຄວາມຕັດສະຣູ້ປັນຍິນຊີ ບັນດິດກ່າວວ່າເລີດກວ່າບົດແຫ່ງທຳເຫຼົ່ານັ້ນ ຍ້ອນເປັນໄປເພື່ອຄວາມຕັດສະຣູ້ ກໍຄືກັນສັນນັ້ນ

ບົດແຫ່ງທຳທີ່ເປັນໄປເພື່ອຄວາມຕັດສະຣູ້ ອັນໃດແດ່ ຄື

ສັດທິນຊີ ເປັນບົດແຫ່ງທຳ ຍ່ອມເປັນໄປເພື່ອຄວາມຕັດສະຣູ້
ວິຣິຍິນຊີ ເປັນບົດແຫ່ງທຳ ຍ່ອມເປັນໄປເພື່ອຄວາມຕັດສະຣູ້
ສະຕິນຊີ ເປັນບົດແຫ່ງທຳ ຍ່ອມເປັນໄປເພື່ອຄວາມຕັດສະຣູ້
ສະມາທິນຊີ ເປັນບົດແຫ່ງທຳ ຍ່ອມເປັນໄປເພື່ອຄວາມຕັດສະຣູ້
ປັນຍິນຊີ ເປັນບົດແຫ່ງທຳ ຍ່ອມເປັນໄປເພື່ອຄວາມຕັດສະຣູ້

ພິກຂຸທັງຫຼາຍ ຮອຍຕີນຂອງສັດທີ່ທ່ຽວໄປເທິງແຜ່ນດິນທັງໝົດລວມລົງໃນຮອຍຕີນຊ້າງ ຮອຍຕີນຊ້າງຊາວໂລກກ່າວວ່າເລີດກວ່າຮອຍຕີນເຫຼົ່ານັ້ນ ຍ້ອນເປັນຮອຍໃຫຍ່ ແມ່ນສັນໃດ ບົດແຫ່ງທຳເຫຼົ່າໃດເຫຼົ່າໜຶ່ງຍ່ອມເປັນໄປເພື່ອຄວາມຕັດສະຣູ້ ປັນຍິນຊີ ບັນດິດກ່າວວ່າເລີດກວ່າບົດແຫ່ງທຳເຫຼົ່ານັ້ນ ຍ້ອນເປັນໄປເພື່ອຄວາມຕັດສະຣູ້ ກໍຄືກັນສັນນັ້ນ

**ປະທະສູດທີ ໔ ຈົບ**

# ໕. ສາຣະສູດ

## ວ່າດ້ວຍອຸປະມາດ້ວຍແກ່ນໄມ້

[໔໘໕] ພິກຂຸທັງຫຼາຍ ກິ່ນຫອມທີ່ເກີດຈາກແກ່ນຊະນິດໃດຊະນິດໜຶ່ງ ຈັນແດງຊາວໂລກກ່າວວ່າເລີດກວ່າກິ່ນຫອມທີ່ເກີດຈາກແກ່ນເຫຼົ່ານັ້ນ ແມ່ນສັນໃດ ໂພທິປັກຂິຍະທຳເຫຼົ່າໃດເຫຼົ່າ

ໜຶ່ງ ປັນຍິນຊີ ບັນດິດກ່າວວ່າເລີດກວ່າໂພທິປັກຂິຍະທຳເຫຼົ່ານັ້ນ ຍ້ອນເປັນໄປເພື່ອຕັດສະຮູ້ ກໍຄືກັນສັນນັ້ນ

ໂພທິປັກຂິຍະທຳ ອັນໃດແດ່ ຄື

| | | |
|---|---|---|
| ສັດທິນຊີ | ເປັນໂພທິປັກຂິຍະທຳ | ຍ່ອມເປັນໄປເພື່ອຄວາມຕັດສະຮູ້ |
| ວິຣິຍິນຊີ | ฯລฯ | |
| ສະຕິນຊີ | ฯລฯ | |
| ສະມາທິນຊີ | ฯລฯ | |
| ປັນຍິນຊີ | ເປັນໂພທິປັກຂິຍະທຳ | ຍ່ອມເປັນໄປເພື່ອຄວາມຕັດສະຮູ້ |

ພິກຂຸທັງຫຼາຍ ຈັນແດງຊາວໂລກກ່າວວ່າເລີດກວ່າກິ່ນຫອມທີ່ເກີດຈາກແກ່ນເຫຼົ່ານັ້ນ ແມ່ນສັນໃດ ໂພທິປັກຂິຍະທຳເຫຼົ່າໃດເຫຼົ່າໜຶ່ງ ປັນຍິນຊີ ບັນດິດກ່າວວ່າເລີດກວ່າໂພທິປັກຂິຍະທຳທັງຫຼາຍເຫຼົ່ານັ້ນ ຍ້ອນເປັນໄປເພື່ອຄວາມຕັດສະຮູ້ ກໍຄືກັນສັນນັ້ນ

**ສາຣະສູດທີ ໕ ຈົບ**

# ໖. ປະຕິດຖິຕະສູດ

## ວ່າດ້ວຍພິກຂຸຕັ້ງຢູ່ໃນທຳອັນເປັນເອກ

[໕໘໖] ພິກຂຸທັງຫຼາຍ ອິນຊີ ໕ ປະການ ເປັນອັນພິກຂຸຜູ້ຕັ້ງຢູ່ໃນທຳອັນເປັນເອກຈະເລີນອົບຮົມດີແລ້ວ

ທຳອັນເປັນເອກ ຄືອັນໃດ?

ຄື ຄວາມບໍ່ຜະໝາດ

ຄວາມບໍ່ຜະໝາດ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຍ່ອມຮັກສາຈິດໃນທຳທັງຫຼາຍ ທັງທີ່ເປັນອາສະວະ ແລະທີ່ເປັນໄປພ້ອມກັບອາສະວະ ເມື່ອທ່ານຮັກສາຈິດໃນທຳທັງຫຼາຍ ທັງທີ່ເປັນອາສະວະແລະທີ່ເປັນໄປພ້ອມກັບອາສະວະ ສັດທິນຊີກໍດີ ວິຣິຍິນຊີກໍດີ ສະຕິນຊີກໍດີ ສະມາທິນຊີ ກໍດີ ປັນຍິນຊີ ກໍດີ ຍ່ອມເຖິງຄວາມຈະເລີນເຕັມທີ່

ພິກຂຸທັງຫຼາຍ ອິນຊີ ໕ ປະການເປັນອັນພິກຂຸຜູ້ຕັ້ງຢູ່ໃນທຳອັນເປັນເອກຈະເລີນ ອົບຮົມດີແລ້ວ ແມ່ນແນວນີ້ແລ

**ປະຕິດຖິຕະສູດທີ ໖ ຈົບ**

# ໗. ສະຫຳປະຕິພິມມະສູດ
## ວ່າດ້ວຍທ້າວສະຫຳບໍດີພົມ

[໕໘໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າທຳອິດຕັດສະຣູ້ ປະທັບຢູ່ໃຕ້ຕົ້ນອະຊະປາລະນິໂຄດ ແຄມຝັ່ງແມ່ນ້ຳເນຣັນຊະຣາ ເຂດອຸຣຸເວລາ ຊົງຫຼີບຫຼີກຢູ່ໃນບ່ອນສະງັດ ໄດ້ເກີດຄວາມຮ່ຳເພິງຂຶ້ນວ່າ ອິນຊີ ໕ ປະການທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະເປັນບ່ອນສຸດ

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະເປັນບ່ອນສຸດ
໒. ວິຣິຍິນຊີ ຯລຯ
໓. ສະຕິນຊີ ຯລຯ
໔. ສະມາທິນຊີ ຯລຯ
໕. ປັນຍິນຊີ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະເປັນບ່ອນສຸດ

ອິນຊີ ໕ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະເປັນບ່ອນສຸດ

ຄັ້ງນັ້ນ ທ້າວສະຫຳບໍດີພົມຮູ້ຄວາມຮ່ຳເພິງຂອງພຣະຜູ້ມີພຣະພາກເຈົ້າແລ້ວ ຈຶ່ງຫາຍໂຕຈາກພົມມະໂລກມາຜາກົດກົງພຣະພັກຂອງພຣະຜູ້ມີພຣະພາກເຈົ້າ ປຽບຄື ບຸຣຸດຜູ້ມີກຳລັງຢຽດແຂນອອກຫຼືຄູ້ແຂນເຂົ້າສັນນັ້ນ ຫົ່ມຜ້າບ່ຽງບ່າຂ້າງໜຶ່ງ ປະນົມ ອັນຊະລີໄປທາງພຣະຜູ້ມີພຣະພາກເຈົ້າແລ້ວຂາບທູນວ່າ ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ເລື້ອງນີ້ເປັນແນວນັ້ນ ຂ້າແດ່ພຣະສຸຄົດເຈົ້າ ເລື້ອງນີ້ເປັນແນວນັ້ນ ອິນຊີ ໕ ປະການທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະເປັນບ່ອນສຸດ

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະເປັນບ່ອນສຸດ

ຯລຯ

໕. ປັນຍິນຊີ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະເປັນບ່ອນສຸດ

ອິນຊີ ໕ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະເປັນບ່ອນສຸດ

ຂ້າແດ່ພຣະອົງຜູ້ຈະເລີນ ເລື້ອງເຄີຍມີມາແລ້ວ ຂ້າພຣະອົງໄດ້ປະພຶດພົມມະຈັນໃນພຣະກັດສະປະສຳມາສຳພຸດທະເຈົ້າ ແມ່ນໃນສະໄໝນັ້ນ ພວກເຂົາຮູ້ຈັກຂ້າພຣະອົງແນວນີ້ວ່າ ສະຫະກະພິກຂຸ ສະຫະກະພິກຂຸ ຂ້າພຣະອົງນັ້ນຄາຍການສັນທະໃນການທັງຫຼາຍ ຫຼັງຈາກຕາຍແລ້ວໄປເກີດໃນສຸກຄະຕິພົມມະໂລກ ຍ້ອນອິນຊີ ໕ ປະການທີ່ຂ້າພຣະອົງຈະເລີນ ເຮັດໃຫ້ຫຼາຍແລ້ວແມ່ນໃນພົມມະໂລກນັ້ນ ພວກເຂົາກໍຮູ້ຈັກຂ້າພຣະອົງວ່າ ທ້າວສະຫຳບໍດີພົມ ທ້າວສະຫຳບໍດີພົມຂ້າແດ່ພຣະຜູ້ມີພຣະພາກເຈົ້າ ເລື້ອງນີ້ເປັນແນວນັ້ນ ຂ້າແດ່ ພຣະສຸຄົດເຈົ້າ ເລື້ອງນີ້ເປັນແນວນັ້ນ ຂ້າພຣະອົງຮູ້ ຂ້າພຣະອົງເຫັນຂໍ້ທີ່ອິນຊີທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຢັ່ງລົງສູ່ອະມະຕະ ມີອະມະຕະເປັນເບື້ອງໜ້າ ມີອະມະຕະເປັນບ່ອນສຸດ

**ສະຫຳປະຕິພົມມະສູດທີ ໗ ຈົບ**

# ໘. ສູກະຣະຂະຕະສູດ

## ວ່າດ້ວຍການສົນທະນາທຳທີ່ຖ້ຳສູກະຣະຂາຕາ

[໕໘໘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ຖ້ຳສຸກະຣະຂາຕາ ເຂົາຄິດຊະກູດເຂດເມືອງຣາຊະຄຶຫ໌ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກທ່ານພຣະສາຣີບຸດມາຕັດຖາມວ່າ ສາຣີບຸດ ພິກຂຸຂີນາສົບເຫັນອຳນາດປະໂຫຍດອັນໃດ ຈຶ່ງປະພຶດນອບນ້ອມຢ່າງຍິ່ງໃນຕະຖາຄົດ ຫຼື ໃນຄຳສອນຂອງຕະຖາຄົດ

ທ່ານພຣະສາຣີບຸດທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸຂີນາສົບເຫັນທຳເປັນແດນກະເສມຈາກໂຍຄະອັນປະເສີດ ຈຶ່ງປະພຶດນອບນ້ອມຢ່າງຍິ່ງໃນພຣະຕະຖາຄົດ ຫຼືໃນຄຳສອນຂອງພຣະຕະຖາຄົດ

ດີແລ້ວ ດີແລ້ວ ສາຣີບຸດ ພິກຂຸຂີນາສົບເຫັນທຳເປັນແດນກະເສມຈາກໂຍຄະອັນຍອດຢ້ຽມ ຈຶ່ງປະພຶດນອບນ້ອມຢ່າງຍິ່ງໃນຕະຖາຄົດ ຫຼື ໃນຄຳສອນຂອງຕະຖາຄົດ

ທຳເປັນແດນກະເສມຈາກໂຍຄະອັນປະເສີດທີ່ພິກຂຸຂີນາສົບເຫັນຢູ່ ຈຶ່ງປະພຶດນອບນ້ອມຢ່າງຍິ່ງໃນຕະຖາຄົດ ຫຼື ໃນຄຳສອນຂອງຕະຖາຄົດ ເປັນແນວໃດ?

ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸຂີນາສົບໃນພຣະທຳວິໄນນີ້ຈະເລີນສັດທິນຊີທີ່ໃຫ້ເຖິງຄວາມສະງົບ ໃຫ້ເຖິງຄວາມຕັດສະຣູ້ ຈະເລີນວິຣິຍິນຊີ ຯລຯ ຈະເລີນສະຕິນຊີ ຯລຯ ຈະເລີນສະມາທິນຊີ ຯລຯ ຈະເລີນປັນຍິນຊີ ທີ່ໃຫ້ເຖິງຄວາມສະງົບ ໃຫ້ເຖິງຄວາມຕັດສະຣູ້ ຂ້າແດ່ພຣະອົງຜູ້ຈະເລີນ ທຳເປັນແດນກະເສມຈາກໂຍຄະອັນປະເສີດນີ້ທີ່ພິກຂຸຂີນາສົບເຫັນຢູ່ ຈຶ່ງປະພຶດນອບນ້ອມຢ່າງຍິ່ງໃນພຣະຕະຖາຄົດ ຫຼື ໃນຄຳສອນຂອງພຣະຕະຖາຄົດເຈົ້າ

ດີແລ້ວ ດີແລ້ວ ສາຣີບຸດ ທຳເປັນແດນກະເສມຈາກໂຍຄະອັນປະເສີດນີ້ ທີ່ພິກຂຸຂີນາສົບເຫັນຢູ່ ຈຶ່ງປະພຶດນອບນ້ອມຢ່າງຍິ່ງໃນຕະຖາຄົດ ຫຼື ໃນຄຳສອນຂອງຕະຖາຄົດ

ສາຣີບຸດ ການນອບນ້ອມຢ່າງຍິ່ງທີ່ພິກຂຸຂີນາສົບປະພຶດໃນຕະຖາຄົດ ຫຼື ໃນຄຳສອນຂອງຕະຖາຄົດ ເປັນແນວໃດ?

ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸຂີນາສົບໃນພຣະທຳວິໄນນີ້ມີຄວາມເຄົາລົບຢຳເກງໃນພຣະສາດສະດາ ໃນພຣະທຳ ໃນພຣະສົງ ໃນສິກຂາ ໃນສະມາທິ ຂ້າແດ່ພຣະອົງຜູ້ຈະເລີນ ນີ້ແລ ຄືການນອບນ້ອມຢ່າງຍິ່ງທີ່ພິກຂຸຂີນາສົບປະພຶດໃນພຣະຕະຖາຄົດເຈົ້າ ຫຼື ໃນຄຳສອນຂອງພຣະຕະຖາຄົດເຈົ້າ

ດີແລ້ວ ດີແລ້ວ ສາຣີບຸດ ການນອບນ້ອມຢ່າງຍິ່ງນີ້ທີ່ພິກຂຸຂີນາສົບປະພຶດໃນຕະຖາຄົດຫຼືໃນຄຳສອນຂອງຕະຖາຄົດ

**ສູກະຣະຂະຕະສູດທີ ๙ ຈົບ**

# ๑. ປະຖົມອຸບປາທະສູດ

## ວ່າດ້ວຍຄວາມເກີດຂຶ້ນແຫ່ງອິນຊີ ສູດທີ ໑

[໕໔໑] ເລື່ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ເວັ້ນຄວາມອຸບັດຂຶ້ນຂອງພຣະຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າຍ່ອມບໍ່ເກີດຂຶ້ນ

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີ
໒. ວິຣິຍິນຊີ
໓. ສະຕິນຊີ
໔. ສະມາທິນຊີ
໕. ປັນຍິນຊີ

ອິນຊີ ໕ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ເວັ້ນຄວາມອຸບັດຂຶ້ນຂອງພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ຍ່ອມບໍ່ເກີດຂຶ້ນ

**ປະຖົມອຸບປາທະສູດທີ ໙ ຈົບ**

## ໑໐. ທຸຕິຍະອຸບປາທະສູດ

### ວ່າດ້ວຍຄວາມເກີດຂຶ້ນແຫ່ງອິນຊີ ສູດທີ ໘

[໕໓໐] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ເວັ້ນວິໄນຂອງພຣະສຸຄົດ ຍ່ອມບໍ່ເກີດຂຶ້ນ

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີ
໒. ວິຣິຍິນຊີ
໓. ສະຕິນຊີ
໔. ສະມາທິນຊີ
໕. ປັນຍິນຊີ

ອິນຊີ ໕ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ທີ່ຍັງບໍ່ເກີດຍ່ອມເກີດຂຶ້ນ ເວັ້ນວິໄນຂອງພຣະສຸຄົດ ຍ່ອມບໍ່ເກີດຂຶ້ນ

**ທຸຕິຍະອຸບປາທະສູດທີ ໑໐ ຈົບ**

**ສູກະຣະຂະຕະວັກທີ ໖ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ສາລະສູດ
໒. ມັນລະກະສູດ
໓. ເສຂະສູດ
໔. ປະທະສູດ
໕. ສາຣະສູດ
໖. ປະຕິດຖິຕະສູດ
໗. ສະຫຳປະຕິພິມມະສູດ
໘. ສູກະຣະຂະຕະສູດ
໙. ປະຖົມອຸບປາທະສູດ
໑໐. ທຸຕິຍະອຸບປາທະສູດ

# ໗. ໂພທິປັກຂິຍະວັກ

**ໝວດວ່າດ້ວຍໂພທິປັກຂິຍະທຳ**

## ໑. ສັນໂຍຊະນະສູດ

### ວ່າດ້ວຍທຳທີ່ເປັນໄປເພື່ອລະສັງໂຍດ

[໕໓໑] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອລະສັງໂຍດ

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີ ຯລຯ ໕. ປັນຍິນຊີ

ອິນຊີ ໕ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອລະສັງໂຍດ

**ສັນໂຍຊະນະສູດທີ ໑ ຈົບ**

## ໘. ອະນຸສະຍະສູດ

### ວ່າດ້ວຍທຳທີ່ເປັນໄປເພື່ອຖອນອະນຸໄສ

[໕໓໘] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຖອນອະນຸໄສ

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີ ຯລຯ ໕. ປັນຍິນຊີ

ອິນຊີ ໕ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຖອນອະນຸໄສ

**ອະນຸສະຍະສູດທີ ໘ ຈົບ**

# ໓. ປະຣິນຍາສູດ

## ວ່າດ້ວຍທຳທີ່ເປັນໄປເພື່ອກຳນົດຮູ້ອັທທານະ

[໕໓໓] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອກຳນົດຮູ້ອັທທານະ(ທາງໄກ)

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີ ฯລฯ ໕. ປັນຍິນຊີ

ອິນຊີ ໕ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອກຳນົດຮູ້ອັດທານະ

**ປະຣິນຍາສູດທີ່ ໓ ຈົບ**

# ໔. ອາສະວັກຂະຍະສູດ

## ວ່າດ້ວຍທຳທີ່ເປັນໄປເພື່ອຄວາມສິ້ນອາສະວະ

[໕໓໔] ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມສິ້ນອາສະວະ

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີ ฯລฯ ໕. ປັນຍິນຊີ

ອິນຊີ ໕ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມສິ້ນອາສະວະ

ອິນຊີ ໕ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອລະສັງໂຍດ ເພື່ອຖອນອະນຸໄສ ເພື່ອກຳນົດຮູ້ອັທທານະ ເພື່ອຄວາມສິ້ນອາສະວະ

ອິນຊີ ໕ ປະການ ອັນໃດແດ່ ຄື

໑. ສັດທິນຊີ ฯລฯ ໕. ປັນຍິນຊີ

ອິນຊີ ๕ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອລະສັງໂຍດ ເພື່ອຖອນອະນຸໄສ ເພື່ອກຳນົດຮູ້ອັທທານະ ເພື່ອຄວາມສິ້ນອາສະວະ

**ອາສະວັກຂະຍະສູດທີ ๔ ຈົບ**

# ๕. ປະຖົມຜະລະສູດ

## ວ່າດ້ວຍຜົນແຫ່ງການຈະເລີນອິນຊີ ສູດທີ ๑

[๕๓๕] ພິກຂຸທັງຫຼາຍ ອິນຊີ ๕ ປະການນີ້

ອິນຊີ ๕ ປະການ ອັນໃດແດ່ ຄື

๑. ສັດທິນຊີ ฯລฯ ๕. ປັນຍິນຊີ

ອິນຊີ ๕ ປະການນີ້

ພິກຂຸທັງຫຼາຍ ຍ້ອນອິນຊີ ๕ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ເພິ່ງຫວັງຜົນແນວ ๑ ໃນ ๒ ແນວ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼືເມື່ອຍັງມີອຸປາທານເຫຼືອຢູ່ ກໍຈັກເປັນພຣະອະນາຄາມີ

**ປະຖົມຜະລະສູດທີ ๕ ຈົບ**

# ๖. ທຸຕິຍະຜະລະສູດ

## ວ່າດ້ວຍຜົນແຫ່ງການຈະເລີນອິນຊີ ສູດທີ ๒

[๕๓๖] ພິກຂຸທັງຫຼາຍ ອິນຊີ ๕ ປະການນີ້

ອິນຊີ ๕ ປະການ ອັນໃດແດ່ ຄື

๑. ສັດທິນຊີ ฯລฯ ๕. ປັນຍິນຊີ

ອິນຊີ ๕ ປະການນີ້

ພິກຂຸທັງຫຼາຍ ຍ້ອນອິນຊີ ๕ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ເພິ່ງຫວັງຜະລານິສົງ ๗ ປະການ

ຜະລານິສົງ ๗ ປະການ ອັນໃດແດ່ ຄື

໑. ຈະໄດ້ບັນລຸອະຣະຫັດຕະຜົນທັນທີໃນປັດຈຸບັນ
໔. ຖ້າບໍ່ໄດ້ບັນລຸອະຣະຫັດຕະຜົນໃນປັດຈຸບັນ ຈະໄດ້ບັນລຸໃນເວລາໃກ້ຕາຍ
๓. ຖ້າໃນປັດຈຸບັນແລະເວລາໃກ້ຕາຍຍັງບໍ່ໄດ້ບັນລຸ ກໍຈະໄດ້ເປັນພຣະອະນາຄາມີ ຜູ້ອັນຕະຣາປະຣິນິບພາຍີ
໔. ຯລຯ ກໍຈະໄດ້ເປັນພຣະອະນາຄາມີຜູ້ອຸປະຫັດຈະປະຣິນິບພາຍີ
໕. ຯລຯ ກໍຈະໄດ້ເປັນພຣະອະນາຄາມີຜູ້ອະສັງຂາຣະປະຣິນິບພາຍີ
໖. ຯລຯ ກໍຈະໄດ້ເປັນພຣະອະນາຄາມີຜູ້ສະສັງຂາຣະປະຣິນິບພາຍີ
໗. ຯລຯ ກໍຈະໄດ້ເປັນພຣະອະນາຄາມີຜູ້ອຸດທັງໂສໂຕອະກະນິດຖະຄາມີ ຍ້ອນອຸທະທຳພາຄິຍະສັງໂຍດ ໕ ປະການສິ້ນໄປ

ພິກຂຸທັງຫຼາຍ ຍ້ອນອິນຊີ ໕ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ເພິ່ງຫວັງຜະລານິສົງ ໗ ປະການນີ້

**ທຸຕິຍະຜະລະສູດທີ ໖ ຈົບ**

# ໗. ປະຖົມຣຸກຂະສູດ

## ວ່າດ້ວຍອຸປະມາດ້ວຍຕົ້ນໄມ້ ສູດທີ ໑

[໕๓໗] ພິກຂຸທັງຫຼາຍ ຕົ້ນໄມ້ທີ່ມີຢູ່ໃນຊົມພູທະວີບເຫຼົ່າໃດເຫຼົ່າໜຶ່ງ ຕົ້ນຫວ້າ ຊາວໂລກກ່າວວ່າເລີດກວ່າຕົ້ນໄມ້ເຫຼົ່ານັ້ນ ແມ່ນສັນໃດ ໂພທິປັກຂິຍະທຳເຫຼົ່າໃດເຫຼົ່າໜຶ່ງ ປັນຍິນຊີ ບັນດິດກ່າວວ່າ ເລີດກວ່າໂພທິປັກຂິຍະທຳເຫຼົ່ານັ້ນ ຍ້ອນເປັນໄປເພື່ອຄວາມຕັດສະຣູ້ ກໍຄືກັນສັນນັ້ນ

ໂພທິປັກຂິຍະທຳ ອັນໃດແດ່ ຄື

ສັດທິນຊີເປັນໂພທິປັກຂິຍະທຳ ຍ່ອມເປັນໄປເພື່ອຄວາມຕັດສະຣູ້
ວິຣິຍິນຊີ ຯລຯ
ສະຕິນຊີ ຯລຯ
ສະມາທິນຊີ ຯລຯ
ປັນຍິນຊີ ເປັນໂພທິປັກຂິຍະທຳ ຍ່ອມເປັນໄປເພື່ອຄວາມຕັດສະຣູ້

ພິກຂຸທັງຫຼາຍ ຕົ້ນໄມ້ເຫຼົ່າໃດເຫຼົ່າໜຶ່ງທີ່ມີຢູ່ໃນຊົມພູທະວີບ ຕົ້ນຫວ້າຊາວໂລກກ່າວວ່າ

ເລີດກວ່າຕົ້ນໄມ້ເຫຼົ່ານັ້ນ ແມ່ນສັນໃດ ໂພທິປັກຂິຍະທຳເຫຼົ່າໃດເຫຼົ່າໜຶ່ງ ປັນຍິນຊີ ບັນດິດກ່າວວ່າເລີດກວ່າໂພທິປັກຂິຍະທຳເຫຼົ່ານັ້ນ ຍ້ອນເປັນໄປເພື່ອຄວາມຕັດສະຣູ້ ກໍຄືກັນສັນນັ້ນ

**ປະຖົມຣຸກຂະສູດທີ ໗ ຈົບ**

## ໘. ທຸຕິຍະຣຸກຂະສູດ

## ວ່າດ້ວຍອຸປະມາດ້ວຍຕົ້ນໄມ້ ສູດທີ ໘

[໔໓໘] ພິກຂຸທັງຫຼາຍ ຕົ້ນໄມ້ເຫຼົ່າໃດເຫຼົ່າໜຶ່ງຂອງເຫຼົ່າເທບຊັ້ນຕາວະຕິງສາ ຕົ້ນປາຣິສັດຕະກະ (ຕົ້ນທອງຫຼາງ) ຊາວໂລກກ່າວວ່າເລີດກວ່າຕົ້ນໄມ້ເຫຼົ່ານັ້ນ ແມ່ນສັນໃດ ໂພທິປັກຂິຍະທຳເຫຼົ່າໃດເຫຼົ່າໜຶ່ງ ປັນຍິນຊີ ບັນດິດກ່າວວ່າເລີດກວ່າໂພທິປັກຂິຍະທຳເຫຼົ່ານັ້ນ ຍ້ອນເປັນໄປເພື່ອຄວາມຕັດສະຣູ້ ກໍຄືກັນສັນນັ້ນ

ໂພທິປັກຂິຍະທຳ ອັນໃດແດ່ ຄື

ສັດທິນຊີເປັນໂພທິປັກຂິຍະທຳ ຍ່ອມເປັນໄປເພື່ອຄວາມຕັດສະຣູ້
ວິຣິຍິນຊີ ฯລฯ
ສະຕິນຊີ ฯລฯ
ສະມາທິນຊີ ฯລฯ
ປັນຍິນຊີ ເປັນໂພທິປັກຂິຍະທຳ ຍ່ອມເປັນໄປເພື່ອຄວາມຕັດສະຣູ້

ພິກຂຸທັງຫຼາຍ ຕົ້ນໄມ້ເຫຼົ່າໃດເຫຼົ່າໜຶ່ງຂອງເຫຼົ່າເທບຊັ້ນຕາວະຕິງສາ ຕົ້ນປາຣິສັດຕະກະ ຊາວໂລກກ່າວວ່າເລີດກວ່າຕົ້ນໄມ້ເຫຼົ່ານັ້ນ ແມ່ນສັນໃດ ໂພທິປັກຂິຍະທຳເຫຼົ່າໃດເຫຼົ່າໜຶ່ງປັນຍິນຊີ ບັນດິດກ່າວວ່າເລີດກວ່າໂພທິປັກຂິຍະທຳເຫຼົ່ານັ້ນ ຍ້ອນເປັນໄປເພື່ອຄວາມຕັດສະຣູ້ ກໍຄືກັນສັນນັ້ນ

**ທຸຕິຍະຣຸກຂະສູດທີ ໘ ຈົບ**

## ໙. ຕະຕິຍະຣຸກຂະສູດ

## ວ່າດ້ວຍອຸປະມາດ້ວຍຕົ້ນໄມ້ ສູດທີ ໙

[໔໓໙] ພິກຂຸທັງຫຼາຍ ຕົ້ນໄມ້ເຫຼົ່າໃດເຫຼົ່າໜຶ່ງຂອງພວກອະສູນ ຕົ້ນຈິດຕະປາຕະລີ (ຕົ້ນໄມ້ປະຈຳໂລກອະສູນ) ຊາວໂລກກ່າວວ່າເລີດກວ່າຕົ້ນໄມ້ເຫຼົ່ານັ້ນ ແມ່ນສັນໃດ ໂພທິປັກຂິຍະທຳ

ເຫຼົ່າໃດເຫຼົ່າໜຶ່ງ ປັນຍິນຊີ ບັນດິດກ່າວວ່າເລີດກວ່າໂພທິປັກຂິຍະທຳເຫຼົ່ານັ້ນ ຍ້ອນເປັນໄປເພື່ອຄວາມຕັດສະຮູ້ ກໍຄືກັນສັນນັ້ນ

ໂພທິປັກຂິຍະທຳ ອັນໃດແດ່ ຄື

ສັດທິນຊີເປັນໂພທິປັກຂິຍະທຳ ຍ່ອມເປັນໄປເພື່ອຄວາມຕັດສະຮູ້
ฯລฯ
ປັນຍິນຊີ ເປັນໂພທິປັກຂິຍະທຳ ຍ່ອມເປັນໄປເພື່ອຄວາມຕັດສະຮູ້

ພິກຂຸທັງຫຼາຍ ຕົ້ນໄມ້ເຫຼົ່າໃດເຫຼົ່າໜຶ່ງຂອງພວກອະສູນ ຕົ້ນຈິດຕະປາຕະລິຊາວໂລກກ່າວວ່າເລີດກວ່າຕົ້ນໄມ້ເຫຼົ່ານັ້ນ ແມ່ນສັນໃດ ໂພທິປັກຂິຍະທຳເຫຼົ່າໃດເຫຼົ່າໜຶ່ງ ປັນຍິນຊີ ບັນດິດກ່າວວ່າເລີດກວ່າໂພທິປັກຂິຍະທຳເຫຼົ່ານັ້ນ ຍ້ອນເປັນໄປເພື່ອຄວາມຕັດສະຮູ້ ກໍຄືກັນສັນນັ້ນ

**ຕະຕິຍະຣຸກຂະສູດທີ ๗ ຈົບ**

## ໑໐. ຈະຕຸດຖະຣຸກຂະສູດ

## ວ່າດ້ວຍອຸປະມາດ້ວຍຕົ້ນໄມ້ ສູດທີ ๘

[๔๔໐] ພິກຂຸທັງຫຼາຍ ຕົ້ນໄມ້ເຫຼົ່າໃດເຫຼົ່າໜຶ່ງຂອງພວກຄຸດ ຕົ້ນໂກຕະສິມພີ (ໄມ້ງີ້ວປ່າ) ຊາວໂລກກ່າວວ່າເລີດກວ່າຕົ້ນໄມ້ເຫຼົ່ານັ້ນ ແມ່ນສັນໃດ ໂພທິປັກຂິຍະທຳເຫຼົ່າໃດເຫຼົ່າໜຶ່ງ ປັນຍິນຊີ ບັນດິດກ່າວວ່າເລີດກວ່າ ໂພທິປັກຂິຍະທຳເຫຼົ່ານັ້ນ ຍ້ອນເປັນໄປເພື່ອຄວາມຕັດສະຮູ້ ກໍຄືກັນສັນນັ້ນ

ໂພທິປັກຂິຍະທຳ ອັນໃດແດ່ ຄື

ສັດທິນຊີເປັນໂພທິປັກຂິຍະທຳ ຍ່ອມເປັນໄປເພື່ອຄວາມຕັດສະຮູ້
ฯລฯ
ປັນຍິນຊີ ເປັນໂພທິປັກຂິຍະທຳ ຍ່ອມເປັນໄປເພື່ອຄວາມຕັດສະຮູ້

ພິກຂຸທັງຫຼາຍ ຕົ້ນໄມ້ເຫຼົ່າໃດເຫຼົ່າໜຶ່ງຂອງພວກຄຸດ ຕົ້ນໂກຕະສິມພີ ຊາວໂລກກ່າວວ່າເລີດກວ່າຕົ້ນໄມ້ເຫຼົ່ານັ້ນ ແມ່ນສັນໃດ ໂພທິປັກຂິຍະທຳເຫຼົ່າໃດເຫຼົ່າໜຶ່ງ ປັນຍິນຊີ ບັນດິດກ່າວວ່າເລີດກວ່າໂພທິປັກຂິຍະທຳເຫຼົ່ານັ້ນຍ້ອນເປັນໄປເພື່ອຄວາມຕັດສະຮູ້ ກໍຄືກັນສັນນັ້ນ

**ຈະຕຸດຖະຣຸກຂະສູດທີ ໑໐ ຈົບ**

**ໂພທິປັກຂິຍະວັກທີ ໗ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໙. ຄັງຄາເປີຍຍາລະວັກ

### ໝວດວ່າດ້ວຍຄັງຄາເປີຍຍາລະ

## ໑-໑໒. ປາຈີນາທີສູດ

### ວ່າດ້ວຍອຸປະມາດ້ວຍແມ່ນ້ຳຄົງຄາໄຫຼໄປສູ່ທິດປາຈີນເປັນຕົ້ນ

[໓໔໑-໓໕໒] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ແມ່ນ້ຳຄົງຄາໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອຈະເລີນອິນຊີ ໕ ປະການ ເຮັດອິນຊີ ໕ ປະການໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸເມື່ອຈະເລີນອິນຊີ ໕ ປະການ ເຮັດອິນຊີ ໕ ປະການໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສັດທິນຊີອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປ ໃນໂວດສັກຄະ
໒. ຈະເລີນວິຣິຍິນຊີ ฯລฯ
໓. ຈະເລີນສະຕິນຊີ ฯລฯ
໔. ຈະເລີນສະມາທິນຊີ ฯລฯ
໕. ຈະເລີນປັນຍິນຊີ ອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸເມື່ອຈະເລີນອິນຊີ ໕ ປະການ ເຮັດອິນຊີ ໕ ປະການໃຫ້ຫຼາຍ ຍ່ອມນ້ອມໄປ ສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວນີ້ແລ

**ປາຈີນາທິສູດທີ ໑-໑໘ ຈົບ**

**ຄັງຄາເປີຍຍາລະວັກທີ ໙ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ປະຖົມປາຈີນນິນນະສູດ ໒-໕. ທຸຕິຍາທິປາຈີນນິນນະສຸດຕະຈະຕຸກກະ

໖. ສັດຖະປາຈີນນິນນະສູດ ໗. ປະຖົມສະມຸດທະນິນນະສູດ

໙-໑໘. ທຸຕິຍາທິສະມຸດທະນິນນະສຸດຕະປັນຈະກະ

(ອັບປະມາທະວັກເພິ່ງຄະຫຍາຍໃຫ້ພິດສະດານ)

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ຕະຖາຄະຕະສູດ | ໒. ປະທະສູດ |
| ໓. ກູຕະສູດ | ໔. ມູລະສູດ |
| ໕. ສາຣະສູດ | ໖. ວັດສິກະສູດ |
| ໗. ຣາຊາສູດ | ໙. ຈັນທິມະສູດ |
| ໘. ສຸຣິຍະສູດ | ໑໐. ວັດຖຸສູດ |

(ພະລະກະຣະນີຍະວັກເພິ່ງຄະຫຍາຍໃຫ້ພິດສະດານ)

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ພະລະສູດ | ໒. ພີຊະສູດ |
| ໓. ນາຄະສູດ | ໔. ຣຸກຂະສູດ |
| ໕. ກຸມພະສູດ | ໖. ສູກະສູດ |
| ໗. ອາກາສະສູດ | ໙. ປະຖົມເມຄະສູດ |
| ໘. ທຸຕິຍະເມຂະສູດ | ໑໐. ນາວາສູດ |
| ໑໑. ອາຄັນຕຸກະສູດ | ໑໒. ນະທີສູດ |

(ເອສະນາວັກເພິ່ງຄະຫຍາຍໃຫ້ພິດສະດານ)

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໑໘. ໂອຄະວັກ

## ໝວດວ່າດ້ວຍໂອຄະ

## ໑-໑໐. ໂອຄາທິສູດ

## ວ່າດ້ວຍໂອຄະເປັນຕົ້ນ

[໕໗໗-໕໘໖] ພິກຂຸທັງຫຼາຍ ອຸດທຳພາຄີຍະສັງໂຍດ (ສັງໂຍດເບື້ອງສູງ) ໕ ປະການນີ້

ອຸດທຳພາຄີຍະສັງໂຍດ ໕ ປະການ ອັນໃດແດ່ ຄື

໑. ຣູບປະຣາຄະ
໒. ອະຣູບປະຣາຄະ
໓. ມານະ
໔. ອຸດທັດຈະ
໕. ອະວິດຊາ

ອຸດທຳພາຄີຍະສັງໂຍດ ໕ ປະການນີ້

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຈະເລີນອິນຊີ ໕ ປະການເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະອຸດທຳພາຄີຍະສັງໂຍດ ໕ ປະການນີ້

ອິນຊີ ໕ ປະການ ອັນໃດແດ່
ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສັດທິນຊີ ອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

໕. ຈະເລີນປັນຍິນຊີ ອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຈະເລີນອິນຊີ ໕ ປະການນີ້ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະອຸດທຳພາຄິຍະສັງໂຍດ ໕ ປະການນີ້ແລ

**ໂອຄາທິສູດທີ ໑-໑໐ ຈົບ**

(ເພິ່ງເພີ່ມຂໍ້ຄວາມໃຫ້ພິດສະດານຄືມັກຄະສັງຍຸດ)

**ໂອຄະວັກທີ ໑໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ໂອຄະສູດ
໒. ອຸປາທານະສູດ
໓. ອະນຸສະຍະສູດ
໗. ນີວະຣະນະສູດ
໙. ໂອຣຳພາຄິຍະສູດ
໔. ໂຍຄະສູດ
໕. ຄັນຖະສູດ
໖. ກາມມະຄຸນສູດ
໘. ອຸປາທານັກຂັນທະສູດ
໑໐. ອຸດທຳພາຄິຍະສູດ

# ໑໒. ຄັງຄາເປີຍຍາລະວັກ

**ໝວດວ່າດ້ວຍຄັງຄາເປີຍຍາລະ**

## ໑-໑໔. ປາຈີນາທິສູດ

### ວ່າດ້ວຍອຸປະມາດ້ວຍແມ່ນ້ຳຄົງຄາໄຫຼໄປສູ່ທິດປາຈີນເປັນຕົ້ນ

[໕໗໗-໖໐໘] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ແມ່ນ້ຳຄົງຄາໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ແມ່ນສັນໃດ ພິກຂຸກໍສັນນັ້ນຄືກັນ ເມື່ອຈະເລີນອິນຊີ ໕ ປະການ ເຮັດອິນຊີ ໕ ປະການໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸເມື່ອຈະເລີນອິນຊີ ໕ ປະການ ເຮັດອິນຊີ ໕ ປະການໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສັດທິນຊີອັນເປັນທຳມີການກຳຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ

ฯลฯ

໕. ຈະເລີນປັນຍິນຊີ ອັນເປັນທຳມີການກຳຈັດຣາຄະ ໂທສະ ແລະໂມຫະ ເປັນບ່ອນສຸດ

ພິກຂຸເມື່ອຈະເລີນອິນຊີ ໕ ປະການ ເຮັດອິນຊີ ໕ ປະການໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວນີ້ແລ

**ປາຈີນາທິສູດທີ ໑-໑໒ ຈົບ**

**ຄັງຄາເປີຍຍາລະວັກທີ ໑໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ປະຖົມປາຈີນນິນນະສູດ ໒-໕. ທຸຕິຍາທິປາຈີນນິນນະສຸດຕະຈະຕຸກກະ

໖. ສັດຖະປາຈີນນິນນະສູດ ໗. ປະຖົມສະມຸດທະນິນນະສູດ

໘-໑໒. ທຸຕິຍາທິສະມຸດທະນິນນະສຸດຕະປັນຈະກະ

(ອັບປະມາທະວັກ ພະລະກະຣະນີຍະວັກ ແລະເອສະນາວັກເພິ່ງໃຫ້ພິດສະດານ)

# ໑໗. ໂອຄະວັກ

## ໝວດວ່າດ້ວຍໂອຄະ

# ໑-໑໐. ໂອຄາທິສູດ

## ວ່າດ້ວຍໂອຄະເປັນຕົ້ນ

[໖໔໑-໖໕໐] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອຸດທຳພາຄີຍະສັງໂຍດ (ສັງໂຍດເບື້ອງສູງ) ໕ ປະການນີ້

ອຸດທຳພາຄີຍະສັງໂຍດ ໕ ປະການ ອັນໃດແດ່ ຄື

໑. ຮູບປະຣາຄະ
໒. ອະຮູບປະຣາຄະ
໓. ມານະ
໔. ອຸດທັດຈະ
໕. ອະວິດຊາ

ອຸດທຳພາຄິຍະສັງໂຍດ ໕ ປະການນີ້

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຈະເລີນອິນຊີ ໕ ປະການ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະອຸດທຳພາຄິຍະສັງໂຍດ ໕ ປະການນີ້

ອິນຊີ ໕ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສັດທິນຊີອັນເປັນທຳມີການກຳຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ
໒. ຈະເລີນວິຣິຍິນຊີ ຯລຯ
໓. ຈະເລີນສະຕິນຊີ ຯລຯ
໔. ຈະເລີນສະມາທິນຊີ ຯລຯ
໕. ຈະເລີນປັນຍິນຊີ ອັນເປັນທຳມີການກຳຈັດຣາຄະ ໂທສະ ແລະໂມຫະ ເປັນບ່ອນສຸດ

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຈະເລີນອິນຊີ ໕ ປະການນີ້ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະອຸດທຳພາຄິຍະສັງໂຍດ ໕ ປະການນີ້

**ໂອຄາທີສູດທີ ໑-໑໐ ຈົບ**

(ເພິ່ງເພີ່ມຂໍ້ຄວາມໃຫ້ພິດສະດານຄືມັກຄະສັງຍຸດ)

**ໂອຄະວັກທີ ໑໗ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ໂອຄະສູດ
໒. ໂຍຄະສູດ
໓. ອຸປາທານະສູດ
໔. ຄັນຖະສູດ
໕. ອະນຸສະຍະສູດ
໖. ກາມມະຄຸນສູດ
໗. ນີວະຣະນະສູດ
໘. ອຸປາທານັກຂັນທະສູດ
໙. ໂອຣຳພາຄິຍະສູດ
໑໐. ອຸດທຳພາຄິຍະສູດ

**ອິນທະຣິຍະສັງຍຸດທີ ໔ ຈົບ**

# ໕. ສຳມັປປະທານະສັງຍຸດ

## ໑. ຄັງຄາເປີຍຍາລະວັກ

### ໝວດວ່າດ້ວຍຄັງຄາເປີຍຍາລະ

## ໑-໑໒. ປາຈີນາທິສູດ

### ວ່າດ້ວຍອຸປະມາດ້ວຍແມ່ນ້ຳຄົງຄາໄຫຼໄປສູ່ທິດປາຈີນເປັນຕົ້ນ

[໓໕໑-໓໓໒] ເລື້ອງເກີດຂື້ນທີ່ເມືອງສາວັດຖີ

ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າ ໆລໆ ໄດ້ຕັດເລື້ອງນີ້ວ່າ ພິກຂຸທັງຫຼາຍ ສຳມັບປະທານ ໔ ປະການນີ້

ສຳມັບປະທານ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອປ້ອງກັນບາບ ອະກຸສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດຂື້ນ

໒. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອລະບາບອະກຸສົນທຳທີ່ເກີດຂື້ນແລ້ວ

໓. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອທຳກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດຂື້ນ

໔. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອຄວາມດຳລົງຢູ່ ບໍ່ເລືອນຫາຍ ຍິ່ງຂື້ນໄປ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂື້ນແລ້ວ

ສຳມັບປະທານ ໔ ປະການນີ້

ແມ່ນ້ຳຄົງຄາໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ແມ່ນສັນໃດ

ພິກຂຸກໍຄືກັນສັນນັ້ນ ເມື່ອຈະເລີນສຳມັປປະທານ ໔ ປະການ ເຮັດສຳມັປປະທານ ໔ ປະການໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອ່ຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸເມື່ອຈະເລີນສຳມັປປະທານ ໔ ປະການ ເຮັດສຳມັປປະທານ ໔ ປະການໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອ່ຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວໃດ

ຄື ພິກຂຸໃນທຳວິໄນນີ້

໑. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອປ້ອງກັນບາບອະ ກຸສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ

໒. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອລະບາບອະກຸສົນທຳທີ່ເກີດຂຶ້ນແລ້ວ

໓. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອທຳກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ

໔. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອຄວາມດຳລົງຢູ່ ບໍ່ເລືອນຫາຍ ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ

ພິກຂຸທັງຫຼາຍ ພິກຂຸເມື່ອຈະເລີນສຳມັປປະທານ ໔ ປະການ ເຮັດສຳມັປປະທານ ໔ ປະການໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອ່ຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວນີ້ແລ

**ປາຈີນາທິສູດທີ ໑-໑໒ ຈົບ**

**ຄັງຄາເປີຍຍາລະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ປະຖົມປາຈີນນິນນະສູດ ໒-໕. ທຸຕິຍາທິປາຈີນນິນນະສູດຕະຈະຕຸກກະ

໖. ສັດຖະປາຈີນນິນນະສູດ ໗. ປະຖົມສະມຸດທະນິນນະສູດ

໘-໑໒. ທຸຕິຍາທິສະມຸດທະນິນນະສູດຕະປັນຈະກະ

(ຄັງຄາເປີຍຍາລະແຫ່ງສຳມັປປະທານະສັງຍຸດເພິ່ງໃຫ້ພິດສະດານດ້ວຍອຳນາດສຳມັປປະທານ)

# ໘. ອັບປະມາທະວັກ

## ໝວດວ່າດ້ວຍຄວາມບໍ່ພະໝາດ

## ລວມພຣະສູດທີ່ມີໃນວັກນີ້ ຄື



(ອັບປະມາທະວັກເພິ່ງໃຫ້ພິດສະດານດ້ວຍອຳນາດສຳມັບປະທານ)

**ອັບປະມາທະວັກທີ ໘ ຈົບ**

# ໓. ພະລະກະຣະນີຍະວັກ

## ໝວດວ່າດ້ວຍອຸປະມາດ້ວຍການງານທີ່ເພິ່ງເຮັດດ້ວຍກຳລັງ

## ໑-໑໒. ພະລະກະຣະນີຍາທິສູດ

## ວ່າດ້ວຍອຸປະມາດ້ວຍການງານທີ່ເພິ່ງເຮັດດ້ວຍກຳລັງເປັນຕົ້ນ

[໖໗໓-໖໘໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ການງານທີ່ເພິ່ງເຮັດດ້ວຍກຳລັງທັງໝົດ ບຸກຄົນຕ້ອງອາໄສແຜ່ນດິນ ດຳລົງຢູ່ເທິງແຜ່ນດິນ ຈຶ່ງເຮັດໄດ້ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ອາໄສສິນ ດຳລົງຢູ່ໃນສິນແລ້ວ ຈະເລີນສຳມັບປະທານ ໔ ປະການ ເຮັດສຳມັບປະທານ ໔ ປະການໃຫ້ຫຼາຍ

ພິກຂຸອາໄສສິນ ດຳລົງຢູ່ໃນສິນແລ້ວ ຈະເລີນສຳມັບປະທານ ໔ ປະການ ເຮັດສຳມັບປະທານ ໔ ປະການໃຫ້ຫຼາຍ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອປ້ອງກັນບາບ ອະກຸສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ

໒. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອລະບາບອະກຸສົນທຳທີ່ເກີດຂຶ້ນແລ້ວ

໓. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອທຳກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ

໔. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອຄວາມດຳລົງຢູ່ ບໍ່ເລືອນຫາຍ ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ

ພິກຂຸທັງຫຼາຍ ພິກຂຸອາໄສສີນ ດຳລົງຢູ່ໃນສີນແລ້ວ ຈະເລີນສຳມັບປະທານ ໔ ປະການ ເຮັດສຳມັບປະທານ ໔ ປະການໃຫ້ຫຼາຍ ແນວນີ້ແລ

**ພະລະກະຣະນີຍາທິສູດທີ ໑-໑໔ ຈົບ**

(ພະລະກະຣະນີຍະວັກເພິ່ງໃຫ້ພິດສະດານດ້ວຍອຳນາດສຳມັບປະທານແນວນີ້)

**ພະລະກະຣະນີຍະວັກທີ ໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ພະລະສູດ | ໒. ພີຊະສູດ |
| ໓. ນາຄະສູດ | ໔. ຣຸກຂະສູດ |
| ໕. ກຸມພະສູດ | ໖. ສູກະສູດ |
| ໗. ອາກາສະສູດ | ໘. ປະຖົມເມຄະສູດ |
| ໙. ທຸຕິຍະເມຄະສູດ | ໑໐. ນາວາສູດ |
| ໑໑. ອາຄັນຕຸກະສູດ | ໑໒. ນະທີສູດ |

# ໔. ເອສະນາວັກ

## ໝວດວ່າດ້ວຍການສະແຫວງຫາ

## ໑-໑໐. ເອສະນາທິສຸດຕະທະສະກະ

## ວ່າດ້ວຍພຣະສູດ ໑໐ ສູດ ມີເອສະນາສູດເປັນຕົ້ນ

[໖໘໕-໖໙໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ການສະແຫວງຫາ ໓ ປະການນີ້

ການສະແຫວງຫາ ໓ ປະການ ອັນໃດແດ່ ຄື

໑. ການສະແຫວງຫາກາມ ໒. ການສະແຫວງຫາພົບ
໓. ການສະແຫວງຫາພົມມະຈັນ

ການສະແຫວງຫາ ໓ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນສຳມັບປະທານ ໔ ປະການເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ເພື່ອຄວາມສິ້ນໄປ ເພື່ອລະການສະແຫວງຫາ ໓ ປະການນີ້

ສຳມັບປະທານ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອປ້ອງກັນບາບອະກຸສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ

ຯລຯ

໔. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອຄວາມດຳລົງຢູ່ ບໍ່ເລືອນຫາຍ ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນສຳມັບປະທານ ໔ ປະການນີ້ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ເພື່ອຄວາມສິ້ນໄປ ເພື່ອລະການສະແຫວງຫາ ໓ ປະການນີ້

(ເພິ່ງເພີ່ມຂໍ້ຄວາມທີ່ເຫຼືອໃຫ້ພິດສະດານ)

**ເອສະນາທີສູດທີ ໑-໑໐ ຈົບ**

**ເອສະນາວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ເອສະນາສູດ ໒. ວິທາສູດ
໓. ອາສະວະສູດ ໔. ພະວະສູດ
໕. ທຸກຂະຕາສູດ ໖. ຂີລະສູດ
໗. ມະລະສູດ ໘. ນີຄະສູດ
໙. ເວທະນາສູດ ໑໐. ຕັນຫາສູດ
໑໑. ຕະສິນາສູດ

# ໕. ໂອຄະວັກ
## ໝວດວ່າດ້ວຍໂອຄະ
# ໑-໑໐. ໂອຄາທິສູດ
## ວ່າດ້ວຍໂອຄະເປັນຕົ້ນ

[໖໙໕-໗໐໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອຸດທຳພາຄິຍະສັງໂຍດ ໕ ປະການນີ້

ອຸດທຳພາຄິຍະສັງໂຍດ ໕ ປະການ ອັນໃດແດ່ ຄື

໑. ຣູບປະຣາຄະ
໒. ອະຣູບປະຣາຄະ
໓. ມານະ
໔. ອຸດທັດຈະ
໕. ອະວິດຊາ

ອຸດທຳພາຄິຍະສັງໂຍດ ໕ ປະການນີ້

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຈະເລີນສຳມັບປະທານ ໔ ປະການ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະອຸດທຳພາຄິຍະສັງໂຍດ ໕ ປະການນີ້

ສຳມັບປະທານ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອປ້ອງກັນບາບອະກຸ-ສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ

ฯລฯ

໔. ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອຄວາມດຳລົງຢູ່ ບໍ່ເລືອນຫາຍ ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນສຳມັບປະທານ ໔ ປະການນີ້ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະອຸດທຳພາຄິຍະສັງໂຍດ ໕ ປະການນີ້

(ເພິ່ງເພີ່ມຂໍ້ຄວາມທີ່ເຫຼືອໃຫ້ພິດສະດານ)

**ໂອຄາທິສູດທີ ໑-໑໐ ຈົບ**

**ໂອຄະວັກທີ ໕ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



**ສໍາມັບປະທານະສັງຍຸດທີ ໕ ຈົບ**

# ໗. ພະລະສັງຍຸດ

# ໑. ຄັງຄາເປີຍຍາລະວັກ

## ໝວດວ່າດ້ວຍຄັງຄາເປີຍຍາລະ

# ໑-໑໒. ພະລາທິສູດ

## ວ່າດ້ວຍພະລະເປັນຕົ້ນ

[໗໐໕-໗໑໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພະລະ ໕ ປະການນີ້

ພະລະ ໕ ປະການ ອັນໃດແດ່ ຄື

໑. ສັດທາພະລະ (ກໍາລັງຄືສັດທາ)
໒. ສະຕິພະລະ (ກໍາລັງຄືສະຕິ)
໓. ປັນຍາພະລະ (ກໍາລັງຄືປັນຍາ)
໔. ວິຣິຍະພະລະ (ກໍາລັງຄືວິຣິຍະ)
໕. ສະມາທິພະລະ (ກໍາລັງຄືສະມາທິ)

ພະລະ ໕ ປະການນີ້

ພິກຂຸທັງຫຼາຍ ແມ່ນ້ຳຄົງຄາທີ່ໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອຈະເລີນພະລະ ໕ ປະການ ທຳພະລະ ໕ ປະການໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸເມື່ອຈະເລີນພະລະ ໕ ປະການ ທຳພະລະ ໕ ປະການໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສັດທາພະລະອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ
໒. ຈະເລີນວິຣິຍະພະລະ ຯລຯ
໓. ຈະເລີນສະຕິພະລະ ຯລຯ
໔. ຈະເລີນສະມາທິພະລະ ຯລຯ
໕. ຈະເລີນປັນຍາພະລະອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ພິກຂຸເມື່ອຈະເລີນພະລະ ໕ ປະການ ທຳພະລະ ໕ ປະການໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວນີ້ແລ

**ພະລາທິສູດທີ ໑-໑໒ ຈົບ**

**ຄັງຄາເປີຍຍາລະວັຣຄ໌ທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ປະຖົມປາຈີນນິນນະສູດ ໒-໕. ທຸຕິຍາທິປາຈີນນິນນະສູດຕະຈະຕຸກກະ
໖. ສັດຖະປາຈີນນິນນະສູດ ໗. ປະຖົມສະມຸດທະນິນນະສູດ
໘-໑໒. ທຸຕິຍາທິສະມຸດທະນິນນະສຸດຕະປັນຈະກະ

(ອັບປະມາທະວັກເພິ່ງໃຫ້ພິດສະດານ)

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ຕະຖາຄະຕະສູດ
໒. ກູຕະສູດ
໓. ສາຣະສູດ
໔. ຣາຊາສູດ
໕. ສຸຣິຍະສູດ
໖. ປະທະສູດ
໗. ມູລະສູດ
໘. ວັດສິກະສູດ
໔. ຈັນທິມະສູດ
໑໐. ວັດຖະສູດ

(ພະລະກະຣະນີຍະວັກເພີ່ງໃຫ້ພິດສະດານ)

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ພະລະສູດ
໒. ນາຄະສູດ
໓. ກຸມພະສູດ
໔. ອາກາສະສູດ
໕. ທຸຕິຍະເມຂະສູຕ
໖. ພີຊະສູດ
໗. ຣຸກຂະສູດ
໘. ສູກະສູດ
໙. ປະຖົມເມຄະສູດ
໑໐. ນາວາສູດ
໑໑. ອາຄັນຕຸກະສູດ
໑໒. ນະທີສູດ

(ເອສະນາວັກເພີ່ງໃຫ້ພິດສະດານ)

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ເອສະນາສູດ
໒. ອາສະວະສູດ
໓. ທຸກຂະຕາສູດ
໔. ມະລະສູດ
໕. ເວທະນາສູດ
໖. ວິທາສູດ
໗. ພະວະສູດ
໘. ຂີລະສູດ
໙. ນີຄະສູດ
໑໐. ຕັນຫາສູດ
໑໑. ຕະສີນາສູດ

# ໕. ໂອຄະວັກ

## ໝວດວ່າດ້ວຍໂອຄະ

## ໑-໑໐. ໂອຄາທິສູດ
## ວ່າດ້ວຍໂອຄະເປັນຕົ້ນ

[ກ໘໙-ກ໕໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອຸດທຳພາຄິຍະສັງໂຍດ ໕ ປະການນີ້

ອຸດທຳພາຄິຍະສັງໂຍດ ໕ ປະການ ອັນໃດແດ່ ຄື

໑. ຣູບປະຣາຄະ
໒. ອະຣູບປະຣາຄະ
໓. ມານະ
໔. ອຸດທັດຈະ
໕. ອະວິດຊາ

ອຸດທຳພາຄິຍະສັງໂຍດ ໕ ປະການນີ້

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຈະເລີນພະລະ ໕ ປະການເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະອຸດທຳພາຄິຍະສັງໂຍດ ໕ ປະການນີ້

ພະລະ ໕ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສັດທາພະລະອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ
໒. ຈະເລີນວິຣິຍະພະລະ ຯລຯ
໓. ຈະເລີນສະຕິພະລະ ຯລຯ
໔. ຈະເລີນສະມາທິພະລະ ຯລຯ
໕. ຈະເລີນປັນຍາພະລະອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຈະເລີນພະລະ ໕ ປະການນີ້ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະອຸດທຳພາຄິຍະສັງໂຍດ ໕ ປະການນີ້ແລ

(ເພິ່ງເພີ່ມຂໍ້ຄວາມທີ່ເຫຼືອໃຫ້ພິດສະດານແບບນີ້)

# ໖. ຄັງຄາເປີຍຍາລະວັກ

## ໝວດວ່າດ້ວຍຄັງຄາເປີຍຍາລະ

## ໑-໑໘. ປາຈີນາທິສູດ

### ວ່າດ້ວຍອຸປະມາດ້ວຍແມ່ນ້ຳຄົງຄາໄຫຼໄປສູ່ທິດປາຈີນເປັນຕົ້ນ

[໗໕໙-໗໗໐] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ແມ່ນ້ຳຄົງຄາໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອຈະເລີນພະລະ ໕ ປະການ ທຳພະລະ ໕ ປະການໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸເມື່ອຈະເລີນພະລະ ໕ ປະການ ທຳພະລະ ໕ ປະການໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສັດທາພະລະ ອັນເປັນທຳມີການກຳຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ

ฯລฯ

໕. ຈະເລີນປັນຍາພະລະ ອັນເປັນທຳມີການກຳຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ

ພິກຂຸທັງຫຼາຍ ພິກຂຸເມື່ອຈະເລີນພະລະ ໕ ປະການ ທຳພະລະ ໕ ປະການໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວນີ້ແລ

(ເພິ່ງເພີ່ມຂໍ້ຄວາມທີ່ເຫຼືອໃຫ້ພິດສະດານ)

**ປາຈີນາທິສູດທີ ໑-໑໘ ຈົບ**

**ຄັງຄາເປີຍຍາລະວັກທີ ໖ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



(ອັບປະມາທະວັກ - ພະລະກະຣະນີຍະວັກເພິ່ງໃຫ້ພິດສະດານ)

# ໙. ເອສະນາວັກ

### ໝວດວ່າດ້ວຍການສະແຫວງຫາ

## ໑-໑໔. ເອສະນາທິສູດ

### ວ່າດ້ວຍການສະແຫວງຫາເປັນຕົ້ນ

[໗໙໔-໘໐໔] ບາລີແຫ່ງເອສະນາວັກ ເພິ່ງໃຫ້ພິດສະດານຈົນເຖິງທຳມີການກຳຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ ແນວນີ້

**ເອສະນາວັກທີ ໙ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໑໐. ໂອຄະວັກ

## ໝວດວ່າດ້ວຍໂອຄະ

## ໑-໑໐. ໂອຄາທິສູດ

### ວ່າດ້ວຍໂອຄະເປັນຕົ້ນ

[໗໐໓-໗໑໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອຸດທໍາພາຄິຍະສັງໂຍດ ໕ ປະການນີ້

ອຸດທໍາພາຄິຍະສັງໂຍດ ໕ ປະການ ອັນໃດແດ່ ຄື

໑. ຣູບປະຣາຄະ
໒. ອະຣູບປະຣາຄະ
໓. ມານະ
໔. ອຸດທັດຈະ
໕. ອະວິດຊາ

ອຸດທໍາພາຄິຍະສັງໂຍດ ໕ ປະການນີ້

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຈະເລີນພະລະ ໕ ປະການເພື່ອຮູ້ຍິ່ງ ເພື່ອກໍານົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະອຸດທໍາພາຄິຍະສັງໂຍດ ໕ ປະການນີ້

ພະລະ ໕ ປະການ ອັນໃດແດ່

ຄື ພິກຂຸໃນທໍາວິໄນນີ້

໑. ຈະເລີນສັດທາພະລະ

ຯລຯ

໕. ຈະເລີນປັນຍາພະລະອັນເປັນທໍາມີການກໍາຈັດຣາຄະ ໂທສະ ແລະໂມຫະ ເປັນບ່ອນສຸດ

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຈະເລີນພະລະ ໕ ປະການນີ້ເພື່ອຮູ້ຍິ່ງ ເພື່ອກໍານົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະອຸດທໍາພາຄິຍະສັງໂຍດ ໕ ປະການນີ້ແລ

**ໂອຄາທິສູດທີ ໑-໑໐ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື



**ພະລະສັງຍຸດທີ ໖ ຈົບ**

# ໗. ອິດທິປາທະສັງຍຸດ

## ໑. ປາວາລະວັກ

### ໝວດວ່າດ້ວຍພຣະທຳມະເທດສະໜາທີ່ປາວາລະເຈດີ

## ໑. ອະປາຣະສູດ

### ວ່າດ້ວຍທຳທີ່ເປັນໄປເພື່ອໃຫ້ເຖິງຝັ່ງນັ້ນຈາກຝັ່ງນີ້

[໘໑໓] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອິດທິບາດ ໔ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຖິງຝັ່ງນັ້ນຈາກຝັ່ງນີ້

ອິດທິບາດ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍສັນທະສະມາທິປະທານສັງຂານ (ສະມາທິທີ່ເກີດຈາກສັນທະແລະຄວາມພຽນທີ່ມຸ້ງໝັ້ນ)
໒. ຈະເລີນອິດທິບາດທີ່ປະກອບດ້ວຍວິຣິຍະສະມາທິປະທານສັງຂານ (ສະມາທິທີ່ເກີດຈາກວິຣິຍະແລະຄວາມພຽນທີ່ມຸ້ງໝັ້ນ)
໓. ຈະເລີນອິດທິບາດທີ່ປະກອບດ້ວຍຈິດຕະສະມາທິປະທານສັງຂານ (ສະມາທິທີ່ເກີດຈາກຈິດຕະແລະຄວາມພຽນທີ່ມຸ້ງໝັ້ນ)
໔. ຈະເລີນອິດທິບາດທີ່ປະກອບດ້ວຍວິມັງສາສະມາທິປະທານສັງຂານ (ສະມາທິທີ່ເກີດຈາກວິມັງສາແລະຄວາມພຽນທີ່ມຸ້ງໝັ້ນ)

ພິກຂຸທັງຫຼາຍ ອິດທິບາດ ໔ ປະການນີ້ແລ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຖິງຝັ່ງນັ້ນຈາກຝັ່ງນີ້

**ອະປາຣະສູດທີ ໑ ຈົບ**

# ๘. ວິຣັດທະສູດ

## ວ່າດ້ວຍທຳທີ່ບຸກຄົນພາດ

[໘໑໔] ພິກຂຸທັງຫຼາຍ ອິດທິບາດ ໔ ປະການອັນບຸກຄົນເຫຼົ່າໃດເຫຼົ່າໜຶ່ງພາດແລ້ວ ອະຣິຍະມັກທີ່ໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງກໍຊື່ວ່າ ເປັນອັນບຸກຄົນເຫຼົ່ານັ້ນພາດແລ້ວ ສ່ວນອິດທິບາດ ໔ ປະການອັນບຸກຄົນເຫຼົ່າໃດເຫຼົ່າໜຶ່ງຜາຣົບແລ້ວ ອະຣິຍະມັກທີ່ໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງກໍຊື່ວ່າ ເປັນອັນບຸກຄົນເຫຼົ່ານັ້ນຜາຣົບແລ້ວ

ອິດທິບາດ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍ ສັນທະສະມາທິ ປະທານສັງຂານ
໒. ຈະເລີນອິດທິບາດທີ່ປະກອບດ້ວຍ ວິຣິຍະສະມາທິ ປະທານສັງຂານ
໓. ຈະເລີນອິດທິບາດທີ່ປະກອບດ້ວຍ ຈິດຕະສະມາທິ ປະທານສັງຂານ
໔. ຈະເລີນອິດທິບາດທີ່ປະກອບດ້ວຍ ວິມັງສາສະມາທິ ປະທານສັງຂານ

ພິກຂຸທັງຫຼາຍ ອິດທິບາດ ໔ ປະການນີ້ອັນບຸກຄົນເຫຼົ່າໃດເຫຼົ່າໜຶ່ງພາດແລ້ວ ອະຣິຍະມັກທີ່ໃຫ້ເຖິງຄວາມສິ້ນທຸກ ໂດຍຖືກຕ້ອງກໍຊື່ວ່າ ເປັນອັນບຸກຄົນເຫຼົ່ານັ້ນພາດແລ້ວ ສ່ວນອິດທິບາດ ໔ ປະການນີ້ອັນບຸກຄົນເຫຼົ່າໃດເຫຼົ່າໜຶ່ງຜາຣົບແລ້ວ ອະຣິຍະມັກທີ່ໃຫ້ເຖິງຄວາມສິ້ນທຸກ ໂດຍຖືກຕ້ອງກໍຊື່ວ່າ ເປັນອັນບຸກຄົນເຫຼົ່ານັ້ນຜາຣົບແລ້ວ

**ວິຣັດທະສູດທີ ๘ ຈົບ**

# ໓. ອະຣິຍະສູດ

## ວ່າດ້ວຍທຳທີ່ເປັນອະຣິຍະ

[໘໑໕] ພິກຂຸທັງຫຼາຍ ອິດທິບາດ ໔ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ເປັນອະຣິຍະ ເປັນນິຍະຍານິກະທຳ ນຳອອກໄປເພື່ອໃຫ້ສິ້ນທຸກໂດຍຖືກຕ້ອງແກ່ຜູ້ພຳເພັງອິດທິບາດ ໔ ປະການນັ້ນ

ອິດທິບາດ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍ ສັນທະສະມາທິ ປະທານສັງຂານ
໒. ຈະເລີນອິດທິບາດທີ່ປະກອບດ້ວຍ ວິຣິຍະສະມາທິ ປະທານສັງຂານ
໓. ຈະເລີນອິດທິບາດທີ່ປະກອບດ້ວຍ ຈິດຕະສະມາທິ ປະທານສັງຂານ
໔. ຈະເລີນອິດທິບາດທີ່ປະກອບດ້ວຍ ວິມັງສາສະມາທິ ປະທານສັງຂານ

ພິກຂຸທັງຫຼາຍ ອິດທິບາດ ໔ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ເປັນອະຣິຍະ ເປັນນິຍະຍານິກະທຳ ນຳອອກໄປເພື່ອໃຫ້ສິ້ນທຸກໂດຍຖືກຕ້ອງແກ່ຜູ້ພຳເພັງອິດທິບາດ ໔ ປະການນັ້ນ

**ອະຣິຍະສູດທີ ໓ ຈົບ**

# ໔. ນິບພິທາສູດ

## ວ່າດ້ວຍທຳທີ່ເປັນໄປເພື່ອຄວາມເບື່ອໜ່າຍ

[໗໑໗] ພິກຂຸທັງຫຼາຍ ອິດທິບາດ ໔ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມເບື່ອໜ່າຍຢ່າງທີ່ສຸດ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ແລະເພື່ອນິບພານ

ອິດທິບາດ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍ ສັນທະສະມາທິ ປະທານສັງຂານ
໒. ຈະເລີນອິດທິບາດທີ່ປະກອບດ້ວຍ ວິຣິຍະສະມາທິ ປະທານສັງຂານ
໓. ຈະເລີນອິດທິບາດທີ່ປະກອບດ້ວຍ ຈິດຕະສະມາທິ ປະທານສັງຂານ
໔. ຈະເລີນອິດທິບາດທີ່ປະກອບດ້ວຍ ວິມັງສາສະມາທິ ປະທານສັງຂານ

ພິກຂຸທັງຫຼາຍ ອິດທິບາດ ໔ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມເບື່ອໜ່າຍແນວບ່ອນສຸດ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ແລະເພື່ອນິບພານ

**ນິບພິທາສູດທີ ໔ ຈົບ**

# ໕. ອິດທິປະເທສະສູດ

## ວ່າດ້ວຍເຫດທີ່ທຳລິດບາງຢ່າງໃຫ້ສຳເລັດ

[໗໑໗] ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະດີດຕະການ ໄດ້ທຳລິດບາງຢ່າງໆໃຫ້ສຳເລັດໄດ້ ກໍຍ້ອນອິດທິບາດ ໔ ປະການທີ່ສະມະນະຫຼືພາມເຫຼົ່ານັ້ນທັງໝົດຈະເລີນ ເຮັດໃຫ້ຫຼາຍແລ້ວ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະນາຄົດຕະການ ຈັກທຳລິດບາງຢ່າງໃຫ້ສຳເລັດໄດ້ ກໍຍ້ອນອິດທິບາດ ໔ ປະການທີ່ສະມະນະຫຼືພາມເຫຼົ່ານັ້ນທັງໝົດຈະເລີນ ເຮັດໃຫ້ຫຼາຍແລ້ວ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນປັດຈຸບັນການ ຍ່ອມທຳລິດບາງຢ່າງໃຫ້ສຳເລັດໄດ້ ກໍຍ້ອນອິດທິບາດ ໔ ປະການທີ່ສະມະນະຫຼືພາມເຫຼົ່ານັ້ນທັງໝົດຈະເລີນ ເຮັດໃຫ້ຫຼາຍແລ້ວ

ອິດທິບາດ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍ ສັນທະສະມາທິ ປະທານສັງຂານ
໒. ຈະເລີນອິດທິບາດທີ່ປະກອບດ້ວຍ ວິຣິຍະສະມາທິ ປະທານສັງຂານ
໓. ຈະເລີນອິດທິບາດທີ່ປະກອບດ້ວຍ ຈິດຕະສະມາທິ ປະທານສັງຂານ
໔. ຈະເລີນອິດທິບາດທີ່ປະກອບດ້ວຍ ວິມັງສາສະມາທິ ປະທານສັງຂານ

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະດີດຕະການ ໄດ້ທຳລິດບາງຢ່າງໃຫ້ສຳເລັດໄດ້ ກໍຍ້ອນອິດທິບາດ ໔ ປະການນີ້ທີ່ສະມະນະຫຼືພາມເຫຼົ່ານັ້ນ ທັງໝົດຈະເລີນ ເຮັດໃຫ້ຫຼາຍແລ້ວ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະນາຄົດຕະການ ຈັກທຳລິດບາງຢ່າງໃຫ້ສຳເລັດໄດ້ ກໍຍ້ອນອິດທິບາດ ໔ ປະການນີ້ທີ່ສະມະນະຫຼືພາມເຫຼົ່ານັ້ນທັງໝົດຈະເລີນ ເຮັດໃຫ້ຫຼາຍແລ້ວ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນປັດຈຸບັນການ ຍ່ອມທຳລິດບາງຢ່າງໃຫ້ສຳເລັດໄດ້ ກໍຍ້ອນ ອິດທິບາດ ໔ ປະການນີ້ທີ່ສະມະນະຫຼືພາມເຫຼົ່ານັ້ນທັງໝົດຈະເລີນ ເຮັດໃຫ້ຫຼາຍແລ້ວ

**ອິດທິປະເທສະສູດທີ ໕ ຈົບ**

# ๗. ສະມັດຕະສູດ

## ວ່າດ້ວຍເຫດທີ່ທຳລິດບໍລິບູນໃຫ້ສຳເລັດ

[๗๑๗] ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະດີດຕະການໄດ້ ທຳລິດບໍລິບູນໃຫ້ສຳເລັດໄດ້ ກໍຍ້ອນອິດທິບາດ ๔ ປະການທີ່ສະມະນະ ຫຼື ພາມເຫຼົ່ານັ້ນທັງໝົດຈະເລີນເຮັດໃຫ້ຫຼາຍແລ້ວ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະນາຄົດຕະການ ຈັກທຳລິດບໍລິບູນໃຫ້ສຳເລັດໄດ້ ກໍຍ້ອນອິດທິບາດ ๔ ປະການທີ່ສະມະນະຫຼືພາມເຫຼົ່ານັ້ນທັງໝົດຈະເລີນ ເຮັດໃຫ້ຫຼາຍແລ້ວ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນປັດຈຸບັນການ ຍ່ອມທຳລິດບໍລິບູນໃຫ້ສຳເລັດໄດ້ ກໍຍ້ອນອິດທິບາດ ๔ ປະການທີ່ສະມະນະຫຼືພາມເຫຼົ່ານັ້ນທັງໝົດຈະເລີນ ເຮັດໃຫ້ຫຼາຍແລ້ວ

ອິດທິບາດ ๔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

๑. ຈະເລີນອິດທິບາດທີ່ປະກອບດ້ວຍ ສັນທະສະມາທິ ປະທານສັງຂານ
๒. ຈະເລີນອິດທິບາດທີ່ປະກອບດ້ວຍ ວິຣິຍະສະມາທິ ປະທານສັງຂານ
๓. ຈະເລີນອິດທິບາດທີ່ປະກອບດ້ວຍ ຈິດຕະສະມາທິ ປະທານສັງຂານ
๔. ຈະເລີນອິດທິບາດທີ່ປະກອບດ້ວຍ ວິມັງສາສະມາທິ ປະທານສັງຂານ

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະດີດຕະການ ໄດ້ທຳລິດບໍລິບູນໃຫ້ສຳເລັດໄດ້ ກໍຍ້ອນອິດທິບາດ ๔ ປະການນີ້ທີ່ສະມະນະຫຼືພາມເຫຼົ່ານັ້ນ ທັງໝົດຈະເລີນ ເຮັດໃຫ້ຫຼາຍແລ້ວ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະນາຄົດຕະການ ຈັກທຳລິດບໍລິບູນໃຫ້ສຳເລັດໄດ້ ກໍຍ້ອນອິດທິບາດ ๔ ປະການນີ້ທີ່ສະມະນະຫຼືພາມເຫຼົ່ານັ້ນທັງໝົດຈະເລີນ ເຮັດໃຫ້ຫຼາຍແລ້ວ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນປັດຈຸບັນການ ຍ່ອມທຳລິດບໍລິບູນໃຫ້ສຳເລັດໄດ້ ກໍຍ້ອນອິດທິບາດ ๔ ປະການນີ້ທີ່ສະມະນະຫຼືພາມເຫຼົ່ານັ້ນທັງໝົດຈະເລີນ ເຮັດໃຫ້ຫຼາຍແລ້ວ

**ສະມັດຕະສູດທີ ๗ ຈົບ**

# ໗. ພິກຂຸສູດ

## ວ່າດ້ວຍເຫດທີ່ເຮັດໃຫ້ພິກຂຸໄດ້ວິມຸດຕິ

[໗໑໙] ພິກຂຸທັງຫຼາຍ ພິກຂຸເຫຼົ່າໃດເຫຼົ່າໜຶ່ງໃນອະດີດຕະການ ໄດ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ[1] ປັນຍາວິມຸດຕິ[2]ອັນບໍ່ມີອາສະວະຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ກໍຍ້ອນອິດທິບາດ ໔ ປະການທີ່ພິກຂຸເຫຼົ່ານັ້ນທັງໝົດຈະເລີນ ເຮັດໃຫ້ຫຼາຍແລ້ວ

ພິກຂຸເຫຼົ່າໃດເຫຼົ່າໜຶ່ງໃນອະນາຄົດຕະການ ຈັກເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນ ບໍ່ມີອາສະວະຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ກໍຍ້ອນອິດທິບາດ ໔ ປະການທີ່ພິກຂຸເຫຼົ່ານັ້ນທັງໝົດຈະເລີນ ເຮັດໃຫ້ຫຼາຍແລ້ວ

ພິກຂຸເຫຼົ່າໃດເຫຼົ່າໜຶ່ງໃນປັດຈຸບັນການ ຍ່ອມເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ກໍຍ້ອນອິດທິບາດ ໔ ປະການທີ່ພິກຂຸເຫຼົ່ານັ້ນທັງໝົດຈະເລີນ ເຮັດໃຫ້ຫຼາຍແລ້ວ

ອິດທິບາດ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍ ສັນທະສະມາທິ ປະທານສັງຂານ
໒. ຈະເລີນອິດທິບາດທີ່ປະກອບດ້ວຍ ວິຣິຍະສະມາທິ ປະທານສັງຂານ
໓. ຈະເລີນອິດທິບາດທີ່ປະກອບດ້ວຍ ຈິດຕະສະມາທິ ປະທານສັງຂານ
໔. ຈະເລີນອິດທິບາດທີ່ປະກອບດ້ວຍ ວິມັງສາສະມາທິ ປະທານສັງຂານ

ພິກຂຸທັງຫຼາຍ ພິກຂຸເຫຼົ່າໃດເຫຼົ່າໜຶ່ງໃນອະດີດຕະການ ໄດ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ກໍຍ້ອນອິດທິບາດ ໔ ປະການນີ້ທີ່ພິກຂຸເຫຼົ່ານັ້ນທັງໝົດຈະເລີນ ເຮັດໃຫ້ຫຼາຍແລ້ວ

ພິກຂຸເຫຼົ່າໃດເຫຼົ່າໜຶ່ງໃນອະນາຄົດຕະການ ຈັກເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ກໍຍ້ອນອິດທິບາດ ໔ ປະການນີ້ທີ່ພິກຂຸເຫຼົ່ານັ້ນທັງໝົດຈະເລີນ ເຮັດໃຫ້ຫຼາຍແລ້ວ

ພິກຂຸເຫຼົ່າໃດເຫຼົ່າໜຶ່ງໃນປັດຈຸບັນການ ຍ່ອມເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ກໍຍ້ອນອິດ

ທິບາດ ໔ ປະການນີ້ທີ່ພິກຂຸເຫຼົ່ານັ້ນທັງໝົດຈະເລີນ ເຮັດໃຫ້ຫຼາຍແລ້ວ

**ພິກຂຸສູດທີ ໗ ຈົບ**

# ໘. ພຸດທະສູດ

## ວ່າດ້ວຍເຫຕຸທີ່ເຮັດໃຫ້ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າ

[໘໔໐] ພິກຂຸທັງຫຼາຍ ອິດທິບາດ ໔ ປະການນີ້

ອິດທິບາດ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍ ສັນທະສະມາທິ ປະທານສັງຂານ
໒. ຈະເລີນອິດທິບາດທີ່ປະກອບດ້ວຍ ວິຣິຍະສະມາທິ ປະທານສັງຂານ
໓. ຈະເລີນອິດທິບາດທີ່ປະກອບດ້ວຍ ຈິດຕະສະມາທິ ປະທານສັງຂານ
໔. ຈະເລີນອິດທິບາດທີ່ປະກອບດ້ວຍ ວິມັງສາສະມາທິ ປະທານສັງຂານ

ອິດທິບາດ ໔ ປະການນີ້

ພິກຂຸທັງຫຼາຍ ຕະຖາຄົດອັນບັນດິດຮຽກວ່າ ພຣະອະຣະຫັນຕະສຳມາສຳພຸດທະເຈົ້າ ຍ້ອນອິດທິບາດ ໔ ປະການນີ້ທີ່ຕະຖາຄົດຈະເລີນ ເຮັດໃຫ້ຫຼາຍແລ້ວ

**ພຸດທະສູດທີ ໘ ຈົບ**

# ໙. ຍານະສູດ

## ວ່າດ້ວຍຍານເກີດຂຶ້ນຍ້ອນຈະເລີນອິດທິບາດ

[໘໔໑] ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວ ແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ ເປັນອິດທິບາດທີ່ປະກອບດ້ວຍສັນທະສະມາທິປະທານສັງຂານ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ກໍອິດທິບາດທີ່ປະກອບດ້ວຍສັນທະສະມາທິປະທານສັງຂານ

ນີ້ຄວນຈະເລີນ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ອິດທິບາດທີ່ປະກອບດ້ວຍ ສັນທະສະມາທິປະທານສັງຂານ ນີ້ ເຮົາໄດ້ຈະເລີນແລ້ວ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ເປັນອິດທິບາດທີ່ປະກອບດ້ວຍ ວິຣິຍະສະມາທິປະທານສັງຂານ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ກໍອິດທິບາດທີ່ປະກອບດ້ວຍວິຣິຍະສະມາທິປະທານສັງຂານນີ້ຄວນຈະເລີນ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ເຮົາບໍ່ເຄີຍໄດ້ຟັງມາກ່ອນວ່າ ອິດທິບາດທີ່ປະກອບດ້ວຍ ວິຣິຍະສະມາທິປະທານສັງຂານ ນີ້ ໄດ້ຈະເລີນແລ້ວ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ເປັນອິດທິບາດທີ່ປະກອບດ້ວຍຈິດຕະສະມາທິປະທານສັງຂານ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ກໍອິດທິບາດທີ່ປະກອບດ້ວຍຈິດຕະສະມາທິປະທານສັງຂານນີ້ຄວນຈະເລີນ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ອິດທິບາດທີ່ປະກອບດ້ວຍ ຈິດຕະສະມາທິປະທານສັງຂານ ນີ້ ເຮົາໄດ້ຈະເລີນແລ້ວ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ ເປັນອິດທິບາດທີ່ປະກອບດ້ວຍວິມັງສາສະມາທິປະທານສັງຂານ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ອິດທິບາດທີ່ປະກອບດ້ວຍວິມັງສາສະມາທິປະທານສັງຂານນີ້ຄວນຈະເລີນ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ອິດທິບາດທີ່ປະກອບດ້ວຍ ວິມັງສາສະມາທິປະທານສັງຂານ ນີ້ ເຮົາໄດ້ຈະເລີນແລ້ວ

**ຍານະສູດທີ ໗ ຈົບ**

# ១០. ເຈຕິຍະສູດ

## ວ່າດ້ວຍພຣະທຳເທດສະໜາທີ່ປາວາລະເຈດີ

[໗໔໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ກູຕາຄາຣະສາລາ ປ່າມະຫາວັນ ເຂດເມືອງເວສາລີ ເມື່ອໃນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນສະເດັດເຂົ້າໄປບິນທະບາດຍັງເມືອງເວສາລີ ສະເດັດກັບຈາກບິນທະບາດ ພາຍຫຼັງສະເຫວີຍພຣະ ກະຍາຫານສຳເລັດແລ້ວ ໄດ້ຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ ອານົນ ທ່ານຈົ່ງຖືຜ້ານິສີທະນະ ເຮົາຈັກເຂົ້າໄປສູ່ປາວາລະເຈດີເພື່ອພັກຜ່ອນກາງເວັນ ທ່ານພຣະອານົນທູນຮັບສະໜອງພຣະດຳຣັດແລ້ວ ໄດ້ຖືຜ້ານິສີທະນະຕາມສະເດັດພຣະຜູ້ມີພຣະພາກເຈົ້າໄປທາງເບື້ອງພຣະປຣິດສະດາງ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າໄປສູ່ປາວາລະເຈດີ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ຝ່າຍທ່ານພຣະອານົນຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບທ່ານພຣະອານົນດັ່ງນີ້ວ່າ ອານົນ ເມືອງເວສາລີໜ້າອອນຊອນ ອຸເທນເຈດີໜ້າອອນຊອນ ໂຄຕະມະກະເຈດີໜ້າອອນຊອນ ສັດຕຳພະເຈດີໜ້າອອນຊອນ ພະຫຸປຸດຕະກະເຈດີໜ້າອອນຊອນ ສາຣັນທະເຈດີໜ້າອອນຊອນ ປາວາລະເຈດີກໍໜ້າອອນຊອນ

ອານົນ ອິດທິບາດ ໔ ປະການອັນບຸກຄົນໃດບຸກຄົນໜຶ່ງຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານ ເຮັດໃຫ້ເປັນບ່ອນຕັ້ງ ໃຫ້ຕັ້ງໝັ້ນ ສັ່ງສົມ ຜາຣົບດີແລ້ວ ບຸກຄົນນັ້ນ ເມື່ອປາຖະໜາ ກໍຈະມີຊີວິດຢູ່ຕໍ່ໄປໄດ້ຕະຫຼອດກັບ ຫຼື ຫຼາຍກວ່າກັບ

ອານົນ ອິດທິບາດ ໔ ປະການອັນຕະຖາຄົດຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານ ເຮັດໃຫ້ເປັນບ່ອນຕັ້ງ ໃຫ້ຕັ້ງໝັ້ນ ສັ່ງສົມ ຜາຣົບດີແລ້ວ ຕະຖາຄົດເມື່ອປາຖະໜາກໍຈະມີຊີວິດຢູ່ຕໍ່ໄປໄດ້ຕະຫຼອດກັບຫຼືຫຼາຍກວ່າກັບ

ແມ່ນເມື່ອພຣະຜູ້ມີພຣະພາກເຈົ້າຊົງທຳນິມິດທີ່ແຈ່ມແຈ້ງ ໂອພາດທີ່ຊັດເຈນແນວນີ້ ທ່ານພຣະອານົນກໍບໍ່ອາດຮູ້ທັນ ຈຶ່ງບໍ່ຂາບທູນວິງວອນພຣະຜູ້ມີພຣະພາກເຈົ້າວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໂຜດດຳລົງພະຊົນຢູ່ຕໍ່ໄປຕະຫຼອດກັບ ຂໍພຣະສຸຄົດເຈົ້າໂຜດດຳລົງພະຊົນຢູ່ຕໍ່ໄປຕະຫຼອດກັບເພື່ອປະໂຫຍດເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກແກ່ເທວະດາແລະມະນຸດທັງຫຼາຍ ທັງນີ້ເປັນຍ້ອນທ່ານຖືກມານດົນໃຈ

ແມ່ນເທື່ອທີ ໔ ຯລຯ

ແມ່ນເທື່ອທີ ໓ ພຣະຜູ້ມີພຣະພາກເຈົ້າກໍຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ ອານົນ ເມືອງ ເວສາລີໜ້າອອນຊອນ ອຸເທນເຈດີໜ້າອອນຊອນ ໂຄຕະມະກະເຈດີໜ້າອອນຊອນ ສັດຕຳພະເຈດີໜ້າອອນຊອນ ພະຫຸປຸດຕະກະເຈດີໜ້າອອນຊອນ ສາຣັນທະເຈດີໜ້າອອນຊອນ ປາວາລະເຈດີກໍໜ້າອອນຊອນ

ອານົນ ອິດທິບາດ ໔ ປະການອັນບຸກຄົນໃດບຸກຄົນໜຶ່ງຈະເລີນ ເຮັດໃຫ້ຫຼາຍ ເຮັດໃຫ້ເປັນຄືຍານ ເຮັດໃຫ້ເປັນບ່ອນຕັ້ງ ໃຫ້ຕັ້ງໝັ້ນ ສັ່ງສົມ ຜາຣົບດີແລ້ວ ບຸກຄົນນັ້ນເມື່ອປາຖະໜາກໍຈະມີຊີວິດຢູ່ຕໍ່ໄປໄດ້ຕະຫຼອດກັບຫຼືຫຼາຍກວ່າກັບ

ອານົນ ອິດທິບາດ ໔ ປະການອັນຕະຖາຄົດຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານ ເຮັດໃຫ້ເປັນບ່ອນຕັ້ງ ໃຫ້ຕັ້ງໝັ້ນ ສັ່ງສົມ ຜາຣົບດີແລ້ວ ຕະຖາຄົດເມື່ອມຸ້ງຫວັງ ກໍຈະມີຊີວິດຢູ່ຕໍ່ໄປໄດ້ຕະຫຼອດກັບຫຼືຫຼາຍກວ່າກັບ

ແມ່ນເມື່ອພຣະຜູ້ມີພຣະພາກເຈົ້າຊົງທຳນິມິດທີ່ແຈ່ມແຈ້ງ ໂອພາດທີ່ຊັດເຈນແນວນີ້ ທ່ານພຣະອານົນກໍບໍ່ອາດຮູ້ທັນ ຈຶ່ງບໍ່ຂາບທູນວິງວອນພຣະຜູ້ມີພຣະພາກເຈົ້າວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໂຜດດຳລົງພະຊົນຢູ່ຕໍ່ໄປຕະຫຼອດກັບ ຂໍພຣະສຸດຄົດເຈົ້າໂຜດດຳລົງພະຊົນຢູ່ຕໍ່ໄປຕະຫຼອດກັບເພື່ອປະໂຫຍດເກື້ອກູນແກ່ຄົນທັງຫຼາຍ ເພື່ອຄວາມສຸກແກ່ຄົນທັງຫຼາຍ ເພື່ອອະນຸເຄາະຊາວໂລກ ເພື່ອປະໂຫຍດເກື້ອກູນ ເພື່ອຄວາມສຸກແກ່ເທວະດາແລະມະນຸດທັງຫຼາຍ ທັງນີ້ເປັນຍ້ອນທ່ານຖືກມານດົນໃຈ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກທ່ານພຣະອານົນມາຕັດວ່າ ໄປເທີ້ນ ອານົນ ທ່ານຈົ່ງກຳນົດເວລາອັນສົມຄວນໃນບັດນີ້ ທ່ານພຣະອານົນ ທູນຮັບສະໜອງພຣະດຳຣັດແລ້ວລຸກຈາກອາສະນະ ຖວາຍອະພິວາດ ທຳປະທັກຂິນແລ້ວ ນັ່ງທີ່ເຫງົ້າຕົ້ນໄມ້ແຫ່ງໜຶ່ງໃນບ່ອນບໍ່ໄກ

ຄັນເມື່ອທ່ານພຣະອານົນຈາກໄປບໍ່ດົນ ມານຜູ້ມີບາບກໍເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ແລ້ວໄດ້ຂາບທູນດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າໂຜດປະຣິນິບພານໃນບັດນີ້ເທີ້ນ ຂໍພຣະສຸດຄົດເຈົ້າໂຜດປະຣິນິບພານໃນບັດນີ້ເທີ້ນ ເວລານີ້ເປັນເວລາປະຣິນິບພານຂອງພຣະຜູ້ມີພຣະພາກເຈົ້າ ພຣະຜູ້ມີພຣະພາກເຈົ້າເຄີຍຕັດພຣະວາຈານີ້ໄວ້ວ່າ ມານຜູ້ມີບາບ ເຮົາຈະຍັງບໍ່ປະຣິນິບພານຕາບທໍ່ທີ່ພິກຂຸທັງຫຼາຍຜູ້ເປັນສາວົກຂອງເຮົາຍັງບໍ່ແຫຼມຄົມ ບໍ່ໄດ້ຮັບການແນະນຳ ບໍ່ແກ່ກ້າ ບໍ່ເປັນພະຫູສູດ ບໍ່ຊົງທຳ ບໍ່ປະຕິບັດທຳສົມຄວນແກ່ທຳ ບໍ່ປະຕິບັດຖືກ ບໍ່ປະພຶດຕາມທຳ ຮຽນກັບອາຈານ ຂອງຕົນແລ້ວແຕ່ກໍຍັງບອກ ສະແດງ ບັນຍັດ

ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍບໍ່ໄດ້ ຍັງສະແດງທຳມີປາຕິຫານ ປາບປະຣັບປະວາດທີ່ເກີດຂື້ນໃຫ້ຮຽບຮ້ອຍໂດຍຖືກຕ້ອງຕາມທຳບໍ່ໄດ້

ຂ້າແດ່ ພຣະອົງຜູ້ຈະເລີນ ກໍເວລານີ້ພິກຂຸທັງຫຼາຍຜູ້ເປັນສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ແຫຼມຄົມ ໄດ້ຮັບການແນະນຳ ແກ່ກ້າ ເປັນພະຫູສູດ ຊົງທຳ ປະຕິບັດທຳສົມຄວນແກ່ທຳ ປະຕິບັດຖືກຍິ່ງ ປະພຶດຕາມທຳ ຮຽນກັບອາຈານຂອງຕົນແລ້ວກໍສາມາດຈະບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍໄດ້ ສາມາດສະແດງທຳມີປາຕິຫານ ຜາບປະຮັບປະວາດທີ່ເກີດຂື້ນໃຫ້ຮຽບຮ້ອຍໂດຍຖືກຕ້ອງຕາມທຳໄດ້ ຂໍພຣະຜູ້ມີພຣະພາກເຈົ້າໂຜດປະຣິນິບພານໃນບັດນີ້ເທີ້ນ ຂໍພຣະສຸດຄົດເຈົ້າໂຜດປະຣິນິພພານໃນບັດນີ້ເທີ້ນ ເວລານີ້ເປັນເວລາປະຣິນິບພານຂອງພຣະຜູ້ມີພຣະພາກເຈົ້າ

ຂ້າແດ່ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າເຄີຍຕັດພຣະວາຈານີ້ໄວ້ວ່າ ມານຜູ້ມີບາບເຮົາຈະຍັງບໍ່ປະຣິນິບພານຕາບເທົ່າທີ່ພິກຂຸນີທັງຫຼາຍ ຜູ້ເປັນສາວິກາຂອງເຮົາຍັງບໍ່ແຫຼມຄົມ ບໍ່ໄດ້ຮັບການແນະນຳ ບໍ່ແກ່ກ້າ ບໍ່ເປັນພະຫູສູດ ບໍ່ຊົງທຳ ບໍ່ປະຕິບັດທຳສົມຄວນແກ່ທຳ ບໍ່ປະຕິບັດຖືກຍິ່ງ ບໍ່ປະພຶດຕາມທຳ ຮຽນກັບອາຈານຂອງຕົນແລ້ວແຕ່ກໍຍັງບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍບໍ່ໄດ້ ຍັງສະແດງທຳມີປາຕິຫານ ຜາບປະຣັບປະວາດທີ່ເກີດຂື້ນໃຫ້ຮຽບຮ້ອຍໂດຍຖືກຕ້ອງຕາມທຳບໍ່ໄດ້

ຂ້າແດ່ ພຣະອົງຜູ້ຈະເລີນ ກໍເວລານີ້ພິກຂຸນີທັງຫຼາຍ ຜູ້ເປັນສາວິກາຂອງພຣະຜູ້ມີພຣະພາກເປັນຜູ້ແຫຼມຄົມ ໄດ້ຮັບການແນະນຳ ແກ່ກ້າ ເປັນພະຫູສູດ ຊົງທຳ ປະຕິບັດທຳສົມຄວນແກ່ທຳ ປະຕິບັດຖືກ ປະພຶດຕາມທຳ ຮຽນກັບອາຈານຂອງຕົນແລ້ວ ກໍສາມາດຈະບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍໄດ້ ສາມາດສະແດງທຳມີປາຕິຫານ ປາບປັບປວາດທີ່ເກີດຂື້ນໃຫ້ຮຽບຮ້ອຍໂດຍຖືກຕ້ອງຕາມທຳໄດ້ ຂໍພຣະຜູ້ມີພຣະພາກເຈົ້າໂຜດປະຣິນິບພານໃນບັດນີ້ເທີ້ນ ຂໍພຣະສຸດຄົດເຈົ້າໂຜດປະຣິນິບພານໃນບັດນີ້ເທີ້ນ ເວລານີ້ເປັນເວລາປະຣິນິບພານຂອງພຣະຜູ້ມີພຣະພາກເຈົ້າ

ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າເຄີຍຕັດພຣະວາຈານີ້ໄວ້ວ່າ ມານຜູ້ມີບາບ ເຮົາຈະຍັງບໍ່ປະຣິນິບພານຕາບທໍ່ທີ່ອຸປາສົກທັງຫຼາຍຜູ້ເປັນສາວົກຂອງເຮົາ ฯລฯ ຕາບທໍ່ທີ່ອຸປາສິກາທັງຫຼາຍຜູ້ເປັນສາວິກາຂອງເຮົາ ຍັງບໍ່ແຫຼມຄົມ ບໍ່ໄດ້ຮັບການແນະນຳ ບໍ່ແກ່ກ້າ ບໍ່ເປັນພະຫູສູດ ບໍ່ຊົງທຳ ບໍ່ປະຕິບັດທຳສົມຄວນແກ່ທຳ ບໍ່ປະຕິບັດຖືກ ບໍ່ປະພຶດຕາມທຳ ຮຽນກັບອາຈານຂອງຕົນແລ້ວແຕ່ກໍຍັງບອກ ສະແດງ ບັນຍັດ ກຳນົດ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍບໍ່ໄດ້ ຍັງສະແດງທຳມີປາຕິຫານ ຜາບປະຣັບປະວາດທີ່ເກີດຂື້ນໃຫ້ຮຽບຮ້ອຍໂດຍຖືກຕ້ອງຕາມທຳບໍ່ໄດ້

ຂ້າແດ່ ພຣະອົງຜູ້ຈະເລີນ ກໍເວລານີ້ອຸປາສິກາທັງຫຼາຍຜູ້ເປັນສາວິກາຂອງພຣະຜູ້ມີພຣະ

ພາກເຈົ້າເປັນຜູ້ແຫຼມຄົມ ໄດ້ຮັບການແນະນຳ ແກ່ກ້າ ເປັນພະຫູສູດ ຊົງທຳ ປະຕິບັດທຳສົມຄວນແກ່ທຳ ປະຕິບັດຖືກ ປະພຶດຕາມທຳ ຮຽນກັບອາຈານຂອງຕົນແລ້ວ ກໍສາມາດຈະບອກ ສະແດງ ບັນຍັດ ແຕ່ງຕັ້ງ ເປີດເຜີຍ ຈຳແນກ ເຮັດໃຫ້ງ່າຍໄດ້ ສາມາດສະແດງທຳມີປາຕິຫານຜາບປະຣັບປະວາດທີ່ເກີດຂື້ນໃຫ້ຮຽບຮ້ອຍໂດຍຖືກຕ້ອງຕາມທຳໄດ້ ຂໍພຣະຜູ້ມີພຣະພາກເຈົ້າໂຜດປະຣິນິບພານໃນບັດນີ້ເທີ້ນ ຂໍພຣະສຸດຄົດເຈົ້າໂຜດປະຣິນິບພານໃນບັດນີ້ເທີ້ນ ເວລານີ້ເປັນເວລາປະຣິນິບພານຂອງພຣະຜູ້ມີພຣະພາກເຈົ້າ

ຂ້າແດ່ ພຣະອົງຜູ້ຈະເລີນ ອັນໜຶ່ງ ພຣະຜູ້ມີພຣະພາກເຈົ້າເຄີຍຕັດພຣະວາຈານີ້ໄວ້ວ່າ ມານຜູ້ມີບາບ ເຮົາຈະຍັງບໍ່ປະຣິນິບພານຕາບທໍ່ທີ່ພົມມະຈັນນີ້ຂອງເຮົາຍັງບໍ່ບໍລິບູນ ກວ້າງຂວາງແຜ່ຫຼາຍ ຮູ້ຈັກກັນສ່ວນຫຼາຍ ໝັ້ນຄົງດີ ກະທັ່ງເທວະດາແລະມະນຸດທັງຫຼາຍປະກາດໄດ້ແລ້ວ

ຂ້າແດ່ ພຣະອົງຜູ້ຈະເລີນ ພົມມະຈັນນີ້ຂອງພຣະຜູ້ມີພຣະພາກເຈົ້າບໍລິບູນ ກວ້າງຂວາງແຜ່ຫຼາຍ ຮູ້ຈັກກັນສ່ວນຫຼາຍ ໝັ້ນຄົງດີ ກະທັ່ງເທວະດາແລະມະນຸດປະກາດໄດ້ແລ້ວ

ຂໍພຣະຜູ້ມີພຣະພາກເຈົ້າໂຜດປະຣິນິບພານໃນບັດນີ້ເທີ້ນ ຂໍພຣະສຸດຄົດເຈົ້າໂຜດປະຣິນິບພານໃນບັດນີ້ເທີ້ນ ເວລານີ້ເປັນເວລາປະຣິນິບພານຂອງພຣະຜູ້ມີພຣະພາກເຈົ້າ

ເມື່ອມານທູນອາຣາດທະນາແນວນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຕອບດັ່ງນີ້ວ່າ ມານຜູ້ມີບາບ ທ່ານຈົ່ງຢ່າກັງວົນເລີຍ ອີກບໍ່ດົນການປະຣິນິບພານຂອງຕະຖາຄົດຈັກມີ ຈາກນີ້ໄປ (ພຽງ) ໓ ເດືອນ ຕະຖາຄົດຈັກປະຣິນິບພານ

ຂະນະນັ້ນ ພຣະຜູ້ມີພຣະພາກເຈົ້າຊົງມີສະຕິສຳປະຊັນຍະ ຊົງປົງພຣະຊົນມາຍຸສັງຂານ ນະ ປາວາລະເຈດີ ເມື່ອພຣະຜູ້ມີພຣະພາກເຈົ້າຊົງປົງພຣະຊົນມາຍຸສັງຂານແລ້ວ ໄດ້ເກີດແຜ່ນດິນ ໄຫວຄັ້ງໃຫຍ່ ເປັນຕາຢ້ານ ໃຫ້ເກີດຂົນຫົວລຸກ ທັງກອງທິບກໍດັງກຶກກ້ອງ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ເນື້ອຄວາມນັ້ນແລ້ວ ຈຶ່ງຊົງເປ່ງພຣະອຸທານ ນີ້ໃນເວລານັ້ນວ່າ

ມຸນີລະກຳທັງທີ່ສ່ວນໄດ້ແລະສ່ວນບໍ່ໄດ້
ອັນເປັນເຫດກໍ່ກຳເນີດເປັນເຄື່ອງປຸງແຕ່ງພົບໄດ້ແລ້ວ
ຍິນດີພາຍໃນຕົນ ມີໃຈໝັ້ນຄົງ ທຳລາຍກິເລດທີ່ເກີດໃນຕົນໄດ້
ຄືນັກຣົບທຳລາຍເກາະ ສັນນັ້ນ

**ເຈຕິຍະສູດທີ ໑໐ ຈົບ**

**ປາວາລະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໒. ປາສາທະກຳປະນະວັກ

## ໝວດວ່າດ້ວຍເຫດທີ່ເຮັດໃຫ້ຜາສາດໄຫວ

## ໑. ປຸບພະສູດ

### ວ່າດ້ວຍພຣະດຳຣິກ່ອນຕັດສະຣູ້

[໙໒໒] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ແຕ່ກ່ອນເຮົາເປັນໂພທິສັດ ຍັງບໍ່ໄດ້ຕັດສະຣູ້ ໄດ້ມີຄວາມຄິດດັ່ງນີ້ວ່າ ອັນໃດນໍ ເປັນເຫດ ເປັນປັດໄຈແຫ່ງການຈະເລີນອິດທິບາດ ພິກຂຸທັງຫຼາຍ (ຕໍ່ມາ) ເຮົານັ້ນໄດ້ມີຄວາມຄິດດັ່ງນີ້ວ່າ ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍສັນທະສະມາທິປະທານສັງຂານດັ່ງນີ້ວ່າ ສັນທະຂອງເຮົາຈັກບໍ່ຫຍ່ອນຍານຫຼາຍ ບໍ່ຕ້ອງປະຄັບປະຄອງເກີນໄປ ບໍ່ຫົດຫູ່ໃນພາຍໃນ ບໍ່ຊ່ານໄປໃນພາຍນອກ ແລະມີຄວາມໝາຍຮູ້ວ່າເບື້ອງໜ້າແລະເບື້ອງຫຼັງຢູ່ ຄື ມີຄວາມໝາຍຮູ້ວ່າເບື້ອງຫຼັງຄືເບື້ອງໜ້າ ເບື້ອງໜ້າຄືເບື້ອງຫຼັງ ເບື້ອງເທິງຄືເບື້ອງລ່າງ ເບື້ອງລຸ່ມຄືເບື້ອງເທິງ ກາງຄືນຄືກາງເວັນ ກາງເວັນຄືກາງຄືນ ມີໃຈສະຫງັດ ບໍ່ມີເຄື່ອງຮ້ອຍຮັດ ອົບຮົມຈິດໃຫ້ສະຫວ່າງຢູ່

໒. ຈະເລີນອິດທິບາດທີ່ປະກອບດ້ວຍວິຣິຍະສະມາທິປະທານສັງຂານດັ່ງນີ້ ວ່າ ວິຣິຍະຂອງເຮົາຈັກບໍ່ຫຍ່ອນຍານຫຼາຍ ບໍ່ຕ້ອງປະຄັບປະຄອງເກີນໄປ ບໍ່ຫົດຫູ່ໃນພາຍໃນ ບໍ່ຊ່ານໄປໃນພາຍນອກ ແລະມີຄວາມໝາຍຮູ້ວ່າເບື້ອງໜ້າແລະເບື້ອງຫຼັງຢູ່ ຄື ມີຄວາມໝາຍຮູ້ວ່າ ເບື້ອງຫຼັງຄືເບື້ອງໜ້າ ເບື້ອງໜ້າຄືເບື້ອງຫຼັງ

ເບື້ອງເທິງຄືເບື້ອງລ່າງ ເບື້ອງລຸ່ມຄືເບື້ອງເທິງ ກາງຄືນຄືກາງເວັນ ກາງເວັນຄືກາງຄືນ ມີໃຈສະຫງັດ ບໍ່ມີເຄື່ອງຮ້ອຍຮັດ ອົບຮົມຈິດໃຫ້ສະຫວ່າງຢູ່

໓. ຈະເລີນອິດທິບາດທີ່ປະກອບດ້ວຍຈິດຕະສະມາທິປະທານສັງຂານດັ່ງນີ້ວ່າ ຈິດຂອງເຮົາຈັກບໍ່ຫຍ່ອນຍານຫຼາຍ ບໍ່ຕ້ອງປະຄັບປະຄອງເກີນໄປ ບໍ່ຫົດຫູ່ໃນພາຍໃນ ບໍ່ຊ່ານໄປໃນພາຍນອກ ແລະມີຄວາມໝາຍຮູ້ວ່າເບື້ອງໜ້າແລະເບື້ອງຫຼັງຢູ່ ຄື ມີຄວາມໝາຍຮູ້ວ່າເບື້ອງຫຼັງຄືເບື້ອງໜ້າ ເບື້ອງໜ້າຄືເບື້ອງຫຼັງ ເບື້ອງເທິງຄືເບື້ອງລ່າງ ເບື້ອງລຸ່ມຄືເບື້ອງເທິງ ກາງຄືນຄືກາງເວັນ ກາງເວັນຄືກາງຄືນ ມີໃຈສະຫງັດ ບໍ່ມີເຄື່ອງຮ້ອຍຮັດ ອົບຮົມຈິດໃຫ້ສະຫວ່າງຢູ່

໔. ຈະເລີນອິດທິບາດທີ່ປະກອບດ້ວຍວິມັງສາສະມາທິປະທານສັງຂານດັ່ງນີ້ວ່າ ວິມັງສາຂອງເຮົາຈັກບໍ່ຫຍ່ອນຍານຫຼາຍ ບໍ່ຕ້ອງປະຄັບປະຄອງເກີນໄປ ບໍ່ຫົດຫູ່ໃນພາຍໃນ ບໍ່ຊ່ານໄປໃນພາຍນອກ ແລະມີຄວາມໝາຍຮູ້ວ່າເບື້ອງໜ້າແລະເບື້ອງຫຼັງຢູ່ ຄື ມີຄວາມໝາຍຮູ້ວ່າເບື້ອງຫຼັງຄືເບື້ອງໜ້າ ເບື້ອງໜ້າຄືເບື້ອງຫຼັງ ເບື້ອງເທິງຄືເບື້ອງລ່າງ ເບື້ອງລຸ່ມຄືເບື້ອງເທິງ ກາງຄືນຄືກາງເວັນ ກາງເວັນຄືກາງຄືນ ມີໃຈສະຫງັດ ບໍ່ມີເຄື່ອງຮ້ອຍຮັດ ອົບຮົມຈິດໃຫ້ສະຫວ່າງຢູ່

ເມື່ອອິດທິບາດ ໔ ປະການນີ້ທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ພິກຂຸຍ່ອມສະແດງລິດໄດ້ຫຼາຍແນວ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ສະແດງໃຫ້ຜາກົດຫຼືໃຫ້ຫາຍໄປກໍໄດ້ ຊອດຝາ ກຳແພງ (ແລະ) ພູໄປໄດ້ບໍ່ຕິດຂັດຄືໄປໃນບ່ອນວ່າງກໍໄດ້ ຜຸດຂຶ້ນ ຫຼື ມຸດລົງໃນແຜ່ນດິນຄືໄປໃນນ້ຳກໍໄດ້ ຍ່າງເທິງນ້ຳໂດຍທີ່ນ້ຳບໍ່ແຍກຄືຍ່າງເທິງແຜ່ນດິນກໍໄດ້ ນັ່ງຂັດສະມາທິເຫາະໄປໃນອາກາດຄືນົກບິນໄປກໍໄດ້ ໃຊ້ຝາມືລູບຄຳດວງຈັນດວງອາທິດອັນມີລິດຫຼາຍ ມີອານຸພາບຫຼາຍກໍໄດ້ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້

ເມື່ອອິດທິບາດ ໔ ປະການທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ພິກຂຸຍ່ອມໄດ້ຍິນສຽງ ໒ ຊະນິດ ຄື ສຽງທິບແລະສຽງມະນຸດ ທັງທີ່ຢູ່ໄກແລະໃກ້ ດ້ວຍຫູທິບອັນບໍລິສຸດເໜືອມະນຸດ

ເມື່ອອິດທິບາດ ໔ ປະການທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ພິກຂຸຍ່ອມກຳນົດຮູ້ຈິດຂອງສັດບຸກຄົນອື່ນໄດ້ດ້ວຍຈິດຂອງຕົນ ຄື ຈິດມີຣາຄະກໍຮູ້ແຈ້ງວ່າຈິດມີຣາຄະ ຫຼືຈິດປາສະຈາກຣາຄະກໍຮູ້ແຈ້ງວ່າຈິດປາສະຈາກຣາຄະ ຈິດມີໂທສະກໍຮູ້ແຈ້ງວ່າຈິດມີໂທສະ ຫຼືຈິດປາສະຈາກໂທສະກໍຮູ້ແຈ້ງວ່າຈິດປາສະຈາກໂທສະ ຈິດມີໂມຫະກໍຮູ້ແຈ້ງວ່າຈິດມີໂມຫະ ຫຼືຈິດປາສະຈາກໂມຫະກໍຮູ້ແຈ້ງວ່າຈິດປາສະຈາກໂມຫະ ຈິດຫົດຫູ່ກໍຮູ້ແຈ້ງວ່າຈິດຫົດຫູ່ ຫຼືຈິດຟຸ້ງຊ່ານ

ກໍຮູ້ແຈ້ງວ່າຈິດຟຸ້ງຊ່ານ ຈິດເປັນມະຫັກຄະຕະ໑ກໍຮູ້ແຈ້ງວ່າຈິດເປັນມະຫັກຄະຕະ ຫຼືຈິດບໍ່ເປັນມະຫັກຄະຕະກໍຮູ້ແຈ້ງວ່າຈິດບໍ່ເປັນມະຫັກຄະຕະ ຈິດມີສິ່ງອື່ນຍິ່ງກວ່າກໍຮູ້ແຈ້ງວ່າຈິດມີສິ່ງອື່ນຍິ່ງກວ່າ ຫຼືຈິດບໍ່ມີສິ່ງອື່ນຍິ່ງກວ່າກໍຮູ້ແຈ້ງວ່າຈິດບໍ່ມີສິ່ງອື່ນຍິ່ງກວ່າ ຈິດເປັນສະມາທິກໍຮູ້ແຈ້ງວ່າຈິດເປັນສະມາທິ ຫຼືຈິດບໍ່ເປັນສະມາທິກໍຮູ້ແຈ້ງວ່າຈິດບໍ່ເປັນສະມາທິ ຈິດລຸດພົ້ນກໍຮູ້ແຈ້ງວ່າຈິດລຸດພົ້ນ ຫຼືຈິດບໍ່ລຸດພົ້ນກໍຮູ້ແຈ້ງວ່າຈິດບໍ່ລຸດພົ້ນ

ເມື່ອອິດທິບາດ ໔ ປະການທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ພິກຂຸຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່ ຕະຫຼອດສັງວັດຕະກັບເປັນຈຳນວນຫຼາຍແດ່ ຕະຫຼອດວິວັດຕະກັບເປັນຈຳນວນຫຼາຍແດ່ ຕະຫຼອດສັງວັດຕະກັບແລະວິວັດຕະກັບເປັນຈຳນວນຫຼາຍແດ່ວ່າ ໃນພົບນັ້ນ ເຮົາໄດ້ມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນ ກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນ ເຮົາກໍໄດ້ມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນຈຶ່ງມາເກີດໃນພົບນີ້ ທ່ານຣະນຶກຊາດກ່ອນໄດ້ຫຼາຍຊາດພ້ອມທັງລັກສະນະທົ່ວໄປ ແລະຊີວະປະຫວັດແນວນີ້ດ້ວຍປະການຢ່າງນີ້

ເມື່ອອິດທິບາດ ໔ ປະການທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ພິກຂຸເຫັນໝູ່ສັດຜູ້ກຳລັງຈຸຕິ(ຕາຍ) ກຳລັງອຸບັດ(ເກີດ) ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳວ່າ ໝູ່ສັດທີ່ປະກອບກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຜິດ ແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ພວກເຂົາຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ແຕ່ໝູ່ສັດທີ່ປະກອບກາຍສຸດຈະຣິດ ວະຈີສຸດຈະຣິດ ແລະມະໂນສຸດຈະຣິດ ບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຖືກ ແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຖືກ ພວກເຂົາຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ທ່ານເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງອຸບັດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳແນວນີ້ແລ໒

ເມື່ອອິດທິບາດ ໔ ປະການທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ພິກຂຸຈຶ່ງເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

**ປຸບພະສູດທີ ໑ ຈົບ**

# ໒. ມະຫັບຜະລະສູດ

## ວ່າດ້ວຍການຈະເລີນອິດທິບາດມີຜະລານິສົງຫຼາຍ

[໗໒໔] ພິກຂຸທັງຫຼາຍ ອິດທິບາດ ໔ ປະການນີ້ທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ

ອິດທິບາດ ໔ ປະການທີ່ພິກຂຸຈະເລີນແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງມີຜົນຫຼາຍ ມີອານິສົງຫຼາຍ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍສັນທະສະມາທິປະທານສັງຂານດັ່ງນີ້ ວ່າ ສັນທະຂອງເຮົາຈັກບໍ່ຫຍ່ອນຍານຫຼາຍ ບໍ່ຕ້ອງປະຄັບປະຄອງເກີນໄປ ບໍ່ຫົດຫູ່ໃນພາຍໃນ ບໍ່ຊ່ານໄປໃນພາຍນອກ ແລະມີຄວາມໝາຍຮູ້ວ່າເບື້ອງໜ້າແລະເບື້ອງຫຼັງຢູ່ ຄື ມີຄວາມໝາຍຮູ້ວ່າເບື້ອງຫຼັງຄືເບື້ອງໜ້າ ເບື້ອງໜ້າຄືເບື້ອງຫຼັງ ເບື້ອງເທິງຄືເບື້ອງລ່າງ ເບື້ອງລຸ່ມຄືເບື້ອງເທິງ ກາງຄືນຄືກາງເວັນ ກາງເວັນຄືກາງຄືນ ມີໃຈສະຫງັດ ບໍ່ມີເຄື່ອງຮ້ອຍຮັດ ອົບຮົມຈິດໃຫ້ສະຫວ່າງຢູ່
໒. ຈະເລີນອິດທິບາດທີ່ປະກອບດ້ວຍວິຣິຍະສະມາທິປະທານສັງຂານ ຯລຯ
໓. ຈະເລີນອິດທິບາດທີ່ປະກອບດ້ວຍຈິດຕະສະມາທິປະທານສັງຂານ ຯລຯ
໔. ຈະເລີນອິດທິບາດທີ່ປະກອບດ້ວຍວິມັງສາສະມາທິປະທານສັງຂານດັ່ງນີ້ວ່າ ວິມັງສາຂອງເຮົາຈັກບໍ່ຫຍ່ອນຍານຫຼາຍ ບໍ່ຕ້ອງປະຄັບປະຄອງເກີນໄປ ບໍ່ຫົດຫູ່ໃນພາຍໃນ ບໍ່ຊ່ານໄປໃນພາຍນອກ ແລະມີຄວາມໝາຍຮູ້ວ່າເບື້ອງໜ້າແລະເບື້ອງຫຼັງຢູ່ ຄື ມີຄວາມໝາຍຮູ້ວ່າເບື້ອງຫຼັງຄືເບື້ອງໜ້າ ເບື້ອງໜ້າຄືເບື້ອງຫຼັງ ເບື້ອງເທິງຄືເບື້ອງລ່າງ ເບື້ອງລຸ່ມຄືເບື້ອງເທິງ ກາງຄືນຄືກາງເວັນ ກາງເວັນຄືກາງຄືນ ມີໃຈສະຫງັດ ບໍ່ມີເຄື່ອງຮ້ອຍຮັດ ອົບຮົມຈິດໃຫ້ສະຫວ່າງຢູ່

ພິກຂຸທັງຫຼາຍ ອິດທິບາດ ໔ ປະການທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ຈຶ່ງມີຜົນຫຼາຍ ມີອານິສົງຫຼາຍ

ພິກຂຸທັງຫຼາຍ ເມື່ອອິດທິບາດ ໔ ປະການທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ພິກຂຸຍ່ອມສະແດງລິດໄດ້ຫຼາຍແນວ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຯລຯ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້

ພິກຂຸທັງຫຼາຍ ເມື່ອອິດທິບາດ ໔ ປະການນີ້ທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ພິກຂຸຈຶ່ງເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນ

ອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

**ມະຫັບຜະລະສູດທີ ໘ ຈົບ**

# ໓. ສັນທະສະມາທິສູດ

## ວ່າດ້ວຍສັນທະສະມາທິ

[໗໘໕] ພິກຂຸທັງຫຼາຍ ຖ້າພິກຂຸອາໄສສັນທະແລ້ວໄດ້ສະມາທິ ໄດ້ຈິດເຕກັກຄະຕາ (ສະພາວະທີ່ຈິດມີອາລົມດຽວ) ນີ້ຮຽກວ່າ ສັນທະສະມາທິ

໑. ທ່ານສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອປ້ອງກັນບາບອະກຸສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ
໒. ທ່ານສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອລະບາບອະກຸສົນທຳທີ່ເກີດຂຶ້ນແລ້ວ
໓. ທ່ານສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອທຳກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ
໔. ທ່ານສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອຄວາມດຳລົງຢູ່ ບໍ່ເລືອນຫາຍ ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ ເຫຼົ່ານີ້ຮຽກວ່າ ປະທານສັງຂານ

ສັນທະນີ້ ສັນທະສະມາທິນີ້ ແລະປະທານສັງຂານເຫຼົ່ານີ້ ດັ່ງພັນນາມານີ້

ນີ້ຮຽກວ່າ ອິດທິບາດທີ່ປະກອບດ້ວຍສັນທະສະມາທິປະທານສັງຂານ

ພິກຂຸທັງຫຼາຍ ຖ້າພິກຂຸອາໄສວິຣິຍະແລ້ວໄດ້ສະມາທິ ໄດ້ຈິດເຕກັກຄະຕາ ນີ້ຮຽກວ່າ ວິຣິຍະສະມາທິ

໑. ທ່ານສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອປ້ອງກັນບາບອະກຸສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ

ฯลฯ

໔. ທ່ານສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອຄວາມດຳລົງຢູ່ ບໍ່ເລືອນຫາຍ ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ ເຫຼົ່ານີ້ຮຽກວ່າ ປະທານສັງຂານ

ວິຣິຍະນີ້ ວິຣິຍະສະມາທິນີ້ ແລະປະທານສັງຂານເຫຼົ່ານີ້ດັ່ງພັນນາມານີ້

ນີ້ຮຽກວ່າ ອິດທິບາດທີ່ປະກອບດ້ວຍສັນທະສະມາທິປະທານສັງຂານ

ພິກຂຸທັງຫຼາຍ ຖ້າພິກຂຸອາໄສຈິດແລ້ວໄດ້ສະມາທິ ໄດ້ຈິດເຕກັກຄະຕາ ນີ້ຮຽກວ່າ ຈິດຕະສະມາທິ

໑. ທ່ານສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອປ້ອງກັນບາບອະກຸສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ
ฯลฯ
໔. ທ່ານສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອຄວາມດຳລົງຢູ່ ບໍ່ເລືອນຫາຍ ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ

ເຫຼົ່ານີ້ຮຽກວ່າ ປະທານສັງຂານ

ຈິດນີ້ ຈິດຕະສະມາທິນີ້ ແລະປະທານສັງຂານເຫຼົ່ານີ້ດັ່ງພັນນາມານີ້

ນີ້ຮຽກວ່າ ອິດທິບາດທີ່ປະກອບດ້ວຍຈິດຕະສະມາທິປະທານສັງຂານ

ພິກຂຸທັງຫຼາຍ ຖ້າພິກຂຸອາໄສວິມັງສາແລ້ວໄດ້ສະມາທິ ໄດ້ຈິດເຕກັກຄະຕາ ນີ້ຮຽກວ່າ ວິມັງສາສະມາທິ

໑. ທ່ານສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອປ້ອງກັນບາບອະກຸສົນທັນທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ ฯลฯ
໔. ທ່ານສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ມຸ້ງໝັ້ນ ເພື່ອຄວາມດຳລົງຢູ່ ບໍ່ເລືອນຫາຍ ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ

ເຫຼົ່ານີ້ຮຽກວ່າ ປະທານສັງຂານ

ວິມັງສານີ້ ວິມັງສາສະມາທິນີ້ ແລະປະທານສັງຂານເຫຼົ່ານີ້ດັ່ງພັນນາມານີ້

ນີ້ຮຽກວ່າ ອິດທິບາດທີ່ປະກອບດ້ວຍວິມັງສາສະມາທິປະທານສັງຂານ

**ສັນທະສະມາທິສູດທີ ໓ ຈົບ**

# ໔. ໂມກຄັນລານະສູດ

## ວ່າດ້ວຍພຣະໂມກຄັນລານະສະແດງລິດ

[໗໘໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ຜາສາດຂອງນາງວິສາຂາມິຄາຣະມາຕາ ໃນບຸບພາຣາມ ເຂດເມືອງສາວັດຖີ ສະໄໝນັ້ນ ພິກຂຸຈຳນວນຫຼາຍຢູ່ພາຍໃຕ້ຜາສາດຂອງນາງວິສາຂາມິຄາຣະມາຕາ ເປັນຜູ້ຟຸ້ງຊ່ານ ຖືໂຕ ໂລເລ ປາກບໍ່ຂອບ ເວົ້າພ່ຳເພື້ອ ຫຼົງລືມສະຕິ ບໍ່ມີສຳປະຊັນຍະ ມີຈິດບໍ່ຕັ້ງໝັ້ນ ມີຈິດກວັດແກວ່ງ ບໍ່ສັງລວມອິນຊີ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກທ່ານພຣະມະຫາໂມກຄັນລານະມາຕັດວ່າ ໂມກຄັນລານະ ເພື່ອນພົມມະຈາຣີເຫຼົ່ານີ້ຢູ່ພາຍໃຕ້ຜາສາດຂອງນາງວິສາຂາມິຄາຣະມາຕາ ເປັນຜູ້ຟຸ້ງຊ່ານ ຖືໂຕ ໂລເລ ປາກບໍ່ຂອບ ເວົ້າພ່ຳເພື້ອ ຫຼົງລືມສະຕິ ບໍ່ມີສຳປະຊັນຍະ ມີຈິດບໍ່ຕັ້ງໝັ້ນ ມີຈິດກວັດແກວ່ງ ບໍ່ສັງລວມອິນຊີ ໄປເທີ້ນໂມກຄັນລານະ ທ່ານຈົ່ງເຮັດພິກຂຸເຫຼົ່ານັ້ນໃຫ້ສັງເວດ

ທ່ານພຣະມະຫາໂມກຄັນລານະທູນຮັບສະໜອງພຣະດຳຣັດແລ້ວ ສະແດງອິດທາພິສັງຂານໃຫ້ຜາສາດຂອງນາງວິສາຂາມິຄາຣະມາຕາສະເທືອນສະທ້ານຫວັ່ນໄຫວດ້ວຍນີ້ວຫົວແມ່ຕີນ ບັດນັ້ນ ພິກຂຸເຫຼົ່ານັ້ນຕົກໃຈ ຂົນຫົວລຸກ ໄດ້ໄປຢືນຢູ່ບ່ອນທີ່ສົມຄວນ ເວົ້າກັນວ່າ ທ່ານຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ລົມກໍບໍ່ພັດ ທັງຜາສາດຂອງນາງວິສາຂາມິຄາຣະມາຕານີ້ ມີຖານເລິກ ຝັງໄວ້ແໜ້ນ ບໍ່ຫວັ່ນໄຫວ ບໍ່ໂຍກຄອນ ກໍເມື່ອເປັນແນວນີ້ ຄົງມີອັນໃດຈັກແນວໜຶ່ງທີ່ເຮັດໃຫ້ຜາສາດນີ້ສະເທືອນສະທ້ານຫວັ່ນໄຫວ

ຕໍ່ມາ ພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າໄປຫາພິກຂຸເຫຼົ່ານັ້ນແລ້ວຕັດວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍເກີດຄວາມສະຫຼົດໃຈ ຂົນຫົວລຸກ ໄດ້ໄປຢືນຢູ່ບ່ອນທີ່ສົມຄວນ ຍ້ອນ ເຫດໃດ

ພິກຂຸເຫຼົ່ານັ້ນ ຂາບທູນວ່າ ຂ້າແດ່ພຣະອົງຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ລົມກໍບໍ່ພັດ ທັງຜາສາດຂອງນາງວິສາຂາມິຄາຣະມາຕານີ້ ມີຖານເລິກ ຝັງໄວ້ແໜ້ນ ບໍ່ຫວັ່ນໄຫວ ບໍ່ໂຍກຄອນ ກໍເມື່ອເປັນແນວນີ້ ຄົງມີອັນໃດຈັກແນວໜຶ່ງທີ່ເຮັດໃຫ້ຜາສາດນີ້ສະເທືອນສະທ້ານຫວັ່ນໄຫວເປັນແນ່

ພິກຂຸທັງຫຼາຍ ພິກຂຸໂມກຄັນລານະ ປະສົງຈະໃຫ້ທ່ານທັງຫຼາຍສັງເວດ ຈຶ່ງເຮັດຜາສາດຂອງນາງວິສາຂາມິຄາຣະມາຕາໃຫ້ສະເທືອນສະທ້ານຫວັ່ນໄຫວດ້ວຍ ຫົວໂປ້ຕີນ ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ພິກຂຸໂມກຄັນລານະມີລິດຫຼາຍ ມີອານຸພາບຫຼາຍແນວນີ້ ຍ້ອນທຳເຫຼົ່າໃດທີ່ພິກຂຸໂມກຄັນລານະຈະເລີນ ເຮັດໃຫ້ຫຼາຍແລ້ວ

ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍ ມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ມີພຣະຜູ້ມີພຣະພາກເຈົ້າເປັນຜູ້ນຳ ມີພຣະຜູ້ມີພຣະພາກເຈົ້າເປັນບ່ອນເພິ່ງ ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານອະໄຣກາດ ສະເພາະພຣະຜູ້ມີພຣະພາກເຈົ້າທ່ານັ້ນທີ່ຈະຊົງອະທິບາຍເນື້ອຄວາມແຫ່ງພຣະ ພາສິດນັ້ນໃຫ້ແຈ່ມແຈ້ງໄດ້ ພິກຂຸທັງຫຼາຍຟັງຕໍ່ຈາກພຣະຜູ້ມີພຣະພາກເຈົ້າແລ້ວຈັກຊົງຈຳໄວ້

ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ທ່ານທັງຫຼາຍຈົ່ງຟັງ ພິກຂຸໂມກຄັນລານະມີລິດຫຼາຍ ມີອານຸພາບຫຼາຍແນວນີ້ ຍ້ອນອິດທິບາດ ໔ ປະການທີ່ພິກຂຸໂມກຄັນລານະຈະເລີນ ເຮັດໃຫ້ຫຼາຍແລ້ວ

ອິດທິບາດ ໔ ປະການ ອັນໃດແດ່

ຄື ພິກຂຸໂມກຄັນລານະ

໑. ຈະເລີນອິດທິບາດທີ່ປະກອບດ້ວຍສັນທະສະມາທິປະທານສັງຂານດັ່ງນີ້ວ່າ ສັນທະຂອງເຮົາຈັກບໍ່ຫຍ່ອນຍານ ຯລຯ
໒. ຈະເລີນອິດທິບາດທີ່ປະກອບດ້ວຍວິຣິຍະສະມາທິປະທານສັງຂານ ຯລຯ
໓. ຈະເລີນອິດທິບາດທີ່ປະກອບດ້ວຍຈິດຕະສະມາທິປະທານສັງຂານ ຯລຯ
໔. ຈະເລີນອິດທິບາດທີ່ປະກອບດ້ວຍວິມັງສາສະມາທິປະທານສັງຂານດັ່ງນີ້ວ່າ ວິມັງສາຂອງເຮົາຈັກບໍ່ຫຍ່ອນຍານຫຼາຍ ບໍ່ຕ້ອງປະຄັບປະຄອງເກີນໄປ ບໍ່ຫົດຫູ່ໃນພາຍໃນ ບໍ່ຊ່ານໄປໃນພາຍນອກ ແລະມີຄວາມໝາຍຮູ້ວ່າເບື້ອງໜ້າແລະເບື້ອງຫຼັງຢູ່ ຄື ມີຄວາມໝາຍຮູ້ວ່າ ເບື້ອງຫຼັງຄືເບື້ອງໜ້າ ເບື້ອງໜ້າຄືເບື້ອງຫຼັງ ເບື້ອງເທິງຄືເບື້ອງລ່າງ ເບື້ອງລຸ່ມຄືເບື້ອງເທິງ ກາງຄືນຄືກາງເວັນ ກາງເວັນຄືກາງຄືນ ມີໃຈສະຫງັດ ບໍ່ມີເຄື່ອງຮ້ອຍຮັດ ອົບຮົມຈິດໃຫ້ສະຫວ່າງຢູ່

ພິກຂຸທັງຫຼາຍ ພິກຂຸໂມກຄັນລານະມີລິດຫຼາຍ ມີອານຸພາບຫຼາຍແນວນີ້ ຍ້ອນອິດທິບາດ ໔ ປະການນີ້ທີ່ພິກຂຸໂມກຄັນລານະຈະເລີນ ເຮັດໃຫ້ຫຼາຍແລ້ວ ອັນໜຶ່ງ ພິກຂຸ ໂມກຄັນລານະສະແດງລິດໄດ້ຫຼາຍແນວ ຍ້ອນອິດທິບາດ ໔ ປະການນີ້ທີ່ພິກຂຸ ໂມກຄັນລານະຈະເລີນ ເຮັດໃຫ້ຫຼາຍແລ້ວ ຯລຯ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກ ອັນໜຶ່ງ ພິກຂຸໂມກຄັນລານະຍ່ອມເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະ ສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

**ໂມກຄັນລານະສູດທີ ໔ ຈົບ**

(ອັນໜຶ່ງ ອະພິນຍາທັງຫຼາຍເພິ່ງໃຫ້ພິດສະດານແນວນີ້)

# ໔. ອຸນນາພະພາມມະນະສູດ

## ວ່າດ້ວຍອຸນນາພະພາມ

[໘໔໗] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ທ່ານພຣະອານົນຢູ່ໂຄສິຕາຣາມ ເຂດເມືອງໂກສຳພີ ຄັ້ງນັ້ນ ພາມຊື່ອຸນນາພະເຂົ້າໄປຫາທ່ານພຣະອານົນຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນຖາມທ່ານ

ພຣະອານົນດັ່ງນີ້ວ່າ ທ່ານອານົນ ທ່ານປະພຶດພົມມະຈັນໃນພຣະສະມະນະໂຄດົມເພື່ອຕ້ອງການອັນໃດ?

ທ່ານພຣະອານົນຕອບວ່າ ພາມ ເຮົາປະພຶດພົມມະຈັນໃນພຣະຜູ້ມີພຣະພາກເຈົ້າ ເພື່ອລະສັນທະ

ທ່ານອານົນ ມີມັກ ມີປະຕິປະທາເພື່ອລະສັນທະນັ້ນຢູ່ບໍ?
ພາມ ມີມັກ ມີປະຕິປະທາເພື່ອລະສັນທະນັ້ນຢູ່
ທ່ານອານົນ ມັກ ເປັນແນວໃດ? ປະຕິປະທາເພື່ອລະສັນທະນັ້ນ ເປັນແນວໃດ?

ພາມ ພິກຂຸໃນທຳວິໄນນີ້ຈະເລີນອິດທິບາດທີ່ປະກອບດ້ວຍສັນທະສະມາທິປະທານສັງຂານ ຈະເລີນອິດທິບາດທີ່ປະກອບດ້ວຍວິຣິຍະສະມາທິປະທານສັງຂານ ຈະເລີນອິດທິບາດທີ່ປະກອບດ້ວຍ ຈິດຕະສະມາທິປະທານສັງຂານ ຈະເລີນອິດທິບາດທີ່ປະກອບດ້ວຍວິມັງສາສະມາທິປະທານສັງຂານ ນີ້ແລ ຄືມັກ ນີ້ຄືປະຕິປະທາເພື່ອລະສັນທະນັ້ນ

ທ່ານອານົນ ເມື່ອເປັນແນວນີ້ ສັນທະນັ້ນຍັງມີຢູ່ ບໍ່ແມ່ນບໍ່ມີ ເປັນໄປບໍ່ໄດ້ເລີຍທີ່ບຸກຄົນຈັກລະສັນທະດ້ວຍສັນທະນັ້ນເອງ

ພາມ ຖ້າເປັນແນວນັ້ນ ເຮົາຈັກຍ້ອນຖາມທ່ານໃນເລື້ອງນີ້ ທ່ານເພິ່ງຕອບເລື້ອງນັ້ນຕາມທີ່ທ່ານພໍໃຈເທີ້ນ

ພາມ ທ່ານຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ໃນເບື້ອງຕົ້ນທ່ານໄດ້ມີສັນທະ (ຄວາມພໍໃຈ) ວ່າ ຈັກໄປອາຣາມ ເມື່ອທ່ານໄປເຖິງອາຣາມແລ້ວ ສັນທະທີ່ເກີດຂຶ້ນໃນເບື້ອງຕົ້ນນັ້ນກໍລະງັບໄປບໍ

ເປັນແນວນັ້ນ ທ່ານຜູ້ຈະເລີນ

ໃນເບື້ອງຕົ້ນ ທ່ານໄດ້ມີວິຣິຍະ (ຄວາມພຽນ) ວ່າ ຈັກໄປອາຣາມ ເມື່ອທ່ານໄປເຖິງອາຣາມແລ້ວ ວິຣິຍະທີ່ເກີດຂື້ນໃນເບື້ອງຕົ້ນນັ້ນກໍລະງັບໄປແມ່ນບໍ?

ເປັນແນວນັ້ນ ທ່ານຜູ້ຈະເລີນ

ໃນເບື້ອງຕົ້ນ ທ່ານໄດ້ມີຈິດຕະ (ຄວາມໃສ່ໃຈ) ວ່າ ຈັກໄປອາຣາມ ເມື່ອທ່ານໄປເຖິງອາຣາມແລ້ວ ຈິດຕະທີ່ເກີດຂື້ນໃນເບື້ອງຕົ້ນນັ້ນກໍລະງັບໄປແມ່ນບໍ?

ເປັນແນວນັ້ນ ທ່ານຜູ້ຈະເລີນ

ໃນເບື້ອງຕົ້ນ ທ່ານໄດ້ມີວິມັງສາ (ຄວາມຮື່ນຕອງ) ວ່າ ຈັກໄປອາຣາມ ເມື່ອທ່ານໄປເຖິງອາຣາມແລ້ວ ວິມັງສາທີ່ເກີດຂື້ນໃນເບື້ອງຕົ້ນນັ້ນກໍລະງັບໄປແມ່ນບໍ?

ເປັນແນວນັ້ນ ທ່ານຜູ້ຈະເລີນ

ພາມ ແນວນັ້ນຄືກັນ ພິກຂຸໃດເປັນພຣະອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາຣະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນຍ້ອນຮູ້ໂດຍຖືກຕ້ອງ ພິກຂຸນັ້ນໃນເບື້ອງຕົ້ນ ໄດ້ມີສັນທະເພື່ອບັນລຸອະຣະຫັດ ເມື່ອບັນລຸອະຣະຫັດແລ້ວ ສັນທະທີ່ເກີດຂື້ນໃນເບື້ອງຕົ້ນນັ້ນກໍລະງັບໄປ ໃນເບື້ອງຕົ້ນໄດ້ມີວິຣິຍະເພື່ອບັນລຸອະຣະຫັດ ເມື່ອບັນລຸອະຣະຫັດແລ້ວ ວິຣິຍະທີ່ເກີດຂື້ນໃນເບື້ອງຕົ້ນ ນັ້ນກໍລະງັບໄປ ໃນເບື້ອງຕົ້ນໄດ້ມີຈິດຕະເພື່ອບັນລຸອະຣະຫັດ ເມື່ອບັນລຸອະຣະຫັດແລ້ວ ຈິດຕະທີ່ເກີດຂື້ນໃນເບື້ອງຕົ້ນນັ້ນກໍລະງັບໄປ ໃນເບື້ອງຕົ້ນໄດ້ມີວິມັງສາເພື່ອບັນລຸອະຣະຫັດ ເມື່ອບັນລຸອະຣະຫັດແລ້ວ ວິມັງສາທີ່ເກີດຂື້ນໃນເບື້ອງຕົ້ນນັ້ນກໍລະງັບໄປ ພາມ ທ່ານຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ເມື່ອເປັນເຊັ່ນດັ່ງທີ່ກ່າວມານີ້ ສັນທະເປັນຕົ້ນນັ້ນຍັງມີຢູ່ ຫຼື ບໍ່ແມ່ນບໍ່ມີ

ທ່ານອານົນ ເມື່ອເປັນແນວນີ້ ສັນທະເປັນຕົ້ນນັ້ນຍັງມີຢູ່ແນ່ນອນ ບໍ່ແມ່ນບໍ່ມີ ທ່ານອານົນ ພາສິດຂອງທ່ານຊັດເຈນມ່ວນຫຼາຍ ທ່ານອານົນ ພາສິດຂອງທ່ານຊັດເຈນມ່ວນຫຼາຍ ທ່ານປະກາດທຳແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼືເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ ຄົນມີຕາດີຈັກເຫັນຮູບໄດ້ ທ່ານອານົນຂ້າພະເຈົ້ານີ້ ຂໍເຖິງທ່ານພຣະໂຄດົມ ພ້ອມທັງພຣະທຳແລະພຣະສົງເປັນສະຣະນະ ຂໍທ່ານຈົ່ງຊົງຈຳຂ້າພະເຈົ້າວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ອຸນນາພະພາມມະນະສູດທີ ໕ ຈົບ**

# ໕. ປະຖົມພາມມະນະສູດ

## ວ່າດ້ວຍສະມະນະພາມ ສູດທີ ໑

[໗໔໗] ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະດີດຕະການ ໄດ້ມີລິດຫຼາຍ ມີອານຸພາບຫຼາຍ ກໍຍ້ອນອິດທິບາດ ໔ ປະການທີ່ສະມະນະຫຼືພາມເຫຼົ່ານັ້ນທັງໝົດ ຈະເລີນ ເຮັດໃຫ້ຫຼາຍແລ້ວ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະນາຄົດຕະການ ຈັກມີລິດຫຼາຍ ມີອານຸພາບ ຫຼາຍ ກໍຍ້ອນອິດທິບາດ ໔ ປະການທີ່ສະມະນະຫຼືພາມເຫຼົ່ານັ້ນທັງໝົດ ຈະເລີນ ເຮັດໃຫ້ຫຼາຍແລ້ວ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນປັດຈຸບັນ ຍ່ອມມີລິດຫຼາຍ ມີອານຸພາບຫຼາຍ ກໍຍ້ອນອິດທິບາດ ໔ ປະການທີ່ສະມະນະຫຼືພາມເຫຼົ່ານັ້ນທັງໝົດຈະເລີນ ເຮັດໃຫ້ຫຼາຍແລ້ວ

ອິດທິບາດ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍ ສັນທະສະມາທິ ປະທານສັງຂານ
໒. ຈະເລີນອິດທິບາດທີ່ປະກອບດ້ວຍ ວິຣິຍະສະມາທິ ປະທານສັງຂານ
໓. ຈະເລີນອິດທິບາດທີ່ປະກອບດ້ວຍ ຈິດຕະສະມາທິ ປະທານສັງຂານ
໔. ຈະເລີນອິດທິບາດທີ່ປະກອບດ້ວຍ ວິມັງສາສະມາທິ ປະທານສັງຂານ

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະດີດຕະການ ໄດ້ມີລິດຫຼາຍ ມີອານຸພາບຫຼາຍ ກໍຍ້ອນອິດທິບາດ ໔ ປະການນີ້ທີ່ສະມະນະຫຼືພາມເຫຼົ່ານັ້ນທັງໝົດ ຈະເລີນ ເຮັດໃຫ້ຫຼາຍແລ້ວ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະນາຄົດຕະການ ຈັກມີລິດຫຼາຍ ມີອານຸພາບ ຫຼາຍ ກໍຍ້ອນອິດທິບາດ ໔ ປະການນີ້ທີ່ສະມະນະຫຼືພາມເຫຼົ່ານັ້ນທັງໝົດ ຈະເລີນ ເຮັດໃຫ້ຫຼາຍແລ້ວ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນປັດຈຸບັນການ ຍ່ອມມີລິດຫຼາຍ ມີອານຸພາບຫຼາຍ ກໍຍ້ອນອິດທິບາດ ໔ ປະການນີ້ທີ່ສະມະນະຫຼືພາມເຫຼົ່ານັ້ນທັງໝົດ ຈະເລີນ ເຮັດໃຫ້ຫຼາຍແລ້ວ

**ປະຖົມພາມມະນະສູດທີ ໕ ຈົບ**

# ໗. ທຸຕິຍະພາມມະນະສູດ
## ວ່າດ້ວຍສະມະນະພາມ ສູດທີ ໘

[໗໘໙] ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະດີດຕະການ ໄດ້ສະແດງລິດໄດ້ຫຼາຍແນວ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນ ຄົນດຽວກໍໄດ້ ສະແດງໃຫ້ຜາກົດຫຼືໃຫ້ຫາຍໄປກໍໄດ້ ຊອດຝາ ກຳແພງ (ແລະ)ພູໄປໄດ້ ບໍ່ຕິດຂັດຄືໄປໃນບ່ອນວ່າງກໍໄດ້ ໂປ່ໂລ່ຂຶ້ນຫຼືມຸດລົງໃນແຜ່ນດິນຄືໄປໃນນໍ້າກໍໄດ້ ຍ່າງເທິງນໍ້າໂດຍທີ່ນໍ້າບໍ່ແຍກຄືຍ່າງເທິງແຜ່ນດິນກໍໄດ້ ນັ່ງຂັດສະມາທິເຫາະໄປໃນອາກາດຄືນົກບິນໄປກໍໄດ້ ໃຊ້ຝາມືລູບຄຳດວງຈັນດວງອາທິດອັນມີລິດຫຼາຍ ມີອານຸພາບ ຫຼາຍກໍໄດ້ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້ ກໍຍ້ອນອິດທິບາດ ໔ ປະການທີ່ສະມະນະຫຼືພາມເຫຼົ່ານັ້ນທັງໝົດຈະເລີນ ເຮັດໃຫ້ຫຼາຍແລ້ວ

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະນາຄົດຕະການຈັກສະແດງລິດໄດ້ຫຼາຍແນວ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວ ກໍໄດ້ ສະແດງໃຫ້ຜາກົດຫຼືໃຫ້ຫາຍໄປກໍໄດ້ ຊອດຝາ ກຳແພງ (ແລະ)ພູໄປໄດ້ບໍ່ຕິດຂັດ ຄືໄປໃນບ່ອນວ່າງກໍໄດ້ ໂປ່ໂລ່ຂຶ້ນຫຼືມຸດລົງໃນແຜ່ນດິນຄືໄປໃນນໍ້າກໍໄດ້ ຍ່າງເທິງນໍ້າໂດຍທີ່ນໍ້າບໍ່ແຍກຄືຍ່າງເທິງແຜ່ນດິນກໍໄດ້ ນັ່ງຂັດສະມາທິເຫາະໄປໃນອາກາດຄືນົກບິນໄປກໍໄດ້ ໃຊ້ຝາມືລູບຄຳດວງຈັນດວງອາທິດອັນມີລິດຫຼາຍ ມີອານຸພາບຫຼາຍກໍໄດ້ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້ ກໍຍ້ອນອິດທິບາດ ໔ ປະການທີ່ສະມະນະຫຼືພາມເຫຼົ່ານັ້ນທັງໝົດຈະເລີນ ເຮັດໃຫ້ຫຼາຍແລ້ວ

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນປັດຈຸບັນການຍ່ອມສະແດງລິດໄດ້ຫຼາຍແນວ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວ ກໍໄດ້ ສະແດງໃຫ້ຜາກົດຫຼືໃຫ້ຫາຍໄປກໍໄດ້ ຊອດຝາ ກຳແພງ (ແລະ)ພູໄປໄດ້ບໍ່ຕິດຂັດ ຄືໄປໃນບ່ອນວ່າງກໍໄດ້ ໂປ່ໂລ່ຂຶ້ນຫຼືມຸດລົງໃນແຜ່ນດິນຄືໄປໃນນໍ້າກໍໄດ້ ຍ່າງເທິງນໍ້າໂດຍທີ່ນໍ້າບໍ່ແຍກຄືຍ່າງເທິງແຜ່ນດິນກໍໄດ້ ນັ່ງຂັດສະມາທິເຫາະໄປໃນອາກາດຄືນົກບິນໄປກໍໄດ້ ໃຊ້ຝາມືລູບຄຳດວງຈັນດວງອາທິດອັນມີລິດຫຼາຍ ມີອານຸພາບຫຼາຍກໍໄດ້ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້

ອິດທິບາດ ໔ ປະການ ອັນໃດແດ່
ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍ ສັນທະສະມາທິ ປະທານສັງຂານ
໒. ຈະເລີນອິດທິບາດທີ່ປະກອບດ້ວຍ ວິຣິຍະສະມາທິ ປະທານສັງຂານ
໓. ຈະເລີນອິດທິບາດທີ່ປະກອບດ້ວຍ ຈິດຕະສະມາທິ ປະທານສັງຂານ
໔. ຈະເລີນອິດທິບາດທີ່ປະກອບດ້ວຍ ວິມັງສາສະມາທິ ປະທານສັງຂານ

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະດີດຕະການໄດ້ສະແດງລິດໄດ້ຫຼາຍແນວ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຯລຯ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້ ກໍຍ້ອນອິດທິບາດ ໔ ປະການນີ້ທີ່ສະມະນະຫຼືພາມເຫຼົ່ານັ້ນທັງໝົດຈະເລີນ ເຮັດໃຫ້ຫຼາຍແລ້ວ

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະນາຄົດຕະການຈັກສະແດງລິດໄດ້ຫຼາຍແນວ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຯລຯ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້ ກໍຍ້ອນອິດທິບາດ ໔ ປະການນີ້ທີ່ສະມະນະຫຼືພາມເຫຼົ່ານັ້ນທັງໝົດຈະເລີນ ເຮັດໃຫ້ຫຼາຍແລ້ວ

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນປັດຈຸບັນການຍ່ອມສະແດງ ລິດໄດ້ຫຼາຍແນວ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຯລຯ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້ ກໍຍ້ອນອິດທິບາດ ໔ ປະການນີ້ທີ່ສະມະນະຫຼືພາມເຫຼົ່ານັ້ນທັງໝົດຈະເລີນ ເຮັດໃຫ້ຫຼາຍແລ້ວ

**ທຸຕິຍະພາມມະນະສູດທີ ๓ ຈົບ**

# ໙. ພິກຂຸສູດ

## ວ່າດ້ວຍເຫດທີ່ເຮັດໃຫ້ພິກຂຸໄດ້ວິມຸດຕິ

[໙໓໐] ພິກຂຸທັງຫຼາຍ ພິກຂຸເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ຍ້ອນອິດທິບາດ ໔ ປະການນີ້ທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ

ອິດທິບາດ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍ ສັນທະສະມາທິ ປະທານສັງຂານ
໒. ຈະເລີນອິດທິບາດທີ່ປະກອບດ້ວຍ ວິຣິຍະສະມາທິ ປະທານສັງຂານ
໓. ຈະເລີນອິດທິບາດທີ່ປະກອບດ້ວຍ ຈິດຕະສະມາທິ ປະທານສັງຂານ
໔. ຈະເລີນອິດທິບາດທີ່ປະກອບດ້ວຍ ວິມັງສາສະມາທິ ປະທານສັງຂານ

ພິກຂຸເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະສິ້ນໄປ

ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ຍ້ອນອິດທິບາດ ໔ ປະການນີ້ທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ

**ພິກຂຸສູດທີ ໗ ຈົບ**

# ໙. ອິດທາທິເທສະນາສູດ

## ວ່າດ້ວຍການສະແດງອິດທິ(ລິດ)ເປັນຕົ້ນ

[໗໓໑] ພິກຂຸທັງຫຼາຍ ເຮົາຈັກສະແດງອິດທິ ອິດທິບາດ ອິດທິບາດພາວະນາແລະປະຕິປະທາທີ່ໃຫ້ເຖິງອິດທິບາດພາວະນາແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ອິດທິ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຍ່ອມສະແດງລິດໄດ້ຫຼາຍແນວ ຄື ຄົນດຽວສະແດງເປັນ ຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ຯລຯ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້ ນີ້ຮຽກວ່າ ອິດທິ

ອິດທິບາດ ເປັນແນວໃດ?
ຄື ມັກໃດ ປະຕິປະທາໃດເປັນໄປເພື່ອໄດ້ລິດ ເພື່ອໄດ້ສະເພາະເຊິ່ງລິດ
ນີ້ຮຽກວ່າ ອິດທິບາດ

ອິດທິບາດພາວະນາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍ ສັນທະສະມາທິ ປະທານສັງຂານ
໒. ຈະເລີນອິດທິບາດທີ່ປະກອບດ້ວຍ ວິຣິຍະສະມາທິ ປະທານສັງຂານ
໓. ຈະເລີນອິດທິບາດທີ່ປະກອບດ້ວຍ ຈິດຕະສະມາທິ ປະທານສັງຂານ
໔. ຈະເລີນອິດທິບາດທີ່ປະກອບດ້ວຍ ວິມັງສາສະມາທິ ປະທານສັງຂານ

ນີ້ຮຽກວ່າ ອິດທິບາດພາວະນາ

ປະຕິປະທາທີ່ໃຫ້ເຖິງອິດທິບາດພາວະນາ ເປັນແນວໃດ?

ຄື ອະຣິຍະມັກມີອົງ ໘ ໄດ້ແກ່

໑. ສຳມາທິດຖິ  ໒. ສຳມາສັງກັບປະ
໓. ສຳມາວາຈາ  ໔. ສຳມາກຳມັນຕະ
໕. ສຳມາອາຊີວະ  ໖. ສຳມາວາຍາມະ
໗. ສຳມາສະຕິ  ໘. ສຳມາສະມາທິ

ນີ້ຮຽກວ່າ ປະຕິປະທາທີ່ໃຫ້ເຖິງອິດທິບາດພາວະນາ

**ອິດທາທິເທສະນາສູດທີ ໙ ຈົບ**

# ໑໐. ວິພັງຄະສູດ

## ວ່າດ້ວຍການຈຳແນກອິດທິບາດ

[໘໓໒] ພິກຂຸທັງຫຼາຍ ອິດທິບາດ ໔ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ມີຜົນຫຼາຍ ມີອານິສົງຫຼາຍ

ອິດທິບາດ ໔ ປະການທີ່ບຸກຄົນຈະເລີນແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງມີຜົນຫຼາຍ ມີອານິສົງຫຼາຍ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດປະກອບດ້ວຍສັນທະສະມາທິປະທານສັງຂານດັ່ງນີ້ວ່າ ສັນທະ ຂອງເຮົາຈັກບໍ່ທຍ່ອນຍານຫຼາຍ ບໍ່ຕ້ອງປະຄັບປະຄອງເກີນໄປ ບໍ່ຫົດຫູ່ໃນພາຍໃນ ບໍ່ຊ່ານໄປໃນພາຍນອກ ແລະມີຄວາມໝາຍຮູ້ວ່າເບື້ອງໜ້າແລະເບື້ອງຫຼັງຢູ່ ຄື ມີຄວາມໝາຍຮູ້ວ່າເບື້ອງຫຼັງຄືເບື້ອງໜ້າ ເບື້ອງໜ້າຄືເບື້ອງຫຼັງ ເບື້ອງເທິງຄືເບື້ອງລ່າງ ເບື້ອງລຸ່ມຄືເບື້ອງເທິງ ກາງຄືນຄືກາງເວັນ ກາງເວັນຄືກາງຄືນ ມີໃຈສະຫງັດ ບໍ່ມີເຄື່ອງຮ້ອຍຮັດ ອົບຮົມຈິດໃຫ້ສະຫວ່າງຢູ່

໒. ຈະເລີນອິດທິບາດທີ່ປະກອບດ້ວຍ ວິຣິຍະສະມາທິ ປະທານສັງຂານ ຯລຯ

໓. ຈະເລີນອິດທິບາດທີ່ປະກອບດ້ວຍຈິດຕະສະມາທິປະທານສັງຂານ ຯລຯ

໔. ຈະເລີນອິດທິບາດທີ່ປະກອບດ້ວຍວິມັງສາສະມາທິປະທານສັງຂານດັ່ງນີ້ວ່າ ວິມັງສາຂອງເຮົາຈັກບໍ່ທຍ່ອນຍານຫຼາຍ ບໍ່ຕ້ອງປະຄັບປະຄອງເກີນໄປ ບໍ່ຫົດຫູ່ໃນພາຍໃນ ບໍ່ຊ່ານໄປໃນພາຍນອກ ແລະມີຄວາມໝາຍຮູ້ວ່າເບື້ອງໜ້າແລະ

ເບື້ອງຫຼັງຢູ່ ຄື ມີຄວາມໝາຍຮູ້ວ່າເບື້ອງຫຼັງຄືເບື້ອງໜ້າ ເບື້ອງໜ້າຄືເບື້ອງຫຼັງ ເບື້ອງເທິງຄືເບື້ອງລ່າງ ເບື້ອງລຸ່ມຄືເບື້ອງເທິງ ກາງຄືນຄືກາງເວັນ ກາງເວັນຄືກາງຄືນ ມີໃຈສະຫງັດ ບໍ່ມີເຄື່ອງຮ້ອຍຮັດ ອົບຮົມຈິດໃຫ້ສະຫວ່າງຢູ່

ສັນທະທີ່ທໍ້ຖອຍເກີນໄປ ເປັນແນວໃດ?
ຄື ສັນທະທີ່ປະກອບດ້ວຍຄວາມຂີ້ຄ້ານ ປະກອບດ້ວຍຄວາມຂີ້ຄ້ານ
ນີ້ຮຽກວ່າ ສັນທະທີ່ທໍ້ຖອຍເກີນໄປ

ສັນທະທີ່ຕ້ອງປະຄັບປະຄອງເກີນໄປ ເປັນແນວໃດ?
ຄື ສັນທະທີ່ປະກອບດ້ວຍອຸດທັດຈະ ປະກອບດ້ວຍອຸດທັດຈະ
ນີ້ຮຽກວ່າ ສັນທະທີ່ຕ້ອງປະຄັບປະຄອງເກີນໄປ

ສັນທະທີ່ຫົດຫູ່ໃນພາຍໃນ ເປັນແນວໃດ?
ຄື ສັນທະທີ່ປະກອບດ້ວຍຖີນະມິດທະ ປະກອບດ້ວຍຖີນະມິດທະ
ນີ້ຮຽກວ່າ ສັນທະທີ່ຫົດຫູ່ໃນພາຍໃນ

ສັນທະທີ່ຊ່ານໄປໃນພາຍນອກ ເປັນແນວໃດ?
ຄື ສັນທະທີ່ຊ່ານໄປ ຟຸ້ງໄປ ຜາຣົບກາມມະຄຸນ ໕ ປະການໃນພາຍນອກ
ນີ້ຮຽກວ່າ ສັນທະທີ່ຊ່ານໄປໃນພາຍນອກ

ພິກຂຸມີຄວາມໝາຍຮູ້ວ່າເບື້ອງໜ້າແລະເບື້ອງຫຼັງຢູ່ ຄື ມີຄວາມໝາຍຮູ້ວ່າ ເບື້ອງຫຼັງຄືເບື້ອງ ໜ້າ ເບື້ອງໜ້າຄືເບື້ອງຫຼັງ ເປັນແນວໃດ?

ຄື ຄວາມໝາຍຮູ້ວ່າເບື້ອງໜ້າ ແລະເບື້ອງຫຼັງອັນພິກຂຸໃນທຳວິໄນນີ້ຮຽນດີ ໃສ່ໃຈດີ ຊົງຈຳດີ ຮູ້ແຈ້ງດີແລ້ວດ້ວຍປັນຍາ

ພິກຂຸຊື່ວ່າ ມີຄວາມໝາຍຮູ້ວ່າເບື້ອງໜ້າແລະເບື້ອງຫຼັງຢູ່ ຄື ມີຄວາມໝາຍຮູ້ວ່າ ເບື້ອງຫຼັງຄືເບື້ອງໜ້າ ເບື້ອງໜ້າຄືເບື້ອງຫຼັງ ເປັນແນວນີ້ແລ

ພິກຂຸມີຄວາມໝາຍຮູ້ວ່າເບື້ອງເທິງຄືເບື້ອງລ່າງ ເບື້ອງລຸ່ມຄືເບື້ອງເທິງຢູ່ ເປັນແນວໃດ?
ຄື ພິກຂຸໃນທຳວິໄນນີ້ ຍ່ອມພິຈາລະນາກາຍນີ້ຂຶ້ນເບື້ອງເທິງແຕ່ພື້ນຕີນຂຶ້ນໄປ ພິຈາລະນາລົງເບື້ອງລຸ່ມແຕ່ປາຍຜົມລົງມາ ມີໜັງຫຸ້ມຢູ່ໂດຍຮອບ ເຕັມດ້ວຍຂອງບໍ່ສະອາດມີປະການຕ່າງ ໆ ວ່າ ໃນຮ່າງກາຍນີ້ມີ ຜົມ ຂົນ ເລັບ ແຂ້ວ ໜັງ ຊີ້ນ ເອັນ ກະດູກ ເຍື່ອໃນກະດູກ ໄຕ ຫົວໃຈ ຕັບ ພັງຜືດ ມ້າມ ປອດ ໄສ້ໃຫຍ່ ໄສ້ນ້ອຍ ອາຫານໃໝ່ ອາຫານເກົ່າ ບີ ຂີ້ກະເທີ່ ໜອງ ເລືອດ ເຫື່ອ ມັນຂຸ້ນ ນ້ຳຕາ ນ້ຳມັນ ນ້ຳລາຍ ນ້ຳມູກ ໄຂຂໍ້ ມູດ

ພິກຂຸຊື່ວ່າ ມີຄວາມໝາຍຮູ້ວ່າເບື້ອງເທິງຄືເບື້ອງລ່າງ ເບື້ອງລຸ່ມຄືເບື້ອງເທິງຢູ່ ເປັນແນວນີ້ແລ

ພິກຂຸມີຄວາມໝາຍຮູ້ວ່າ ກາງຄືນຄືກາງເວັນ ກາງເວັນຄືກາງຄືນຢູ່ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຈະເລີນອິດທິບາດທີ່ປະກອບດ້ວຍສັນທະສະມາທິປະທານສັງຂານໃນກາງເວັນດ້ວຍອາການເຫຼົ່າໃດ ດ້ວຍເພດເຫຼົ່າໃດ ດ້ວຍນິມິດເຫຼົ່າໃດ ທ່ານກໍຈະເລີນອິດທິບາດທີ່ປະກອບດ້ວຍສັນທະສະມາທິປະທານສັງຂານໃນກາງຄືນດ້ວຍອາການເຫຼົ່ານັ້ນ ດ້ວຍເພດເຫຼົ່ານັ້ນ ດ້ວຍນິມິດເຫຼົ່ານັ້ນ ອີກປະການໜຶ່ງ ພິກຂຸຈະເລີນອິດທິບາດທີ່ປະກອບດ້ວຍສັນທະສະມາທິປະທານສັງຂານໃນກາງຄືນດ້ວຍອາການເຫຼົ່າໃດ ດ້ວຍເພດເຫຼົ່າໃດ ດ້ວຍນິມິດເຫຼົ່າໃດ ທ່ານກໍຈະເລີນອິດທິບາດທີ່ປະກອບດ້ວຍສັນທະສະມາທິປະທານສັງຂານໃນກາງເວັນ ດ້ວຍອາການເຫຼົ່ານັ້ນ ດ້ວຍເພດເຫຼົ່ານັ້ນ ດ້ວຍນິມິດເຫຼົ່ານັ້ນ

ພິກຂຸຊື່ວ່າ ມີຄວາມໝາຍຮູ້ວ່າກາງຄືນຄືກາງເວັນ ກາງເວັນຄືກາງຄືນຢູ່ ເປັນແນວນີ້ແລ

ພິກຂຸມີໃຈສະຫງັດ ບໍ່ມີເຄື່ອງຮ້ອຍຮັດ ອົບຮົມຈິດໃຫ້ສະຫວ່າງຢູ່ ເປັນແນວໃດ?

ຄື ອາໂລກະສັນຍາ (ຄວາມໝາຍຮູ້ແສງສະຫວ່າງ) ອັນພິກຂຸໃນທຳວິໄນນີ້ຮຽນໄວ້ດີ ຄວາມໝາຍຮູ້ວ່າກາງເວັນ ຕັ້ງໝັ້ນດີ

ພິກຂຸຊື່ວ່າ ມີໃຈສະຫງັດ ບໍ່ມີເຄື່ອງຮ້ອຍຮັດ ອົບຮົມຈິດໃຫ້ສະຫວ່າງຢູ່ ເປັນແນວນີ້ແລ

ວິຣິຍະທີ່ຫຍ່ອນຍານຫຼາຍ ເປັນແນວໃດ?
ຄື ວິຣິຍະທີ່ປະກອບດ້ວຍຄວາມຂີ້ຄ້ານ ປະກອບດ້ວຍຄວາມຂີ້ຄ້ານ
ນີ້ຮຽກວ່າ ວິຣິຍະທີ່ຫຍ່ອນຍານຫຼາຍ

ວິຣິຍະທີ່ຕ້ອງປະຄັບປະຄອງເກີນໄປ ເປັນແນວໃດ?
ຄື ວິຣິຍະທີ່ປະກອບດ້ວຍອຸດທັດຈະ ປະກອບດ້ວຍອຸດທັດຈະ
ນີ້ຮຽກວ່າ ວິຣິຍະທີ່ຕ້ອງປະຄັບປະຄອງເກີນໄປ

ວິຣິຍະທີ່ຫົດຫູ່ໃນພາຍໃນ ເປັນແນວໃດ?
ຄື ວິຣິຍະທີ່ປະກອບດ້ວຍຖີນະມິດທະ ປະກອບດ້ວຍຖີນະມິດທະ
ນີ້ຮຽກວ່າ ວິຣິຍະທີ່ຫົດຫູ່ໃນພາຍໃນ

ວິຣິຍະທີ່ຊ່ານໄປໃນພາຍນອກ ເປັນແນວໃດ?
ຄື ວິຣິຍະທີ່ຊ່ານໄປ ຟຸ້ງໄປ ຜາຣົບກາມມະຄຸນ ໕ ປະການໃນພາຍນອກ
ນີ້ຮຽກວ່າ ວິຣິຍະທີ່ຊ່ານໄປໃນພາຍນອກ ฯລฯ

ພິກຂຸຊື່ວ່າມີໃຈສະຫງັດ ບໍ່ມີເຄື່ອງຮ້ອຍຮັດ ອົບຮົມຈິດໃຫ້ສະຫວ່າງຢູ່ ເປັນແນວນີ້ແລ

ຈິດທີ່ຫຍ່ອນຍານຫຼາຍ ເປັນແນວໃດ?
ຄື ຈິດທີ່ປະກອບດ້ວຍຄວາມຂີ້ຄ້ານ ປະກອບດ້ວຍຄວາມຂີ້ຄ້ານ
ນີ້ຮຽກວ່າ ຈິດທີ່ຫຍ່ອນຍານຫຼາຍ

ຈິດທີ່ຕ້ອງປະຄັບປະຄອງເກີນໄປ ເປັນແນວໃດ?
ຄື ຈິດທີ່ປະກອບດ້ວຍອຸດທັດຈະ ປະກອບດ້ວຍອຸດທັດຈະ
ນີ້ຮຽກວ່າ ຈິດທີ່ຕ້ອງປະຄັບປະຄອງເກີນໄປ

ຈິດທີ່ຫົດຫູ່ໃນພາຍໃນ ເປັນແນວໃດ?
ຄື ຈິດທີ່ປະກອບດ້ວຍຖີນະມິດທະ ປະກອບດ້ວຍຖີນະມິດທະ
ນີ້ຮຽກວ່າ ຈິດທີ່ຫົດຫູ່ໃນພາຍໃນ

ຈິດທີ່ຊ່ານໄປໃນພາຍນອກ ເປັນແນວໃດ?
ຄື ຈິດທີ່ຊ່ານໄປ ຟຸ້ງໄປ ຜາຣົບກາມມະຄຸນ ໕ ປະການໃນພາຍນອກ
ນີ້ຮຽກວ່າ ຈິດທີ່ຊ່ານໄປໃນພາຍນອກ ຯລຯ

ພິກຂຸຊື່ວ່າມີໃຈສະຫງັດ ບໍ່ມີເຄື່ອງຮ້ອຍຮັດ ອົບຮົມຈິດໃຫ້ສະຫວ່າງຢູ່ ເປັນແນວນີ້ແລ

ວິມັງສາທີ່ຫຍ່ອນຍານຫຼາຍ ເປັນແນວໃດ?
ຄື ວິມັງສາທີ່ປະກອບດ້ວຍຄວາມຂີ້ຄ້ານ ປະກອບດ້ວຍຄວາມຂີ້ຄ້ານ
ນີ້ຮຽກວ່າ ວິມັງສາທີ່ຫຍ່ອນຍານຫຼາຍ

ວິມັງສາທີ່ຕ້ອງປະຄັບປະຄອງເກີນໄປ ເປັນແນວໃດ?
ຄື ວິມັງສາທີ່ປະກອບດ້ວຍອຸດທັດຈະ ປະກອບດ້ວຍອຸດທັດຈະ
ນີ້ຮຽກວ່າ ວິມັງສາທີ່ຕ້ອງປະຄັບປະຄອງເກີນໄປ

ວິມັງສາທີ່ຫົດຫູ່ໃນພາຍໃນ ເປັນແນວໃດ?
ຄື ວິມັງສາທີ່ປະກອບດ້ວຍຖີນະມິດທະ ປະກອບດ້ວຍຖີນະມິດທະ
ນີ້ຮຽກວ່າ ວິມັງສາທີ່ຫົດຫູ່ໃນພາຍໃນ

ວິມັງສາທີ່ຊ່ານໄປໃນພາຍນອກ ເປັນແນວໃດ?
ຄື ວິມັງສາທີ່ຊ່ານໄປ ຟຸ້ງໄປ ຜາຣົບກາມມະຄຸນ ໕ ປະການ ໃນພາຍນອກ
ນີ້ຮຽກວ່າ ວິມັງສາທີ່ຊ່ານໄປໃນພາຍນອກ ຯລຯ

ພິກຂຸຊື່ວ່າມີໃຈສະຫງັດ ບໍ່ມີເຄື່ອງຮ້ອຍຮັດ ອົບຮົມຈິດໃຫ້ສະຫວ່າງຢູ່ ເປັນແບບນີ້ແລ

ພິກຂຸທັງຫຼາຍ ອິດທິບາດ ໔ ປະການທີ່ບຸກຄົນຈະເລີນແບບນີ້ແລ ເຮັດໃຫ້ຫຼາຍແລ້ວແບບນີ້ ຈຶ່ງມີຜົນຫຼາຍ ມີອານິສົງຫຼາຍ

ພິກຂຸທັງຫຼາຍ ເມື່ອອິດທິບາດ ໔ ປະການນີ້ທີ່ພິກຂຸຈະເລີນແບບນີ້ແລ ເຮັດໃຫ້ຫຼາຍແລ້ວແບບນີ້ ພິກຂຸຍ່ອມສະແດງລິດໄດ້ຫຼາຍແບບ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ຯລຯ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້ ເມື່ອອິດທິບາດ ໔ ປະການນີ້ທີ່ພິກຂຸຈະເລີນແບບນີ້ແລ ເຮັດໃຫ້ຫຼາຍແລ້ວແບບນີ້ ພິກຂຸເຮັດ ໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

**ວິພັງຄະສູດທີ 10 ຈົບ**

(ແມ່ນອະພິນຍາທັງ ໖ ກໍເພິ່ງໃຫ້ພິດສະດານ)

**ປາສາທະກຳປະນະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

1. ປຸບພະສູດ
2. ມະຫັບຜະລະສູດ
3. ສັນທະສະມາທິສູດ
4. ໂມກຄັນລານະສູດ
5. ອຸນນາພະພາມມະນະສູດ
6. ປະຖົມພາມມະນະສູດ
7. ທຸຕິຍະພາມມະນະສູດ
8. ພິກຂຸສູດ
9. ອິດທາທິເທສະນາສູດ
10. ວິພັງຄະສູດ

# ໓. ອະໂຍຄຸລະວັກ

## ໝວດວ່າດ້ວຍອຸປະມາດ້ວຍກ້ອນເຫຼັກທີ່ຖືກໄຟເຜົາ

## ໑. ມັກຄະສູດ

## ວ່າດ້ວຍທາງແຫ່ງການຈະເລີນອິດທິບາດ

[໗໓໓] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ແຕ່ກ່ອນເຮົາເປັນໂພທິສັດ ຍັງບໍ່ໄດ້ຕັດ

ສະຣູ້ ໄດ້ມີຄວາມຄິດດັ່ງນີ້ວ່າ ອັນໃດນໍ? ເປັນມັກ ອັນໃດນໍ? ເປັນປະຕິປະທາແຫ່ງການຈະເລີນອິດທິບາດ ພິກຂຸທັງຫຼາຍ (ຕໍ່ມາ) ເຮົານັ້ນ ໄດ້ມີຄວາມຄິດດັ່ງນີ້ວ່າ ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍສັນທະສະມາທິປະທານສັງຂານດັ່ງນີ້ວ່າ ສັນທະຂອງເຮົາຈັກບໍ່ຫຍ່ອນຍານຫຼາຍ ບໍ່ຕ້ອງປະຄັບປະຄອງເກີນໄປ ບໍ່ຫົດຫູ່ໃນພາຍໃນ ບໍ່ຊ່ານໄປໃນພາຍນອກ ແລະມີຄວາມໝາຍຮູ້ວ່າເບື້ອງໜ້າ ແລະເບື້ອງຫຼັງຢູ່ ຄື ມີຄວາມໝາຍຮູ້ວ່າເບື້ອງຫຼັງຄືເບື້ອງໜ້າ ເບື້ອງໜ້າຄືເບື້ອງຫຼັງ ເບື້ອງເທິງຄືເບື້ອງລ່າງ ເບື້ອງລຸ່ມຄືເບື້ອງເທິງ ກາງຄືນຄືກາງເວັນ ກາງເວັນຄືກາງຄືນ ມີໃຈສະຫງັດ ບໍ່ມີເຄື່ອງຮ້ອຍຮັດ ອົບຮົມຈິດໃຫ້ສະຫວ່າງຢູ່ດ້ວຍປະການຢ່າງນີ້

໒. ຈະເລີນອິດທິບາດທີ່ປະກອບດ້ວຍວິຣິຍະສະມາທິປະທານສັງຂານ ຯລຯ

໓. ຈະເລີນອິດທິບາດທີ່ປະກອບດ້ວຍຈິດຕະສະມາທິປະທານສັງຂານ ຯລຯ

໔. ຈະເລີນອິດທິບາດທີ່ປະກອບດ້ວຍວິມັງສາສະມາທິປະທານສັງຂານດັ່ງນີ້ວ່າ ວິມັງສາຂອງເຮົາຈັກບໍ່ຫຍ່ອນຍານຫຼາຍ ບໍ່ຕ້ອງປະຄັບປະຄອງເກີນໄປ ບໍ່ຫົດຫູ່ໃນພາຍໃນ ບໍ່ຊ່ານໄປໃນພາຍນອກ ແລະມີຄວາມໝາຍຮູ້ວ່າເບື້ອງໜ້າແລະເບື້ອງຫຼັງຢູ່ ຄື ມີຄວາມໝາຍຮູ້ວ່າເບື້ອງຫຼັງຄືເບື້ອງໜ້າ ເບື້ອງໜ້າຄືເບື້ອງຫຼັງ ເບື້ອງເທິງຄືເບື້ອງລ່າງ ເບື້ອງລຸ່ມຄືເບື້ອງເທິງ ກາງຄືນຄືກາງເວັນ ກາງເວັນຄືກາງຄືນ ມີໃຈສະຫງັດ ບໍ່ມີເຄື່ອງຮ້ອຍຮັດ ອົບຮົມຈິດໃຫ້ສະຫວ່າງຢູ່ ດ້ວຍປະການຢ່າງນີ້

ພິກຂຸທັງຫຼາຍ ເມື່ອອິດທິບາດ ໔ ປະການທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ພິກຂຸຍ່ອມສະແດງລິດໄດ້ຫຼາຍແນວ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ຯລຯ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້ ເມື່ອອິດທິບາດ ໔ ປະການທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ພິກຂຸຈຶ່ງເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງ ເອງເຂົ້າເຖິງຢູ່ໃນປັດຈຸບັນ

**ມັກຄະສູດທີ ໑ ຈົບ**

(ແມ່ນອະພິນຍາທັງ ໖ ກໍເພິ່ງໃຫ້ພິດສະດານ)

# ໘. ອະໂຍຄຸລະສູດ

## ວ່າດ້ວຍອຸປະມາດ້ວຍກ້ອນເຫຼັກທີ່ຖືກໄຟເຜົາ

[໗໑໘] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ຄັ້ງນັ້ນ ທ່ານພຣະອານົນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ຢູ່ບໍວ່າ ພຣະອົງມີພຣະວໍຣະກາຍເປັນມະໂນໄມ ຊົງເຂົ້າເຖິງພົມມະໂລກດ້ວຍລິດ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອານົນ ເຮົາຮູ້ຢູ່ວ່າ ເຮົາມີກາຍເປັນມະໂນໄມ ເຂົ້າເຖິງພົມມະໂລກດ້ວຍລິດ

ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ບໍວ່າ ພຣະອົງມີພຣະວໍຣະກາຍທີ່ປະກອບດ້ວຍມະຫາພູຕະຮູບ ໔ ນີ້ ຊົງເຂົ້າເຖິງພົມມະໂລກດ້ວຍລິດ

ອານົນ ເຮົາຮູ້ຢູ່ວ່າ ເຮົາມີກາຍທີ່ປະກອບດ້ວຍມະຫາພູຕະຮູບ ໔ ນີ້ ເຂົ້າເຖິງພົມມະໂລກດ້ວຍລິດ

ຂ້າແດ່ ພຣະອົງຜູ້ຈະເລີນ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດທີ່ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ ພຣະອົງມີພຣະວໍຣະກາຍເປັນມະໂນໄມ ຊົງເຂົ້າເຖິງພົມມະໂລກດ້ວຍລິດ ແລະຊົງຮູ້ວ່າ ມີພຣະວໍຣະກາຍທີ່ປະກອບດ້ວຍມະຫາພູຕະຮູບ ໔ ນີ້ ຊົງເຂົ້າເຖິງພົມມະໂລກດ້ວຍລິດ

ອານົນ ພຣະຕະຖາຄົດທັງຫຼາຍ ເປັນຜູ້ອັດສະຈັນ ແລະປະກອບດ້ວຍທຳທີ່ໜ້າອັດສະຈັນ ເປັນຜູ້ບໍ່ເຄີຍມີ ແລະປະກອບດ້ວຍທຳທີ່ບໍ່ເຄີຍມີ

ສະໄໝໃດ ຕະຖາຄົດຕັ້ງກາຍໄວ້ໃນຈິດຫຼືຕັ້ງຈິດໄວ້ໃນກາຍ ກ້າວລົງສູ່ສຸກສັນຍາ (ຄວາມໝາຍຮູ້ວ່າສະບາຍ) ແລະ ລະຫຸສັນຍາ (ຄວາມໝາຍຮູ້ວ່າເບົາ) ໃນກາຍຢູ່ ສະໄໝນັ້ນ ກາຍຂອງຕະຖາຄົດຍ່ອມເບົາກວ່າ ອ່ອນກວ່າ ຄວນແກ່ການງານກວ່າ ແລະຜຸດຜ່ອງກວ່າ

ກ້ອນເຫຼັກທີ່ໄຟເຜົາຕະຫຼອດທັງມື້ຍ່ອມເບົາກວ່າ ອ່ອນກວ່າ ຄວນແກ່ການງານກວ່າ ແລະຜຸດຜ່ອງກວ່າ ແມ່ນສັນໃດ

ສະໄໝໃດ ຕະຖາຄົດຕັ້ງກາຍໄວ້ໃນຈິດ ຫຼື ຕັ້ງຈິດໄວ້ໃນກາຍ ກ້າວລົງສູ່ສຸກສັນຍາແລະ

ລະທຸສັນຍາໃນກາຍຢູ່ ສະໄໝນັ້ນ ກາຍຂອງຕະຖາຄົດຍ່ອມເບົາກວ່າ ອ່ອນກວ່າ ຄວນແກ່ການງານກວ່າ ແລະຜຸດຜ່ອງກວ່າ ກໍຄືກັນສັນນັ້ນ

ສະໄໝໃດ ຕະຖາຄົດຕັ້ງກາຍໄວ້ໃນຈິດ ຫຼື ຕັ້ງຈິດໄວ້ໃນກາຍ ກ້າວລົງສູ່ສຸກສັນຍາແລະລະທຸສັນຍາໃນກາຍຢູ່ ສະໄໝນັ້ນ ກາຍຂອງຕະຖາຄົດຍ່ອມລອຍຈາກພື້ນດິນຂຶ້ນສູ່ອາກາດໄດ້ໂດຍບໍ່ຍາກເລີຍ ຕະຖາຄົດຍ່ອມສະແດງລິດໄດ້ຫຼາຍແບບ ຄື ຄົນດຽວເປັນຫຼາຍຄົນກໍໄດ້ ຫຼາຍຄົນເປັນຄົນດຽວກໍໄດ້ ຯລຯ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້

ປຸຍນຸ່ນ ຫຼື ປຸຍຝ້າຍເຊິ່ງເບົາຖືກລົມພັດກໍລອຍຈາກພື້ນດິນຂຶ້ນສູ່ອາກາດໂດຍບໍ່ຍາກເລີຍແມ່ນສັນໃດ

ສະໄໝໃດ ຕະຖາຄົດຕັ້ງກາຍໄວ້ໃນຈິດຫຼືຕັ້ງຈິດໄວ້ໃນກາຍ ກ້າວລົງສູ່ສຸກສັນຍາແລະລະທຸສັນຍາໃນກາຍຢູ່ ສະໄໝນັ້ນ ກາຍຂອງຕະຖາຄົດຍ່ອມລອຍຈາກພື້ນດິນຂຶ້ນສູ່ອາກາດໄດ້ໂດຍບໍ່ຍາກເລີຍ ຕະຖາຄົດຍ່ອມສະແດງລິດໄດ້ຫຼາຍແບບ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ຯລຯ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກ ກໍໄດ້ ກໍຄືກັນສັນນັ້ນ

**ອະໂຍຄຸລະສູດທີ ໒ ຈົບ**

# ໓. ພິກຂຸສູດ

## ວ່າດ້ວຍເຫດທີ່ເຮັດໃຫ້ພິກຂຸໄດ້ວິມຸດຕິ

[໗໓໕] ພິກຂຸທັງຫຼາຍ ອິດທິບາດ ໔ ປະການນີ້

ອິດທິບາດ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍ ສັນທະສະມາທິ ປະທານສັງຂານ
໒. ຈະເລີນອິດທິບາດທີ່ປະກອບດ້ວຍ ວິຣິຍະສະມາທິ ປະທານສັງຂານ
໓. ຈະເລີນອິດທິບາດທີ່ປະກອບດ້ວຍ ຈິດຕະສະມາທິ ປະທານສັງຂານ
໔. ຈະເລີນອິດທິບາດທີ່ປະກອບດ້ວຍ ວິມັງສາສະມາທິ ປະທານສັງຂານ

ອິດທິບາດ ໔ ປະການນີ້

ພິກຂຸທັງຫຼາຍ ພິກຂຸເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນ ອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ຍ້ອນອິດທິບາດ ໔ ປະການນີ້ ທີ່ພິກຂຸນັ້ນຈະເລີນ ເຮັດໃຫ້ຫຼາຍແລ້ວ

**ພິກຂຸສູດທີ ໓ ຈົບ**

# ໔. ສຸດທິກະສູດ

## ວ່າດ້ວຍອິດທິບາດລ້ວນ

[໒໘໔] ພິກຂຸທັງຫຼາຍ ອິດທິບາດ ໔ ປະການນີ້

ອິດທິບາດ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍ ສັນທະສະມາທິ ປະທານສັງຂານ
໒. ຈະເລີນອິດທິບາດທີ່ປະກອບດ້ວຍ ວິຣິຍະສະມາທິ ປະທານສັງຂານ
໓. ຈະເລີນອິດທິບາດທີ່ປະກອບດ້ວຍ ຈິດຕະສະມາທິ ປະທານສັງຂານ
໔. ຈະເລີນອິດທິບາດທີ່ປະກອບດ້ວຍ ວິມັງສາສະມາທິ ປະທານສັງຂານ

ອິດທິບາດ ໔ ປະການນີ້

**ສຸດທິກະສູດທີ ໔ ຈົບ**

# ໕. ປະຖົມຜະລະສູດ

## ວ່າດ້ວຍຜົນແຫ່ງການຈະເລີນອິດທິບາດ ສູດທີ ໑

[໒໘໙] ພິກຂຸທັງຫຼາຍ ອິດທິບາດ ໔ ປະການນີ້

ອິດທິບາດ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍ ສັນທະສະມາທິ ປະທານສັງຂານ

໒. ຈະເລີນອິດທິບາດທີ່ປະກອບດ້ວຍ ວິຣິຍະສະມາທິ ປະທານສັງຂານ
໓. ຈະເລີນອິດທິບາດທີ່ປະກອບດ້ວຍ ຈິດຕະສະມາທິ ປະທານສັງຂານ
໔. ຈະເລີນອິດທິບາດທີ່ປະກອບດ້ວຍ ວິມັງສາສະມາທິ ປະທານສັງຂານ

ອິດທິບາດ ໔ ປະການນີ້

ພິກຂຸທັງຫຼາຍ ຍ້ອນອິດທິບາດ ໔ ປະການນີ້ທີ່ພິກຂຸນັ້ນຈະເລີນ ເຮັດໃຫ້ຫຼາຍແລ້ວ ພິກຂຸເພິ່ງຫວັງຜົນຢ່າງ ໑ ໃນ ໒ ຢ່າງ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ກໍຈັກເປັນພຣະອະນາຄາມີ

**ປະຖົມຜະລະສູດທີ່ ໕ ຈົບ**

# ໖. ທຸຕິຍະຜະລະສູດ

## ວ່າດ້ວຍຜົນແຫ່ງການຈະເລີນອິດທິບາດ ສູດທີ່ ໒

[໑໓໑] ພິກຂຸທັງຫຼາຍ ອິດທິບາດ ໔ ປະການນີ້

ອິດທິບາດ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍ ສັນທະສະມາທິ ປະທານສັງຂານ
໒. ຈະເລີນອິດທິບາດທີ່ປະກອບດ້ວຍ ວິຣິຍະສະມາທິ ປະທານສັງຂານ
໓. ຈະເລີນອິດທິບາດທີ່ປະກອບດ້ວຍ ຈິດຕະສະມາທິ ປະທານສັງຂານ
໔. ຈະເລີນອິດທິບາດທີ່ປະກອບດ້ວຍ ວິມັງສາສະມາທິ ປະທານສັງຂານ

ອິດທິບາດ ໔ ປະການນີ້

ພິກຂຸທັງຫຼາຍ ຍ້ອນອິດທິບາດ ໔ ປະການນີ້ທີ່ພິກຂຸນັ້ນຈະເລີນ ເຮັດໃຫ້ຫຼາຍແລ້ວ ພິກຂຸເພິ່ງຫວັງຜະລານິສົງ ໗ ປະການ

ຜະລານິສົງ ໗ ປະການ ອັນໃດແດ່ ຄື

໑. ຈະໄດ້ບັນລຸອະຣະຫັດຕະຜົນທັນທີໃນປັດຈຸບັນ
໒. ຫາກບໍ່ໄດ້ບັນລຸອະຣະຫັດຕະຜົນໃນປັດຈຸບັນ ຈະໄດ້ບັນລຸໃນເວລາໃກ້ຕາຍ

໓. ຫາກໃນປັດຈຸບັນແລະໃນເວລາໃກ້ຕາຍຍັງບໍ່ໄດ້ບັນລຸ ກໍຈະໄດ້ເປັນພຣະອະນາຄາມີຜູ້ອັນຕະຣາປະຣິນິບພາຍີ
໔. ຯລຯ ກໍຈະໄດ້ເປັນພຣະອະນາຄາມີຜູ້ອຸປະຫັດຈະປະຣິນິບພາຍີ
໕. ຯລຯ ກໍຈະໄດ້ເປັນພຣະອະນາຄາມີຜູ້ອະສັງຂາຣະປະຣິນິບພາຍີ
໖. ຯລຯ ກໍຈະໄດ້ເປັນພຣະອະນາຄາມີຜູ້ສະສັງຂາຣະປະຣິນິບພາຍີ
໗. ຯລຯ ກໍຈະໄດ້ເປັນພຣະອະນາຄາມີຜູ້ອຸດທັງໂສໂຕອະກະນິດຖະຄາມີ ຍ້ອນໂອຣຳພາຄິຍະສັງໂຍດ ໕ ປະການສິ້ນໄປ

ພິກຂຸທັງຫຼາຍ ຍ້ອນອິດທິບາດ ໔ ປະການນີ້ທີ່ພິກຂຸນັ້ນຈະເລີນ ເຮັດໃຫ້ຫຼາຍແລ້ວ ພິກຂຸເພິ່ງຫວັງຜະລານິສົງ ໗ ປະການນີ້

**ທຸຕິຍະຜະລະສູດທີ ໖ ຈົບ**

# ໗. ປະຖົມອານັນທະສູດ

## ວ່າດ້ວຍພຣະອານົນ ສູດທີ ໑

[໗໓໙] ເລື້ອງເກີດຂື້ນທີ່ເມືອງສາວັດຖີ

ຄັ້ງນັ້ນ ທ່ານພຣະອານົນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ອິດທິ ເປັນແນວໃດ? ອິດທິບາດ ເປັນແນວໃດ? ອິດທິບາດພາວະນາເປັນແນວໃດ? ປະຕິປະທາທີ່ໃຫ້ເຖິງອິດທິບາດພາວະນາ ເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອານົນ ພິກຂຸໃນທຳວິໄນນີ້ຍ່ອມສະແດງລິດໄດ້ຫຼາຍແນວ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ຯລຯ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້ ນີ້ຮຽກວ່າ ອິດທິ

ອິດທິບາດ ເປັນແນວໃດ?
ຄື ມັກໃດ ປະຕິປະທາໃດເປັນໄປເພື່ອໄດ້ລິດ ເພື່ອໄດ້ສະເພາະເຊິ່ງລິດ
ນີ້ຮຽກວ່າ ອິດທິບາດ

ອິດທິບາດພາວະນາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍ ສັນທະສະມາທິ ປະທານສັງຂານ
໒. ຈະເລີນອິດທິບາດທີ່ປະກອບດ້ວຍ ວິຣິຍະສະມາທິ ປະທານສັງຂານ
໓. ຈະເລີນອິດທິບາດທີ່ປະກອບດ້ວຍ ຈິດຕະສະມາທິ ປະທານສັງຂານ
໔. ຈະເລີນອິດທິບາດທີ່ປະກອບດ້ວຍ ວິມັງສາສະມາທິ ປະທານສັງຂານ

ນີ້ຮຽກວ່າ ອິດທິບາດພາວະນາ

ປະຕິປະທາທີ່ໃຫ້ເຖິງອິດທິບາດພາວະນາ ເປັນແນວໃດ?

ຄື ອະຣິຍະມັກມີອົງ ໘ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ຮຽກວ່າ ປະຕິປະທາທີ່ໃຫ້ເຖິງອິດທິບາດພາວະນາ

**ປະຖົມອານັນທະສູດທີ ៧ ຈົບ**

# ໘. ທຸຕິຍະອານັນທະສູດ

## ວ່າດ້ວຍພຣະອານົນ ສູດທີ ໘

[໘໔໐] ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດຖາມທ່ານພຣະອານົນຜູ້ນັ່ງຢູ່ທີ່ສົມຄວນວ່າ ອານົນ ອິດທິ ເປັນແນວໃດ? ອິດທິບາດ ເປັນແນວໃດ? ອິດທິບາດພາວະນາ ເປັນແນວໃດ? ປະຕິປະທາທີ່ໃຫ້ເຖິງອິດທິບາດພາວະນາ ເປັນແນວໃດ?

ທ່ານພຣະອານົນທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ມີພຣະຜູ້ມີພຣະພາກເຈົ້າເປັນຜູ້ນຳ ຯລຯ

ອານົນ ພິກຂຸໃນທຳວິໄນນີ້ຍ່ອມສະແດງລິດໄດ້ຫຼາຍແນວ ຄື ຄົນດຽວສະແດງ ເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ຯລຯ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້ ນີ້ຮຽກວ່າ ອິດທິ

ອິດທິບາດ ເປັນແນວໃດ?
ຄື ມັກໃດ ປະຕິປະທາໃດເປັນໄປເພື່ອໄດ້ລິດ ເພື່ອໄດ້ສະເພາະເຊິ່ງລິດ

ນີ້ຮຽກວ່າ ອິດທິບາດ

ອິດທິບາດພາວະນາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍ ສັນທະສະມາທິ ປະທານສັງຂານ
໒. ຈະເລີນອິດທິບາດທີ່ປະກອບດ້ວຍ ວິຣິຍະສະມາທິ ປະທານສັງຂານ
໓. ຈະເລີນອິດທິບາດທີ່ປະກອບດ້ວຍ ຈິດຕະສະມາທິ ປະທານສັງຂານ
໔. ຈະເລີນອິດທິບາດທີ່ປະກອບດ້ວຍ ວິມັງສາສະມາທິ ປະທານສັງຂານ

ນີ້ຮຽກວ່າ ອິດທິບາດພາວະນາ

ປະຕິປະທາທີ່ໃຫ້ເຖິງອິດທິບາດພາວະນາ ເປັນແນວໃດ?

ຄື ອະຣິຍະມັກມີອົງ ໘ ນີ້ແລ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ຮຽກວ່າ ປະຕິປະທາທີ່ໃຫ້ເຖິງອິດທິບາດພາວະນາ

**ທຸຕິຍະອາພັນທະສູດທີ ໘ ຈົບ**

# ໙. ປະຖົມພິກຂຸສູດ

## ວ່າດ້ວຍພິກຂຸ ສູດທີ ໑

[໘໔໑] ຄັ້ງນັ້ນ ພິກຂຸຈຳນວນຫຼາຍເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ອິດທິ ເປັນແນວໃດ? ອິດທິບາດ ເປັນແນວໃດ? ອິດທິບາດພາວະນາ ເປັນແນວໃດ? ປະຕິປະທາທີ່ໃຫ້ເຖິງອິດທິບາດພາວະນາ ເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ຍ່ອມສະແດງລິດໄດ້ຫຼາຍແນວ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ຯລຯ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້ ນີ້ຮຽກວ່າ ອິດທິ

ອິດທິບາດ ເປັນແນວໃດ?
ຄື ມັກໃດ ປະຕິປະທາໃດເປັນໄປເພື່ອໄດ້ລິດ ເພື່ອໄດ້ສະເພາະເຊິ່ງລິດ
ນີ້ຮຽກວ່າ ອິດທິບາດ

ອິດທິບາດພາວະນາ ເປັນແນວໃດ?
ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍ ສັນທະສະມາທິ ປະທານສັງຂານ
໒. ຈະເລີນອິດທິບາດທີ່ປະກອບດ້ວຍ ວິຣິຍະສະມາທິ ປະທານສັງຂານ
໓. ຈະເລີນອິດທິບາດທີ່ປະກອບດ້ວຍ ຈິດຕະສະມາທິ ປະທານສັງຂານ
໔. ຈະເລີນອິດທິບາດທີ່ປະກອບດ້ວຍ ວິມັງສາສະມາທິ ປະທານສັງຂານ

ນີ້ຮຽກວ່າ ອິດທິບາດພາວະນາ

ປະຕິປະທາທີ່ໃຫ້ເຖິງອິດທິບາດພາວະນາ ເປັນແນວໃດ?

ຄື ອະຣິຍະມັກມີອົງ ໘ ນີ້ແລ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ຮຽກວ່າ ປະຕິປະທາທີ່ໃຫ້ເຖິງອິດທິບາດພາວະນາ

**ປະຖົມພິກຂຸສູດທີ ໙ ຈົບ**

# ໑໐. ທຸຕິຍະພິກຂຸສູດ

## ວ່າດ້ວຍພິກຂຸ ສູດທີ ໒

[໘໔໒] ຄັ້ງນັ້ນ ພິກຂຸຈຳນວນຫຼາຍ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍ ອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບພິກຂຸເຫຼົ່າ ນັ້ນດັ່ງນີ້ວ່າ ພິກຂຸທັງຫຼາຍ ອິດທິ ເປັນແນວໃດ? ອິດທິບາດ ເປັນແນວໃດ? ອິດທິບາດພາວະ ນາ ເປັນແນວໃດ? ປະຕິປະທາທີ່ໃຫ້ເຖິງອິດທິບາດພາວະນາ ເປັນແນວໃດ?

ພິກຂຸທັງຫຼາຍ ຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີ ພຣະຜູ້ມີພຣະພາກເຈົ້າເປັນຫຼັກ ມີພຣະຜູ້ມີພຣະພາກເຈົ້າເປັນຜູ້ນຳ ຯລຯ

ພິກຂຸທັງຫຼາຍ ອິດທິ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຍ່ອມສະແດງລິດໄດ້ຫຼາຍແນວ ຄື ຄົນດຽວສະແດງເປັນ ຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ຯລຯ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້

ນີ້ຮຽກວ່າ ອິດທິ

ອິດທິບາດ ເປັນແນວໃດ?

ຄື ມັກໃດ ປະຕິປະທາໃດເປັນໄປເພື່ອໄດ້ລິດ ເພື່ອໄດ້ສະເພາະເຊິ່ງລິດ

ນີ້ຮຽກວ່າ ອິດທິບາດ

ອິດທິບາດພາວະນາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍ ສັນທະສະມາທິ ປະທານສັງຂານ
໒. ຈະເລີນອິດທິບາດທີ່ປະກອບດ້ວຍ ວິຣິຍະສະມາທິ ປະທານສັງຂານ
໓. ຈະເລີນອິດທິບາດທີ່ປະກອບດ້ວຍ ຈິດຕະສະມາທິ ປະທານສັງຂານ
໔. ຈະເລີນອິດທິບາດທີ່ປະກອບດ້ວຍ ວິມັງສາສະມາທິ ປະທານສັງຂານ

ນີ້ຮຽກວ່າ ອິດທິບາດພາວະນາ

ປະຕິປະທາທີ່ໃຫ້ເຖິງອິດທິບາດພາວະນາ ເປັນແນວໃດ?

ຄື ອະຣິຍະມັກມີອົງ ໘ ນີ້ແລ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ຮຽກວ່າ ປະຕິປະທາທີ່ໃຫ້ເຖິງອິດທິບາດພາວະນາ

**ທຸຕິຍະພິກຂຸສູດທີ ໑໐ ຈົບ**

# ໑໑. ໂມກຄັນລານະສູດ

## ວ່າດ້ວຍພຣະໂມກຄັນລານະ

[໘໔໓] ບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ພິກຂຸໂມກຄັນລານະມີລິດຫຼາຍ ມີອານຸພາບຫຼາຍແນວນີ້ ຍ້ອນທຳເຫຼົ່າໃດທີ່ທ່ານຈະເລີນ ເຮັດໃຫ້ຫຼາຍແລ້ວ

ພິກຂຸທັງຫຼາຍຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ມີພຣະຜູ້ມີພຣະພາກເຈົ້າເປັນຜູ້ນຳ ຯລຯ

ພິກຂຸທັງຫຼາຍ ພິກຂຸໂມກຄັນລານະມີລິດຫຼາຍ ມີອານຸພາບຫຼາຍແນວນີ້ ຍ້ອນອິດທິບາດ ໔ ປະການທີ່ພິກຂຸໂມກຄັນລານະນັ້ນຈະເລີນ ເຮັດໃຫ້ຫຼາຍແລ້ວ

ອິດທິບາດ ໔ ປະການ ອັນໃດແດ່
ຄື ໃນທຳວິໄນນີ້ ພິກຂຸໂມກຄັນລານະ

໑. ຈະເລີນອິດທິບາດທີ່ປະກອບດ້ວຍ ສັນທະສະມາທິປະທານສັງຂານ ດັ່ງນີ້ວ່າ ສັນທະຂອງເຮົາຈັກບໍ່ຫຍ່ອນຍານຫຼາຍ ບໍ່ຕ້ອງປະຄັບປະຄອງເກີນໄປ ບໍ່ຫົດຫູ່ໃນພາຍໃນ ບໍ່ຊ່ານໄປໃນພາຍນອກ ແລະມີຄວາມໝາຍຮູ້ວ່າເບື້ອງໜ້າແລະເບື້ອງຫຼັງຢູ່ ຄື ມີຄວາມໝາຍຮູ້ວ່າເບື້ອງຫຼັງຄືເບື້ອງໜ້າ ເບື້ອງໜ້າຄືເບື້ອງຫຼັງ ເບື້ອງເທິງຄືເບື້ອງລ່າງ ເບື້ອງລຸ່ມຄືເບື້ອງເທິງ ກາງຄືນຄືກາງເວັນ ກາງເວັນຄືກາງຄືນ ມີໃຈສະຫງັດ ບໍ່ມີເຄື່ອງຮ້ອຍຮັດ ອົບຮົມຈິດໃຫ້ສະຫວ່າງຢູ່ ດ້ວຍປະການຢ່າງນີ້
໒. ຈະເລີນອິດທິບາດທີ່ປະກອບດ້ວຍ ວິຣິຍະສະມາທິປະທານສັງຂານ ຯລຯ
໓. ຈະເລີນອິດທິບາດທີ່ປະກອບດ້ວຍ ຈິດຕະສະມາທິປະທານສັງຂານ ຯລຯ
໔. ຈະເລີນອິດທິບາດທີ່ປະກອບດ້ວຍ ວິມັງສາສະມາທິປະທານສັງຂານດັ່ງນີ້ວ່າ ວິມັງສາຂອງເຮົາຈັກບໍ່ຫຍ່ອນຍານຫຼາຍ ບໍ່ຕ້ອງປະຄັບປະຄອງເກີນໄປ ບໍ່ຫົດຫູ່ໃນພາຍໃນ ບໍ່ຊ່ານໄປໃນພາຍນອກ ຯລຯ ມີໃຈສະຫງັດ ບໍ່ມີເຄື່ອງຮ້ອຍຮັດ ອົບຮົມຈິດໃຫ້ສະຫວ່າງຢູ່ ດ້ວຍປະການຢ່າງນີ້

ພິກຂຸທັງຫຼາຍ ພິກຂຸໂມກຄັນລານະມີລິດຫຼາຍ ມີອານຸພາບຫຼາຍແນວນີ້ ຍ້ອນ
ອິດທິບາດ ໔ ປະການນີ້ທີ່ພິກຂຸໂມກຄັນລານະນັ້ນຈະເລີນ ເຮັດໃຫ້ຫຼາຍແລ້ວ

ພິກຂຸທັງຫຼາຍ ອັນໜຶ່ງ ພິກຂຸໂມກຄັນລານະສະແດງລິດໄດ້ຫຼາຍແນວ ຄື ຄົນດຽວ ສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ຯລຯ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້ ຍ້ອນອິດທິບາດ ໔ ປະການນີ້ທີ່ພິກຂຸໂມກຄັນລານະຈະເລີນ ເຮັດໃຫ້ຫຼາຍແລ້ວ ອັນໜຶ່ງ ພິກຂຸໂມກຄັນລານະເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ຍ້ອນອິດທິບາດ ໔ ປະການນີ້ທີ່ພິກຂຸໂມກຄັນລານະຈະເລີນ ເຮັດໃຫ້ຫຼາຍແລ້ວ

**ໂມກຄັນລານະສູດທີ ໑໑ ຈົບ**

# ໑໘. ຕະຖາຄະຕະສູດ

## ວ່າດ້ວຍພຣະຕະຖາຄົດເຈົ້າ

[໗໘໔] ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍ ຈະເຂົ້າໃຈຂໍ້ຄວາມນັ້ນວ່າແນວໃດ ຕະຖາຄົດມີລິດຫຼາຍ ມີອານຸພາບຫຼາຍແນວນີ້ ຍ້ອນທຳເຫຼົ່າໃດທີ່ຕະຖາຄົດຈະເລີນ ເຮັດໃຫ້ຫຼາຍແລ້ວ

ພິກຂຸທັງຫຼາຍ ຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ມີພຣະຜູ້ມີພຣະພາກເຈົ້າເປັນຜູ້ນຳ ຯລຯ

ພິກຂຸທັງຫຼາຍ ຕະຖາຄົດມີລິດຫຼາຍ ມີອານຸພາບຫຼາຍແນວນີ້ ຍ້ອນອິດທິບາດ ໔ ປະການທີ່ຕະຖາຄົດຈະເລີນ ເຮັດໃຫ້ຫຼາຍແລ້ວ

ອິດທິບາດ ໔ ປະການ ອັນໃດແດ່

ຄື ຕະຖາຄົດ

໑. ຈະເລີນອິດທິບາດທີ່ປະກອບດ້ວຍ ສັນທະສະມາທິປະທານສັງຂານດັ່ງນີ້ວ່າ ສັນທະຂອງເຮົາຈັກບໍ່ຫຍ່ອນຍານຫຼາຍ ບໍ່ຕ້ອງປະຄັບປະຄອງເກີນໄປ ບໍ່ຫົດຫູ່ໃນພາຍໃນ ບໍ່ຊ່ານໄປໃນພາຍນອກ ແລະຕະຖາຄົດມີຄວາມໝາຍ ຮູ້ວ່າເບື້ອງໜ້າແລະເບື້ອງຫຼັງຢູ່ ຄື ມີຄວາມໝາຍຮູ້ວ່າເບື້ອງຫຼັງ ຄືເບື້ອງໜ້າ ເບື້ອງໜ້າຄືເບື້ອງຫຼັງ ເບື້ອງເທິງຄືເບື້ອງລ່າງ ເບື້ອງລຸ່ມຄືເບື້ອງເທິງ ກາງຄືນຄືກາງເວັນ ກາງເວັນຄືກາງຄືນ ມີໃຈສະຫງັດ ບໍ່ມີເຄື່ອງຮ້ອຍຮັດ ອົບຮົມຈິດໃຫ້ສະ ຫວ່າງຢູ່ ດ້ວຍປະການຢ່າງນີ້
໒. ຈະເລີນອິດທິບາດທີ່ປະກອບດ້ວ ຍວິຣິຍະສະມາທິປະທານສັງຂານ ຯລຯ
໓. ຈະເລີນອິດທິບາດທີ່ປະກອບດ້ວຍ ຈິດຕະສະມາທິປະທານສັງຂານ ຯລຯ
໔. ຈະເລີນອິດທິບາດທີ່ປະກອບດ້ວຍວິມັງສາສະມາທິປະທານສັງຂານດັ່ງນີ້ວ່າ ວິມັງສາຂອງເຮົາຈັກບໍ່ຫຍ່ອນຍານຫຼາຍ ບໍ່ຕ້ອງປະຄັບປະຄອງເກີນໄປ ມີ ໃຈສະຫງັດ ບໍ່ມີເຄື່ອງຮ້ອຍຮັດ ອົບຮົມຈິດໃຫ້ສະຫວ່າງຢູ່ ດ້ວຍປະການຢ່າງນີ້

ພິກຂຸທັງຫຼາຍ ຕະຖາຄົດມີລິດຫຼາຍ ມີອານຸພາບຫຼາຍແນວນີ້ ຍ້ອນອິດທິບາດ ໔ ປະການນີ້ທີ່ຕະຖາຄົດຈະເລີນ ເຮັດໃຫ້ຫຼາຍແລ້ວ

ພິກຂຸທັງຫຼາຍ ອັນໜຶ່ງ ຕະຖາຄົດຍ່ອມສະແດງລິດໄດ້ຫຼາຍແບວ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ຯລຯ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້ ຍ້ອນອິດທິບາດ ໔ ປະການນີ້ທີ່ຕະຖາຄົດຈະເລີນ ເຮັດໃຫ້ຫຼາຍແລ້ວ

ອັນໜຶ່ງ ຕະຖາຄົດຍ່ອມເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ຍ້ອນອິດທິບາດ ໔ ປະການນີ້ທີ່ຕະຖາຄົດຈະເລີນ ເຮັດໃຫ້ຫຼາຍແລ້ວ

**ຕະຖາຄະຕະສູດທີ ໑໔ ຈົບ**

(ແມ່ນອະພິນຍາທັງ ໖ ກໍເພິ່ງໃຫ້ພິດສະດານ)

**ອະໂຍຄຸລະວັກທີ ໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ມັກຄະສູດ | ໒. ອະໂຍຄຸລະສູດ |
| ໓. ພິກຂຸສູດ | ໔. ສຸດທິກະສູດ |
| ໕. ປະຖົມຜະລະສູດ | ໖. ທຸຕິຍະຜະລະສູດ |
| ໗. ປະຖົມອານັນທະສູດ | ໘. ທຸຕິຍະອານັນທະສູດ |
| ໙. ປະຖົມພິກຂຸສູດ | ໑໐. ທຸຕິຍະພິກຂຸສູດ |
| ໑໑. ໂມກຄັນລານະສູດ | ໑໒. ຕະຖາຄະຕະສູດ |

# ໔. ຄັງຄາເປີຍຍາລະວັກ

### ໝວດວ່າດ້ວຍຄັງຄາເປີຍຍາລະ

## ໑-໑໒. ຄັງຄານະທີອາທີສູດ

### ວ່າດ້ວຍອຸປະມາດ້ວຍແມ່ນ້ຳຄົງຄາໄຫຼໄປສູ່ທິດປາຈີນເປັນຕົ້ນ

[໘໔໕-໘໔໖] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ແມ່ນ້ຳຄົງຄາໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ແມ່ນສັນໃດ ພິກຂຸກໍສັນນັ້ນ ຄືກັນ ເມື່ອຈະເລີນອິດທິບາດ ໔ ປະການ ເຮັດອິດທິບາດ ໔ ປະການໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸເມື່ອຈະເລີນອິດທິບາດ ໔ ປະການ ເຮັດອິດທິບາດ ໔ ປະການໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວໃດ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍ ສັນທະສະມາທິ ປະທານສັງຂານ
໒. ຈະເລີນອິດທິບາດທີ່ປະກອບດ້ວຍ ວິຣິຍະສະມາທິ ປະທານສັງຂານ
໓. ຈະເລີນອິດທິບາດທີ່ປະກອບດ້ວຍ ຈິດຕະສະມາທິ ປະທານສັງຂານ
໔. ຈະເລີນອິດທິບາດທີ່ປະກອບດ້ວຍ ວິມັງສາສະມາທິ ປະທານສັງຂານ

ພິກຂຸທັງຫຼາຍ ພິກຂຸເມື່ອຈະເລີນອິດທິບາດ ໔ ປະການ ເຮັດອິດທິບາດ ໔ ປະການໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວນີ້ແລ

**ຄັງຄານະທີອາທິສູດທີ ໑-໑໒ ຈົບ**

**ຄັງຄາເປີຍຍາລະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ປະຖົມປາຈີນນິນນະສູດ
໒-໕. ທຸຕິຍາທິປາຈີນນິນນະສູດຕະຈະຕຸກກະ
໖. ສັດຖະປາຈີນນິນນະສູດ
໗. ປະຖົມສະມຸດທະນິນນະສູດ
໘-໑໒. ທຸຕິຍາທິສະມຸດທະນິນນະສູດຕະປັນຈະກະ

(ອັບປະມາທະວັກເພີ່ງໃຫ້ພິດສະດານ)

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ຕະຖາຄະຕະສູດ
໒. ປະທະສູດ
໓. ກູຕະສູດ
໔. ມະລະສູດ
໕. ສາຣະສູດ
໖. ວັດສິກະສູດ
໗. ຣາຊາສູດ
໘. ຈັນທິມະສູດ
໙. ສຸຣິຍະສູດ
໑໐. ວັດຖະສູດ

(ພະລະກະຣະນີຍະວັກເພີ່ງໃຫ້ພິດສະດານ)

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ພະລະສູດ
໒. ນາຄະສູດ
໓. ກຸມພະສູດ
໔. ອາກາສະສູດ
໕. ທຸຕິຍະເມຄະສູດ
໖. ພິຊະສູດ
໗. ຣຸກຂະສູດ
໘. ສູກະສູດ
໙. ປະຖົມເມຄະສູດ
໑໐. ນາວາສູດ
໑໑. ອາຄັນຕຸກະສູດ
໑໒. ນະທີສູດ

(ເອສະນາວັກເພິ່ງໃຫ້ພິດສະດານ)

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ເອສະນາສູດ
໒. ອາສະວະສູດ
໓. ທຸກຂະຕາສູດ
໔. ມະລະສູດ
໕. ເວທະນາສູດ
໖. ວິທາສູດ
໗. ພະວະສູດ
໘. ຂີລະສູດ
໙. ນີຄະສູດ
໑໐. ຕັນຫາສູດ
໑໑. ຕະສິນາສູດ

# ໙. ໂອຄະວັກ

### ໝວດວ່າດ້ວຍໂອຄະ

## ໑-໑໐. ໂອຄາທິສູດ

### ວ່າດ້ວຍໂອຄະເປັນຕົ້ນ

[໙໗໕-໗໕໙] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອຸດທຳພາຄິຍະສັງໂຍດ (ສັງໂຍດເບື້ອງສູງ) ໕ ປະການນີ້

ອຸດທຳພາຄິຍະສັງໂຍດ ໕ ປະການ ອັນໃດແດ່ ຄື

໑. ຣູປະຣາຄະ
໒. ອະຣູປະຣາຄະ
໓. ມານະ
໔. ອຸດທັດຈະ
໕. ອະວິດຊາ

ອຸດທຳພາຄິຍະສັງໂຍດ ໕ ປະການນີ້

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຈະເລີນອິດທິບາດ ໔ ປະການ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະອຸດທຳພາຄິຍະສັງໂຍດ ໕ ປະການນີ້

ອິດທິບາດ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດທີ່ປະກອບດ້ວຍ ສັນທະສະມາທິ ປະທານສັງຂານ
໒. ຈະເລີນອິດທິບາດທີ່ປະກອບດ້ວຍ ວິຣິຍະສະມາທິ ປະທານສັງຂານ
໓. ຈະເລີນອິດທິບາດທີ່ປະກອບດ້ວຍ ຈິດຕະສະມາທິ ປະທານສັງຂານ
໔. ຈະເລີນອິດທິບາດທີ່ປະກອບດ້ວຍ ວິມັງສາສະມາທິ ປະທານສັງຂານ

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຈະເລີນອິດທິບາດ ໔ ປະການນີ້ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະອຸດທຳພາຄິຍະສັງໂຍດ ໕ ປະການນີ້

(ເພິ່ງເພີ່ມຂໍ້ຄວາມໃຫ້ພິດສະດານຄືມັກຄະສັງຍຸດ)

**ໂອຄາທີສູດທີ ໑-໑໐ ຈົບ**

**ໂອຄະວັກທີ ໘ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ໂອຄະສູດ
໒. ໂຍຄະສູດ
໓. ອຸປາທານະສູດ
໔. ຄັນຖະສູດ
໕. ອະນຸສະຍະສູດ
໖. ກາມມະຄຸນສູດ
໗. ນີວະຣະນະສູດ
໘. ອຸປາທານັກຂັນທະສູດ
໙. ໂອຣຳພາຄິຍະສູດ
໑໐. ອຸດທຳພາຄິຍະສູດ

**ອິດທິປາທະສັງຍຸດທີ ໗ ຈົບ**

# ໗. ອະນຸຣຸດທະສັງຍຸດ

## ໑. ຣະໂຫຄະຕະວັກ

### ໝວດວ່າດ້ວຍຜູ້ຫຼີບຫຼີກຢູ່ໃນບ່ອນສະງັດ

## ໑. ປະຖົມຣະໂຫຄະຕະສູດ

### ວ່າດ້ວຍຜູ້ຫຼີບຫຼີກຢູ່ໃນບ່ອນສະງັດ ສູດທີ ໑

[໗໙໙] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ທ່ານພຣະອະນຸຣຸດທະຢູ່ພຣະວິຫານເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດເມືອງສາວັດຖີ ຄັ້ງນັ້ນ ທ່ານພຣະອະນຸຣຸດທະຫຼີບຫຼີກຢູ່ໃນບ່ອນສະງັດ ໄດ້ເກີດຄວາມຮໍ່າເພິງຂຶ້ນມາວ່າ ສະຕິປັດຖານ ໔ ປະການອັນຊົນເຫຼົ່າໃດເຫຼົ່າໜຶ່ງພາດແລ້ວ ອະຣິຍະມັກທີ່ໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງ ກໍຊື່ວ່າ ເປັນອັນຊົນເຫຼົ່ານັ້ນພາດແລ້ວ ສະຕິປັດຖານ ໔ ປະການອັນຊົນເຫຼົ່າໃດເຫຼົ່າໜຶ່ງຜາຣົບແລ້ວ ອະຣິຍະມັກທີ່ໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງ ກໍຊື່ວ່າເປັນອັນຊົນເຫຼົ່ານັ້ນຜາຣົບແລ້ວ

ລໍາດັບນັ້ນ ທ່ານພຣະມະຫາໂມກຄັນລານະຮູ້ຄວາມຮໍ່າເພິງຂອງທ່ານພຣະອະນຸຣຸດທະດ້ວຍໃຈ ຈຶ່ງຫາຍໂຕໄປຜາກົດສະເພາະໜ້າຂອງທ່ານພຣະອະນຸຣຸດທະ ຄືບຸຣຸດມີກໍາລັງຢຽດແຂນອອກຫຼືຄູ້ແຂນເຂົ້າ ສັນນັ້ນ

ບັດນັ້ນ ທ່ານພຣະມະຫາໂມກຄັນລານະໄດ້ຖາມທ່ານພຣະອະນຸຣຸດທະດັ່ງນີ້ວ່າ ທ່ານອະນຸຣຸດທະ ດ້ວຍເຫດພຽງທໍ່ໃດນໍ? ພິກຂຸຈຶ່ງຊື່ວ່າ ຜາຣົບສະຕິປັດຖານ ໔ ປະການ

ທ່ານພຣະອະນຸຣຸດທະຕອບວ່າ ທ່ານຜູ້ມີອາຍຸ ພິກຂຸໃນພຣະທໍາວິໄນນີ້

໑. ພິຈາລະນາເຫັນທໍາເປັນເຫດເກີດໃນກາຍພາຍໃນຢູ່ ໆລໆ ພິຈາລະນາ ເຫັນທໍາເປັນເຫດດັບໃນກາຍພາຍໃນຢູ່ ໆລໆ ພິຈາລະນາເຫັນທັງທໍາ ເປັນເຫດເກີດທັງທໍາເປັນເຫດດັບໃນກາຍພາຍໃນຢູ່ ມີຄວາມພຽນ ມີ ສໍາປະຊັນຍະ ມີສະຕິ ກໍາຈັດອະພິດຊາແລະໂທມະນັດໃນໂລກໄດ້ ພິຈາລະນາ ເຫັນທໍາເປັນເຫດເກີດໃນກາຍພາຍນອກຢູ່ ໆລໆ ພິຈາລະນາເຫັນທໍາເປັນເຫດດັບໃນກາຍພາຍນອກຢູ່ ໆລໆ ພິຈາລະນາເຫັນທັງທໍາ ເປັນເຫດເກີດທັງທໍາເປັນເຫດດັບໃນກາຍ

ພາຍນອກຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ພິຈາລະນາ ເຫັນທຳເປັນເຫດເກີດໃນກາຍທັງພາຍໃນທັງພາຍນອກຢູ່ ຯລຯ ພິຈາລະນາເຫັນທຳເປັນເຫດດັບໃນກາຍທັງພາຍໃນທັງພາຍນອກຢູ່ ຯລຯ ພິຈາລະນາເຫັນທັງທຳເປັນເຫດເກີດທັງທຳເປັນເຫດດັບໃນກາຍທັງພາຍໃນທັງພາຍນອກຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດ ອະພິດຊາແລະໂທມະນັດໃນໂລກໄດ້

ຫາກທ່ານຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ວ່າ ປະຕິກູນໃນສິ່ງບໍ່ປະຕິກູນຢູ່ ກໍມີຄວາມໝາຍຮູ້ວ່າປະຕິກູນໃນສິ່ງບໍ່ປະຕິກູນນັ້ນຢູ່

ຫາກທ່ານຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ວ່າບໍ່ປະຕິກູນໃນສິ່ງປະຕິກູນຢູ່ ກໍມີຄວາມໝາຍຮູ້ວ່າບໍ່ປະຕິກູນໃນສິ່ງປະຕິກູນນັ້ນຢູ່

ຫາກທ່ານຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ວ່າປະຕິກູນໃນສິ່ງບໍ່ປະຕິກູນ ແລະສິ່ງປະຕິກູນຢູ່ ກໍມີຄວາມຮູ້ວ່າ ປະຕິກູນໃນສິ່ງບໍ່ປະຕິກູນແລະສິ່ງປະຕິກູນນັ້ນຢູ່

ຫາກທ່ານຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ວ່ າບໍ່ປະຕິກູນໃນສິ່ງປະຕິກູນແລະສິ່ງບໍ່ປະຕິກູນຢູ່ ກໍມີຄວາມໝາຍຮູ້ວ່າບໍ່ປະຕິກູນໃນສິ່ງປະຕິກູນ ແລະສິ່ງບໍ່ປະຕິກູນນັ້ນຢູ່

ຫາກທ່ານຫວັງວ່າ ເຮົາເພິ່ງເວັ້ນສິ່ງທັງ ໘ ນັ້ນ ຄື ສິ່ງບໍ່ປະຕິກູນ ແລະສິ່ງປະຕິກູນແລ້ວເປັນຜູ້ມີອຸເປກຂາ ມີສະຕິ ມີສຳປະຊັນຍະຢູ່ເທີ້ນ ກໍເປັນຜູ້ມີອຸເປກຂາ ມີສະຕິ ມີສຳປະຊັນຍະໃນສິ່ງບໍ່ປະຕິກູນແລະສິ່ງປະຕິກູນທັງ ໘ ນັ້ນຢູ່

໘. ພິຈາລະນາເຫັນທຳເປັນເຫດເກີດໃນເວທະນາທັງຫຼາຍພາຍໃນຢູ່ ຯລຯ ພິຈາລະນາເຫັນທຳເປັນເຫດດັບໃນເວທະນາທັງຫຼາຍພາຍໃນຢູ່ ຯລຯ ພິຈາລະນາເຫັນທັງທຳເປັນເຫດເກີດທັງທຳເປັນເຫດດັບໃນເວທະນາທັງຫຼາຍພາຍໃນຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ພິຈາລະນາເຫັນທຳເປັນເຫດເກີດໃນເວທະນາທັງຫຼາຍພາຍນອກຢູ່ ຯລຯ ພິຈາລະນາເຫັນທຳເປັນເຫດດັບໃນເວທະນາທັງຫຼາຍພາຍນອກຢູ່ ຯລຯ ພິຈາລະນາເຫັນທັງທຳເປັນເຫດເກີດທັງທຳເປັນເຫດດັບໃນເວທະນາທັງຫຼາຍພາຍນອກຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ພິຈາລະນາເຫັນທຳເປັນເຫດເກີດໃນເວທະນາທັງຫຼາຍທັງພາຍໃນທັງພາຍນອກຢູ່ ຯລຯ ພິຈາລະນາເຫັນທຳເປັນເຫດດັບໃນເວທະນາທັງຫຼາຍທັງພາຍໃນທັງພາຍນອກຢູ່ ຯລຯ ພິຈາລະນາເຫັນທັງທຳເປັນເຫດເກີດທັງທຳເປັນເຫດດັບໃນເວທະນາທັງຫຼາຍ ທັງພາຍໃນທັງພາຍນອກຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ຫາກທ່ານຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ວ່າປະຕິກູນໃນສິ່ງບໍ່ປະຕິກູນຢູ່ ກໍມີຄວາມໝາຍຮູ້ວ່າປະຕິກູນໃນສິ່ງບໍ່ປະຕິກູນນັ້ນຢູ່

ຫາກທ່ານຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ວ່າບໍ່ປະຕິກູນໃນສິ່ງປະຕິກູນຢູ່ ກໍມີຄວາມໝາຍຮູ້ວ່າບໍ່ປະຕິກູນໃນສິ່ງປະຕິກູນນັ້ນຢູ່

ຫາກທ່ານຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ວ່າປະຕິກູນໃນສິ່ງບໍ່ປະຕິກູນແລະສິ່ງປະຕິກູນຢູ່ ກໍມີຄວາມໝາຍຮູ້ວ່າປະຕິກູນໃນສິ່ງບໍ່ປະຕິກູນ ແລະສິ່ງປະຕິກູນນັ້ນຢູ່

ຫາກທ່ານຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ວ່າບໍ່ປະຕິກູນໃນສິ່ງປະຕິກູນແລະສິ່ງບໍ່ປະຕິກູນຢູ່ ກໍມີຄວາມໝາຍຮູ້ວ່າບໍ່ປະຕິກູນໃນສິ່ງປະຕິກູນ ແລະສິ່ງບໍ່ປະຕິກູນນັ້ນຢູ່

ຫາກທ່ານຫວັງວ່າ ເຮົາເພິ່ງເວັ້ນສິ່ງທັງ ໒ ນັ້ນ ຄືສິ່ງບໍ່ປະຕິກູນແລະສິ່ງປະຕິກູນແລ້ວເປັນຜູ້ມີອຸເປກຂາ ມີສະຕິ ມີສຳປະຊັນຍະຢູ່ ກໍເປັນຜູ້ມີອຸເປກຂາ ມີສະຕິ ມີສຳປະຊັນຍະໃນສິ່ງບໍ່ປະຕິກູນ ແລະສິ່ງປະຕິກູນທັງ ໒ ນັ້ນຢູ່

໓. ພິຈາລະນາເຫັນທຳເປັນເຫດເກີດໃນຈິດພາຍໃນ ຯລຯ ໃນຈິດພາຍນອກ ຯລຯ ພິຈາລະນາເຫັນທຳເປັນເຫດເກີດໃນຈິດທັງພາຍໃນທັງພາຍນອກຢູ່ ຯລຯ ພິຈາລະນາເຫັນທຳເປັນເຫດດັບໃນຈິດທັງພາຍໃນທັງພາຍນອກຢູ່ ຯລຯ ພິຈາລະນາເຫັນທັງທຳເປັນເຫດເກີດທັງທຳເປັນເຫດດັບໃນຈິດທັງພາຍໃນທັງພາຍນອກຢູ່ ມີຄວາມພຽນ ຯລຯ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ຫາກທ່ານຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ວ່າປະຕິກູນໃນສິ່ງບໍ່ປະຕິກູນຢູ່ ກໍມີຄວາມໝາຍຮູ້ວ່າປະຕິກູນໃນສິ່ງບໍ່ປະຕິກູນນັ້ນຢູ່ ຯລຯ ເປັນຜູ້ມີອຸເປກຂາ ມີສະຕິ ມີສຳປະຊັນຍະໃນສິ່ງບໍ່ປະຕິກູນແລະສິ່ງປະຕິກູນທັງ ໒ ນັ້ນຢູ່

໔. ພິຈາລະນາເຫັນທຳເປັນເຫດເກີດໃນທຳທັງຫຼາຍພາຍໃນ ຯລຯ ໃນ ທຳທັງຫຼາຍພາຍນອກ ຯລຯ ພິຈາລະນາເຫັນທຳເປັນເຫດເກີດໃນທຳທັງຫຼາຍທັງພາຍໃນທັງພາຍນອກຢູ່ ຯລຯ ພິຈາລະນາເຫັນທຳເປັນເຫດດັບໃນທຳທັງຫຼາຍທັງພາຍໃນທັງພາຍນອກຢູ່ ຯລຯ ພິຈາລະນາເຫັນທັງທຳເປັນເຫດເກີດທັງທຳເປັນເຫດດັບໃນທຳທັງຫຼາຍທັງພາຍໃນທັງພາຍນອກຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້

ຫາກທ່ານຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ວ່າປະຕິກູນໃນສິ່ງບໍ່ປະຕິກູນຢູ່ ກໍມີຄວາມໝາຍຮູ້ວ່າປະຕິກູນໃນສິ່ງບໍ່ປະຕິກູນນັ້ນຢູ່ ຯລຯ ເປັນຜູ້ມີອຸເປກຂາ ມີສະຕິ ມີສຳປະຊັນຍະໃນສິ່ງບໍ່ປະຕິກູນແລະສິ່ງປະຕິກູນທັງ ໒ ນັ້ນຢູ່

ທ່ານຜູ້ມີອາຍຸ ດ້ວຍເຫດພຽງທໍ່ນີ້ແລ ພິກຂຸຈຶ່ງຊື່ວ່າເຜົາຣົບສະຕິປັດຖານ ໔ ປະການ

**ປະຖົມຣະໂຫຄະຕະສູດທີ ໑ ຈົບ**

# ໘. ທຸຕິຍະຣະໂຫຄະຕະສູດ

## ວ່າດ້ວຍຜູ້ຫຼີບຫຼີກຢູ່ໃນບ່ອນສະງັດ ສູດທີ ໘

[໙໐໐] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ຄັ້ງນັ້ນ ທ່ານພຣະອະນຸຣຸດທະຫຼີບຫຼີກຢູ່ໃນບ່ອນສະງັດ ໄດ້ເກີດຄວາມຄິດຄຳນຶງຂຶ້ນມາ ວ່າ ສະຕິປັດຖານ ໔ ປະການອັນຊົນເຫຼົ່າໃດເຫຼົ່າໜຶ່ງພາດແລ້ວ ອະຣິຍະມັກທີ່ໃຫ້ເຖິງຄວາມສິ້ນ ທຸກໂດຍຖືກຕ້ອງ ກໍຊື່ວ່າເປັນອັນຊົນເຫຼົ່ານັ້ນພາດແລ້ວ ສະຕິປັດຖານ ໔ ປະການອັນຊົນເຫຼົ່າໃດ ເຫຼົ່າໜຶ່ງຜາຣົບແລ້ວ ອະຣິຍະມັກທີ່ໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງ ກໍຊື່ວ່າເປັນອັນຊົນເຫຼົ່ານັ້ນ ຜາຣົບແລ້ວ

ລຳດັບນັ້ນ ທ່ານພຣະມະຫາໂມກຄັນລານະຮູ້ຄວາມຮ່ຳເພິງຂອງທ່ານພຣະອະນຸຣຸດທະ ດ້ວຍໃຈ ຈຶ່ງຫາຍໂຕໄປຜາກົດສະເພາະໜ້າຂອງທ່ານພຣະອະນຸຣຸດທະ ຄືບຸຣຸດມີກຳລັງຢຽດ ແຂນອອກຫຼືຄູ້ແຂນເຂົ້າ ສັນນັ້ນ

ບັດນັ້ນ ທ່ານພຣະມະຫາໂມກຄັນລານະໄດ້ຖາມທ່ານພຣະອະນຸຣຸດທະດັ່ງນີ້ວ່າ ທ່ານອະ ນຸຣຸດທະ ດ້ວຍເຫດພຽງທໍ່ໃດນໍ ພິກຂຸຈຶ່ງຊື່ວ່າ ຜາຣົບສະຕິປັດຖານ ໔ ປະການ

ທ່ານພຣະອະນຸຣຸດທະຕອບວ່າ ທ່ານຜູ້ມີອາຍຸ ພິກຂຸໃນພຣະທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍພາຍໃນຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້ ພິຈາລະນາເຫັນກາຍໃນກາຍພາຍ ນອກຢູ່ ມີຄວາມພຽນ ຯລຯ ພິຈາລະນາເຫັນກາຍໃນກາຍທັງພາຍໃນທັງພາຍ ນອກຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດ ໃນໂລກໄດ້

໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍພາຍໃນຢູ່ ມີຄວາມພຽນ ມີສຳ ປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ພິຈາລະນາ ເຫັນ ເວທະນາໃນເວທະນາທັງຫຼາຍພາຍນອກຢູ່ ມີຄວາມພຽນ ມີສຳປະຊັນ ຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ພິຈາລະນາເຫັນເວ ທະນາ ໃນເວທະນາທັງຫຼາຍທັງພາຍໃນທັງພາຍນອກຢູ່ ມີຄວາມພຽນ ມີສຳ ປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

໓. ພິຈາລະນາເຫັນຈິດໃນຈິດພາຍໃນຢູ່ ຯລຯ ພິຈາລະນາເຫັນຈິດໃນຈິດພາຍນອກ ຯລຯ ພິຈາລະນາເຫັນຈິດໃນຈິດທັງພາຍໃນທັງພາຍນອກຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

໔. ພິຈາລະນາເຫັນທຳໃນທຳທັງຫຼາຍພາຍໃນ ຯລຯ ພິຈາລະນາເຫັນທຳໃນທຳທັງຫຼາຍພາຍນອກ ຯລຯ ພິຈາລະນາເຫັນທຳໃນທຳ ທັງຫຼາຍທັງພາຍໃນທັງພາຍນອກຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ທ່ານຜູ້ມີອາຍຸ ດ້ວຍເຫດພຽງທໍ່ນີ້ແລ ພິກຂຸຈຶ່ງຊື່ວ່າຜາຣົບສະຕິປັດຖານ ໔ ປະການ

**ທຸຕິຍະຣະໂຫຄະຕະສູດທີ ໘ ຈົບ**

# ໓. ສຸຕະນຸສູດ

## ວ່າດ້ວຍການສົນທະນາທຳທີ່ແຄມຝັ່ງແມ່ນ້ຳສຸຕະນຸ

[໗໐໑] ສະໄໝໜຶ່ງ ທ່ານພຣະອະນຸຣຸດທະຢູ່ໃກ້ແຄມຝັ່ງແມ່ນ້ຳສຸຕະນຸ ເຂດເມືອງສາວັດຖີ ຄັ້ງນັ້ນ ພິກຂຸຈຳນວນຫຼາຍເຂົ້າໄປຫາທ່ານພຣະອະນຸຣຸດທະຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນຖາມທ່ານພຣະອະນຸຣຸດທະດັ່ງນີ້ວ່າ ທ່ານອະນຸຣຸດທະໄດ້ເຖິງຄວາມເປັນຜູ້ມີອະພິນຍາຫຼາຍ ຍ້ອນທຳເຫຼົ່າໃດທີ່ທ່ານອະນຸຣຸດທະຈະເລີນ ເຮັດໃຫ້ຫຼາຍແລ້ວ

ທ່ານພຣະອະນຸຣຸດທະຕອບວ່າ ທ່ານຜູ້ມີອາຍຸທັງຫຼາຍ ຜົມໄດ້ເຖິງຄວາມເປັນຜູ້ມີອະພິນຍາຫຼາຍ ຍ້ອນສະຕິປັດຖານ ໔ ປະການທີ່ຂ້າພະເຈົ້າຈະເລີນ ເຮັດໃຫ້ຫຼາຍແລ້ວ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ໃນພຣະທຳວິໄນນີ້ ຂ້ານ້ອຍ

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ

໔. ພິຈາລະນາເຫັນທຳໃນທຳທັງຫຼາຍ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ທ່ານຜູ້ມີອາຍຸທັງຫຼາຍ ຂ້ານ້ອຍໄດ້ເຖິງຄວາມເປັນຜູ້ມີອະພິນຍາຫຼາຍ ຍ້ອນສະຕິປັດຖານ ໔ ປະການນີ້ທີ່ຂ້າພະເຈົ້າຈະເລີນ ເຮັດໃຫ້ຫຼາຍແລ້ວ ອັນໜຶ່ງ ຂ້ານ້ອຍໄດ້ຮູ້ທຳຊົ່ວໂດຍຄວາມເປັນທຳຊົ່ວ ໄດ້ຮູ້ທຳປານກາງໂດຍຄວາມເປັນທຳປານກາງ ໄດ້ຮູ້ທຳປະນີດໂດຍຄວາມເປັນທຳປະນີດ ຍ້ອນສະຕິປັດຖານ ໔ ປະການນີ້ທີ່ຂ້າພະເຈົ້າຈະເລີນ ເຮັດໃຫ້ຫຼາຍແລ້ວ

**ສຸຕະນຸສູດທີ ໓ ຈົບ**

# ໔. ປະຖົມກັນຕະກີສູດ

## ວ່າດ້ວຍການສົນທະນາທຳທີ່ກັນຕະກີວັນ ສູດທີ ໑

[໗໐໔] ສະໄໝໜຶ່ງ ທ່ານພຣະອະນຸຣຸດທະ ທ່ານພຣະສາຣີບຸດ ແລະທ່ານພຣະມະຫາໂມກຄັນລານະຢູ່ທີ່ກັນຕະກີວັນ ເຂດເມືອງສາເກດ ເມື່ອໃນເວລາຄ່ຳ ທ່ານພຣະສາຣີບຸດ ແລະທ່ານພຣະມະຫາໂມກຄັນລານະອອກຈາກບ່ອນສະງັດ ເຂົ້າໄປຫາທ່ານພຣະອະນຸຣຸດທະຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ທ່ານພຣະສາຣີບຸດໄດ້ຖາມທ່ານພຣະອະນຸຣຸດທະດັ່ງນີ້ວ່າ ທ່ານອະນຸຣຸດທະ ທຳເຫຼົ່າໃດທີ່ພິກຂຸຜູ້ເສຂະເພິ່ງເຂົ້າເຖິງຢູ່

ທ່ານພຣະອະນຸຣຸດທະຕອບວ່າ ທ່ານສາຣີບຸດ ສະຕິປັດຖານ ໔ ປະການທີ່ພິກຂຸຜູ້ເສຂະເພິ່ງເຂົ້າເຖິງຢູ່

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸໃນພຣະທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ฯລฯ
໓. ພິຈາລະນາເຫັນຈິດໃນຈິດ ฯລฯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ທ່ານສາຣີບຸດ ສະຕິປັດຖານ ໔ ປະການນີ້ທີ່ພິກຂຸຜູ້ເສຂະເພິ່ງເຂົ້າເຖິງຢູ່

**ປະຖົມກັນຕະກີສູດທີ ໔ ຈົບ**

# ໕. ທຸຕິຍະກັນຕະກີສູດ

## ວ່າດ້ວຍການສົນທະນາທຳທີ່ກັນຕະກີວັນ ສູດທີ ໔

[໙໐໓] ເລື້ອງເກີດຂຶ້ນທີ່ເມືອງສາເກດ

ທ່ານພຣະສາຣີບຸດນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ຖາມທ່ານພຣະອະນຸຣຸດທະດັ່ງນີ້ວ່າ ທ່ານອະນຸຣຸດທະ ທຳເຫຼົ່າໃດ? ທີ່ພິກຂຸຜູ້ອະເສຂະເພິ່ງເຂົ້າເຖິງຢູ່

ທ່ານພຣະອະນຸຣຸດທະຕອບວ່າ ທ່ານສາຣີບຸດ ສະຕິປັດຖານ ໔ ປະການທີ່ພິກຂຸຜູ້ອະເສຂະເພິ່ງເຂົ້າເຖິງຢູ່

ສະຕິປັດຖານ ໔ ປະການ ອັນໃດແດ່
ຄື ພິກຂຸໃນພຣະທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ທ່ານພຣະສາຣີບຸດ ສະຕິປັດຖານ ໔ ປະການນີ້ທີ່ພິກຂຸຜູ້ອະເສຂະເພິ່ງເຂົ້າເຖິງຢູ່

**ທຸຕິຍະກັນຕະກີສູດທີ ໕ ຈົບ**

# ໖. ຕະຕິຍະກັນຕະກີສູດ

## ວ່າດ້ວຍການສົນທະນາທຳທີ່ກັນຕະກີວັນ ສູດທີ ໓

[໙໐໔] ເລື້ອງເກີດຂຶ້ນທີ່ເມືອງສາເກດ

ທ່ານພຣະສາຣີບຸດນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ຖາມທ່ານພຣະອະນຸຣຸດທະດັ່ງນີ້ວ່າ ທ່ານອະນຸຣຸດທະ ໄດ້ເຖິງຄວາມເປັນຜູ້ມີພິນຍາຫຼາຍ ຍ້ອນທຳເຫຼົ່າໃດທີ່ທ່ານອະນຸຣຸດທະຈະເລີນ ເຮັດໃຫ້ຫຼາຍແລ້ວ

ທ່ານພຣະອະນຸຣຸດທະຕອບວ່າ ຜູ້ມີອາຍຸ ຂ້ານ້ອຍໄດ້ເຖິງຄວາມເປັນຜູ້ມີອະພິນຍາຫຼາຍ ຍ້ອນສະຕິປັດຖານ ໔ ປະການທີ່ຂ້າພະເຈົ້າຈະເລີນ ເຮັດໃຫ້ຫຼາຍແລ້ວ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ໃນພຣະທຳວິໄນນີ້ ຜົມ

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ฯລฯ
໓. ພິຈາລະນາເຫັນຈິດໃນຈິດ ฯລฯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ຜູ້ມີອາຍຸ ຂ້ານ້ອຍໄດ້ເຖິງຄວາມເປັນຜູ້ມີອະພິນຍາຫຼາຍ ຍ້ອນສະຕິປັດຖານ ໔ ປະການນີ້ ທີ່ຂ້າພະເຈົ້າຈະເລີນ ເຮັດໃຫ້ຫຼາຍແລ້ວ ອັນໜຶ່ງ ຂ້ານ້ອຍຮູ້ໂລກຕັ້ງ ໑,໐໐໐ ໂລກໄດ້ຍ້ອນສະຕິປັດຖານ ໔ ປະການນີ້ທີ່ຂ້າພະເຈົ້າຈະເລີນ ເຮັດໃຫ້ຫຼາຍແລ້ວ

**ຕະຕິຍະກັນຕະກີສູດທີ ໖ ຈົບ**

# ໗. ຕັນຫາກະຂະຍະສູດ

## ວ່າດ້ວຍທຳທີ່ເປັນໄປເພື່ອຄວາມສິ້ນຕັນຫາ

[໗໐໕] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ໃນບ່ອນນັ້ນແລ ທ່ານພຣະອະນຸຣຸດທະຮຽກພິກຂຸທັງຫຼາຍມາກ່າວວ່າ ຜູ້ມີອາຍຸທັງຫຼາຍ ພິກຂຸເຫຼົ່ານັ້ນຮັບຄຳທ່ານພຣະອະນຸຣຸດທະແລ້ວ ທ່ານພຣະອະນຸຣຸດທະຈຶ່ງໄດ້ກ່າວເລື້ອງນີ້ ວ່າ

ຜູ້ມີອາຍຸທັງຫຼາຍ ສະຕິປັດຖານ ໔ ປະການນີ້ທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມສິ້ນຕັນຫາ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ພິກຂຸໃນພຣະທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ

໓. ພິຈາລະນາເຫັນຈິດໃນຈິດ ຯລຯ

໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ຜູ້ມີອາຍຸທັງຫຼາຍ ສະຕິປັດຖານ ໔ ປະການນີ້ທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ

ຍ່ອມເປັນໄປເພື່ອຄວາມສິ້ນຕັນຫາ

**ຕັນຫາກະຂະຍະສູດທີ ໗ ຈົບ**

# ໘. ສະລະລາຄາຣະສູດ

## ວ່າດ້ວຍທຳມະເທດສະໜາທີ່ສະລະລາຄານ

[໙໐໖] ສະໄໝໜຶ່ງ ທ່ານພຣະອະນຸຣຸດທະຢູ່ສະລະລາຄານ ເຂດເມືອງສາວັດຖີໃນບ່ອນນັ້ນແລ ທ່ານພຣະອະນຸຣຸດທະຮຽກພິກຂຸທັງຫຼາຍມາກ່າວວ່າ ຯລຯ ໄດ້ກ່າວຄຳນີ້ວ່າ ຜູ້ມີອາຍຸທັງຫຼາຍ ປຽບຄືແມ່ນ້ຳຄົງຄາໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ເມື່ອເປັນເຊັ່ນນັ້ນ ໝູ່ມະຫາຊົນພາກັນຖືເອົາຈົກແລະກະຕ່າມາ ດ້ວຍປະສົງວ່າ ຈັກກັ້ນແມ່ນ້ຳຄົງຄານີ້ໃຫ້ໄຫຼໄປທາງຫຼັງ ບ່າໄປທາງຫຼັງ ລົ້ນໄປທາງຫຼັງ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ໝູ່ມະຫາຊົນນັ້ນຈະເພິ່ງກັ້ນແມ່ນ້ຳຄົງຄາໃຫ້ໄຫຼໄປທາງຫຼັງ ບ່າໄປທາງຫຼັງ ລົ້ນໄປທາງຫຼັງໄດ້ບໍ?

ພິກຂຸເຫຼົ່ານັ້ນ ຕອບວ່າ ບໍ່ໄດ້ ຂ້ານ້ອຍ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນການຈະກັ້ນແມ່ນ້ຳຄົງຄາທີ່ໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ໃຫ້ໄຫຼໄປທາງຫຼັງ ບ່າໄປທາງຫຼັງ ລົ້ນໄປທາງຫຼັງນັ້ນ ບໍ່ແມ່ນເຮັດໄດ້ງ່າຍ ທັງໝູ່ມະຫາຊົນນັ້ນຈະເພິ່ງມີສ່ວນແຫ່ງຄວາມລຳບາກ ອິດເມື່ອຍແນ່ນອນ

ຜູ້ມີອາຍຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ພຣະຣາຊາ ມະຫາອຳມາດຂອງພຣະຣາຊາ ມິດ ອຳມາດ ຍາດ ສາໂລຫິດກໍຕາມ ເພິ່ງເຊື້ອເຊີນພິກຂຸຜູ້ຈະເລີນສະຕິປັດຖານ ໔ ປະການ ເຮັດສະຕິປັດຖານ ໔ ປະການໃຫ້ຫຼາຍ ໃຫ້ຍິນດີດ້ວຍໂພຄະວ່າ ເຊີນເທີ້ນ ທ່ານຜູ້

ຈະເລີນ ຜ້າກາສາວະເຫຼົ່ານີ້ເຮັດໃຫ້ທ່ານຮ້ອນຮົນບໍ່ແມ່ນບໍ ທ່ານຈະເປັນຄົນຫົວໂລ້ນທ່ຽວຖືກະເບື້ອງໄປເຮັດຫຍັງ ເຊີນເທີ້ນ ເຊີນທ່ານກັບມາເປັນຄະລິຫັດໃຊ້ສອຍໂພຄະຊັບແລະທຳບຸນເທີ້ນ

ຜູ້ມີອາຍຸທັງຫຼາຍ ເປັນໄປບໍ່ໄດ້ເລີຍທີ່ພິກຂຸນັ້ນຈະເລີນສະຕິປັດຖານ ໔ ປະການ ເຮັດສະຕິປັດຖານ ໔ ປະການໃຫ້ຫຼາຍ ຈະບອກຄືນສິກຂາ ກັບມາເປັນຄະລິຫັດ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນເປັນໄປບໍ່ໄດ້ເລີຍທີ່ຈິດອັນນ້ອມໄປໃນວິເວກ ອຽງໄປໃນວິເວກ ໂອນໄປໃນວິເວກຕະຫຼອດການລະນານແລ້ວ ຈັກວຽນມາເພື່ອເປັນຄະລິຫັດ

ພິກຂຸຈະເລີນສະຕິປັດຖານ ໔ ປະການ ເຮັດສະຕິປັດຖານ ໔ ປະການໃຫ້ຫຼາຍ ແນວໃດ? ຄື ພິກຂຸໃນພຣະທຳວິໄນນີ້

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ຜູ້ມີອາຍຸທັງຫຼາຍ ພິກຂຸຈະເລີນສະຕິປັດຖານ ໔ ປະການ ເຮັດສະຕິປັດຖານ ໔ ປະການໃຫ້ຫຼາຍ ແນວນີ້ແລ

**ສະລະລາຄາຣະສູດທີ ໗ ຈົບ**

# ໙. ອຳພະປາລິວະນະສູດ

## ວ່າດ້ວຍການສົນທະນາທຳໃນອຳພະປາລິວັນ

[໙໐໗] ສະໄໝໜຶ່ງ ທ່ານພຣະອະນຸຣຸດທະແລະທ່ານພຣະສາຣີບຸດຢູ່ອຳພະປາລິວັນ ເຂດເມືອງເວສາລີ ເມື່ອໃນເວລາຄ່ຳ ທ່ານພຣະສາຣີບຸດອອກຈາກບ່ອນສະງັດ ຯລຯ໑ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະອະນຸຣຸດທະດັ່ງນີ້ວ່າ ທ່ານອະນຸຣຸດທະ ອິນຊີຂອງທ່ານຜ່ອງໃສຫຼາຍ ສີໜ້າບໍລິສຸດຜຸດຜ່ອງ ຂະນະນີ້ ສ່ວນຫຼາຍທ່ານຢູ່ດ້ວຍວິຫານທຳ (ທຳເປັນເຄື່ອງຢູ່) ອັນໃດ?

ທ່ານພຣະອະນຸຣຸດທະຕອບວ່າ ຜູ້ມີອາຍຸ ຂະນະນີ້ ຜົມມີຈິດຕັ້ງໝັ້ນດີຢູ່ໃນສະຕິປັດຖານ ໔ ປະການ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ໃນພຣະທຳວິໄນນີ້ ຂ້ານ້ອຍ

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ຜູ້ມີອາຍຸ ຂະນະນີ້ ສ່ວນຫຼາຍຂ້ານ້ອຍມີຈິດຕັ້ງໝັ້ນດີຢູ່ໃນສະຕິປັດຖານ ໔ ປະການນີ້ ພິກຂຸ ໃດເປັນພຣະອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາຣະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະອະສັງໂຍດແລ້ວ ລຸດພົ້ນຍ້ອນຮູ້ໂດຍຖືກຕ້ອງ ພິກຂຸນັ້ນສ່ວນຫຼາຍຊື່ວ່າມີຈິດຕັ້ງໝັ້ນດີຢູ່ໃນສະຕິປັດຖານ ໔ ປະການນີ້

ທ່ານພຣະສາຣີບຸດກ່າວວ່າ ເປັນລາບຂອງພວກເຮົາແທ້ນໍ ພວກເຮົາໄດ້ດີແລ້ວທີ່ໄດ້ຟັງສະເພາະໜ້າທ່ານອະນຸຣຸດທະຜູ້ກ່າວອາສະພິວາຈາຢູ່

**ອຳພະປາລີວະນະສູດທີ ໙ ຈົບ**

# ໑໐. ພາລະຫະຄິລານະສູດ

## ວ່າດ້ວຍພຣະອະນຸຣຸດທະອາພາດໜັກ

[໙໐໘] ສະໄໝໜຶ່ງ ທ່ານພຣະອະນຸຣຸດທະອາພາດ ໄດ້ຮັບທຸກ ເປັນໄຂ້ໜັກຢູ່ປ່າອັນທະວັນ ເຂດເມືອງສາວັດຖີ ຄັ້ງນັ້ນ ພິກຂຸຈຳນວນຫຼາຍເຂົ້າໄປຫາທ່ານຮອດບ່ອນຢູ່ແລ້ວໄດ້ຖາມທ່ານພຣະອະນຸຣຸດທະດັ່ງນີ້ວ່າ ທ່ານອະນຸຣຸດທະຢູ່ດ້ວຍວິຫານທຳອັນໃດ ທຸກຂະເວທະນາ ທາງກາຍທີ່ເກີດຂຶ້ນແລ້ວ ຈຶ່ງບໍ່ຄອບງຳຈິດຢູ່ໄດ້

ທ່ານພຣະອະນຸຣຸດທະຕອບວ່າ ຜູ້ມີອາຍຸທັງຫຼາຍ ຂ້ານ້ອຍມີຈິດຕັ້ງໝັ້ນດີຢູ່ໃນສະຕິປັດຖານ ໔ ປະການ ທຸກຂະເວທະນາທາງກາຍທີ່ເກີດຂຶ້ນແລ້ວ ຈຶ່ງບໍ່ຄອບງຳຈິດຢູ່ໄດ້

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ໃນພຣະທຳວິໄນນີ້ ຂ້ານ້ອຍ

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ
໓. ພິຈາລະນາເຫັນຈິດໃນຈິດ ຯລຯ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ຜູ້ມີອາຍຸທັງຫຼາຍ ຂ້ານ້ອຍມີຈິດຕັ້ງໝັ້ນດີຢູ່ໃນສະຕິປັດຖານ ໔ ປະການນີ້ ທຸກຂະເວທະນາທາງກາຍທີ່ເກີດຂຶ້ນແລ້ວ ຈຶ່ງບໍ່ຄອບງຳຈິດຢູ່ໄດ້

**ພາລະຫະຄິລານະສູດທີ ໑໐ ຈົບ**

**ຣະໂຫຄະຕະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ປະຖົມຣະໂຫຄະຕະສູດ | ໒. ທຸຕິຍະຣະໂຫຄະຕະສູດ |
| ໓. ສຸຕະນຸສູດ | ໔. ປະຖົມກັນຕະກີສູດ |
| ໕. ທຸຕິຍະກັນທະກີສູດ | ໖. ຕະຕິຍະກັນຕະກີສູດ |
| ໗. ຕັນຫາກະຂະຍະສູຕ | ໘. ສະລະລາຄາຣະສູຕ |
| ໙. ອຳພະປາລິວະນະສູດ | ໑໐. ພາລະຫະຄິລານະສູດ |

# ໒. ທຸຕິຍະວັກ

**ໝວດທີ ໒**

## ໑. ກັບປະສະຫັດສະສູດ

### ວ່າດ້ວຍເຫດທີ່ເຮັດໃຫ້ຣະນຶກໄດ້ຕັ້ງ ໑,໐໐໐ ກັບ

[໙໐໙] ສະໄໝໜຶ່ງ ທ່ານພຣະອະນຸຣຸດທະຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດເມືອງສາວັດຖີ ຄັ້ງນັ້ນ ພິກຂຸຈຳນວນຫຼາຍເຂົ້າໄປຫາທ່ານພຣະອະນຸຣຸດທະ

ຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ໆລໆ ຮຽນຖາມທ່ານພຣະອະນຸຣຸດທະດັ່ງນີ້ ວ່າ

ທ່ານອະນຸຣຸດທະໄດ້ເຖິງຄວາມເປັນຜູ້ມີອະພິນຍາຫຼາຍ ຍ້ອນທຳເຫຼົ່າໃດທີ່ທ່ານອະນຸຣຸດທະຈະເລີນ ເຮັດໃຫ້ຫຼາຍແລ້ວ

ທ່ານພຣະອະນຸຣຸດທະຕອບວ່າ ຜູ້ມີອາຍຸທັງຫຼາຍ ຂ້ານ້ອຍໄດ້ເຖິງຄວາມເປັນຜູ້ມີອະພິນຍາຫຼາຍ ຍ້ອນສະຕິປັດຖານ ໔ ປະການທີ່ຂ້າພະເຈົ້າຈະເລີນ ເຮັດໃຫ້ຫຼາຍແລ້ວ

ສະຕິປັດຖານ ໔ ປະການ ອັນໃດແດ່

ຄື ຂ້ານ້ອຍ

໑. ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້
໒. ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ໆລໆ
໓. ພິຈາລະນາເຫັນຈິດໃນຈິດ ໆລໆ
໔. ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ຜູ້ມີອາຍຸທັງຫຼາຍ ຂ້ານ້ອຍໄດ້ເຖິງຄວາມເປັນຜູ້ມີອະພິນຍາຫຼາຍ ຍ້ອນສະຕິປັດຖານ ໔ ປະການນີ້ທີ່ຂ້າພະເຈົ້າຈະເລີນ ເຮັດໃຫ້ຫຼາຍແລ້ວ ອັນໜຶ່ງ ຂ້ານ້ອຍຣະນຶກໄດ້ຕັ້ງ ໑,໐໐໐ ກັບ ຍ້ອນ

ສະຕິປັດຖານ ໔ ປະການນີ້ທີ່ຂ້າພະເຈົ້າຈະເລີນ ເຮັດໃຫ້ຫຼາຍແລ້ວ

**ກັປປະສະຫັດສະສູດທີ ໑ ຈົບ**

# ໒. ອິດທິວິທະສູດ

## ວ່າດ້ວຍເຫດທີ່ເຮັດໃຫ້ສະແດງລິດໄດ້ຫຼາຍແບບ

[໙໑໐] ທ່ານພຣະອະນຸຣຸດທະກ່າວວ່າ ຜູ້ມີອາຍຸທັງຫຼາຍ ອັນໜຶ່ງ ຂ້ານ້ອຍສະແດງລິດໄດ້ຫຼາຍແບບ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ໆລໆ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້ ກໍຍ້ອນສະຕິປັດຖານ ໔ ປະການນີ້ທີ່ຂ້າພະເຈົ້າຈະເລີນ ເຮັດໃຫ້ຫຼາຍແລ້ວ

**ອິດທິວິທະສູດທີ ໒ ຈົບ**

## ໓. ທິບພະໂສຕະສູດ

### ວ່າດ້ວຍເຫດທີ່ເຮັດໃຫ້ມີຫູທິບ

[໙໑໑] ຜູ້ມີອາຍຸທັງຫຼາຍ ອັນໜຶ່ງ ຂ້ານ້ອຍໄດ້ຍິນສຽງ ໒ ຊະນິດ ຄື ສຽງທິບແລະສຽງມະນຸດ ທັງທີ່ຢູ່ໄກແລະໃກ້ດ້ວຍຫູທິບອັນບໍລິສຸດເໜືອມະນຸດ ກໍຍ້ອນສະຕິປັດຖານ ໔ ປະການນີ້ທີ່ຂ້າພະເຈົ້າຈະເລີນ ເຮັດໃຫ້ຫຼາຍແລ້ວ

**ທິບພະໂສຕະສູດທີ ໓ ຈົບ**

## ໔. ເຈໂຕປະຣິຍະສູດ

### ວ່າດ້ວຍເຫດທີ່ເຮັດໃຫ້ໄດ້ເຈໂຕປະຣິຍະຍານ

[໙໑໒] ຜູ້ມີອາຍຸທັງຫຼາຍ ອັນໜຶ່ງ ຂ້ານ້ອຍກໍານົດຮູ້ໃຈຂອງສັດເຫຼົ່າອື່ນ ຂອງບຸກຄົນເຫຼົ່າອື່ນໄດ້ດ້ວຍໃຈ ຄື ຈິດມີຣາຄະກໍຮູ້ວ່າຈິດມີຣາຄະ ຯລຯ໒ ຈິດຍັງບໍ່ລຸດພົ້ນກໍຮູ້ວ່າຈິດຍັງບໍ່ລຸດພົ້ນ ກໍຍ້ອນສະຕິປັດຖານ ໔ ປະການນີ້ທີ່ຂ້າພະເຈົ້າຈະເລີນ ເຮັດໃຫ້ຫຼາຍແລ້ວ

**ເຈໂຕປະຣິຍະສູດທີ ໔ ຈົບ**

## ໕. ຖານະສູດ

### ວ່າດ້ວຍເຫດທີ່ເຮັດໃຫ້ຮູ້ແຈ້ງຖານະແລະອະຖານະ

[໙໑໓] ຜູ້ມີອາຍຸທັງຫຼາຍ ອັນໜຶ່ງ ຂ້ານ້ອຍຮູ້ແຈ້ງຖານະໂດຍເປັນຖານະ ແລະອະຖານະໂດຍເປັນອະຖານະຕາມຄວາມເປັນຈິງ ກໍຍ້ອນສະຕິປັດຖານ ໔ ປະການນີ້ທີ່ຂ້າພະເຈົ້າຈະເລີນເຮັດໃຫ້ຫຼາຍແລ້ວ

**ຖານະສູດທີ ໕ ຈົບ**

## ໖. ກໍາມະສະມາທານະສູດ

### ວ່າດ້ວຍເຫດທີ່ເຮັດໃຫ້ຮູ້ແຈ້ງວິບາກແຫ່ງການຍຶດຖືກໍາ

[໙໑໔] ຜູ້ມີອາຍຸທັງຫຼາຍ ອັນໜຶ່ງ ຂ້ານ້ອຍຮູ້ແຈ້ງວິບາກແຫ່ງການຍຶດຖືກໍາທັງທີ່ເປັນອະ

ດີດ ອະນາຄົດ ແລະ ປັດຈຸບັນໂດຍຖານະ ໂດຍເຫດຕາມຄວາມເປັນຈິງ ກໍຍ້ອນສະຕິປັດຖານ ໔ ປະການນີ້ທີ່ຂ້າພະເຈົ້າຈະເລີນ ເຮັດໃຫ້ຫຼາຍແລ້ວ

**ກຳມະສະມາທານະສູດທີ ໖ ຈົບ**

## ໗. ສັບພັດຖະຄາມີນີສູດ

### ວ່າດ້ວຍເຫດທີ່ເຮັດໃຫ້ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງພູມທັງປວງ

[໙໑໕] ຜູ້ມີອາຍຸທັງຫຼາຍ ອັນໜຶ່ງ ຂ້ານ້ອຍ ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງພູມທັງປວງຕາມຄວາມເປັນຈິງ ກໍຍ້ອນສະຕິປັດຖານ ໔ ປະການນີ້ທີ່ຂ້າພະເຈົ້າຈະເລີນ ເຮັດໃຫ້ຫຼາຍແລ້ວ

**ສັບພັດຖະຄາມີນີສູດທີ ໗ ຈົບ**

## ໘. ນານາທາຕຸສູດ

### ວ່າດ້ວຍເຫດທີ່ເຮັດໃຫ້ຮູ້ແຈ້ງໂລກທີ່ມີທາດແຕກຕ່າງກັນ

[໙໑໖] ຜູ້ມີອາຍຸທັງຫຼາຍ ອັນໜຶ່ງ ຂ້ານ້ອຍ ຮູ້ແຈ້ງໂລກທີ່ມີທາດຫຼາຍຊະນິດແລະມີທາດແຕກຕ່າງກັນຕາມຄວາມເປັນຈິງ ກໍຍ້ອນສະຕິປັດຖານ ໔ ປະການນີ້ທີ່ຂ້າພະເຈົ້າຈະເລີນ ເຮັດໃຫ້ຫຼາຍແລ້ວ

**ນານາທາຕຸສູດທີ ໘ ຈົບ**

## ໙. ນານາທິມຸດຕິສູດ

### ວ່າດ້ວຍເຫດທີ່ເຮັດໃຫ້ຮູ້ແຈ້ງໝູ່ສັດທີ່ມີອັດທະຍາໄສຕ່າງກັນ

[໙໑໗] ຜູ້ມີອາຍຸທັງຫຼາຍ ອັນໜຶ່ງ ຂ້ານ້ອຍຮູ້ແຈ້ງວ່າ ໝູ່ສັດມີອັດທະຍາໄສຕ່າງກັນຕາມຄວາມເປັນຈິງ ກໍຍ້ອນສະຕິປັດຖານ ໔ ປະການນີ້ທີ່ຂ້າພະເຈົ້າຈະເລີນ ເຮັດໃຫ້ຫຼາຍແລ້ວ

**ນານາທິມຸດຕິສູດທີ ໙ ຈົບ**

# ໑໐. ອິນທະຣິຍະປະໂຣປະຣິຍັດຕະສູດ

## ວ່າດ້ວຍເຫດທີ່ເຮັດໃຫ້ຮູ້ແຈ້ງຄວາມແກ່ອ່ອນແຫ່ງອິນຊີ

[໗໑໗] ຜູ້ມີອາຍຸທັງຫຼາຍ ອັນໜຶ່ງ ຂ້ານ້ອຍຮູ້ແຈ້ງວ່າ ສັດເຫຼົ່າອື່ນ ແລະບຸກຄົນເຫຼົ່າອື່ນ ມີອິນຊີແກ່ກ້າ ແລະອິນຊີອ່ອນຕາມຄວາມເປັນຈິງ ກໍຍ້ອນສະຕິປັດຖານ ໔ ປະການນີ້ທີ່ຂ້າພະເຈົ້າຈະເລີນ ເຮັດໃຫ້ຫຼາຍແລ້ວ

**ອິນທະຣິຍະປະໂຣປະຣິຍັດຕະສູດທີ ໑໐ ຈົບ**

# ໑໑. ຊານາທິສູດ

## ວ່າດ້ວຍເຫດທີ່ເຮັດໃຫ້ຮູ້ແຈ້ງຄວາມເສົ້າໝອງແຫ່ງຊານເປັນຕົ້ນ

[໗໑໘] ຜູ້ມີອາຍຸທັງຫຼາຍ ອັນໜຶ່ງ ຂ້ານ້ອຍຮູ້ແຈ້ງຄວາມເສົ້າໝອງ ຄວາມຜ່ອງແຜ້ວແຫ່ງຊານ ວິໂມກ ສະມາທິ ແລະສະມາບັດ ແລະການອອກຈາກຊານ ວິໂມກ ສະມາທິ ແລະສະມາບັດ ຕາມຄວາມເປັນຈິງ ກໍຍ້ອນສະຕິປັດຖານ ໔ ປະການນີ້ທີ່ຂ້າພະເຈົ້າຈະເລີນ ເຮັດໃຫ້ຫຼາຍແລ້ວ

**ຊານາທິສູດທີ ໑໑ ຈົບ**

# ໑໘. ປຸບເພນິວາສະສູດ

## ວ່າດ້ວຍເຫດທີ່ເຮັດໃຫ້ຣະນຶກຊາດກ່ອນໄດ້

[໗໔໐] ຜູ້ມີອາຍຸທັງຫຼາຍ ອັນໜຶ່ງ ຂ້ານ້ອຍຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ຊາດ ໑ ແດ່ ໔ ຊາດແດ່ ໗ລ໗ ຂ້ານ້ອຍ ຣະນຶກຊາດກ່ອນໄດ້ຫຼາຍຊາດພ້ອມທັງລັກສະນະທົ່ວໄປແລະ ຊີວະປະຫວັດແນວນີ້ ກໍຍ້ອນສະຕິປັດຖານ ໔ ປະການນີ້ທີ່ຂ້າພະເຈົ້າຈະເລີນ ເຮັດໃຫ້ຫຼາຍແລ້ວ

**ປຸບເພນິວາສະສູດທີ ໑໘ ຈົບ**

# ໑໓. ທິບພະຈັກຂຸສູດ

## ວ່າດ້ວຍເຫດທີ່ເຮັດໃຫ້ມີຕາທິບ

[໗໔໑] ຜູ້ມີອາຍຸທັງຫຼາຍ ອັນໜຶ່ງ ຂ້ານ້ອຍ ເຫັນໝູ່ສັດຜູ້ກຳລັງຈຸຕິ (ຕາຍ) ແລະກຳລັງອຸບັດ (ເກີດ) ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຯລຯ ຮູ້ສັດທັງຫຼາຍຜູ້ເປັນໄປຕາມອຳນາດກຳ ຯລຯ໔ ດ້ວຍຕາທິບອັນບໍລິສຸດເໜືອມະນຸດແນວນີ້ ກໍຍ້ອນສະຕິປັດຖານ ໔ ປະການນີ້ທີ່ຂ້ານ້ອຍຈະເລີນ ເຮັດໃຫ້ຫຼາຍແລ້ວ

**ທິບພະຈັກຂຸສູດທີ ໑໓ ຈົບ**

# ໑໔. ອາສະວັກຂະຍະສູດ

## ວ່າດ້ວຍເຫດທີ່ເຮັດໃຫ້ສິ້ນອາສະວະ

[໗໔໔] ຜູ້ມີອາຍຸທັງຫຼາຍ ອັນໜຶ່ງ ຂ້ານ້ອຍຮູ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ກໍຍ້ອນສະຕິປັດຖານ ໔ ປະການນີ້ທີ່ຂ້ານ້ອຍຈະເລີນ ເຮັດໃຫ້ຫຼາຍແລ້ວ

**ອາສະວັກຂະຍະສູດທີ ໑໔ ຈົບ**

**ທຸຕິຍະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ກັບປະສະຫັດສະສູດ | ໒. ອິດທິວິທະສູດ |
| ໓. ທິບພະໂສຕະສູດ | ໔. ເຈໂຕປະຣິຍະສູດ |
| ໕. ຖານະສູດ | ໖. ກຳມະສະມາທານະສູດ |
| ໗. ສັບພັດຖະຄາມິນີສູດ | ໘. ນານາທາຕຸສູດ |
| ໙. ນານາທິມຸດຕິສູດ | ໑໐. ອິນທະຣິຍະປະໂຣປະຣິຍັດຕະສູດ |
| ໑໑. ຊານາທິສູດ | ໑໒. ປຸບເພນິວາສະສູດ |
| ໑໓. ທິບພະຈັກຂຸສູດ | ໑໔. ອາສະວັກຂະຍະສູດ |

**ອະນຸຣຸດທະສັງຍຸດທີ ໘ ຈົບ**

# ໙. ຊານະສັງຍຸດ

## ໑. ຄັງຄາເປີຍຍາລະວັກ

### ໝວດວ່າດ້ວຍຄັງຄາເປີຍຍາລະ

## ໑-໑໘. ຊານາທິສູດ

### ວ່າດ້ວຍຊານເປັນຕົ້ນ

[໙໔໓-໙໖໔] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າ ໆລໆ ພິກຂຸທັງຫຼາຍ ຊານ ໔ ປະການນີ້ ຊານ ໔ ປະການ ອັນໃດແດ່? ຄື ພິກຂຸໃນທຳວິໄນນີ້

໑. ສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິແລະສຸກອັນເກີດຈາກວິເວກຢູ່
໒. ຍ້ອນວິຕົກວິຈານສະງົບລະງັບໄປ ບັນລຸທຸຕິຍະຊານມີຄວາມຜ່ອງໃສໃນພາຍໃນ ມີພາ ວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກບໍ່ມີວິຈານ ມີແຕ່ປີຕິ ແລະສຸກອັນເກີດ ຈາກສະມາທິຢູ່
໓. ຍ້ອນປີຕິຈາງຄາຍອອກ ມີອຸເປກຂາ ມີສະຕິ ມີສຳປະຊັນຍະ ສະເຫວີຍສຸກ ດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍ ສັນເສີນວ່າ ຜູ້ມີອຸ ເປກຂາ ມີສະຕິ ຢູ່ເປັນສຸກ
໔. ຍ້ອນລະສຸກ ແລະທຸກໄດ້ ຍ້ອນໂສມະນັດ ແລະໂທມະນັດດັບໄປກ່ອນແລ້ວ ບັນລຸຈະຕຸດຖະຊານ ທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດ ຍ້ອນອຸເປກຂາຢູ່

ຊານ ໔ ປະການນີ້

ພິກຂຸທັງຫຼາຍ ແມ່ນ້ຳຄົງຄາໄຫຼໄປສູ່ທິດປາຈີນ ບ່າໄປສູ່ທິດປາຈີນ ລົ້ນໄປສູ່ທິດປາຈີນ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອຈະເລີນຊານ ໔ ປະການ ເຮັດຊານ ໔ ປະການໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ພິກຂຸເມື່ອຈະເລີນຊານ ໔ ປະການ ເຮັດຊານ ໔ ປະການໃຫ້ຫຼາຍ ຍ່ອມນ້ອມໄປສູ່ນິບ ພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວໃດ

ຄື ພິກຂຸໃນທຳວິໄນນີ້

໑. ສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິແລະສຸກອັນເກີດຈາກວິເວກຢູ່

໒. ຍ້ອນວິຕົກວິຈານສະງົບລະງັບໄປ ບັນລຸທຸຕິຍະຊານມີຄວາມຜ່ອງໃສໃນພາຍໃນ ມີພາ ວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກບໍ່ມີວິຈານ ມີແຕ່ປີຕິ ແລະສຸກອັນເກີດ ຈາກສະມາທິຢູ່

໓. ຍ້ອນປີຕິຈາງຄາຍອອກ ມີອຸເປກຂາ ມີສະຕິ ມີສຳປະຊັນຍະ ສະເຫວີຍສຸກ ດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍ ສັນເສີນວ່າ ຜູ້ມີອຸ ເປກຂາ ມີສະຕິ ຢູ່ເປັນສຸກ

໔. ຍ້ອນລະສຸກ ແລະທຸກໄດ້ ຍ້ອນໂສມະນັດ ແລະໂທມະນັດດັບໄປກ່ອນແລ້ວ ບັນລຸຈະຕຸດຖະຊານ ທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດ ຍ້ອນອຸເປກຂາຢູ່

ພິກຂຸທັງຫຼາຍ ພິກຂຸເມື່ອຈະເລີນຊານ ໔ ປະການ ເຮັດຊານ ໔ ປະການໃຫ້ຫຼາຍ ຍ່ອມ ນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ ແນວນີ້ແລ

**ຊານາທິສູດທີ ໑-໑໒ ຈົບ**

**ຄັງຄາເປີຍຍາລະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ປະຖົມປາຈີນນິນນະສູດ
໒-໕. ທຸຕິຍາທິປາຈີນນິນນະສຸດຕະຈະຕຸກກະ
໖. ສັດຖະປາຈີນນິນນະສູດ
໗. ປະຖົມສະມຸດທະນິນນະສູດ
໘-໑໒. ທຸຕິຍາທິສະມຸດທະນິນນະສຸດຕະປັນຈະກະ

(ອັບປະມາທະວັກເພິ່ງໃຫ້ພິດສະດານ)

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ຕະຖາຄະຕະສູດ
໒. ປະທະສູດ
໓. ອາສະວະສູດ
໔. ມູລະສູດ
໕. ສາຣະສູດ
໖. ວັດສິກະສູດ
໗. ຣາຊາສູດ
໘. ຈັນທິມະສູດ
໙. ສຸຣິຍະສູດ
໑໐. ວັດຖະສູດ

(ພະລະກະຣະນີຍະວັກເພິ່ງໃຫ້ພິດສະດານ)

## ລວມພຣະສູດທີ່ມີໃນວັກນີ້ ຄື



(ເອສະນາວັກເພິ່ງໃຫ້ພິດສະດານ)

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໑. ໂອຄະວັກ

## ໝວດວ່າດ້ວຍໂອຄະ

# ໑-໑໐. ໂອຄາທິສູດ

## ວ່າດ້ວຍໂອຄະເປັນຕົ້ນ

[໙໒໔-໙໔໒] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອຸດທຳພາຄິຍະສັງໂຍດ ໕ ປະການນີ້

ອຸດທຳພາຄິຍະສັງໂຍດ ໕ ປະການ ອັນໃດແດ່ ຄື

໑. ຣູບປະຣາຄະ
໒. ມານະ
໓. ອະວິດຊາ
໔. ອະຣູບປະຣາຄະ
໕. ອຸດທັດຈະ

ອຸດທຳພາຄິຍະສັງໂຍດ ໕ ປະການນີ້

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນຊານ ໔ ປະການ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະອຸດທຳພາຄິຍະສັງໂຍດ ໕ ປະການນີ້

ຊານ ໔ ປະການ ອັນໃດແດ່

ຄື ພິກຂຸໃນທຳວິໄນນີ້

໑. ສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກວິຈານ ປີຕິແລະສຸກອັນເກີດຈາກວິເວກຢູ່

໒. ຍ້ອນວິຕົກວິຈານສະງົບລະງັບໄປ ບັນລຸທຸຕິຍະຊານມີຄວາມຜ່ອງໃສໃນພາຍໃນ ມີພາ ວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກບໍ່ມີວິຈານ ມີແຕ່ປີຕິ ແລະສຸກອັນເກີດຈາກສະມາທິຢູ່

໓. ຍ້ອນປີຕິຈາງຄາຍອອກ ມີອຸເປກຂາ ມີສະຕິ ມີສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍ ສັນເສີນວ່າ ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ

໔. ຍ້ອນລະສຸກ ແລະທຸກໄດ້ ຍ້ອນໂສມະນັດ ແລະໂທມະນັດດັບໄປກ່ອນແລ້ວ ບັນລຸຈະຕຸດຖະຊານ ທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດ ຍ້ອນອຸເປກຂາຢູ່

ພິກຂຸທັງຫຼາຍ ພິກຂຸເພິ່ງຈະເລີນຊານ ໔ ປະການນີ້ ເພື່ອຮູ້ຍິ່ງ ເພື່ອກຳນົດຮູ້ ເພື່ອຄວາມສິ້ນໄປ ເພື່ອລະອຸດທຳພາຄິຍະສັງໂຍດ ໕ ປະການນີ້

(ຂໍ້ຄວາມທີ່ເຫຼືອເພິ່ງໃຫ້ພິດສະດານແບບນີ້)

(ເພິ່ງເພີ່ມຂໍ້ຄວາມໃຫ້ພິດສະດານຄືມັກຄະສັງຍຸດ)

**ໂອຄະວັກທີ ໕ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ໂອຄະສູດ
໒. ໂຍຄະສູດ
໓. ອຸປາທານະສູດ
໔. ຄັນຖະສູດ
໕. ອະນຸສະຍະສູດ
໖. ກາມມະຄຸນສູດ
໗. ນີວະຣະນະສູດ
໘. ອຸປາທານັກຂັນທະສູດ
໙. ໂອຣຳພາຄິຍະສູດ
໑໐. ອຸດທຳພາຄິຍະສູດ

**ຊານະສັງຍຸດທີ ໗ ຈົບ**

# ໑໐. ອານາປານະສັງຍຸດ

## ໑. ເອກະທຳມະວັກ

### ໝວດວ່າດ້ວຍທຳອັນເປັນເອກ

## ໑. ເອກະທຳມະສູດ

### ວ່າດ້ວຍທຳອັນເປັນເອກ

[໙໗໗] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າ ໆລໆ ຈຶ່ງໄດ້ຕັດເລື້ອງນີ້ວ່າ ພິກຂຸທັງຫຼາຍ ທຳອັນເປັນເອກທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ມີຜົນຫຼາຍ ມີອານິສົງຫຼາຍ

ທຳອັນເປັນເອກ ຄືອັນໃດ?

ຄື ອານາປານະສະຕິ ອານາປານະສະຕິທີ່ພິກຂຸຈະເລີນແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງມີຜົນຫຼາຍ ມີອານິສົງຫຼາຍ

ຄື ພິກຂຸໃນທຳວິໄນນີ້ໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງກໍດີ ນັ່ງຄູ້ບັນລັງຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າ[໑] ມີສະຕິຫັນໃຈເຂົ້າ ມີສະຕິຫັນໃຈອອກ

### ອານາປານະສະຕິ ໑໖ ຂັ້ນ

໑. ເມື່ອຫັນໃຈເຂົ້າຍາວ ກໍຮູ້ແຈ້ງວ່າຫັນໃຈ ເຂົ້າຍາວ
ເມື່ອຫັນໃຈອອກຍາວ ກໍຮູ້ແຈ້ງວ່າຫັນໃຈ ອອກຍາວ
໒. ເມື່ອຫັນໃຈເຂົ້າສັ້ນ ກໍຮູ້ແຈ້ງວ່າຫັນໃຈ ເຂົ້າສັ້ນ
ເມື່ອຫັນໃຈອອກສັ້ນ ກໍຮູ້ແຈ້ງວ່າຫັນໃຈ ອອກສັ້ນ
໓. ໃສ່ໃຈວ່າ ຈະຮູ້ແຈ້ງກອງລົມທັງປວງ ຫັນໃຈເຂົ້າ
ໃສ່ໃຈວ່າ ຈະຮູ້ແຈ້ງກອງລົມທັງປວງ ຫັນໃຈອອກ
໔. ໃສ່ໃຈວ່າ ຈະລະງັບກາຍສັງຂານ ຫັນໃຈເຂົ້າ
ໃສ່ໃຈວ່າ ຈະລະງັບກາຍສັງຂານ ຫັນໃຈອອກ

໕. ໃສ່ໃຈວ່າ ຈະຮູ້ແຈ້ງປີຕິ ຫັນໃຈເຂົ້າ
ໃສ່ໃຈວ່າ ຈະຮູ້ແຈ້ງປີຕິ ຫັນໃຈອອກ
໖. ໃສ່ໃຈວ່າ ຈະຮູ້ແຈ້ງສຸກ ຫັນໃຈເຂົ້າ
ໃສ່ໃຈວ່າ ຈະຮູ້ແຈ້ງສຸກ ຫັນໃຈອອກ
໗. ໃສ່ໃຈວ່າ ຈະຮູ້ແຈ້ງຈິດຕະສັງຂານ ຫັນໃຈເຂົ້າ
ໃສ່ໃຈວ່າ ຈະຮູ້ແຈ້ງຈິດຕະສັງຂານ ຫັນໃຈອອກ
໘. ໃສ່ໃຈວ່າ ຈະລະງັບຈິດຕະສັງຂານ ຫັນໃຈເຂົ້າ
ໃສ່ໃຈວ່າ ຈະລະງັບຈິດຕະສັງຂານ ຫັນໃຈອອກ
໙. ໃສ່ໃຈວ່າ ຈະຮູ້ແຈ້ງຈິດ ຫັນໃຈເຂົ້າ
ໃສ່ໃຈວ່າ ຈະຮູ້ແຈ້ງຈິດ ຫັນໃຈອອກ
໑໐. ໃສ່ໃຈວ່າ ຈະຍັງຈິດໃຫ້ບັນເທີງ ຫັນໃຈເຂົ້າ
ໃສ່ໃຈວ່າ ຈະຍັງຈິດໃຫ້ບັນເທີງ ຫັນໃຈອອກ
໑໑. ໃສ່ໃຈວ່າ ຈະຕັ້ງຈິດໝັ້ນ ຫັນໃຈເຂົ້າ
ໃສ່ໃຈວ່າ ຈະຕັ້ງຈິດໝັ້ນ ຫັນໃຈອອກ
໑໒. ໃສ່ໃຈວ່າ ຈະປົດຈິດ ຫັນໃຈເຂົ້າ
ໃສ່ໃຈວ່າ ຈະປົດຈິດ ຫັນໃຈອອກ
໑໓. ໃສ່ໃຈວ່າ ຈະພິຈາລະນາເຫັນວ່າບໍ່ທ່ຽງ ຫັນໃຈເຂົ້າ
ໃສ່ໃຈວ່າ ຈະພິຈາລະນາເຫັນວ່າບໍ່ທ່ຽງ ຫັນໃຈອອກ
໑໔. ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມຄາຍອອກໄດ້ ຫັນໃຈເຂົ້າ
ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມຄາຍອອກໄດ້ ຫັນໃຈອອກ
໑໕. ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມດັບໄປ ຫັນໃຈເຂົ້າ
ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມດັບໄປ ຫັນໃຈອອກ
໑໖. ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມສະລະຄືນ ຫັນໃຈເຂົ້າ
ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມສະລະຄືນ ຫັນໃຈອອກ

ພິກຂຸທັງຫຼາຍ ອານາປານະສະຕິທີ່ບຸກຄົນຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ຈຶ່ງມີຜົນຫຼາຍ ມີອານິສົງຫຼາຍ

**ເອກະທຳມະສູດທີ ໑ ຈົບ**

# ໘. ໂພດຊັງຄະສູດ

## ວ່າດ້ວຍການຈະເລີນໂພດຊົງ

[໔໗໘] ພິກຂຸທັງຫຼາຍ ອານາປານະສະຕິທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ມີຜົນຫຼາຍ ມີອານິສົງຫຼາຍ

ອານາປານະສະຕິທີ່ພິກຂຸຈະເລີນແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງມີຜົນຫຼາຍ ມີອານິສົງຫຼາຍ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງທີ່ປະກອບດ້ວຍອານາປານະສະຕິ ອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

໒. ຈະເລີນທຳມະວິຈະຍະສຳໂພດຊົງທີ່ປະກອບດ້ວຍອານາປານະສະຕິ ຯລຯ

໗. ຈະເລີນອຸເປກຂາສຳໂພດຊົງທີ່ປະກອບດ້ວຍອານາປານະສະຕິ ອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ອານາປານະສະຕິທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ຈຶ່ງມີຜົນຫຼາຍ ມີອານິສົງຫຼາຍ

**ໂພດຊັງຄະສູດທີ ໘ ຈົບ**

# ໙. ສຸດທິກະສູດ

## ວ່າດ້ວຍອານາປານະສະຕິລ້ວນ

[໔໗໙] ພິກຂຸທັງຫຼາຍ ອານາປານະສະຕິທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ມີຜົນຫຼາຍ ມີອານິສົງຫຼາຍ

ອານາປານະສະຕິທີ່ພິກຂຸຈະເລີນແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງມີຜົນຫຼາຍ ມີອານິສົງຫຼາຍ

ຄື ພິກຂຸໃນທຳວິໄນນີ້ໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງກໍດີ ນັ່ງຄູ້ບັນລັງ ຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າ ທ່ານມີສະຕິຫັນໃຈເຂົ້າ ມີສະຕິຫັນໃຈອອກ ຯລຯ ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມສະລະຄືນ ຫັນໃຈເຂົ້າ ໃສ່ໃຈວ່າຈະພິຈາລະນາເຫັນຄວາມສະລະຄືນ ຫັນໃຈອອກ

ພິກຂຸທັງຫຼາຍ ອານາປານະສະຕິທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ຈຶ່ງມີຜົນຫຼາຍ ມີອານິສົງຫຼາຍ

**ສຸດທີກະສູດທີ ໖ ຈົບ**

# ໔. ປະຖົມຜະລະສູດ

## ວ່າດ້ວຍຜົນແຫ່ງການຈະເລີນອານາປານະສະຕິ ສູດທີ ໑

[໙໓໐] ພິກຂຸທັງຫຼາຍ ອານາປານະສະຕິທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ມີຜົນຫຼາຍ ມີອານິສົງຫຼາຍ

ອານາປານະສະຕິທີ່ພິກຂຸຈະເລີນແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງມີຜົນຫຼາຍ ມີອານິສົງຫຼາຍ

ຄື ພິກຂຸໃນທຳວິໄນນີ້ ໄປສູ່ປ່າກໍດີໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງກໍດີ ນັ່ງຄູ້ບັນລັງ ຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າ ທ່ານມີສະຕິຫັນໃຈເຂົ້າ ມີສະຕິຫັນໃຈອອກ ຯລຯ ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມສະລະຄືນ ຫັນໃຈເຂົ້າ ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມສະລະຄືນ ຫັນໃຈອອກ

ອານາປານະສະຕິທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ຈຶ່ງມີຜົນຫຼາຍ ມີອານິສົງຫຼາຍ

ພິກຂຸທັງຫຼາຍ ເມື່ອອານາປານະສະຕິທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ເພິ່ງຫວັງຜົນ ໑ ແນວ ໃນ ໒ ແນວ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼື ເມື່ອຍັງມີອຸປາທານເຫຼືອຢູ່ ກໍຈັກເປັນພຣະອະນາຄາມີ

**ປະຖົມຜະລະສູດທີ ໔ ຈົບ**

# ໕. ທຸຕິຍະຜະລະສູດ

## ວ່າດ້ວຍຜົນແຫ່ງການຈະເລີນອານາປານະສະຕິ ສູດທີ ໒

[໙໓໑] ພິກຂຸທັງຫຼາຍ ອານາປານະສະຕິທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ມີຜົນຫຼາຍ ມີອານິສົງຫຼາຍ

ອານາປານະສະຕິທີ່ພິກຂຸຈະເລີນແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງມີຜົນຫຼາຍ ມີອານິສົງຫຼາຍ

ຄື ພິກຂຸໃນທຳວິໄນນີ້ໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງກໍດີ ນັ່ງຄູ້ບັນລັງ ຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າ ທ່ານມີສະຕິຫັນໃຈເຂົ້າ ມີສະຕິຫັນໃຈອອກ ຯລຯ ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມສະລະຄືນ ຫັນໃຈເຂົ້າ ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມສະລະຄືນ ຫັນໃຈອອກ

ພິກຂຸທັງຫຼາຍ ອານາປານະສະຕິທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ຈຶ່ງມີຜົນຫຼາຍ ມີອານິສົງຫຼາຍ

ພິກຂຸທັງຫຼາຍ ເມື່ອອານາປານະສະຕິທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ພິກຂຸເພິ່ງຫວັງຜະລານິສົງ ໗ ປະການ

ຜະລານິສົງ ໗ ປະການ ອັນໃດແດ່ ຄື

໑. ຈະໄດ້ບັນລຸອະຣະຫັດຕະຜົນທັນທີໃນປັດຈຸບັນ
໒. ຫາກປັດຈຸບັນບໍ່ໄດ້ບັນລຸ ກໍຈະໄດ້ບັນລຸໃນເວລາໃກ້ຕາຍ
໓. ຫາກປັດຈຸບັນ ແລະໃນເວລາໃກ້ຕາຍຍັງບໍ່ໄດ້ບັນລຸ ກໍຈະໄດ້ເປັນພຣະອະນາຄາມີຜູ້ອັນຕະຣາປະຣິນິບພາຍີ
໔. ຯລຯ ກໍຈະໄດ້ເປັນພຣະອະນາຄາມີ ຜູ້ອຸປະຫັດຈະປະຣິນິບພາຍີ
໕. ຯລຯ ກໍຈະໄດ້ເປັນພຣະອະນາຄາມີ ຜູ້ອະສັງຂາຣະປະຣິນິບພາຍີ
໖. ຯລຯ ກໍຈະໄດ້ເປັນພຣະອະນາຄາມີ ຜູ້ສະສັງຂາຣະປະຣິນິບພາຍີ
໗. ຯລຯ ກໍຈະໄດ້ເປັນພຣະອະນາຄາມີ ຜູ້ອຸດທັງໂສໂຕອະກະນິດຖະຄາມີ ຍ້ອນອຸທະທຳພາຄິຍະສັງໂຍດ ໕ ປະການສິ້ນໄປ

ພິກຂຸທັງຫຼາຍ ເມື່ອອານາປານະສະຕິທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ພິກຂຸເພິ່ງຫວັງຜະລານິສົງ ໗ ປະການນີ້

**ທຸຕິຍະຜະລະສູດທີ ໕ ຈົບ**

# ໖. ອະຣິດຖະສູດ

## ວ່າດ້ວຍພຣະອະຣິດຖະ

[໙໘໔] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າ ຯລຯ ໄດ້ຕັດຖາມພິກຂຸທັງຫຼາຍດັ່ງນີ້ວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍຍັງຈະເລີນອານາປານະສະຕິຢູ່ບໍ ເມື່ອພຣະຜູ້ມີພຣະພາດຕັດຖາມແນວນີ້ແລ້ວ ທ່ານພຣະອະຣິດຖະໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າພຣະອົງຍັງຈະເລີນອານາປານະສະຕິຢູ່ ຂ້ານ້ອຍ

ອະຣິດຖະ ທ່ານຈະເລີນອານາປານະສະຕິແນວໃດ?

ຂ້າແດ່ ພຣະອົງຜູ້ຈະເລີນ ກາມສັນທະໃນກາມທັງຫຼາຍທີ່ລ່ວງໄປແລ້ວ ຂ້າພຣະອົງ ກໍລະໄດ້ແລ້ວ ກາມສັນທະໃນກາມທັງຫຼາຍ ທີ່ຍັງບໍ່ມາເຖິງຂອງຂ້າພຣະອົງກໍຫາຍໄປແລ້ວ ປະຕິຄະສັນຍາໃນທຳທັງຫຼາຍທັງພາຍໃນທັງພາຍນອກ ຂ້າພຣະອົງກໍກຳຈັດແລ້ວ ຂ້າພຣະອົງມີສະຕິຫັນໃຈເຂົ້າ ມີສະຕິຫັນໃຈອອກ ຂ້າພຣະອົງຈະເລີນອານາປານະສະຕິຢູ່ແນວນີ້ ຂ້ານ້ອຍ

ອະຣິດຖະ ອານາປານະສະຕິນັ້ນມີຢູ່ ເຮົາບໍ່ກ່າວວ່າບໍ່ມີ ແຕ່ວ່າອານາປານະສະຕິຈະເຮັດໃຫ້ບໍລິບູນໄດ້ໂດຍພິດສະດານດ້ວຍວິທີໃດ ທ່ານຈົ່ງຕັ້ງໃຈຟັງວິທີນັ້ນໃຫ້ດີ ເຮົາຈັກກ່າວ

ທ່ານພຣະອະຣິດຖະທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດດັ່ງນີ້ ວ່າ ອະຣິດຖະ ອານາປານະສະຕິຈະເຮັດໃຫ້ບໍລິບູນໄດ້ໂດຍພິດສະດານ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງກໍດີ ນັ່ງຄູ້ບັນລັງຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າ ທ່ານມີສະຕິຫັນໃຈເຂົ້າ ມີສະຕິຫັນໃຈອອກ ເມື່ອຫັນໃຈເຂົ້າຍາວກໍຮູ້ແຈ້ງວ່າຫັນໃຈເຂົ້າຍາວ ຯລຯ ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມສະລະຄືນຫັນໃຈເຂົ້າ ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມສະລະຄືນ ຫັນໃຈອອກ

ອະຣິດຖະ ອານາປານະສະຕິຈະເຮັດໃຫ້ບໍລິບູນໄດ້ໂດຍພິດສະດານ ເປັນແນວນີ້ແລ

**ອະຣິດຖະສູດທີ ໖ ຈົບ**

# ໗. ມະຫາກັບປິນະສູດ

## ວ່າດ້ວຍພຣະມະຫາກັບປິນະ

[໙໘໖] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ສະໄໝນັ້ນ ທ່ານພຣະມະຫາກັບປິນະນັ່ງຄູ້ບັນລັງ ຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າໃນທີ່ບໍ່ໄກຈາກພຣະຜູ້ມີພຣະພາກເຈົ້າ ພຣະຜູ້ມີພຣະພາກເຈົ້າໄດ້ທອດພຣະເນດເຫັນທ່ານພຣະມະຫາກັບປິນະນັ່ງຄູ້ບັນລັງ ຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າ ໃນທີ່ບໍ່ໄກ ແລ້ວຮັບສັ່ງ ຮຽກພິກຂຸທັງຫຼາຍມາຕັດຖາມວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍ ເຫັນກາຍຂອງພິກຂຸນັ້ນໄຫວຫຼືເອນອຽງບໍ?

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ເວລາໃດຂ້າພຣະອົງທັງຫຼາຍ ເຫັນທ່ານຜູ້ມີອາຍຸນັ້ນ ນັ່ງໃນທ່າມກາງສົງ ຫຼື ນັ່ງໃນບ່ອນສະງັດຕາມລຳພັງ ເວລານັ້ນ ຂ້າພຣະອົງທັງຫຼາຍບໍ່ເຫັນກາຍຂອງທ່ານຜູ້ມີອາຍຸນັ້ນໄຫວ ຫຼື ເອນອຽງເລີຍ

ພິກຂຸທັງຫຼາຍ ການທີ່ກາຍບໍ່ໄຫວຫຼືເອນອຽງ ຫຼື ການທີ່ຈິດບໍ່ໄຫວຫຼືດີ້ນຮົນ ຍ້ອນສະມາທິໃດທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ສະມາທິນັ້ນພິກຂຸນັ້ນໄດ້ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ

ການທີ່ກາຍບໍ່ໄຫວຫຼືເອນອຽງ ຫຼື ການທີ່ຈິດບໍ່ໄຫວຫຼືດີ້ນຮົນ ຍ້ອນສະມາທິແນວໃດທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ຄື ການທີ່ກາຍບໍ່ໄຫວຫຼືເອນອຽງ ຫຼື ການທີ່ຈິດບໍ່ໄຫວຫຼືດີ້ນຮົນ ຍ້ອນອານາປານະສະຕິສະມາທິທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ

ເມື່ອອານາປານະສະຕິສະມາທິທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ການທີ່ກາຍບໍ່ໄຫວຫຼືເອນອຽງ ຫຼືການທີ່ຈິດບໍ່ໄຫວຫຼືດີ້ນຮົນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງກໍດີ ນັ່ງຄູ້ບັນລັງ ຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າ ທ່ານມີສະຕິຫັນໃຈເຂົ້າ ມີສະຕິຫັນໃຈອອກ ฯລฯ ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມສະລະຄືນ ຫັນໃຈເຂົ້າ ໃສ່ໃຈວ່າຈະພິຈາລະນາເຫັນຄວາມສະລະຄືນ ຫັນໃຈອອກ

ພິກຂຸທັງຫຼາຍ ເມື່ອອານາປານະສະຕິສະມາທິທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ການທີ່ກາຍບໍ່ໄຫວຫຼືເອນອຽງ ຫຼື ການທີ່ຈິດບໍ່ໄຫວຫຼືດີ້ນຮົນ ເປັນແນວນີ້ແລ

**ມະຫາກັບປິນະສູດທີ ໗ ຈົບ**

## ໘. ປະທີໂປປະມະສູດ
## ວ່າດ້ວຍອຸປະມາດ້ວຍປະທີບ

[໙໘໔] ພິກຂຸທັງຫຼາຍ ອານາປານະສະຕິສະມາທິທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ມີຜົນຫຼາຍ ມີອານິສົງຫຼາຍ

ອານາປານະສະຕິສະມາທິທີ່ພິກຂຸຈະເລີນແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງມີຜົນຫຼາຍ ມີອານິສົງຫຼາຍ

ຄື ພິກຂຸໃນທຳວິໄນນີ້ໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງກໍດີ ນັ່ງຄູ້ບັນລັງ ຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າ ທ່ານມີສະຕິຫັນໃຈເຂົ້າ ມີສະຕິຫັນໃຈອອກ ເມື່ອຫັນໃຈເຂົ້າຍາວ ກໍຮູ້ແຈ້ງວ່າຫັນໃຈເຂົ້າຍາວ ฯລฯ ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມສະລະຄືນ ຫັນໃຈເຂົ້າ ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມສະລະຄືນ ຫັນໃຈອອກ

ພິກຂຸທັງຫຼາຍ ອານາປານະສະຕິສະມາທິທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ຈຶ່ງມີຜົນຫຼາຍ ມີອານິສົງຫຼາຍ

ພິກຂຸທັງຫຼາຍ ໄດ້ຂ່າວວ່າ ແຕ່ກ່ອນເຮົາເປັນໂພທິສັດ ຍັງບໍ່ໄດ້ຕັດສະຣູ້ ສ່ວນຫຼາຍກໍຢູ່ດ້ວຍວິຫານທຳ (ທຳເປັນເຄື່ອງຢູ່) ນີ້ ເມື່ອເຮົາຢູ່ດ້ວຍວິຫານທຳນີ້ ກາຍກໍບໍ່ລຳບາກ ຈັກຂຸກໍບໍ່ລຳບາກ ແລະຈິດຂອງເຮົາກໍລຸດພົ້ນຈາກອາສະວະທັງຫຼາຍຍ້ອນບໍ່ຖືໝັ້ນ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ຫາກພິກຂຸໃນທຳວິໄນນີ້ເພິ່ງຫວັງວ່າ ແມ່ນກາຍຂອງເຮົາບໍ່ເພິ່ງລຳບາກ ຈັກຂຸຂອງເຮົາບໍ່ເພິ່ງລຳບາກ ແລະຈິດຂອງເຮົາເພິ່ງລຸດພົ້ນຈາກອາສະວະທັງຫຼາຍຍ້ອນບໍ່ຖືໝັ້ນ ກໍເພິ່ງມະນະສິການອານາປານະສະຕິສະມາທິນີ້ແລໃຫ້ດີ

ຫາກພິກຂຸໃນທຳວິໄນນີ້ເພິ່ງຫວັງວ່າ ເຮົາເພິ່ງລະຄວາມຄຶດເຖິງ ແລະຄວາມດຳຣິອັນອາໄສເຮືອນ ກໍເພິ່ງມະນະສິການອານາປານະສະຕິສະມາທິນີ້ແລໃຫ້ດີ

ຫາກພິກຂຸໃນທຳວິໄນນີ້ເພິ່ງຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ວ່າປະຕິກູນໃນສິ່ງບໍ່ປະຕິກູນຢູ່ ກໍເພິ່ງມະນະສິການອານາປານະສະຕິສະມາທິນີ້ແລໃຫ້ດີ

ຫາກພິກຂຸໃນທຳວິໄນນີ້ເພິ່ງຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ວ່າບໍ່ປະຕິກູນໃນສິ່ງປະຕິກູນຢູ່ ກໍເພິ່ງມະນະສິການອານາປານະສະຕິສະມາທິນີ້ແລໃຫ້ດີ

ຫາກພິກຂຸໃນທຳວິໄນນີ້ເພິ່ງຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ວ່າປະຕິກູນໃນສິ່ງບໍ່ປະຕິກູນແລະສິ່ງປະຕິກູນຢູ່ ກໍເພິ່ງມະນະສິການອານາປານະສະຕິສະມາທິນີ້ແລໃຫ້ດີ

ຫາກພິກຂຸໃນທຳວິໄນນີ້ເພິ່ງຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ວ່າບໍ່ປະຕິກູນໃນສິ່ງປະຕິກູນແລະສິ່ງບໍ່ປະຕິກູນຢູ່ ກໍເພິ່ງມະນະສິການອານາປານະສະຕິນີ້ແລໃຫ້ດີ

ຫາກພິກຂຸໃນທຳວິໄນນີ້ເພິ່ງຫວັງວ່າ ເຮົາເພິ່ງເວັ້ນທັງ ໒ ນັ້ນ ຄື ສິ່ງບໍ່ປະຕິກູນແລະສິ່ງປະຕິກູນແລ້ວເປັນຜູ້ມີອຸເປກຂາ ມີສະຕິ ມີສຳປະຊັນຍະຢູ່ ກໍເພິ່ງມະນະສິການອານາປານະສະຕິສະມາທິນີ້ແລໃຫ້ດີ

ຫາກພິກຂຸໃນທຳວິໄນນີ້ເພິ່ງຫວັງວ່າ ເຮົາເພິ່ງສະຫງັດຈາກກາມແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິແລະສຸກອັນເກີດຈາກວິເວກຢູ່ ກໍເພິ່ງມະນະສິການອານາປານະສະຕິສະມາທິນີ້ແລໃຫ້ດີ

ຫາກພິກຂຸໃນທຳວິໄນນີ້ເພິ່ງຫວັງວ່າ ຍ້ອນວິຕົກວິຈານສະງົບລະງັບໄປ ເຮົາເພິ່ງບັນລຸທຸຕິຍະຊານທີ່ມີຄວາມຜ່ອງໃສໃນພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກ ບໍ່ມີວິຈານ ມີແຕ່ປີຕິແລະສຸກອັນເກີດຈາກສະມາທິຢູ່ ກໍເພິ່ງມະນະສິການອານາປານະສະຕິສະມາທິນີ້ແລໃຫ້ດີ

ຫາກພິກຂຸໃນທຳວິໄນນີ້ເພິ່ງຫວັງວ່າ ຍ້ອນປີຕິຈາງຄາຍອອກ ເຮົາເພິ່ງມີອຸເປກຂາ ມີສະຕິ ມີສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍສັນເສີນວ່າ ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ ກໍເພິ່ງມະນະສິການອານາປານະສະຕິສະມາທິນີ້ແລໃຫ້ດີ

ຫາກພິກຂຸໃນທຳວິໄນນີ້ເພິ່ງຫວັງວ່າ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ເຮົາເພິ່ງບັນລຸຈະຕຸດຖະຊານທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ກໍເພິ່ງມະນະສິການອານາປານະສະຕິສະມາທິນີ້ແລໃຫ້ດີ

ຫາກພິກຂຸໃນທຳວິໄນນີ້ເພິ່ງຫວັງວ່າ ເຮົາເພິ່ງບັນລຸອາກາສານັນຈາຍະຕະນະຊານໂດຍກຳນົດວ່າ ອາກາດຫາບ່ອນສຸດບໍ່ໄດ້ ຍ້ອນລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາໂດຍປະການທັງປວງ ກໍເພິ່ງມະນະສິການອານາປານະສະຕິສະມາທິນີ້ແລໃຫ້ດີ

ຫາກພິກຂຸໃນທຳວິໄນນີ້ເພິ່ງຫວັງວ່າ ເຮົາເພິ່ງລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະຊານໂດຍກຳນົດວ່າ ວິນຍານຫາບ່ອນສຸດບໍ່ໄດ້ ກໍເພິ່ງມະນະສິການອານາປານະສະຕິສະມາທິນີ້ແລໃຫ້ດີ

ຫາກພິກຂຸໃນທຳວິໄນນີ້ເພິ່ງຫວັງວ່າ ເຮົາເພິ່ງລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸອາກິນຈັນຍາຍະຕະນະຊານໂດຍກຳນົດວ່າ ບໍ່ມີອັນໃດ ກໍເພິ່ງມະນະສິການອານາປານະສະຕິສະມາທິນີ້ແລໃຫ້ດີ

ຫາກພິກຂຸໃນທຳວິໄນນີ້ເພິ່ງຫວັງວ່າ ເຮົາເພິ່ງລ່ວງອາກິນຈັນຍາຍະຕະນະຊານໂດຍປະການທັງປວງ ບັນລຸເນວະສັນຍານາສັນຍາຍະຕະນະຊານ ກໍເພິ່ງມະນະສິການອານາປານະສະຕິສະມາທິນີ້ແລໃຫ້ດີ

ຫາກພິກຂຸໃນທຳວິໄນນີ້ເພິ່ງຫວັງວ່າ ເຮົາເພິ່ງລ່ວງເນວະສັນຍານາສັນຍາຍະຕະນະຊານໂດຍປະການທັງປວງ ບັນລຸສັນຍາເວທະຍິຕະນິໂຣດ (ສະມາບັດທີ່ດັບສັນຍາແລະເວທະນາ) ກໍເພິ່ງ ມະນະສິການອານາປານະສະຕິສະມາທິນີ້ແລໃຫ້ດີ

ພິກຂຸທັງຫຼາຍ ເມື່ອອານາປານະສະຕິສະມາທິທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ຖ້າທ່ານສະເຫວີຍສຸກຂະເວທະນາ ກໍຮູ້ແຈ້ງວ່າ ສຸກຂະເວທະນານັ້ນບໍ່ທ່ຽງ ຮູ້ແຈ້ງວ່າ ບໍ່ໜ້າມົກມຸ້ນ ຮູ້ແຈ້ງວ່າ ບໍ່ໜ້າເພີດເພີນ

ຖ້າທ່ານສະເຫວີຍທຸກຂະເວທະນາ ກໍຮູ້ແຈ້ງວ່າ ທຸກຂະເວທະນານັ້ນບໍ່ທ່ຽງ ຮູ້ແຈ້ງວ່າ ບໍ່ໜ້າໝົກມຸ້ນ ຮູ້ແຈ້ງວ່າ ບໍ່ໜ້າເພີດເພີນ

ຖ້າທ່ານສະເຫວີຍອະທຸກຂະມະສຸກຂະເວທະນາ ກໍຮູ້ແຈ້ງວ່າ ອະທຸກຂະມະສຸກຂະເວທະນານັ້ນບໍ່ທ່ຽງ ຮູ້ແຈ້ງວ່າ ບໍ່ໜ້າມົກມຸ້ນ ຮູ້ແຈ້ງວ່າ ບໍ່ໜ້າເພີດເພີນ

ຖ້າທ່ານສະເຫວີຍສຸກຂະເວທະນາ ກໍເປັນຜູ້ປາສະຈາກ (ກິເລດ) ສະເຫວີຍສຸກຂະເວທະນານັ້ນ ຖ້າທ່ານສະເຫວີຍທຸກຂະເວທະນາ ກໍເປັນຜູ້ປາສະຈາກ (ກິເລດ) ສະເຫວີຍທຸກຂະເວທະນານັ້ນ ຖ້າທ່ານສະເຫວີຍອະທຸກຂົມສຸກຂະເວທະນາ ກໍເປັນຜູ້ປາສະຈາກ (ກິເລດ)ສະເຫວີຍອະທຸກຂະມະສຸກຂະເວທະນານັ້ນ

ທ່ານເມື່ອສະເຫວີຍເວທະນາມີກາຍເປັນບ່ອນສຸດ ກໍຮູ້ແຈ້ງວ່າ ເຮົາສະເຫວີຍເວທະນາມີກາຍເປັນບ່ອນສຸດ ເມື່ອສະເຫວີຍເວທະນາມີຊີວິດເປັນບ່ອນສຸດ ກໍຮູ້ແຈ້ງວ່າ ເຮົາສະເຫວີຍເວທະນາມີຊີວິດເປັນບ່ອນສຸດ ຫຼັງຈາກຕາຍໄປ ກໍຮູ້ແຈ້ງວ່າ ເວທະນາທັງປວງບໍ່ໜ້າເພີດເພີນ ຈັກເຢັນໃນໂລກນີ້ຢ່າງແນ່ນອນ

ພິກຂຸທັງຫຼາຍ ຍ້ອນອາໄສນ້ຳມັນແລະໄສ້ ຕະກຽງນ້ຳມັນຈຶ່ງຕິດຢູ່ໄດ້ ຍ້ອນສິ້ນນ້ຳມັນແລະໄສ້ ຕະກຽງນ້ຳມັນກໍໝົດເຊື້ອດັບໄປ ແມ່ນສັນໃດ ພິກຂຸກໍຄືກັນສັນນັ້ນ ເມື່ອສະເຫວີຍເວທະນາມີກາຍເປັນບ່ອນສຸດ ກໍຮູ້ແຈ້ງວ່າ ເຮົາສະເຫວີຍເວທະນາມີກາຍເປັນບ່ອນສຸດ ເມື່ອສະເຫວີຍເວທະນາມີຊີວິດເປັນບ່ອນສຸດ ກໍຮູ້ແຈ້ງວ່າ ເຮົາສະເຫວີຍເວທະນາມີຊີວິດເປັນບ່ອນສຸດ ກໍຮູ້ແຈ້ງວ່າ ເວທະນາທັງປວງບໍ່ໜ້າເພີດເພີນ ຈັກເຢັນໃນໂລກນີ້ຢ່າງແນ່ນອນ

**ປະທິໂປປະມະສູດທີ ໗ ຈົບ**

# ໘. ເວສາລີສູດ

## ວ່າດ້ວຍພຣະທຳເທດສະໜາທີ່ເມືອງເວສາລີ

[໘໗໕] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ກູຕາຄາຣະສາລາ ປ່າມະຫາວັນ ເຂດເມືອງເວສາລີ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຕັດສອນອະສຸພະກຳມັດຖານ ຊົງພັນນາຄຸນແຫ່ງ ອະສຸພະກຳມັດຖານ ຕັດສັນເສີນການຈະເລີນອະສຸພະກຳມັດຖານແກ່ພິກຂຸທັງຫຼາຍ ໂດຍປະການຕ່າງ ໆ

ຕໍ່ມາ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ເຮົາປາຖະໜາຈະຫຼີບຫຼີກຢູ່ຜູ້ດຽວຈັກເຄິ່ງເດືອນ ໃຜ ໆ ຢ່າເຂົ້າໄປຫາເຮົາ ຍົກເວັ້ນພິກຂຸຜູ້ນຳອາຫານ

ບິນທະບາດເຂົ້າໄປໃຫ້ອີງດຽວ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ໃນເຄິ່ງເດືອນນີ້ຈຶ່ງບໍ່ມີໃຜ ໆ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຍົກເວັ້ນພິກຂຸຜູ້ນຳອາຫານບິນທະບາດເຂົ້າໄປຖວາຍອີງດຽວ

ລຳດັບນັ້ນ ພິກຂຸເຫຼົ່ານັ້ນສົນທະນາກັນວ່າ ພຣະຜູ້ມີພຣະພາກເຈົ້າຕັດສອນອະສຸພະກຳມັດຖານ ຊົງພັນນາຄຸນແຫ່ງອະສຸພະກຳມັດຖານ ຕັດສັນເສີນການຈະເລີນອະສຸພະກຳມັດຖານ ໂດຍປະການຕ່າງ ໆ ແລ້ວພາກັນປະກອບຄວາມພຽນໃນການຈະເລີນອະສຸພະກຳມັດຖານຫຼາຍປະການກະທັ່ງເກີດຄວາມຮູ້ສຶກອຶດອັດ ເບື່ອໜ່າຍ ລັງກຽດຮ່າງກາຍຂອງຕົນ ຈຶ່ງພາກັນສະແຫວງຫາອາວຸດສຳລັບຂ້າໂຕຕາຍ ມື້ດຽວພິກຂຸກໍນຳອາວຸດມາຂ້າໂຕຕາຍ ໑໐ ອົງແດ່ ໗໐໗ ໓໐ ອົງແດ່

ເມື່ອເຄິ່ງເດືອນຜ່ານໄປ ພຣະຜູ້ມີພຣະພາກເຈົ້າກໍສະເດັດອອກຈາກບ່ອນຫຼີກຫຼີກ ຮັບສັ່ງຮຽກທ່ານພຣະອານົນມາຕັດຖາມວ່າ ອານົນ ເປັນຫຍັງ? ພິກຂຸສົງຈຶ່ງເບິ່ງຄືວ່າໜ້ອຍລົງຫຼາຍ

ທ່ານພຣະອານົນທູນຕອບວ່າ ຈິງ ຂ້ານ້ອຍ ພິກຂຸທັງຫຼາຍສົນທະນາກັນວ່າ ພຣະຜູ້ມີພຣະພາກເຈົ້າຕັດສອນອະສຸພະກຳມັດຖານ ຊົງພັນນາຄຸນແຫ່ງອະສຸພະກຳມັດຖານ ຕັດສັນເສີນການຈະເລີນອະສຸພະກຳມັດຖານໂດຍປະການຕ່າງ ໆ ແລ້ວພາກັນປະກອບຄວາມພຽນໃນການຈະເລີນອະສຸພະກຳມັດຖານຫຼາຍປະການ ກະທັ່ງເກີດຄວາມຮູ້ສຶກອຶດອັດເບື່ອໜ່າຍ ລັງກຽດຮ່າງກາຍຂອງຕົນ ຈຶ່ງພາກັນສະແຫວງຫາອາວຸດສຳລັບຂ້າໂຕຕາຍ ມື້ດຽວ ພິກຂຸກໍນຳອາວຸດມາຂ້າໂຕຕາຍ ໑໐ ອົງແດ່ ໗໐໗ ໓໐ ອົງແດ່ ຂໍປະທານພຣະວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດຕັດບອກວິທີອື່ນທີ່ພິກຂຸສົງນີ້ຈະເພິ່ງດຳລົງຢູ່ໃນອະຣະຫັດຕະຜົນເທີ້ນ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ອານົນ ຖ້າເຊັ່ນນັ້ນ ທ່ານຈົ່ງບອກໃຫ້ພິກຂຸທໍ່ທີ່ອາໄສເມືອງເວສາລີຢູ່ທັງໝົດໃຫ້ປະຊຸມທີ່ໂຮງອາຫານ ທ່ານພຣະອານົນທູນຮັບສະໜອງພຣະດຳຣັດແລ້ວ ບອກໃຫ້ ພິກຂຸທໍ່ທີ່ອາໄສເມືອງເວສາລີຢູ່ທັງໝົດໃຫ້ປະຊຸມທີ່ໂຮງອາຫານແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸສົງປະຊຸມກັນແລ້ວ ຂໍພຣະຜູ້ມີພຣະພາກເຈົ້າໂຜດຮູ້ການອັນສົມຄວນໃນບັດນີ້ເທີ້ນ ຂ້ານ້ອຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດໄປທີ່ໂຮງອາຫານ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ ແລ້ວຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ອານາປານະສະຕິສະມາທິແມ່ນນີ້ ທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນສະພາບສະງົບ ປະນີດ ສົດຊື່ນ ເປັນທຳເຄື່ອງຢູ່ເປັນສຸກ ແລະ ເຮັດບາບອະກຸສົນທຳທີ່ເກີດຂຶ້ນແລ້ວ ໆ ໃຫ້ອັນຕະຣະທານໄປ ສະງົບໄປໂດຍໄວ

ພິກຂຸທັງຫຼາຍ ຝຸ່ນລະອອງທີ່ຟຸ້ງຂຶ້ນທ້າຍລະດູຮ້ອນ ຖືກຝົນໃຫຍ່ນອກລະດູ ເຮັດໃຫ້ອັນ

ຕະຣະທານໄປ ສະງົບໄປໂດຍໄວ ແມ່ນສັນໃດ ອານາປານະສະຕິສະມາທິທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວກໍຄືກັນສັນນັ້ນ ເປັນສະພາບສະງົບ ປະນີດ ສົດຊື່ນ ເປັນທຳເຄື່ອງຢູ່ເປັນສຸກ ແລະເຮັດບາບອະກຸສົນທຳທີ່ເກີດຂຶ້ນແລ້ວ ໆ ໃຫ້ອັນຕະຣະທານໄປ ສະງົບໄປໂດຍໄວ

ອານາປານະສະຕິສະມາທິທີ່ພິກຂຸຈະເລີນແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງເປັນສະພາບສະງົບ ປະນີດ ສົດຊື່ນ ເປັນທຳເຄື່ອງຢູ່ເປັນສຸກ ແລະເຮັດບາບອະກຸສົນທຳທີ່ເກີດຂຶ້ນແລ້ວ ໆ ໃຫ້ອັນຕະຣະທານໄປ ສະງົບໄປໂດຍໄວ

ຄື ພິກຂຸໃນທຳວິໄນນີ້ໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງກໍດີ ນັ່ງຄູ້ບັນລັງຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າ ມີສະຕິຫັນໃຈເຂົ້າ ມີສະຕິຫັນໃຈອອກ ຯລຯ ໃສ່ໃຈວ່າຈະພິຈາລະນາເຫັນຄວາມສະລະຄືນ ຫັນໃຈເຂົ້າ ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມສະລະຄືນຫັນໃຈອອກ

ພິກຂຸທັງຫຼາຍ ອານາປານະສະຕິສະມາທິທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ຈຶ່ງເປັນສະພາບສະງົບ ປະນີດ ສົດຊື່ນ ເປັນທຳເຄື່ອງຢູ່ເປັນສຸກ ແລະເຮັດບາບອະກຸສົນທຳ ທີ່ເກີດຂຶ້ນແລ້ວ ໆ ໃຫ້ອັນຕະຣະທານໄປ ສະງົບໄປໂດຍໄວ

**ເວສາລີສູດທີ ໙ ຈົບ**

# ໑໐. ກິມິລະສູດ

## ວ່າດ້ວຍພຣະກິມິລະ

[໙໗໘] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ປ່າໄຜ່ ເຂດເມືອງກິມິລາໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກທ່ານພຣະກິມິລະມາຕັດຖາມວ່າ ກິມິລະ ອານາປານະສະຕິສະມາທິທີ່ພິກຂຸຈະເລີນແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງມີຜົນຫຼາຍ ມີອານິສົງຫຼາຍ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດຖາມແນວນີ້ ທ່ານພຣະກິມິລະໄດ້ມິດເສີຍ
ແມ່ນເທື່ອທີ ໔ ຯລຯ
ແມ່ນເທື່ອທີ ໓ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກທ່ານພຣະກິມິລະມາຕັດຖາມວ່າ ກິມິລະ ອານາປານະສະຕິສະມາທິທີ່ພິກຂຸຈະເລີນແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງມີຜົນຫຼາຍມີອານິສົງຫຼາຍ ແມ່ນເທື່ອທີ ໓ ທ່ານພຣະກິມິລະກໍໄດ້ມິດເສີຍ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດຖາມແນວນີ້ ທ່ານພຣະອານົນໄດ້ຂາບທູນ ພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ເຖິງເວລາທີ່ພຣະອົງຈະເພິ່ງຕັດອານາປານະສະຕິສະມາທິ ຂ້າແດ່ ພຣະສຸຄົດເຈົ້າ ເຖິງເວລາທີ່ພຣະອົງຈະເພິ່ງຕັດອານາປານະສະຕິສະມາທິ ພິກຂຸທັງຫຼາຍໄດ້ສະດັບຈາກພຣະອົງແລ້ວຈັກຊົງຈຳໄວ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ ອານົນ ຖ້າເຊັ່ນນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ທ່ານພຣະອານົນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດ ວ່າ

ອານົນ ອານາປານະສະຕິສະມາທິທີ່ພິກຂຸຈະເລີນແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງມີຜົນຫຼາຍ ມີອານິສົງຫຼາຍ

ຄື ພິກຂຸໃນທຳວິໄນນີ້ໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງກໍດີ ນັ່ງຄູ້ບັນລັງຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າ ມີສະຕິຫັນໃຈເຂົ້າ ມີສະຕິຫັນໃຈອອກ ฯລฯ ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມສະລະຄືນ ຫັນໃຈເຂົ້າ ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມສະລະຄືນ ຫັນໃຈອອກ

ອານາປານະສະຕິສະມາທິທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ຈຶ່ງມີຜົນຫຼາຍ ມີອານິສົງຫຼາຍ

໑. ສະໄໝໃດ ພິກຂຸເມື່ອຫັນໃຈເຂົ້າຍາວກໍຮູ້ແຈ້ງວ່າຫັນໃຈເຂົ້າຍາວ ຫຼື ເມື່ອຫັນໃຈອອກຍາວກໍຮູ້ແຈ້ງວ່າຫັນໃຈອອກຍາວ ເມື່ອຫັນໃຈເຂົ້າສັ້ນກໍຮູ້ແຈ້ງ ວ່າຫັນໃຈເຂົ້າສັ້ນ ຫຼື ເມື່ອຫັນໃຈອອກສັ້ນກໍຮູ້ແຈ້ງວ່າຫັນໃຈອອກສັ້ນ ໃສ່ໃຈວ່າ ຈະຮູ້ແຈ້ງກອງລົມທັງປວງ ຫັນໃຈເຂົ້າ ໃສ່ໃຈວ່າ ຈະຮູ້ ແຈ້ງກອງລົມທັງປວງ ຫັນໃຈອອກ ໃສ່ໃຈວ່າ ຈະລະງັບກາຍສັງຂານ ຫັນໃຈເຂົ້າ ໃສ່ໃຈວ່າ ຈະລະງັບກາຍສັງຂານ ຫັນໃຈອອກ ສະໄໝນັ້ນ ພິກຂຸພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນເຮົາກ່າວກາຍແນວໜຶ່ງ ຄື ລົມຫັນໃຈເຂົ້າແລະລົມຫັນໃຈອອກ ຍ້ອນເຫດນັ້ນ ສະໄໝນັ້ນ ພິກຂຸພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້

໒. ສະໄໝໃດ ພິກຂຸໃສ່ໃຈວ່າ ຈະຮູ້ແຈ້ງປີຕິ ຫັນໃຈເຂົ້າ ໃສ່ໃຈວ່າ ຈະຮູ້ແຈ້ງປີຕິ ຫັນໃຈອອກ ໃສ່ໃຈວ່າ ຈະຮູ້ແຈ້ງສຸກ ຫັນໃຈເຂົ້າ ໃສ່ໃຈວ່າ ຈະຮູ້ແຈ້ງສຸກ ຫັນໃຈອອກ ໃສ່ໃຈວ່າ ຈະຮູ້ແຈ້ງຈິດຕະສັງຂານ ຫັນໃຈເຂົ້າ ໃສ່ໃຈວ່າ ຈະຮູ້ແຈ້ງຈິດຕະສັງຂານ ຫັນໃຈອອກ ໃສ່ໃຈວ່າ ຈະລະງັບຈິດຕະສັງຂານ ຫັນໃຈເຂົ້າ ໃສ່ໃຈວ່າ ຈະລະງັບຈິດຕະສັງຂານ ຫັນໃຈອອກ ສະໄໝນັ້ນ ພິກຂຸພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ

ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນເຮົາກ່າວເວທະນາແນວໜຶ່ງ ຄື ການມະນະສິການໃຫ້ດີເຖິງລົມຫັນໃຈເຂົ້າ ແລະລົມຫັນໃຈອອກ ຍ້ອນເຫດນັ້ນ ສະໄໝນັ້ນ ພິກຂຸພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

໓. ສະໄໝໃດ ພິກຂຸໃສ່ໃຈວ່າ ຈະຮູ້ແຈ້ງຈິດ ຫັນໃຈເຂົ້າ ໃສ່ໃຈວ່າ ຈະຮູ້ແຈ້ງຈິດ ຫັນໃຈອອກ ໃສ່ໃຈວ່າ ຈະເຮັດຈິດໃຫ້ບັນເທີງ ຫັນໃຈເຂົ້າ ຯລຯ ໃສ່ໃຈວ່າ ຈະຕັ້ງຈິດໝັ້ນ ຫັນໃຈອອກ ໃສ່ໃຈວ່າ ຈະປົດເປື້ອງຈິດ ຫັນໃຈເຂົ້າ ໃສ່ໃຈວ່າ ຈະປົດເປື້ອງຈິດ ຫັນໃຈອອກ ສະໄໝນັ້ນ ພິກຂຸພິຈາລະນາເຫັນຈິດໃນຈິດຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນເຮົາບໍ່ກ່າວການຈະເລີນອານາປານະສະຕິສະມາທິໄວ້ ສຳລັບຜູ້ຫຼົງລືມສະຕິ ບໍ່ມີສຳປະຊັນຍະ ຍ້ອນເຫດນັ້ນ ສະໄໝນັ້ນ ພິກຂຸພິຈາລະນາເຫັນຈິດໃນຈິດຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້

໔. ສະໄໝໃດ ພິກຂຸໃສ່ໃຈວ່າ ຈະພິຈາລະນາເຫັນວ່າບໍ່ທ່ຽງ ຫັນໃຈເຂົ້າ ຯລຯ ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມຄາຍອອກໄດ້ ຫັນໃຈເຂົ້າ ຯລຯ ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມດັບໄປ ຫັນໃຈເຂົ້າ ຯລຯ ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມສະລະຄືນ ຫັນໃຈເຂົ້າ ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມສະລະຄືນ ຫັນໃຈອອກ ສະໄໝນັ້ນ ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້ ທ່ານເຫັນການລະອະພິດຊາ ແລະໂທມະນັດນັ້ນດ້ວຍປັນຍາແລ້ວວາງເສີຍຢ່າງດີ ຍ້ອນເຫດນັ້ນ ສະໄໝນັ້ນ ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້

ອານົນ ດິນກອງໃຫຍ່ທີ່ຖະໜົນໃຫຍ່ ໔ ແຍກ ຖ້າກວຽນ ຫຼື ລົດຜ່ານມາທາງທິດຕາເວັນອອກ ກໍຈະກະທົບດິນກອງນັ້ນ ຖ້າຜ່ານມາທາງທິດຕາເວັນຕົກ ຯລຯ ຖ້າຜ່ານມາທາງທິດເໜືອ ຯລຯ ຖ້າກວຽນຫຼືລົດຜ່ານມາທາງທິດໃຕ້ ກໍຈະກະທົບດິນກອງນັ້ນ ແມ່ນສັນໃດ ພິກຂຸເມື່ອພິຈາລະນາເຫັນກາຍໃນກາຍຢູ່ກໍດີ ຊື່ວ່າ ຍ່ອມກຳຈັດບາບອະກຸສົນທຳໄດ້ ເມື່ອພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ ເມື່ອພິຈາລະນາເຫັນຈິດໃນຈິດ ຯລຯ ເມື່ອພິຈານາເຫັນທຳໃນທຳທັງຫຼາຍກໍດີ ຊື່ວ່າ ຍ່ອມກຳຈັດບາບອະກຸສົນທຳໄດ້ ກໍຄືກັນສັນນັ້ນ

**ກິມິລະສູດທີ ໑໐ ຈົບ**

**ເອກະທຳມະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໒. ທຸຕິຍະວັກ

### ໝວດທີ ໒

## ໑. ອິດສານັງຄະລະສູດ

### ວ່າດ້ວຍພຣະທຳເທດສະໜາທີ່ເມືອງອິດສານັງຄະລະ

[໑໙໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ເຂດປ່າຊື່ອິດສານັງຄະລະ ເຂດເມືອງອິດສານັງຄະລະໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ເຮົາປາຖະໜາຈະຫຼີກຫຼີກຢູ່ຜູ້ດຽວຈັກ ໓ ເດືອນ ໃຜ ໆ ຢ່າໄດ້ເຂົ້າໄປຫາເຮົາ ຍົກເວັ້ນພິກຂຸຜູ້ນຳອາຫານບິນທະບາດເຂົ້າໄປໃຫ້ອົງດຽວ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ໃນ ໓ ເດືອນນີ້ ຈຶ່ງບໍ່ມີໃຜ ໆ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເລີຍ ຍົກເວັ້ນພິກຂຸຜູ້ນຳອາຫານບິນທະບາດເຂົ້າໄປຖວາຍອົງດຽວ

ເມື່ອລ່ວງ ໓ ເດືອນນັ້ນໄປ ພຣະຜູ້ມີພຣະພາກເຈົ້າກໍສະເດັດອອກຈາກບ່ອນຫຼີກຫຼີກແລ້ວຮັບສັ່ງ ຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ຖ້າພວກອັນຍະເດຍຣະຖີປະຣິພາຊົກເພິ່ງຖາມທ່ານທັງຫຼາຍແນວນີ້ວ່າ ຜູ້ມີອາຍຸທັງຫຼາຍ ສ່ວນຫຼາຍພຣະສະມະນະໂຄດົມຊົງຢູ່ຈຳພັນສາດ້ວຍວິຫານທຳຂໍ້ໃດ ທ່ານທັງຫຼາຍ ຖືກຖາມແນວນີ້ເພິ່ງຕອບອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແນວນີ້ວ່າ ທ່ານທັງຫຼາຍ ສ່ວນຫຼາຍພຣະຜູ້ມີພຣະພາກເຈົ້າຊົງຢູ່ຈຳພັນສາດ້ວຍອານາປານະສະຕິສະມາທິ ພິກຂຸທັງຫຼາຍ ຂະນະນີ້ເຮົາມີສະຕິຫັນໃຈເຂົ້າ ມີສະຕິຫັນໃຈອອກ

ເມື່ອຫັນໃຈເຂົ້າຍາວກໍຮູ້ແຈ້ງວ່າຫັນໃຈເຂົ້າຍາວ ຫຼື ເມື່ອຫັນໃຈອອກຍາວກໍຮູ້ແຈ້ງວ່າຫັນໃຈອອກຍາວ ເມື່ອຫັນໃຈເຂົ້າສັ້ນກໍຮູ້ແຈ້ງວ່າຫັນໃຈເຂົ້າສັ້ນ ຫຼື ເມື່ອຫັນໃຈອອກສັ້ນກໍຮູ້ແຈ້ງວ່າຫັນໃຈອອກສັ້ນ ຍ່ອມຮູ້ແຈ້ງວ່າ ຈະຮູ້ແຈ້ງກອງລົມທັງປວງ ຫັນໃຈເຂົ້າ ຯລຯ ຍ່ອມຮູ້ແຈ້ງວ່າ ຈະ

ພິຈາລະນາເຫັນຄວາມສະລະຄືນ ທັນໃຈເຂົ້າ ຈະພິຈາລະນາເຫັນຄວາມສະລະຄືນ ທັນໃຈອອກ

ພິກຂຸທັງຫຼາຍ ຄວາມຈິງ ບຸກຄົນເມື່ອຈະກ່າວໃຫ້ຖືກຕ້ອງ ເພິ່ງກ່າວເຖິງທຳນັ້ນໃດວ່າ ອະຣິຍະວິຫານ (ທຳເປັນເຄື່ອງຢູ່ຂອງພຣະອະຣິຍະ) ແດ່ ພົມວິຫານ (ທຳເປັນເຄື່ອງຢູ່ຂອງພົມ) ແດ່ ຕະຖາຄົດວິຫານ (ທຳເປັນເຄື່ອງຢູ່ຂອງພຣະຕະຖາຄົດ) ແດ່ ເມື່ອຈະກ່າວໃຫ້ຖືກຕ້ອງ ກໍເພິ່ງກ່າວເຖິງອານາປານະສະຕິສະມາທິວ່າ ອະຣິຍະວິຫານແດ່ ພົມວິຫານແດ່ ຕະຖາຄົດວິຫານແດ່ ພິກຂຸເຫຼົ່າໃດ ເປັນພຣະເສຂະຍັງບໍ່ບັນລຸອະຣະຫັດຕະຜົນ ຍ່ອມປາຖະໜາທຳເປັນແດນກະເສມຈາກໂຍຄະອັນປະເສີດຢູ່ ອານາປານະສະຕິສະມາທິທີ່ພິກຂຸເຫຼົ່ານັ້ນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມສິ້ນອາສະວະ ສ່ວນພິກຂຸເຫຼົ່າໃດເປັນອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາຣະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນແລ້ວຍ້ອນຮູ້ໂດຍຖືກຕ້ອງ ອານາປານະສະຕິສະມາທິທີ່ພິກຂຸເຫຼົ່ານັ້ນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມຢູ່ເປັນສຸກໃນປັດຈຸບັນແລະເພື່ອມີສະຕິ ມີສຳປະຊັນຍະ

ພິກຂຸທັງຫຼາຍ ຄວາມຈິງ ບຸກຄົນເມື່ອຈະກ່າວໃຫ້ຖືກຕ້ອງ ເພິ່ງກ່າວເຖິງທຳນັ້ນໃດວ່າ ອະຣິຍະວິຫານແດ່ ພົມວິຫານແດ່ ຕະຖາຄົດວິຫານແດ່ ເມື່ອຈະກ່າວໃຫ້ຖືກຕ້ອງ ກໍເພິ່ງກ່າວເຖິງອານາປານະສະຕິສະມາທິວ່າ ອະຣິຍະວິຫານແດ່ ພົມວິຫານແດ່ ຕະຖາຄົດວິຫານແດ່

**ອິດສານັງຄະລະສູດທີ ໑ ຈົບ**

# ໘. ກັງເຂີຍຍະສູດ

## ວ່າດ້ວຍຂໍ້ກັງຂາຂອງເຈົ້າສາກະຍະພຣະນາມວ່າມະຫານາມ

[໑໙໙] ສະໄໝໜຶ່ງ ທ່ານພຣະໂລມະສະກັງພິຍະຢູ່ທີ່ນິໂຄທາຣາມ ເຂດເມືອງກະບິນລະພັດ ແຄວັ້ນສັກກະ ຄັ້ງນັ້ນ ເຈົ້າສາກະຍະຊົງພຣະນາມວ່າມະຫານາມ ສະເດັດເຂົ້າໄປຫາທ່ານພຣະໂລມະສະກັງພິຍະຮອດບ່ອນຢູ່ ຊົງອະພິວາດແລ້ວປະທັບນັ່ງ ຢູ່ບ່ອນທີ່ສົມຄວນໄດ້ຕັດຖາມທ່ານ ພຣະໂລມະສະກັງພິຍະດັ່ງນີ້ວ່າ ພຣະຜູ້ເປັນເຈົ້າຜູ້ຈະເລີນ ເສຂະວິຫານທຳ (ທຳເປັນເຄື່ອງຢູ່ຂອງພຣະເສຂະ) ກັບຕະຖາຄົດວິຫານທຳເປັນແນວດຽວກັນແມ່ນບໍ? ຫຼື ວ່າເສຂະວິຫານທຳເປັນແນວໜຶ່ງ ຕະຖາຄົດວິຫານທຳເປັນອີກແນວໜຶ່ງ

ທ່ານພຣະໂລມະສະກັງພິຍະ ຖວາຍພຣະພອນວ່າ ຂໍຖວາຍພຣະພອນ ມະຫາບໍພິດ ເສຂະວິຫານທຳກັບຕະຖາຄົດວິຫານທຳບໍ່ແມ່ນແນວດຽວກັນ ເສຂະວິຫານທຳເປັນແນວໜຶ່ງ ຕະຖາຄົດວິຫານທຳເປັນອີກແນວໜຶ່ງ

ມະຫາບໍພິດ ພິກຂຸເຫຼົ່າໃດເປັນພຣະເສຂະຍັງບໍ່ບັນລຸອະຣະຫັດຕະຜົນ ປາຖະໜາທຳເປັນແດນກະເສມຈາກໂຍຄະອັນປະເສີດຢູ່ ພິກຂຸເຫຼົ່ານັ້ນຊື່ວ່າລະນິວອນ ໕ ປະການຢູ່

ລະນິວອນ ໕ ປະການ ອັນໃດແດ່ ຄື

໑. ລະກາມສັນທະນິວອນຢູ່
໒. ລະພະຍາບາດນິວອນຢູ່
໓. ລະຖີນະມິດທະນິວອນຢູ່
໔. ລະອຸດທັດຈະກຸກກຸດຈະນິວອນຢູ່
໕. ລະວິຈິກິດສານິວອນຢູ່

ພິກຂຸເຫຼົ່າໃດ ເປັນພຣະເສຂະຍັງບໍ່ບັນລຸອະຣະຫັດຕະຜົນ ປາຖະໜາທຳເປັນແດນກະເສມຈາກໂຍຄະອັນປະເສີດຢູ່ ພິກຂຸເຫຼົ່ານັ້ນຊື່ວ່າ ລະນິວອນ ໕ ປະການນີ້ຢູ່

ມະຫາບໍພິດ ສ່ວນພິກຂຸເຫຼົ່າໃດເປັນພຣະອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາຣະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນຍ້ອນຮູ້ໂດຍຖືກຕ້ອງ ນິວອນ ໕ ປະການເປັນອັນພິກຂຸເຫຼົ່ານັ້ນ ລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

ນິວອນ ໕ ປະການ ອັນໃດແດ່ ຄື

໑. ກາມສັນທະນິວອນເປັນອັນພິກຂຸເຫຼົ່ານັ້ນ ລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້
໒. ພະຍາບາດນິວອນ ຯລຯ
໓. ຖີນະມິດທະນິວອນ ຯລຯ
໔. ອຸດທັດຈະກຸກກຸດຈະນິວອນ ຯລຯ
໕. ວິຈິກິດສານິວອນເປັນອັນພິກຂຸເຫຼົ່ານັ້ນລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້

ມະຫາບໍພິດ ພິກຂຸເຫຼົ່າໃດເປັນພຣະອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາຣະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລຳດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນຍ້ອນຮູ້ໂດຍຖືກຕ້ອງ ນິວອນ ໕ ປະການນີ້ເປັນອັນພິກຂຸເຫຼົ່ານັ້ນລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່

ໄປບໍ່ໄດ້ ຂໍພຣະອົງຊົງຮູ້ເລື້ອງນີ້ໂດຍປະຣິຍາຍທີ່ວ່າ ເສຂະວິຫານທໍາເປັນແນວໜຶ່ງ ຕະຖາຄົດວິຫານທໍາກໍເປັນອີກແນວໜຶ່ງ

ມະຫາບໍພິດ ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ເຂດປ່າຊື່ອິດສານັງຄະລະ ເຂດເມືອງອິດສານັງຄະລະໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ເຮົາປາຖະໜາຈະຫຼີບຫຼີກຢູ່ຄົນດຽວຈັກ ໑ ເດືອນ ໃຜ ໆ ຢ່າເຂົ້າ ໄປຫາເຮົາ ຍົກເວັ້ນພິກຂຸຜູ້ນໍາອາຫານບິນທະບາດເຂົ້າໄປໃຫ້ອົງດຽວ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດໍາຣັດແລ້ວ ໃນ ໑ ເດືອນນີ້ ຈຶ່ງບໍ່ມີໃຜ ໆ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເລີຍ ຍົກເວັ້ນພິກຂຸຜູ້ນໍາອາຫານບິນທະບາດເຂົ້າໄປຖວາຍອົງດຽວ

ເມື່ອລ່ວງ ໑ ເດືອນນັ້ນໄປ ພຣະຜູ້ມີພຣະພາກເຈົ້າກໍສະເດັດອອກຈາກບ່ອນຫຼີບຫຼີກແລ້ວຮັບສັ່ງ ຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ຖ້າພວກອັນຍະເດຍຣະຖີປະຣິພາຊົກເພິ່ງຖາມທ່ານທັງຫຼາຍແນວນີ້ວ່າ ຜູ້ມີອາຍຸທັງຫຼາຍ ສ່ວນຫຼາຍພຣະສະມະນະໂຄດົມຊົງຢູ່ຈໍາພັນສາດ້ວຍວິຫານທໍາຂໍ້ໃດ ທ່ານທັງຫຼາຍ ຖືກຖາມແນວນີ້ເພິ່ງຕອບອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແນວນີ້ວ່າ ທ່ານທັງຫຼາຍ ສ່ວນຫຼາຍພຣະຜູ້ມີພຣະພາກເຈົ້າຊົງຢູ່ຈໍາພັນສາດ້ວຍອານາປານະສະຕິສະມາທິ

ພິກຂຸທັງຫຼາຍ ຂະນະນີ້ເຮົາມີສະຕິຫັນໃຈເຂົ້າ ມີສະຕິຫັນໃຈອອກ ເມື່ອຫັນໃຈເຂົ້າຍາວກໍຮູ້ແຈ້ງວ່າຫັນໃຈເຂົ້າຍາວ ຫຼືເມື່ອຫັນໃຈອອກຍາວກໍຮູ້ແຈ້ງວ່າຫັນໃຈອອກຍາວ ຯລຯ ຍ່ອມຮູ້ແຈ້ງວ່າ ຈະພິຈາລະນາເຫັນຄວາມສະລະຄືນ ຫັນໃຈເຂົ້າ ຈະພິຈາລະນາເຫັນຄວາມສະລະຄືນຫັນໃຈອອກ

ພິກຂຸທັງຫຼາຍ ຄວາມຈິງ ບຸກຄົນເມື່ອຈະກ່າວໃຫ້ຖືກຕ້ອງ ເພິ່ງກ່າວເຖິງທໍານັ້ນໃດວ່າອະຣິຍະວິຫານແດ່ ພົມວິຫານແດ່ ຕະຖາຄົດວິຫານແດ່ ເມື່ອຈະກ່າວໃຫ້ຖືກຕ້ອງ ເພິ່ງກ່າວເຖິງອານາປານະສະຕິສະມາທິວ່າ ອະຣິຍະວິຫານແດ່ ພົມວິຫານແດ່ ຕະຖາຄົດວິຫານແດ່ ພິກຂຸເຫຼົ່າໃດເປັນເສຂະຍັງບໍ່ບັນລຸອະຣະຫັດຕະຜົນ ປາຖະໜາທໍາເປັນແດນກະເສມຈາກໂຍຄະ ອັນປະເສີດຢູ່ ອານາປານະສະຕິສະມາທິທີ່ພິກຂຸເຫຼົ່ານັ້ນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມສິ້ນອາສະວະ ສ່ວນພິກຂຸເຫຼົ່າໃດເປັນອະຣະຫັນຕະຂີນາສົບ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສໍາເລັດແລ້ວ ປົງພາຣະໄດ້ແລ້ວ ບັນລຸປະໂຫຍດຕົນໂດຍລໍາດັບແລ້ວ ສິ້ນພະວະສັງໂຍດແລ້ວ ລຸດພົ້ນຍ້ອນຮູ້ໂດຍຖືກຕ້ອງ ອານາປານະສະຕິສະມາທິທີ່ພິກຂຸເຫຼົ່ານັ້ນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຢູ່ເປັນສຸກໃນປັດຈຸບັນແລະເພື່ອມີສະຕິ ມີສໍາປະຊັນຍະ

ພິກຂຸທັງຫຼາຍ ຄວາມຈິງ ບຸກຄົນເມື່ອຈະກ່າວໃຫ້ຖືກຕ້ອງ ເພິ່ງກ່າວເຖິງທໍານັ້ນໃດວ່າອະຣິຍະວິຫານແດ່ ພົມວິຫານແດ່ ຕະຖາຄົດວິຫານແດ່ ເມື່ອຈະກ່າວໃຫ້ຖືກຕ້ອງ ກໍເພິ່ງກ່າວ

ເຖິງອານາປານະສະຕິສະມາທິວ່າ ອະຣິຍະວິຫານແດ່ ພົມວິຫານແດ່ ຕະຖາຄົດວິຫານແດ່

ຂໍຖວາຍພຣະພອນ ມະຫາບໍພິດ ຂໍພຣະອົງຊົງຮູ້ເລື້ອງນີ້ໂດຍປະຣິຍາຍທີ່ວ່າ ເສຂະວິຫານທຳເປັນແນວໜຶ່ງ ຕະຖາຄົດວິຫານທຳກໍເປັນອີກແນວໜຶ່ງ

**ກັງເຂັຍຍະສູດທີ ໘ ຈົບ**

## ໙. ປະຖົມອານັນທະສູດ
### ວ່າດ້ວຍພຣະອານົນ ສູດທີ ໑

[໙໗໙] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ຄັ້ງນັ້ນ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳອັນເປັນເອກທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໔ ປະການບໍລິບູນ ທຳ ໔ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໗ ປະການບໍລິບູນ ທຳ ໗ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໘ ປະການບໍລິບູນ ມີຢູ່ບໍ?

ພຣະຜູ້ມີພຣະພາກເຈົ້າຕັດວ່າ ອານົນ ທຳອັນເປັນເອກທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໔ ປະການບໍລິບູນ ທຳ ໔ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໗ ປະການບໍລິບູນ ທຳ ໗ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໘ ປະການບໍລິບູນ ມີຢູ່

ຂ້າແດ່ ພຣະອົງຜູ້ຈະເລີນ ທຳອັນເປັນເອກທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໔ ປະການບໍລິບູນ ທຳ ໔ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໗ ປະການບໍລິບູນ ທຳ ໗ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໘ ປະການບໍລິບູນເປັນແນວໃດ?

ອານົນ ທຳອັນເປັນເອກຄືອານາປານະສະຕິສະມາທິທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ສະຕິປັດຖານ ໔ ປະການບໍລິບູນ ສະຕິປັດຖານ ໔ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ໂພດຊົງ ໗ ປະການບໍລິບູນ ໂພດຊົງ ໗ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ ວິດຊາແລະວິມຸດຕິບໍລິບູນ

ອານາປານະສະຕິສະມາທິທີ່ພິກຂຸຈະເລີນແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງເຮັດໃຫ້ສະຕິປັດຖານ ໔ ປະການບໍລິບູນ

ຄື ພິກຂຸໃນທຳວິໄນນີ້ໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງກໍດີ ນັ່ງຄູ້ບັນລັງ ຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າ ທ່ານມີສະຕິຫັນໃຈເຂົ້າ ມີສະຕິຫັນໃຈອອກ ເມື່ອຫັນໃຈ ເຂົ້າຍາວກໍຮູ້ແຈ້ງວ່າຫັນໃຈເຂົ້າຍາວ ຫຼືເມື່ອຫັນໃຈອອກຍາວກໍຮູ້ແຈ້ງວ່າຫັນໃຈ ອອກຍາວ ຯລຯ ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມສະລະຄືນ ຫັນໃຈເຂົ້າ ຈະພິຈາລະນາ ເຫັນຄວາມສະລະ ຄືນ ຫັນໃຈອອກ

໑. ສະໄໝໃດ ພິກຂຸເມື່ອຫັນໃຈເຂົ້າຍາວກໍຮູ້ແຈ້ງວ່າຫັນໃຈເຂົ້າຍາວ ຫຼືເມື່ອຫັນໃຈອອກ ຍາວກໍຮູ້ແຈ້ງວ່າຫັນໃຈອອກຍາວ ເມື່ອຫັນໃຈເຂົ້າສັ້ນກໍຮູ້ແຈ້ງວ່າຫັນໃຈເຂົ້າສັ້ນ ຫຼືເມື່ອຫັນໃຈ ອອກສັ້ນກໍຮູ້ແຈ້ງວ່າຫັນໃຈອອກສັ້ນ ຯລຯ ໃສ່ໃຈວ່າ ຈະລະງັບກາຍສັງຂານ ຫັນໃຈເຂົ້າ ຈະ ລະງັບກາຍສັງຂານ ຫັນໃຈອອກ ສະໄໝນັ້ນ ພິກຂຸພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດ

ໃນໂລກໄດ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນເຮົາກ່າວກາຍແນວໜຶ່ງ ຄື ລົມຫັນໃຈເຂົ້າແລະລົມ ຫັນໃຈອອກ ຍ້ອນເຫດນັ້ນ ສະໄໝນັ້ນ ພິກຂຸພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳ ປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

໒. ສະໄໝໃດ ພິກຂຸໃສ່ໃຈວ່າ ຈະຮູ້ແຈ້ງປີຕິ ຫັນໃຈເຂົ້າ ໃສ່ໃຈວ່າ ຈະຮູ້ແຈ້ງປີຕິ ຫັນ ໃຈອອກ ຯລຯ ຈະຮູ້ແຈ້ງສຸກ ຯລຯ ຈະຮູ້ແຈ້ງຈິດຕະສັງຂານ ຯລຯ ໃສ່ໃຈວ່າ ຈະລະງັບ ຈິດຕະສັງຂານ ຫັນໃຈເຂົ້າ ໃສ່ໃຈວ່າ ຈະລະງັບຈິດຕະສັງຂານ ຫັນໃຈອອກ ສະໄໝນັ້ນ ພິກຂຸ ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດ ອະພິດຊາແລະໂທມະນັດໃນໂລກໄດ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນເຮົາກ່າວເວທະນາແນວໜຶ່ງ ຄື ການມະນະສິການໃຫ້ດີເຖິງລົມຫັນໃຈເຂົ້າແລະລົມຫັນໃຈອອກ ຍ້ອນເຫດນັ້ນ ສະໄໝນັ້ນ ພິກຂຸ ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດ ອະພິດຊາແລະໂທມະນັດໃນໂລກໄດ້

໓. ສະໄໝໃດ ພິກຂຸໃສ່ໃຈວ່າ ຈະຮູ້ແຈ້ງຈິດ ຫັນໃຈເຂົ້າ ໃສ່ໃຈວ່າ ຈະຮູ້ແຈ້ງຈິດ ຫັນ ໃຈອອກ ໃສ່ໃຈວ່າ ຈະຍັງຈິດໃຫ້ບັນເທີງຫັນໃຈເຂົ້າ ຯລຯ ຈະຕັ້ງຈິດໝັ້ນ ຯລຯ ໃສ່ໃຈວ່າ ຈະ ປົດຈິດ ຫັນໃຈເຂົ້າ ໃສ່ໃຈວ່າ ຈະປົດຈິດ ຫັນໃຈອອກ ສະໄໝນັ້ນ ພິກຂຸພິຈາລະນາເຫັນ ຈິດ ໃນຈິດຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ຂໍ້ ນັ້ນຍ້ອນເຫດໃດ ຍ້ອນເຮົາບໍ່ກ່າວການຈະເລີນອານາປານະສະຕິສະມາທິໄວ້ສຳລັບຜູ້ຫຼົງລືມສະຕິ ບໍ່ມີສຳປະຊັນຍະ ຍ້ອນເຫດນັ້ນ ສະໄໝນັ້ນ ພິກຂຸພິຈາລະນາເຫັນຈິດໃນຈິດຢູ່ ມີຄວາມພຽນ ມີ ສຳປະຊັນຍະ ມີສະຕິ ກຳຈັດ ອະພິດຊາແລະໂທມະນັດໃນໂລກໄດ້

໔. ສະໄໝໃດ ພິກຂຸໃສ່ໃຈວ່າ ຈະພິຈາລະນາເຫັນຄວາມບໍ່ທ່ຽງ ຯລຯ ຈະພິຈາລະນາເຫັນ

ຄວາມຄາຍອອກໄດ້ ຯລຯ ຈະພິຈາລະນາເຫັນຄວາມດັບໄປ ຯລຯ ໃສ່ໃຈວ່າ ຈະພິຈາລະ ນາເຫັນຄວາມສະລະຄືນ ທັບໃຈເຂົ້າ ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມສະລະຄືນ ທັບໃຈອອກ ສະໄໝນັ້ນ ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ທ່ານເຫັນການລະອະພິດຊາ ແລະໂທມະນັດນັ້ນດ້ວຍປັນຍາແລ້ວວາງເສີຍຢ່າງດີ ຍ້ອນເຫດນັ້ນ ສະໄໝນັ້ນ ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້

ອານົນ ອານາປານະສະຕິສະມາທິທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ຈຶ່ງເຮັດໃຫ້ສະຕິປັດຖານ ໔ ປະການບໍລິບູນ

ສະຕິປັດຖານ ໔ ປະການທີ່ພິກຂຸຈະເລີນແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງເຮັດໃຫ້ໂພດຊົງ ໗ ປະການບໍລິບູນ ຄື

໑. ສະໄໝໃດ ພິກຂຸພິຈາລະນາເຫັນກາຍໃນກາຍຢູ່ ສະໄໝນັ້ນ ສະຕິຂອງທ່ານຕັ້ງໝັ້ນບໍ່ຫຼົງລືມ

(໑) ສະໄໝໃດ ສະຕິຂອງພິກຂຸຍ່ອມຕັ້ງໝັ້ນ ບໍ່ຫຼົງລືມ ສະໄໝນັ້ນ ສະຕິສຳໂພດຊົງເປັນອັນພິກຂຸຜາຣົບແລ້ວ ພິກຂຸຈະເລີນສະຕິສຳໂພດຊົງ ສະຕິສຳໂພດຊົງຈຶ່ງເຖິງຄວາມຈະເລີນເຕັມທີ່ແກ່ພິກຂຸ

(໒) ທ່ານມີສະຕິຢູ່ແນວນັ້ນ ຄົ້ນຫາພິຈາລະນາສອດສ່ອງທຳນັ້ນດ້ວຍປັນຍາ ສະໄໝໃດ ພິກຂຸມີສະຕິຢູ່ແນວນັ້ນ ຄົ້ນຫາພິຈາລະນາສອດສ່ອງທຳນັ້ນດ້ວຍປັນຍາສະໄໝນັ້ນ ທຳມະວິຈະຍະສຳໂພດຊົງເປັນອັນພິກຂຸຜາຣົບແລ້ວ ພິກຂຸຈະເລີນທຳມະວິຈະຍະສຳໂພດຊົງ ທຳມະວິຈະຍະສຳໂພດຊົງຈຶ່ງເຖິງຄວາມຈະເລີນ ເຕັມທີ່ແກ່ພິກຂຸ

(໓) ເມື່ອທ່ານຄົ້ນຫາພິຈາລະນາສອດສ່ອງທຳນັ້ນດ້ວຍປັນຍາ ຄວາມພຽນອັນບໍ່ທໍ້ຖອຍນຍານຊື່ວ່າເປັນອັນຜາຣົບແລ້ວ ສະໄໝໃດ ຄວາມພຽນບໍ່ທໍ້ຖອຍນຍານເປັນອັນພິກຂຸຜູ້ຄົ້ນຄວ້າພິຈາລະນາສອດສ່ອງທຳນັ້ນດ້ວຍປັນຍາຜາຣົບແລ້ວສະໄໝນັ້ນ ວິຣິຍະສຳໂພດຊົງເປັນອັນພິກຂຸຜາຣົບແລ້ວ ພິກຂຸຈະເລີນວິຣິຍະສຳໂພດຊົງ ວິຣິຍະສຳໂພດຊົງຈຶ່ງເຖິງຄວາມຈະເລີນເຕັມທີ່ແກ່ພິກຂຸ

(໔) ປີຕິບໍ່ມີອາມິດຍ່ອມເກີດແກ່ພິກຂຸຜູ້ຜາຣົບຄວາມພຽນ ສະໄໝໃດ ປີຕິບໍ່ມີອາມິດເກີດແກ່ພິກຂຸຜູ້ຜາຣົບຄວາມພຽນ ສະໄໝນັ້ນ ປີຕິສຳໂພດຊົງ ເປັນອັນພິກຂຸຜາຣົບແລ້ວ ພິກຂຸຈະເລີນປີຕິສຳໂພດຊົງ ປີຕິສຳໂພດຊົງຈຶ່ງເຖິງຄວາມຈະເລີນເຕັມທີ່ແກ່ພິກຂຸ

(໕) ແມ່ນກາຍຂອງພິກຂຸຜູ້ມີໃຈມີປີຕິຍ່ອມລະງັບ ແມ່ນຈິດກໍລະງັບ ສະໄໝໃດ ແມ່ນກາຍຂອງພິກຂຸຜູ້ມີໃຈມີປີຕິຍ່ອມລະງັບ ແມ່ນຈິດກໍລະງັບ ສະໄໝນັ້ນ ປັດສັດທິສຳໂພດຊົງເປັນອັນພິກຂຸຜາຣົບແລ້ວ ພິກຂຸຈະເລີນປັດສັດທິສຳໂພດຊົງ ປັສສັທທິສຳໂພດຊົງຈຶ່ງເຖິງຄວາມຈະ ເລີນເຕັມທີ່ແກ່ພິກຂຸ

(໖) ຈິດຂອງພິກຂຸຜູ້ມີກາຍລະງັບ ມີສຸກ ຍ່ອມຕັ້ງໝັ້ນ ສະໄໝໃດ ຈິດຂອງພິກຂຸຜູ້ມີກາຍລະງັບ ມີສຸກ ຍ່ອມຕັ້ງໝັ້ນ ສະໄໝນັ້ນ ສະມາທິສຳໂພດຊົງ ເປັນອັນພິກຂຸຜາຣົບແລ້ວ ພິກຂຸຈະເລີນສະມາທິສຳໂພດຊົງ ສະມາທິສຳໂພດຊົງຈຶ່ງເຖິງຄວາມຈະເລີນເຕັມທີ່ແກ່ພິກຂຸ

(໗) ທ່ານຍ່ອມເພ່ງຈິດທີ່ຕັ້ງໝັ້ນເຊັ່ນນັ້ນຢ່າງດີ ສະໄໝໃດ ພິກຂຸຍ່ອມເພ່ງຈິດທີ່ຕັ້ງໝັ້ນເຊັ່ນນັ້ນຢ່າງດີ ສະໄໝນັ້ນ ອຸເປກຂາສຳໂພດຊົງ ຊື່ວ່າເປັນອັນພິກຂຸຜາຣົບແລ້ວ ພິກຂຸຈະເລີນອຸເປກຂາສຳໂພດຊົງ ອຸເປກຂາສຳໂພດຊົງຈຶ່ງເຖິງຄວາມຈະເລີນເຕັມທີ່ແກ່ພິກຂຸ

໒. ສະໄໝໃດ ພິກຂຸພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ

໓. ສະໄໝໃດ ພິກຂຸພິຈາລະນາເຫັນຈິດໃນຈິດ ຯລຯ

໔. ສະໄໝໃດ ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ສະໄໝນັ້ນ ສະຕິຂອງທ່ານຍ່ອມຕັ້ງໝັ້ນ ບໍ່ຫຼົງລືມ

(໑) ສະໄໝໃດ ສະຕິຂອງພິກຂຸຍ່ອມຕັ້ງໝັ້ນ ບໍ່ຫຼົງລືມ ສະໄໝນັ້ນ ສະຕິສຳໂພດຊົງເປັນອັນພິກຂຸຜາຣົບແລ້ວ ພິກຂຸຈະເລີນສະຕິສຳໂພດຊົງ ສະຕິສຳໂພດຊົງຈຶ່ງເຖິງຄວາມຈະເລີນເຕັມທີ່ແກ່ພິກຂຸ

(ເພິ່ງເພີ່ມຂໍ້ຄວາມໃຫ້ພິດສະດານຄືສະຕິປັດຖານຂໍ້ຕົ້ນ)

(໗) ທ່ານຍ່ອມເພ່ງຈິດທີ່ຕັ້ງໝັ້ນເຊັ່ນນັ້ນຢ່າງດີ ສະໄໝໃດ ພິກຂຸຍ່ອມເພ່ງຈິດທີ່ຕັ້ງໝັ້ນເຊັ່ນນັ້ນຢ່າງດີ ສະໄໝນັ້ນ ອຸເປກຂາສຳໂພດຊົງ ເປັນອັນພິກຂຸຜາຣົບແລ້ວ ພິກຂຸຈະເລີນອຸເປກຂາສຳໂພດຊົງ ອຸເປກຂາສຳໂພດຊົງຈຶ່ງເຖິງຄວາມຈະເລີນເຕັມທີ່ແກ່ພິກຂຸ

ສະຕິປັດຖານ ໔ ປະການທີ່ພິກຂຸຈະເລີນແບບນີ້ແລ ເຮັດໃຫ້ຫຼາຍແລ້ວແບບນີ້ ຈຶ່ງເຮັດໃຫ້ໂພດຊົງ ໗ ປະການບໍລິບູນ

ໂພດຊົງ ໗ ປະການທີ່ພິກຂຸຈະເລີນແບບໃດ ເຮັດໃຫ້ຫຼາຍແລ້ວແບບໃດ ຈຶ່ງເຮັດໃຫ້ວິດຊາແລະວິມຸດຕິບໍລິບູນ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

໒. ຈະເລີນທຳມະວິຈະຍະສຳໂພດຊົງ

ฯລฯ

໗. ຈະເລີນອຸເປກຂາສຳໂພດຊົງອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ອານົນ ໂພດຊົງ ໗ ປະການທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ຈຶ່ງເຮັດໃຫ້ ວິດຊາ ແລະວິມຸດຕິບໍລິບູນ

**ປະຖົມອານັນທະສູດທີ ໓ ຈົບ**

# ໔. ທຸຕິຍະອານັນທະສູດ

## ວ່າດ້ວຍພຣະອານົນ ສູດທີ ໔

[໙໙໐] ຄັ້ງນັ້ນ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມທ່ານພຣະອານົນດັ່ງນີ້ວ່າ ອານົນ ທຳອັນເປັນເອກທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໔ ປະການບໍລິບູນ ທຳ ໔ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໗ ປະການບໍລິບູນ ທຳ ໗ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໒ ປະການບໍລິບູນ ມີຢູ່ບໍ?

ທ່ານພຣະອານົນທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ฯລฯ

ອານົນ ທຳອັນເປັນເອກທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໔ ປະການບໍລິບູນ ທຳ ໔ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໗ ປະການບໍລິບູນ ທຳ ໗ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໒ ປະການບໍລິບູນ ມີຢູ່

ທຳອັນເປັນເອກທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໔ ປະການບໍລິບູນ ທຳ ໔ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໗ ປະການບໍລິບູນ ທຳ ໗ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໒ ປະການບໍລິບູນ ເປັນແນວໃດ?

ຄື ທຳອັນເປັນເອກຄືອານາປານະສະຕິສະມາທິທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ສະຕິປັດຖານ ໔ ປະການບໍລິບູນ ສະຕິປັດຖານ ໔ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ໂພດຊົງ ໗ ປະການບໍລິບູນ ໂພດຊົງ ໗ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ວິດຊາແລະວິມຸດຕິບໍລິບູນ

ອານາປານະສະຕິສະມາທິທີ່ພິກຂຸຈະເລີນແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງເຮັດໃຫ້ສະຕິປັດຖານ ໔ ປະການບໍລິບູນ

ຄື ພິກຂຸໃນທຳວິໄນນີ້ໄປສູ່ປ່າກໍດີ ฯລฯ

ອານິນ ໂພດຊົງ ໗ ປະການທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ຈຶ່ງເຮັດໃຫ້ ວິດຊາແລະວິມຸດຕິບໍລິບູນ

**ທຸຕິຍະອານັນທະສູດທີ ໔ ຈົບ**

# ໕. ປະຖົມພິກຂຸສູດ

## ວ່າດ້ວຍພິກຂຸສູດ ທີ ໑

[໗໙໑] ຄັ້ງນັ້ນ ພິກຂຸຫຼາຍຮູບເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທຳອັນເປັນເອກທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໔ ປະການບໍລິບູນ ທຳ ໔ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໗ ປະການບໍລິບູນ

ທຳ ໗ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໒ ປະການບໍລິບູນ ມີຢູ່ບໍ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸທັງຫຼາຍ ທຳອັນເປັນເອກທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໔ ປະການບໍລິບູນ ທຳ ໔ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໗ ປະການບໍລິບູນ ທຳ ໗ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໒ ປະການບໍລິບູນມີຢູ່

ຂ້າແດ່ ພຣະອົງຜູ້ຈະເລີນ ທຳອັນເປັນເອກທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໔ ປະການບໍລິບູນ ທຳ ໔ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໗ ປະການບໍລິບູນ ທຳ ໗ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໒ ປະການບໍລິບູນ ເປັນແນວໃດ?

ພິກຂຸທັງຫຼາຍ ທຳອັນເປັນເອກຄືອານາປານະສະຕິສະມາທິທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ສະຕິປັດຖານ ໔ ປະການບໍລິບູນ ສະຕິປັດຖານ ໔ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ໂພດຊົງ ໗ ປະການບໍລິບູນ ໂພດຊົງ ໗ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ ວິດຊາແລະວິມຸດຕິບໍລິບູນ

ອານາປານະສະຕິສະມາທິທີ່ພິກຂຸຈະເລີນແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງເຮັດໃຫ້ສະຕິປັດຖານ ໔ ປະການບໍລິບູນ

ຄື ພິກຂຸໃນທຳວິໄນນີ້ໄປສູ່ປ່າກໍດີ ຯລຯ

ພິກຂຸທັງຫຼາຍ ໂພດຊົງ ໗ ປະການທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ຈຶ່ງເຮັດໃຫ້ວິດຊາແລະວິມຸດຕິບໍລິບູນ

**ປະຖົມພິກຂຸສູດທີ ໕ ຈົບ**

# ໖. ທຸຕິຍະພິກຂຸສູດ
## ວ່າດ້ວຍພິກຂຸ ສູດທີ ໘

[໙໙໘] ຄັ້ງນັ້ນ ພິກຂຸຫຼາຍຮູບເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຕັດຖາມພິກຂຸທັງຫຼາຍດັ່ງນີ້ວ່າ ພິກຂຸທັງຫຼາຍ ທຳອັນເປັນເອກທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໔ ປະການບໍລິບູນ ທຳ ໔ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໗ ປະການ ບໍລິບູນ ທຳ ໗ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໒ ປະການ ບໍລິບູນ ມີຢູ່ບໍ?

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ຯລຯ ພິກຂຸທັງຫຼາຍໄດ້ສະດັບຈາກພຣະຜູ້ມີພຣະພາກເຈົ້າ ແລ້ວຈັກຊົງຈຳໄວ້

ພິກຂຸທັງຫຼາຍ ທຳອັນເປັນເອກທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໔ ປະການບໍລິບູນ ທຳ ໔ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໗ ປະການບໍລິບູນ ທຳ ໗ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໒ ປະການບໍລິບູນ ມີຢູ່

ທຳອັນເປັນເອກທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໔ ປະການບໍລິບູນ ທຳ ໔ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໗ ປະການບໍລິບູນ ທຳ ໗ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ທຳ ໒ ປະການບໍລິບູນ ເປັນແນວໃດ?

ຄື ທຳອັນເປັນເອກຄືອານາປານະສະຕິສະມາທິທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ສະຕິປັດຖານ ໔ ປະການບໍລິບູນ ສະຕິປັດຖານ ໔ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ໂພດຊົງ ໗ ປະການບໍລິບູນ ໂພດຊົງ ໗ ປະການທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ວິດຊາແລະວິມຸດຕິບໍລິບູນ

ອານາປານະສະຕິສະມາທິທີ່ພິກຂຸຈະເລີນແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງເຮັດໃຫ້ສະຕິປັດຖານ ໔ ປະການບໍລິບູນ

ຄື ພິກຂຸໃນທຳວິໄນນີ້ໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງກໍດີ ນັ່ງຄູ້ບັນລັງຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າ ທ່ານມີສະຕິຫັນໃຈເຂົ້າ ມີສະຕິຫັນໃຈອອກ ຯລຯ ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມສະລະຄືນ ຫັນໃຈເຂົ້າ ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມສະລະຄືນ ຫັນໃຈອອກ

໑. ສະໄໝໃດ ພິກຂຸເມື່ອຫັນໃຈເຂົ້າຍາວກໍຮູ້ແຈ້ງວ່າຫັນໃຈເຂົ້າຍາວ ຫຼືເມື່ອຫັນໃຈອອກຍາວກໍຮູ້ແຈ້ງວ່າຫັນໃຈອອກຍາວ ເມື່ອຫັນໃຈເຂົ້າສັ້ນກໍຮູ້ແຈ້ງວ່າຫັນໃຈເຂົ້າສັ້ນ ຯລຯ ໃສ່ໃຈວ່າຈະຮູ້ແຈ້ງກອງລົມທັງປວງ ຯລຯ ໃສ່ໃຈວ່າ ຈະລະງັບກາຍສັງຂານ ຫັນໃຈເຂົ້າ ໃສ່ໃຈວ່າ ຈະລະງັບກາຍສັງຂານ ຫັນໃຈອອກ ສະໄໝນັ້ນ ພິກຂຸພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນເຮົາກ່າວກາຍແນວໜຶ່ງ ຄືລົມຫັນໃຈເຂົ້າແລະລົມຫັນໃຈອອກ ຍ້ອນເຫດນັ້ນ ສະໄໝນັ້ນ ພິກຂຸພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

໒. ສະໄໝໃດ ພິກຂຸໃສ່ໃຈວ່າ ຈະຮູ້ແຈ້ງປີຕິ ຯລຯ ຈະຮູ້ແຈ້ງສຸກ ຯລຯ ຈະຮູ້ແຈ້ງຈິດຕະສັງຂານ ຯລຯ ໃສ່ໃຈວ່າ ຈະລະງັບຈິດຕະສັງຂານ ຫັນໃຈເຂົ້າ ໃສ່ໃຈວ່າ ຈະລະງັບຈິດຕະສັງຂານ ຫັນໃຈອອກ ສະໄໝນັ້ນ ພິກຂຸພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ຂໍ້ນັ້ນຍ້ອນເຫດໃດ ຍ້ອນເຮົາກ່າວເວທະນາແນວໜຶ່ງ ຄື ການມະນະສິການ ໃຫ້ດີເຖິງລົມຫັນໃຈເຂົ້າແລະລົມຫັນໃຈອອກ ຍ້ອນເຫດນັ້ນ ສະໄໝນັ້ນ ພິກຂຸພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

໓. ສະໄໝໃດ ພິກຂຸໃສ່ໃຈວ່າ ຈະຮູ້ແຈ້ງຈິດ ຯລຯ ຈະຍັງຈິດໃຫ້ບັນເທີງ ຯລຯ ໃສ່ໃຈວ່າ ຈະຕັ້ງຈິດໝັ້ນ ຫັນໃຈເຂົ້າ ໃສ່ໃຈວ່າ ຈະຕັ້ງຈິດໝັ້ນ ຫັນໃຈອອກ ໃສ່ໃຈວ່າ ຈະປົດເປືອງຈິດ ຫັນໃຈເຂົ້າ ໃສ່ໃຈວ່າ ຈະປົດເປືອງຈິດ ຫັນໃຈອອກ ສະໄໝນັ້ນ ພິກຂຸພິຈາລະນາເຫັນຈິດໃນຈິດຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ຂໍ້ນັ້ນ

ຍ້ອນເຫດໃດ ຍ້ອນເຮົາບໍ່ກ່າວການຈະເລີນອານາປານະສະຕິສະມາທິໄວ້ສຳລັບຜູ້ຫຼົງລືມສະຕິ ບໍ່ມີສຳປະຊັນຍະ ຍ້ອນເຫດນັ້ນ ສະໄໝນັ້ນ ພິກຂຸພິຈາລະນາເຫັນຈິດໃນຈິດຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດ ອະພິດຊາແລະໂທມະນັດໃນໂລກໄດ້

໔. ສະໄໝໃດ ພິກຂຸໃສ່ໃຈວ່າ ຈະພິຈາລະນາເຫັນຄວາມບໍ່ທ່ຽງ ຯລຯ ຈະພິຈາລະນາເຫັນຄວາມຄາຍອອກໄດ້ ຯລຯ ຈະພິຈາລະນາເຫັນຄວາມດັບໄປ ຯລຯ ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມສະລະຄືນ ຫັນໃຈເຂົ້າ ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມສະລະຄືນ ຫັນໃຈອອກ ສະໄໝນັ້ນ ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ທ່ານເຫັນການລະອະພິດຊາແລະໂທມະນັດນັ້ນດ້ວຍປັນຍາແລ້ວວາງເສີຍຢ່າງດີ ຍ້ອນເຫດນັ້ນ ສະໄໝນັ້ນ ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາແລະໂທມະນັດໃນໂລກໄດ້

ພິກຂຸທັງຫຼາຍ ອານາປານະສະຕິສະມາທິທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ຈຶ່ງເຮັດໃຫ້ສະຕິປັດຖານ ໔ ປະການບໍລິບູນ

ສະຕິປັດຖານ ໔ ປະການທີ່ພິກຂຸຈະເລີນແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງເຮັດໃຫ້ ໂພດຊົງ ໗ ປະການບໍລິບູນ ຄື

໑. ສະໄໝໃດ ພິກຂຸພິຈາລະນາເຫັນກາຍໃນກາຍຢູ່ ສະໄໝນັ້ນ ສະຕິຂອງທ່ານຕັ້ງໝັ້ນບໍ່ຫຼົງລືມ

(໑) ສະໄໝໃດ ສະຕິຂອງພິກຂຸຕັ້ງໝັ້ນ ບໍ່ຫຼົງລືມ ສະໄໝນັ້ນ ສະຕິສຳໂພດຊົງເປັນອັນພິກຂຸຜາຣົບແລ້ວ ພິກຂຸຈະເລີນສະຕິສຳໂພດຊົງ ສະຕິສຳໂພດຊົງຈຶ່ງເຖິງຄວາມຈະເລີນເຕັມທີ່ແກ່ພິກຂຸ

(໒) ທ່ານມີສະຕິຢູ່ແນວນັ້ນ ຄົ້ນຫາພິຈາລະນາສອດສ່ອງທຳນັ້ນດ້ວຍປັນຍາ ສະໄໝໃດ ພິກຂຸມີສະຕິຢູ່ແນວນັ້ນ ຄົ້ນຫາພິຈາລະນາສອດສ່ອງທຳນັ້ນດ້ວຍປັນຍາ ສະໄໝນັ້ນ ທຳມະວິຈະຍະສຳໂພດຊົງເປັນອັນພິກຂຸຜາຣົບແລ້ວ ພິກຂຸຈະເລີນທຳມະວິຈະຍະສຳໂພດຊົງ ທຳມະວິຈະຍະສຳໂພດຊົງຈຶ່ງເຖິງຄວາມຈະເລີນເຕັມທີ່ແກ່ພິກຂຸ

(໓) ເມື່ອທ່ານຄົ້ນຫາພິຈາລະນາສອດສ່ອງທຳນັ້ນດ້ວຍປັນຍາ ຄວາມພຽນອັນບໍ່ຫຍ່ອນຍານຊື່ວ່າເປັນອັນພິກຂຸຜາຣົບແລ້ວ ສະໄໝໃດ ຄວາມພຽນບໍ່ຫຍ່ອນຍານເປັນອັນພິກຂຸຜູ້ຄົ້ນຄວ້າພິຈາລະນາສອດສ່ອງທຳນັ້ນດ້ວຍປັນຍາຜາຣົບແລ້ວ ສະໄໝນັ້ນ ວິຣິຍະສຳໂພດຊົງເປັນອັນພິກຂຸຜາຣົບແລ້ວ ພິກຂຸ

ຈະເລີນວິຣິຍະສຳໂພດຊົງ ວິຣິຍະສຳໂພດຊົງຈຶ່ງເຖິງຄວາມຈະເລີນເຕັມທີ່ແກ່ພິກຂຸ

(໔) ປີຕິບໍ່ມີອາມິດຍ່ອມເກີດແກ່ພິກຂຸຜູ້ຜາຣົບຄວາມພຽນ ສະໄໝໃດ ປີຕິບໍ່ມີອາມິດເກີດແກ່ພິກຂຸຜູ້ຜາຣົບຄວາມພຽນ ສະໄໝນັ້ນ ປີຕິສຳໂພດຊົງເປັນອັນພິກຂຸຜາຣົບແລ້ວ ພິກຂຸຈະເລີນປີຕິສຳໂພດຊົງ ປີຕິສຳໂພດຊົງຈຶ່ງເຖິງຄວາມຈະເລີນເຕັມທີ່ແກ່ພິກຂຸ

(໕) ແມ່ນກາຍຂອງພິກຂຸຜູ້ມີໃຈມີປີຕິຍ່ອມລະງັບ ແມ່ນຈິດກໍລະງັບ ສະໄໝໃດ ແມ່ນກາຍຂອງພິກຂຸຜູ້ມີໃຈມີປີຕິຍ່ອມລະງັບ ແມ່ນຈິດກໍລະງັບ ສະໄໝນັ້ນ ປັດສັດທິສຳໂພດຊົງເປັນອັນພິກຂຸຜາຣົບແລ້ວ ພິກຂຸຈະເລີນປັດສັດທິສຳໂພດຊົງ ປັສສັທທິສຳໂພດຊົງຈຶ່ງເຖິງຄວາມຈະເລີນເຕັມທີ່ແກ່ພິກຂຸ

(໖) ຈິດຂອງພິກຂຸຜູ້ມີກາຍລະງັບ ມີສຸກ ຍ່ອມຕັ້ງໝັ້ນ ສະໄໝໃດ ຈິດຂອງພິກຂຸຜູ້ມີກາຍລະງັບ ມີສຸກ ຍ່ອມຕັ້ງໝັ້ນ ສະໄໝນັ້ນ ສະມາທິສຳໂພດຊົງເປັນອັນພິກຂຸຜາຣົບແລ້ວ ພິກຂຸຈະເລີນສະມາທິສຳໂພດຊົງ ສະມາທິສຳໂພດຊົງຈຶ່ງເຖິງຄວາມຈະເລີນເຕັມທີ່ແກ່ພິກຂຸ

(໗) ທ່ານຍ່ອມເພ່ງຈິດທີ່ຕັ້ງໝັ້ນເຊັ່ນນັ້ນຢ່າງດີ ສະໄໝໃດ ພິກຂຸຍ່ອມເພ່ງຈິດທີ່ຕັ້ງໝັ້ນເຊັ່ນນັ້ນຢ່າງດີ ສະໄໝນັ້ນ ອຸເປກຂາສຳໂພດຊົງ ເປັນອັນພິກຂຸຜາຣົບແລ້ວ ພິກຂຸຈະເລີນອຸເປກຂາສຳໂພດຊົງ ອຸເປກຂາສຳໂພດຊົງຈຶ່ງເຖິງຄວາມຈະເລີນເຕັມທີ່ແກ່ພິກຂຸ

໘. ສະໄໝໃດ ພິກຂຸພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ

໙. ສະໄໝໃດ ພິກຂຸພິຈາລະນາເຫັນຈິດໃນຈິດ ຯລຯ

໔. ສະໄໝໃດ ພິກຂຸພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ສະໄໝນັ້ນ ສະຕິຂອງທ່ານຍ່ອມຕັ້ງໝັ້ນ ບໍ່ຫຼົງລືມ

(໑) ສະໄໝໃດ ສະຕິຂອງພິກຂຸຍ່ອມຕັ້ງໝັ້ນ ບໍ່ຫຼົງລືມ ສະໄໝນັ້ນສະຕິສຳໂພດຊົງເປັນອັນພິກຂຸຜາຣົບແລ້ວ ພິກຂຸຈະເລີນສະຕິສຳໂພດຊົງ ສະຕິສຳໂພດຊົງຈຶ່ງເຖິງຄວາມຈະເລີນເຕັມທີ່ແກ່ພິກຂຸ

ຯລຯ

(໗) ທ່ານຍ່ອມເພ່ງຈິດທີ່ຕັ້ງໝັ້ນເຊັ່ນນັ້ນຢ່າງດີ ສະໄໝໃດ ພິກຂຸເພ່ງຈິດທີ່ຕັ້ງ

ໝັ້ນເຊັ່ນນັ້ນຢ່າງດີ ສະໄໝນັ້ນ ອຸເປກຂາສຳໂພດຊົງເປັນອັນພິກຂຸຜາຣົບແລ້ວ ພິກຂຸຈະເລີນອຸເປກຂາສຳໂພດຊົງ ອຸເປກຂາສຳໂພດຊົງຈຶ່ງເຖິງຄວາມຈະເລີນເຕັມທີ່ແກ່ພິກຂຸ

ພິກຂຸທັງຫຼາຍ ສະຕິປັດຖານ ໔ ປະການທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ຈຶ່ງເຮັດໃຫ້ໂພດຊົງ ໗ ປະການບໍລິບູນ

ໂພດຊົງ ໗ ປະການທີ່ພິກຂຸຈະເລີນແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງເຮັດໃຫ້ວິດຊາແລະວິມຸດຕິບໍລິບູນ

ຄື ພິກຂຸໃນທຳວິໄນນີ້

໑. ຈະເລີນສະຕິສຳໂພດຊົງ ອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

໒. ຈະເລີນທຳມະວິຈະຍະສຳໂພດຊົງ ອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ຯລຯ

໗. ຈະເລີນອຸເປກຂາສຳໂພດຊົງ ອັນອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸທັງຫຼາຍ ໂພດຊົງ ໗ ປະການທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ຈຶ່ງເຮັດໃຫ້ວິດຊາ ແລະວິມຸດຕິບໍລິບູນ

**ທຸຕິຍະພິກຂຸສູດທີ ໖ ຈົບ**

# ໗. ສັນໂຍຊະນັບປະຫານະສູດ

## ວ່າດ້ວຍທຳທີ່ເປັນໄປເພື່ອລະສັງໂຍດ

[໑໔໑] ພິກຂຸທັງຫຼາຍ ອານາປານະສະຕິສະມາທິທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວຍ່ອມເປັນໄປເພື່ອລະສັງໂຍດ

ອານາປານະສະຕິສະມາທິທີ່ພິກຂຸຈະເລີນແນວໃດ ເຮັດໃຫ້ຫຼາຍແລ້ວແນວໃດ ຈຶ່ງເປັນໄປເພື່ອລະສັງໂຍດ

ຄື ພິກຂຸໃນທຳວິໄນນີ້ ຯລຯ ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມສະລະຄືນທັນໃຈເຂົ້າ ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມສະລະຄືນ ທັນໃຈອອກ

ພິກຂຸທັງຫຼາຍ ອານາປານະສະຕິສະມາທິທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວ ແນວນີ້ ຈຶ່ງເປັນໄປເພື່ອລະສັງໂຍດ

**ສັນໂຍຊະນັບປະຫານະສູດທີ ໗ ຈົບ**

## ໘. ອະນຸສະຍະສະມຸກຄາຕະສູດ
## ວ່າດ້ວຍທຳທີ່ເປັນໄປເພື່ອຖອນອະນຸໄສ

[໑໙໘] ພິກຂຸທັງຫຼາຍ ອານາປານະສະຕິສະມາທິທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຖອນອະນຸໄສ

(ເພິ່ງເພີ່ມຂໍ້ຄວາມທີ່ເຫຼືອໃຫ້ພິດສະດານ)

ອານາປານະສະຕິສະມາທິທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ຈຶ່ງເປັນ ໄປເພື່ອຖອນອະນຸໄສ

**ອະນຸສະຍະສະມຸກຄາຕະສູດທີ ໘ ຈົບ**

## ໙. ອັດທານະປະຣິນຍາສູດ
## ວ່າດ້ວຍທຳທີ່ເປັນໄປເພື່ອກຳນົດຮູ້ອັດທານະ

[໑໙໙] ພິກຂຸທັງຫຼາຍ ອານາປານະສະຕິສະມາທິທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອກຳນົດຮູ້ອັດທານະ (ທາງໄກ) (ເພິ່ງເພີ່ມຂໍ້ຄວາມທີ່ເຫຼືອໃຫ້ພິດສະດານ) ຯລຯ ອານາປານະສະຕິສະມາທິທີ່ພິກຂຸຈະເລີນແນວນີ້ແລ ເຮັດໃຫ້ຫຼາຍແລ້ວແນວນີ້ ຈຶ່ງເປັນໄປເພື່ອ ກຳນົດຮູ້ອັດທານະ

**ອັດທານະປະຣິນຍາສູດທີ ໙ ຈົບ**

## ໑໐. ອາສະວັກຂະຍະສູດ
## ວ່າດ້ວຍທຳທີ່ເປັນໄປເພື່ອຄວາມສິ້ນອາສະວະ

[໑໙໑໐] ພິກຂຸທັງຫຼາຍ ອານາປານະສະຕິສະມາທິທີ່ພິກຂຸຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມສິ້ນອາສະວະ

(ເພິ່ງເພີ່ມຂໍ້ຄວາມທີ່ເຫຼືອໃຫ້ພິດສະດານ)

ອານາປານະສະຕິສະມາທິທີ່ພິກຂຸຈະເລີນແບບນີ້ແລ ເຮັດໃຫ້ຫຼາຍແບບນີ້ ຈຶ່ງເປັນໄປເພື່ອຄວາມສິ້ນອາສະວະ

**ອາສະວັກຂະຍະສູດທີ ໑໐ ຈົບ**

**ທຸຕິຍະວັກທີ ໒ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



**ອານາປານະສັງຍຸດທີ ໑໐ ຈົບ**

# ໑໑. ໂສຕາປັດຕິສັງຍຸດ

## ໑. ເວລຸທະວາຣະວັກ

### ໝວດວ່າດ້ວຍເວລຸທະວາຣະຄາມ

## ໑. ຈັກກະວັດຕິຣາຊະສູດ

### ວ່າດ້ວຍພຣະເຈົ້າຈັກກະພັດ

[໙໙໗] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າ ໗ລ໗ ຈຶ່ງໄດ້ຕັດເລື້ອງນີ້ວ່າ ພິກຂຸທັງຫຼາຍ ພຣະເຈົ້າຈັກກະພັດຊົງຄອງຣາດເປັນອິດສະຣາທິບໍດີແຫ່ງທະວີບທັງ ໔ ຫຼັງຈາກສະເດັດສະຫວັນຄົດແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເຫຼົ່າເທບຊັ້ນຕາວະຕິງສາ ພຣະອົງຊົງຮ້ອມລ້ອມດ້ວຍໝູ່ນາງອັບປະສອນ ພຽບພ້ອມ ປິ່ນເປີຕົນດ້ວຍກາມມະຄຸນ ໕ ປະການທີ່ເປັນ ທິບ ສຸກສະບາຍພຣະທະໄທໃນສວນນັນທະວັນ ທີ່ພົບຕາວະຕິງສານັ້ນ ພຣະອົງບໍ່ຊົງປະກອບດ້ວຍທຳ ໔ ປະການ ແມ່ນກໍຈິງ ເຖິງແນວນັ້ນ ກໍບໍ່ຊົງພົ້ນຈາກນະຣົກ ບໍ່ຊົງພົ້ນຈາກກຳເນີດສັດເດຍຣັດສານ ບໍ່ຊົງພົ້ນຈາກພູມແຫ່ງເຜດ ແລະ ບໍ່ຊົງພົ້ນຈາກອະບາຍ ທຸກຄະຕິ ແລະວິນິບາດໄປໄດ້

ພິກຂຸທັງຫຼາຍ ອະຣິຍະສາວົກລ້ຽງອັດຕະພາບດ້ວຍອາຫານ ທີ່ສະແຫວງຫາມາໄດ້ດ້ວຍລຳແຂ່ງ ນຸ່ງຫົ່ມຜ້າທີ່ເສົ້າໝອງ ທ່ານປະກອບດ້ວຍທຳ ໔ ປະການ ແມ່ນກໍຈິງ ເຖິງແນວນັ້ນ ກໍພົ້ນຈາກນະຣົກ ພົ້ນຈາກກຳເນີດສັດເດຍຣັດສານ ພົ້ນຈາກພູມແຫ່ງເຜດ ແລະພົ້ນຈາກອະບາຍ ທຸກຄະຕິ ແລະວິນິບາດໄປໄດ້

ທຳ ໔ ປະການ ອັນໃດແດ່

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ

ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ

໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳວ່າ ພຣະທຳ ເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ[១] ຄວນຮຽກໃຫ້ມາເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ

໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງວ່າ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າ ເປັນຜູ້ປະຕິບັດດີ ປະຕິບັດກົງ ປະຕິບັດຖືກທາງ ປະຕິບັດສົມຄວນ ໄດ້ແກ່ ອະຣິຍະບຸກຄົນ ໔ ຄູ່ ຄື ໘ ບຸກຄົນ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້ານີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

໔. ປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈ ທີ່ບໍ່ຂາດ ບໍ່ຊອດ ບໍ່ດ່າງ ບໍ່ໝອງ ເປັນອິດສະຫຼະ ທ່ານຜູ້ຮູ້ສັນເສີນ ບໍ່ຖືກຕັນຫາແລະທິດຖິຄອບງຳ ເປັນໄປເພື່ອສະມາທິ

ອະຣິຍະສາວົກຜູ້ປະກອບດ້ວຍທຳ ໔ ປະການນີ້ແລ

ພິກຂຸທັງຫຼາຍ ການໄດ້ຄອງທະວີບທັງ ໔ ກັບການໄດ້ທຳ ໔ ປະການ ການຄອງ ທະວີບທັງ ໔ ຍັງບໍ່ເຖິງເສດໜຶ່ງສ່ວນສິບຫົກແຫ່ງການໄດ້ທຳ ໔ ປະການເລີຍ

**ຈັກກະວັດຕິຣາຊະສູດທີ ໑ ຈົບ**

# ໒. ພົມຈະຣິໂຍຄະທະສູດ

## ວ່າດ້ວຍຜູ້ປະສົບສຸກອັນຍັ່ງລົງສູ່ພົມມະຈັນ

[໙໙໘] ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ປະກອບດ້ວຍທຳ ໔ ປະການ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ທຳ ໔ ປະການ ອັນໃດແດ່?

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິຊາແລະຈະຣະນະສະ ເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ

໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ฯລฯ

໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ฯລฯ

໔. ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ฯລฯ ເປັນໄປເພື່ອສະມາທິ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ປະກອບດ້ວຍທຳ ໔ ປະການນີ້ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ສັດທາ ສິນ ຄວາມເຫຼື້ອມໃສ
ແລະການເຫັນທຳ ມີຢູ່ແກ່ຊົນເຫຼົ່າໃດ
ຊົນເຫຼົ່ານັ້ນ ຍ່ອມປະສົບສຸກ
ອັນຍັ່ງລົງສູ່ພົມມະຈັນຕະຫຼອດການ

**ພົມຈະຣິໂຍຄະທະສູດທີ ໒ ຈົບ**

# ໓. ທີຄາວຸອຸປາສະກະສູດ

## ວ່າດ້ວຍທີຄາວຸອຸປາສົກ

[໑໑໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ວັດພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດເມືອງຣາດຊະຄຶ ສະໄໝນັ້ນ ອຸປາສົກຊື່ທີຄາວຸປ່ວຍ ໄດ້ຮັບທຸກ ເປັນໄຂ້ໜັກ ໄດ້ຮຽກ ຄະຫະບໍດີຊື່ໂຊຕິຍະຜູ້ເປັນບິດາມາຂໍຮ້ອງວ່າ ມາເທີ້ນພໍ່ ຂໍພໍ່ຈົ່ງເຂົ້າໄປເຝົ້າພຣະຜູ້

ມີພຣະພາກເຈົ້າ ຂາບພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມແລ້ວ ຂາບທູນຕາມຄຳຂອງຂ້ານ້ອຍວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທີຄາວຸອຸປາສົກປ່ວຍ ໄດ້ຮັບທຸກ ເປັນໄຂ້ໜັກ ເຂົາຂໍຂາບພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ແລະພໍ່ຈົ່ງຂາບທູນແນວນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂອກາດ ຂໍພຣະຜູ້ມີພຣະພາກເຈົ້າໄດ້ໂຜດອະນຸເຄາະ ສະເດັດໄປຢ້ຽມທີຄາວຸອຸປາສົກເຖິງນິເວດດ້ວຍເທີ້ນ

ໂຊຕິຍະຄະຫະບໍດີຮັບຄຳແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທີຄາວຸອຸປາສົກປ່ວຍ ໄດ້ຮັບທຸກ ເປັນໄຂ້ໜັກ ເຂົາຂໍຂາບພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ແລະ ຝາກມາຂາບທູນແນວນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂອກາດ ຂໍພຣະອົງໄດ້ໂຜດອະນຸເຄາະສະເດັດໄປຢ້ຽມທີຄາວຸອຸປາສົກເຖິງນິເວດດ້ວຍເທີ້ນ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າ ຊົງຮັບນິມົນໂດຍດຸດສະນີພາບ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນສະເດັດໄປສູ່ນິເວດຂອງທີຄາວຸອຸປາສົກ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ຕັດຖາມທີຄາວຸອຸປາສົກດັ່ງນີ້ວ່າ ທີຄາວຸ ທ່ານຍັງສະບາຍດີບໍ ຍັງພໍເປັນຢູ່ໄດ້ບໍ ທຸກຂະເວທະນາ ທຸເລົາລົງ ບໍ່ກຳເຣີບຂຶ້ນບໍ ອາການທຸເລົາຜາກົດ ອາການກຳເຣີບບໍ່ຜາກົດບໍ?

ທີຄາວຸອຸປາສົກທູນຕອບວ່າ ຂ້າພຣະອົງບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ທຸກຂະເວທະນາມີແຕ່ກຳເຣີບຂຶ້ນ ບໍ່ທຸເລົາລົງເລີຍ ອາການກຳເຣີບຜາກົດ ອາການທຸເລົາບໍ່ຜາກົດ ຂ້ານ້ອຍ

ທີຄາວຸ ຍ້ອນເຫດນັ້ນ ທ່ານເພິ່ງໃສ່ໃຈວ່າ ເຮົາ

໑. ຈັກປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ
໒. ຈັກປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ
໓. ຈັກປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ
໔. ຈັກປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອ ສະມາທິ

ທີຄາວຸ ທ່ານເພິ່ງຕັ້ງໃຈຮູ້ແນວນີ້ແລ

ຂ້າແດ່ ພຣະອົງຜູ້ຈະເລີນ ອົງເຄື່ອງບັນລຸໂສດາ ໔ ປະການໃດທີ່ພຣະຜູ້ມີພຣະພາກເຈົ້າໄດ້ຊົງສະແດງໄວ້ ທຳ (ຄືອົງເຄື່ອງບັນລຸໂສດາ) ເຫຼົ່ານັ້ນມີຢູ່ໃນຂ້າພຣະອົງ ແລະຂ້າພຣະອົງກໍເຫັນທຳເຫຼົ່ານັ້ນ ກໍຂ້າພຣະອົງຈັກ

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ

໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ

໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ

໔. ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ

ທີຄາວຸ ຍ້ອນເຫດນັ້ນ ທ່ານເພິ່ງຕັ້ງຢູ່ໃນອົງເຄື່ອງບັນລຸໂສດາ ໔ ປະການນີ້ແລ້ວ ຈະເລີນທຳອັນເປັນສ່ວນແຫ່ງວິດຊາ ໖ ປະການໃຫ້ຍິ່ງຂຶ້ນໄປວ່າ ທີຄາວຸ ໃນເລື້ອງນີ້ ທ່ານຈົ່ງພິຈາລະນາເຫັນໃນສັງຂານທັງປວງວ່າບໍ່ທ່ຽງ ມີຄວາມໝາຍຮູ້ໃນສິ່ງທີ່ບໍ່ທ່ຽງວ່າເປັນທຸກ ມີຄວາມໝາຍຮູ້ໃນສິ່ງທີ່ເປັນທຸກວ່າເປັນອະນັດຕາ ມີຄວາມໝາຍຮູ້ໃນການລະ ມີຄວາມໝາຍຮູ້ໃນການຄາຍອອກໄດ້ ມີຄວາມໝາຍຮູ້ໃນຄວາມດັບ ທີຄາວຸ ທ່ານເພິ່ງຕັ້ງໃຈຮູ້ ແນວນີ້ແລ

ຂ້າແດ່ ພຣະອົງຜູ້ຈະເລີນ ທຳອັນເປັນສ່ວນແຫ່ງວິດຊາ ໖ ປະການໃດທີ່ພຣະຜູ້ມີພຣະພາກເຈົ້າໄດ້ຊົງສະແດງໄວ້ ທຳເຫຼົ່ານັ້ນມີຢູ່ໃນຂ້າພຣະອົງ ແລະຂ້າພຣະອົງກໍເຫັນທຳເຫຼົ່ານັ້ນ ຂ້າພຣະອົງພິຈາລະນາເຫັນໃນສັງຂານທັງປວງວ່າບໍ່ທ່ຽງ ມີຄວາມໝາຍຮູ້ໃນສິ່ງທີ່ບໍ່ທ່ຽງວ່າເປັນທຸກ ມີຄວາມໝາຍຮູ້ໃນສິ່ງທີ່ເປັນທຸກວ່າເປັນອະນັດຕາ ມີຄວາມໝາຍຮູ້ໃນການລະ ມີຄວາມໝາຍຮູ້ໃນການຄາຍອອກໄດ້ ມີຄວາມໝາຍຮູ້ໃນຄວາມດັບ ອີກແນວໜຶ່ງ ຂ້າພຣະອົງມີຄວາມຄິດວ່າ ເມື່ອຂ້າພຣະອົງລ່ວງລັບໄປ ໂຊຕິຍະຄະຫະບໍດີນີ້ຢ່າໄດ້ເຖິງຄວາມຄັບແຄ້ນເລີຍ

ໂຊຕິຍະຄະຫະບໍດີກ່າວວ່າ ທີຄາວຸ ທ່ານຢ່າໄດ້ໃສ່ໃຈແນວນັ້ນເລີຍ ທ່ານຈົ່ງໃສ່ໃຈເຖິງພຣະພຸດທະພົດທີ່ພຣະຜູ້ມີພຣະພາກເຈົ້າໄດ້ຕັດໄວ້ນັ້ນແລໃຫ້ດີເທີ້ນ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດສອນທີຄາວຸອຸປາສົກດ້ວຍພຣະໂອວາດນີ້ແລ້ວ ກໍສະເດັດລຸກຈາກອາສະນະຈາກໄປ ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຈາກໄປບໍ່ດົນ ທີຄາວຸອຸປາສົກກໍໄດ້ເຖິງແກ່ກຳ

ຕໍ່ມາ ພິກຂຸຫຼາຍອົງພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້

ຈະເລີນ ທີຄາວຸອຸປາສົກທີ່ພຣະອົງຕັດສອນດ້ວຍພຣະໂອວາດໂດຍຫຍໍ້ ໄດ້ເຖິງແກ່ກຳແລ້ວ ຄະຕິຂອງເຂົາ ເປັນແນວໃດ? ອະພິສຳປະຣາຍະພົບ ເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າໄດ້ຕັດຕອບວ່າ ພິກຂຸທັງຫຼາຍ ທີຄາວຸອຸປາສົກເປັນບັນດິດ ເວົ້າຄວາມຈິງຖືກຕ້ອງຕາມທຳ ທັງບໍ່ບຽດບຽນເຮົາຍ້ອນເຫດແຫ່ງທຳ ພິກຂຸທັງຫຼາຍ ຍ້ອນໂອຣຳພາຄິຍະສັງໂຍດ (ສັງໂຍດເບື້ອງຕ່ຳ) ໕ ປະການສິ້ນໄປ ທີຄາວຸອຸປາສົກຈຶ່ງເປັນໂອປະປາຕິກະປະຣິນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນອີກ

**ທີຄາວຸອຸປາສະກະສູດທີ ໓ ຈົບ**

# ໔. ປະຖົມສາຣີປຸດຕະສູດ

## ວ່າດ້ວຍພຣະສາຣີບຸດ ສູດທີ ໑

[໑໐໐໐] ສະໄໝໜຶ່ງ ທ່ານພຣະສາຣີບຸດ ແລະທ່ານພຣະອານົນຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດເມືອງສາວັດຖີ ເມື່ອໃນເວລາຄ່ຳ ທ່ານພຣະອານົນອອກຈາກບ່ອນຫຼີບຫຼີກແລ້ວ ເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ ໄຫວ້ແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະສາຣີບຸດດັ່ງນີ້ວ່າ ທ່ານສາຣີບຸດ ຍ້ອນປະກອບດ້ວຍທຳທີ່ໃດ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຊົງພະຍາກອນໝູ່ສັດນີ້ວ່າ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ທ່ານພຣະສາຣີບຸດຕອບວ່າ ຜູ້ມີອາຍຸ ຍ້ອນປະກອບດ້ວຍທຳ ໔ ປະການ ພຣະຜູ້ມີພຣະພາກເຈົ້າຈຶ່ງຊົງພະຍາກອນໝູ່ສັດນີ້ວ່າ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ທຳ ໔ ປະການ ອັນໃດແດ່

ຄື ອະຣິຍະສາວົກໃນພຣະທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ໆລໆ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ

໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ໆລໆ

໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ

໔. ປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ

ຜູ້ມີອາຍຸ ຍ້ອນປະກອບດ້ວຍທຳ ໔ ປະການນີ້ ພຣະຜູ້ມີພຣະພາກເຈົ້າ ຈຶ່ງຊົງພະຍາກອນໝູ່ສັດນີ້ວ່າ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

**ປະຖົມສາຣີປຸດຕະສູດທີ ໔ ຈົບ**

# ໕. ທຸຕິຍະສາຣີປຸດຕະສູດ

## ວ່າດ້ວຍພຣະສາຣີບຸດ ສູດທີ ໔

[໑໐໐໑] ຄັ້ງນັ້ນ ທ່ານພຣະສາຣີບຸດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດບ່ອນຢູ່ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມທ່ານພຣະສາຣີບຸດດັ່ງນີ້ວ່າ ສາຣີບຸດ ທີ່ຮຽກວ່າ ອົງເຄື່ອງບັນລຸໂສດາ ອົງເຄື່ອງບັນລຸໂສດາ ອົງເຄື່ອງບັນລຸໂສດາ ເປັນແນວໃດ?

ທ່ານພຣະສາຣີບຸດທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ສັປປຸຣິສະສັງເສວະ (ການຄົບຫາສັດຕະບຸຣຸດ) ເປັນອົງເຄື່ອງບັນລຸໂສດາ ສັດທຳມັດສະວະນະ (ການຟັງພຣະສັດທຳ) ເປັນອົງເຄື່ອງບັນລຸໂສດາ ໂຍນິໂສມະນະສິການ (ການມະນະສິການໂດຍແຍບຄາຍ) ເປັນອົງເຄື່ອງບັນລຸໂສດາ ທຳມານຸທຳມະປະຕິປັດຕິ (ການປະຕິບັດທຳສົມຄວນແກ່ທຳ) ເປັນອົງເຄື່ອງບັນລຸໂສດາ

ດີແລ້ວ ດີແລ້ວ ສາຣີບຸດ ສັປປຸຣິສະສັງເສວະເປັນອົງເຄື່ອງບັນລຸໂສດາ ສັດທຳມັດສະວະນະ ເປັນອົງເຄື່ອງບັນລຸໂສດາ ໂຍນິໂສມະນະສິການເປັນອົງເຄື່ອງບັນລຸໂສດາ ທຳມານຸທຳມະປະຕິປັດຕິເປັນອົງເຄື່ອງບັນລຸໂສດາ

ສາຣີບຸດ ທີ່ຮຽກວ່າ ໂສດາ ໂສດາ ໂສດາ ເປັນແນວໃດ?

ຂ້າແດ່ ພຣະອົງຜູ້ຈະເລີນ ອະຣິຍະມັກມີອົງ ໘ ຄື

| | |
|---|---|
| ໑. ສຳມາທິດຖິ | ໒. ສຳມາສັງກັບປະ |
| ໓. ສຳມາວາຈາ | ໔. ສຳມາກຳມັນຕະ |
| ໕. ສຳມາອາຊີວະ | ໖. ສຳມາວາຍາມະ |

໗. ສຳມາສະຕິ ໘. ສຳມາສະມາທິ

ນີ້ແລ ເປັນໂສດາ

ດີແລ້ວ ດີແລ້ວ ສາຣີບຸດ ອະຣິຍະມັກມີອົງ ໘ ຄື

໑. ສຳມາທິດຖິ ฯลฯ ໘. ສຳມາສະມາທິ

ນີ້ແລ ເປັນໂສດາ

ສາຣີບຸດທີ່ຮຽກວ່າ ຜູ້ບັນລຸໂສດາຄືໃຜ

ຂ້າແດ່ ພຣະອົງຜູ້ຈະເລີນ ຜູ້ໃດປະກອບດ້ວຍອະຣິຍະມັກມີອົງ ໘ ນີ້ ຜູ້ນີ້ຮຽກວ່າ ຜູ້ບັນລຸໂສດາ ທ່ານຜູ້ນີ້ ມີຊື່ແນວນີ້ ມີໂຄດແນວນີ້

ດີແລ້ວ ດີແລ້ວ ສາຣີບຸດ ຜູ້ໃດປະກອບດ້ວຍອະຣິຍະມັກມີອົງ ໘ ນີ້ ຜູ້ນີ້ຮຽກວ່າ ຜູ້ບັນລຸໂສດາ ທ່ານຜູ້ນີ້ ມີຊື່ແນວນີ້ ມີໂຄດແນວນີ້

**ທຸຕິຍະສາຣີປຸດຕະສູດທີ ໕ ຈົບ**

# ໖. ຖະປະຕິສູດ

## ວ່າດ້ວຍຊ່າງໄມ້

[໑໐໐໔] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ສະໄໝນັ້ນ ພິກຂຸຈຳນວນຫຼາຍ ເຮັດຈີວອນກຳເພື່ອຖວາຍພຣະຜູ້ມີພຣະພາກເຈົ້າດ້ວຍຫວັງວ່າ ພຣະຜູ້ມີພຣະພາກເຈົ້າ ຊົງມີຈີວອນສຳເລັດແລ້ວ ລ່ວງ ໓ ເດືອນ ກໍຈັກສະເດັດຈາຣິກຈາກໄປ

ສະໄໝນັ້ນ ຊ່າງໄມ້ຊື່ ອິສິທັດຕະ ແລະປຸຣານະອາໄສຢູ່ໃນໝູ່ບ້ານສ່ວຍຊື່ ສາທຸກະດ້ວຍວຽກງານບາງຢ່າງ ໄດ້ຮູ້ຂ່າວວ່າ ພິກຂຸຈຳນວນຫຼາຍເຮັດຈີວອນກຳເພື່ອຖວາຍພຣະຜູ້ມີ ພຣະພາກດ້ວຍຫວັງວ່າ ພຣະຜູ້ມີພຣະພາກເຈົ້າຊົງມີຈີວອນສຳເລັດແລ້ວ ລ່ວງໄປ ໓ ເດືອນ ກໍຈັກສະເດັດຈາຣິກໄປ

ຕໍ່ມາ ຊ່າງໄມ້ຊື່ ອິສິທັດຕະ ແລະປຸຣານະໄດ້ຈັດບຸຣຸດເຝົ້າຫົນທາງໄວ້ສັ່ງວ່າ ທ່ານຜູ້ຈະເລີນທັງຫຼາຍ ເມື່ອໃດ ທ່ານເຫັນພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ

ສະເດັດມາ ເມື່ອນັ້ນ ທ່ານກໍເພິ່ງບອກພວກເຮົາ ບຸຣຸດນັ້ນເຝົ້າຢູ່ໄດ້ ໔-໕ ມື້ ກໍໄດ້ເຫັນພຣະຜູ້ມີພຣະພາກເຈົ້າສະເດັດ ມາແຕ່ໄກ ຈຶ່ງເຂົ້າໄປຫາຊ່າງໄມ້ຊື່ ອິສິທັດຕະແລະປຸຣານະຮອດບ່ອນຢູ່ ແລ້ວບອກດັ່ງນີ້ວ່າ ທ່ານທັງຫຼາຍ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າກຳລັງສະເດັດມາ ຂໍທ່ານທັງຫຼາຍ ຈົ່ງຮູ້ເວລາອັນສົມຄວນໃນບັດນີ້ເທີ້ນ

ລຳດັບນັ້ນ ຊ່າງໄມ້ຊື່ອິສິທັດຕະ ແລະປຸຣານະໄດ້ເຂົ້າໄປເຝົ້າ ພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວ ຕາມສະເດັດພຣະຜູ້ມີພຣະພາກເຈົ້າໄປທາງເບື້ອງພຣະປຣິດສະດາງ ຂະນະນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງແວຂ້າງທາງສະເດັດເຂົ້າໄປສູ່ເຫງົ້າໄມ້ແຫ່ງໜຶ່ງ ແລ້ວປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ຊ່າງໄມ້ຊື່ອິສິທັດຕະ ແລະປຸຣານະຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອໃດ ຂ້າພຣະອົງທັງຫຼາຍໄດ້ຮູ້ຂ່າວພຣະຜູ້ມີພຣະພາກເຈົ້າວ່າ ຈັກສະເດັດຈາຣິກຈາກເມືອງສາວັດຖີໄປ (ຕາມເມືອງຕ່າງ ໆ) ໃນແຄວັນໂກສົນ ເມື່ອນັ້ນ ຂ້າພຣະອົງທັງຫຼາຍນ້ອຍໃຈ ແລະເສຍໃຈວ່າ ພຣະຜູ້ມີພຣະພາກເຈົ້າຈັກຫ່າງເຮົາທັງຫຼາຍໄປ ເມື່ອໃດ ໄດ້ຮູ້ຂ່າວວ່າ ໄດ້ສະເດັດຈາຣິກຈາກເມືອງສາວັດຖີໄປ (ຕາມເມືອງຕ່າງ ໆ) ໃນແຄວັນໂກສົນແລ້ວ ເມື່ອນັ້ນ ຂ້າພຣະອົງທັງຫຼາຍກໍນ້ອຍໃຈແລະເສຍໃຈວ່າ ພຣະຜູ້ມີພຣະພາກເຈົ້າໄດ້ຫ່າງເຮົາທັງຫຼາຍໄປ

ຂ້າແດ່ ພຣະອົງຜູ້ຈະເລີນ ອັນໜຶ່ງ ເມື່ອໃດ ຂ້າພຣະອົງທັງຫຼາຍໄດ້ຮູ້ຂ່າວພຣະຜູ້ມີພຣະພາຄວ່າ ຈັກສະເດັດຈາຣິກຈາກແຄວັນໂກສົນໄປສູ່ແຄວັນມັລລະ ເມື່ອນັ້ນ ຂ້າພຣະອົງທັງຫຼາຍນ້ອຍໃຈແລະເສຍໃຈວ່າ ພຣະຜູ້ມີພຣະພາກເຈົ້າຈັກຫ່າງເຮົາທັງຫຼາຍໄປ ແຕ່ເມື່ອໃດ ໄດ້ຮູ້ຂ່າວວ່າ ໄດ້ສະເດັດຈາຣິກຈາກແຄວັນໂກສົນໄປສູ່ແຄວັນມັລລະແລ້ວ ເມື່ອນັ້ນ

ຂ້າພຣະອົງທັງຫຼາຍກໍນ້ອຍໃຈແລະເສຍໃຈວ່າ ພຣະຜູ້ມີພຣະພາກເຈົ້າໄດ້ຫ່າງເຮົາທັງຫຼາຍໄປ ຂ້າແດ່ ພຣະອົງຜູ້ຈະເລີນ ອັນໜຶ່ງ ເມື່ອໃດ ຂ້າພຣະອົງທັງຫຼາຍໄດ້ຮູ້ຂ່າວພຣະຜູ້ມີພຣະພາກເຈົ້າວ່າ ຈັກສະເດັດຈາຣິກຈາກແຄວັນມັລລະໄປສູ່ແຄວັນວັດຊີ ເມື່ອນັ້ນ ຂ້າພຣະອົງທັງຫຼາຍນ້ອຍໃຈ ແລະເສຍໃຈວ່າ ພຣະຜູ້ມີພຣະພາກເຈົ້າຈັກຫ່າງເຮົາທັງຫຼາຍໄປ

ເມື່ອໃດ ໄດ້ຮູ້ຂ່າວວ່າ ໄດ້ສະເດັດຈາຣິກຈາກແຄວັນມັນລະໄປສູ່ແຄວັນວັດຊີແລ້ວ ເມື່ອນັ້ນ ຂ້າພຣະອົງທັງຫຼາຍ ກໍນ້ອຍໃຈ ແລະເສຍໃຈວ່າ ພຣະຜູ້ມີພຣະພາກເຈົ້າໄດ້ຫ່າງເຮົາທັງຫຼາຍໄປ

ຂ້າແດ່ ພຣະອົງຜູ້ຈະເລີນ ອັນໜຶ່ງ ເມື່ອໃດ ຂ້າພຣະອົງທັງຫຼາຍໄດ້ຮູ້ຂ່າວພຣະຜູ້ມີພຣະພາກເຈົ້າວ່າ ຈັກສະເດັດຈາຣິກຈາກແຄວັນວັດຊີໄປແຄວັນກາສີ ເມື່ອນັ້ນ ຂ້າພຣະອົງທັງຫຼາຍ

ນ້ອຍໃຈແລະເສຍໃຈວ່າ ພຣະຜູ້ມີພຣະພາກເຈົ້າຈັກຫ່າງເຮົາທັງຫຼາຍໄປ ເມື່ອໃດ ໄດ້ຮູ້ຂ່າວວ່າ ໄດ້ສະເດັດຈາຣິກຈາກແຄວ້ນວັດຊີໄປສູ່ແຄວ້ນກາສີແລ້ວ ເມື່ອນັ້ນ ຂ້າພຣະອົງ ທັງຫຼາຍກໍນ້ອຍໃຈແລະເສຍໃຈວ່າ ພຣະຜູ້ມີພຣະພາກເຈົ້າໄດ້ຫ່າງເຮົາທັງຫຼາຍໄປ

ຂ້າແດ່ ພຣະອົງຜູ້ຈະເລີນ ອັນໜຶ່ງ ເມື່ອໃດ ຂ້າພຣະອົງທັງຫຼາຍໄດ້ຮູ້ຂ່າວພຣະຜູ້ມີພຣະພາກ ເຈົ້າວ່າ ຈັກສະເດັດຈາຣິກຈາກແຄວ້ນກາສີໄປແຄວ້ນມະຄົດ ເມື່ອນັ້ນ ຂ້າພຣະອົງທັງຫຼາຍນ້ອຍໃຈແລະເສຍໃຈວ່າ ພຣະຜູ້ມີພຣະພາກເຈົ້າຈັກຫ່າງເຮົາທັງຫຼາຍໄປ ເມື່ອໃດ ໄດ້ຮູ້ຂ່າວວ່າ ໄດ້ສະເດັດຈາຣິກຈາກແຄວ້ນກາສີໄປສູ່ແຄວ້ນມະຄົດແລ້ວ ເມື່ອນັ້ນ ຂ້າພຣະອົງທັງຫຼາຍກໍນ້ອຍໃຈແລະເສຍໃຈວ່າ ພຣະຜູ້ມີພຣະພາກເຈົ້າໄດ້ຫ່າງເຮົາທັງຫຼາຍໄປ

ຂ້າແດ່ ພຣະອົງຜູ້ຈະເລີນ ອັນໜຶ່ງ ເມື່ອໃດ ຂ້າພຣະອົງທັງຫຼາຍໄດ້ຮູ້ຂ່າວພຣະຜູ້ມີພຣະພາກເຈົ້າວ່າ ຈັກສະເດັດຈາຣິກຈາກແຄວ້ນມະຄົດມາແຄວ້ນກາສີ ເມື່ອນັ້ນ ຂ້າພຣະອົງທັງຫຼາຍພໍໃຈແລະດີໃຈວ່າ ພຣະຜູ້ມີພຣະພາກເຈົ້າຈັກຢູ່ໃກ້ເຮົາທັງຫຼາຍ ເມື່ອໃດ ໄດ້ຮູ້ຂ່າວວ່າ ໄດ້ສະເດັດຈາຣິກຈາກແຄວ້ນມະຄົດມາແຄວ້ນກາສີແລ້ວ ເມື່ອນັ້ນ ຂ້າພຣະອົງທັງຫຼາຍກໍພໍໃຈແລະດີໃຈວ່າ ພຣະຜູ້ມີພຣະພາກເຈົ້າໄດ້ຢູ່ໃກ້ເຮົາທັງຫຼາຍ

ຂ້າແດ່ ພຣະອົງຜູ້ຈະເລີນ ອັນໜຶ່ງ ເມື່ອໃດ ຂ້າພຣະອົງທັງຫຼາຍໄດ້ຮູ້ຂ່າວພຣະຜູ້ມີພຣະພາກເຈົ້າວ່າ ຈັກສະເດັດຈາຣິກຈາກແຄວ້ນກາສີມາແຄວ້ນວັດຊີ ເມື່ອນັ້ນ ຂ້າພຣະອົງທັງຫຼາຍພໍໃຈແລະດີໃຈວ່າ ພຣະຜູ້ມີພຣະພາກເຈົ້າຈັກຢູ່ໃກ້ເຮົາທັງຫຼາຍ ເມື່ອໃດ ໄດ້ຮູ້ຂ່າວວ່າ ໄດ້ສະເດັດຈາຣິກຈາກແຄວ້ນກາສີມາແຄວ້ນວັດຊີແລ້ວ ເມື່ອນັ້ນ ຂ້າພຣະອົງທັງຫຼາຍກໍພໍໃຈ ແລະດີໃຈວ່າ ພຣະຜູ້ມີພຣະພາກເຈົ້າໄດ້ຢູ່ໃກ້ເຮົາທັງຫຼາຍ

ຂ້າແດ່ ພຣະອົງຜູ້ຈະເລີນ ອັນໜຶ່ງ ເມື່ອໃດ ຂ້າພຣະອົງທັງຫຼາຍໄດ້ຮູ້ຂ່າວພຣະຜູ້ມີພຣະພາກເຈົ້າຈັກສະເດັດຈາຣິກຈາກແຄວ້ນວັດຊີມາແຄວ້ນມັລລະ ເມື່ອນັ້ນ ຂ້າພຣະອົງທັງຫຼາຍພໍໃຈແລະດີໃຈວ່າ ພຣະຜູ້ມີພຣະພາກເຈົ້າຈັກຢູ່ໃກ້ເຮົາທັງຫຼາຍ ເມື່ອໃດ ໄດ້ຮູ້ຂ່າວວ່າ ໄດ້ສະເດັດຈາຣິກຈາກແຄວ້ນວັດຊີມາແຄວ້ນມັລລະແລ້ວ ເມື່ອນັ້ນ ຂ້າພຣະອົງທັງຫຼາຍກໍພໍໃຈແລະດີໃຈວ່າ ພຣະຜູ້ມີພຣະພາກເຈົ້າໄດ້ຢູ່ໃກ້ເຮົາທັງຫຼາຍ

ຂ້າແດ່ ພຣະອົງຜູ້ຈະເລີນ ອັນໜຶ່ງ ເມື່ອໃດ ຂ້າພຣະອົງທັງຫຼາຍໄດ້ຮູ້ຂ່າວພຣະຜູ້ມີພຣະພາກເຈົ້າວ່າ ຈັກສະເດັດຈາຣິກຈາກແຄວ້ນມັລລະມາແຄວ້ນໂກສົນ ເມື່ອນັ້ນ ຂ້າພຣະອົງທັງຫຼາຍພໍໃຈແລະດີໃຈວ່າ ພຣະຜູ້ມີພຣະພາກເຈົ້າຈັກຢູ່ໃກ້ເຮົາທັງຫຼາຍ ເມື່ອໃດ ໄດ້ຮູ້ຂ່າວວ່າ ໄດ້ສະເດັດຈາຣິກຈາກແຄວ້ນມັລລະມາແຄວ້ນໂກສົນແລ້ວ ເມື່ອນັ້ນ ຂ້າພຣະອົງທັງຫຼາຍກໍພໍໃຈແລະດີໃຈວ່າ ພຣະຜູ້ມີພຣະພາກເຈົ້າໄດ້ຢູ່ໃກ້ເຮົາທັງຫຼາຍ

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອໃດ ຂ້າພຣະອົງທັງຫຼາຍໄດ້ຮູ້ຂ່າວພຣະຜູ້ມີພຣະພາກເຈົ້າວ່າ ຈັກສະເດັດຈາຣິກຈາກ (ເມືອງຕ່າງ ໆ ໃນ) ແຄວ້ນໂກສົນມາເມືອງສາວັດຖີ ເມື່ອນັ້ນ ຂ້າພຣະອົງທັງຫຼາຍພໍໃຈແລະດີໃຈວ່າ ພຣະຜູ້ມີພຣະພາກເຈົ້າຈັກຢູ່ໃກ້ຂ້າພຣະອົງທັງຫຼາຍ ເມື່ອໃດ ໄດ້ຮູ້ຂ່າວວ່າ ປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດເມືອງສາວັດຖີ ເມື່ອນັ້ນ ຂ້າພຣະອົງທັງຫຼາຍກໍພໍໃຈແລະດີໃຈຫຼາຍວ່າ ພຣະຜູ້ມີພຣະພາກເຈົ້າໄດ້ຢູ່ໃກ້ເຮົາທັງຫຼາຍ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ຊ່າງໄມ້ທັງຫຼາຍ ຍ້ອນເຫດນັ້ນ ການຢູ່ຄອງເຮືອນ ໃນໂລກນີ້ຄັບແຄບ ເປັນທາງມາແຫ່ງທຸລີ ສ່ວນບັນພະຊາປອດໂປ່ງ ທ່ານທັງຫຼາຍຢ່າໄດ້ຜະໝາດເລີຍ

ຂ້າແດ່ ພຣະອົງຜູ້ຈະເລີນ ຄວາມຄັບແຄບອື່ນທີ່ຄັບແຄບກວ່າ ແລະທີ່ນັບວ່າເປັນຄວາມຄັບແຄບກວ່າຄວາມຄັບແຄບນີ້ຂອງຂ້າພຣະອົງທັງຫຼາຍ ມີຢູ່ບໍ?

ຊ່າງໄມ້ທັງຫຼາຍ ຄວາມຄັບແຄບອື່ນທີ່ຄັບແຄບກວ່າ ແລະທີ່ນັບວ່າເປັນຄວາມຄັບແຄບກວ່າຄວາມຄັບແຄບນີ້ຂອງທ່ານທັງຫຼາຍ ເປັນແນວໃດ?

ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໄຣກາດ ເມື່ອໃດ ພຣະເຈົ້າປະເສນທິໂກສົນມີພຣະຣາຊະປະສົງຈະສະເດັດໄປພຣະຣາດຊະອຸທະຍານ ເມື່ອນັ້ນ ຂ້າພຣະອົງທັງຫຼາຍຕ້ອງກຳນົດຊ້າງຊົງຂອງພຣະເຈົ້າປະເສນທິໂກສົນ ແລ້ວທູນເຊີນໃຫ້ພຣະຊາຍາທັງຫຼາຍເຊິ່ງເປັນທີ່ສິເນຫາພໍໃຈຂອງພຣະເຈົ້າປະເສນທິໂກສົນປະທັບນັ່ງເບື້ອງໜ້າພຣະພັກພຣະອົງໜຶ່ງ ເບື້ອງພຣະປຣິດສະດາງພຣະອົງໜຶ່ງ ກິ່ນຂອງພຣະຊາຍາເຫຼົ່ານັ້ນປຽບຄືກິ່ນຂອງນາງຣາດຊະກັນຍາຜູ້ລູບທາດ້ວຍຂອງຫອມດັ່ງຂວດນ້ຳຫອມທີ່ເປີດໃນຂະນະນັ້ນ ອັນໜຶ່ງ ການສຳຜັດກາຍຂອງພຣະຊາຍາເຫຼົ່ານັ້ນ ກໍເປັນຄືການສຳຜັດກາຍຂອງນາງຣາດຊະກັນຍາ ຜູ້ດຳລົງຢູ່ໃນຄວາມສຸກ ດັ່ງຍອງຝ້າຍ ຫຼືປຸຍນຸ່ນ ເມື່ອນັ້ນ ທັງຊ້າງ ທັງພຣະຊາຍາເຫຼົ່ານັ້ນ ທັງພຣະຣາຊາ ຂ້າພຣະອົງທັງຫຼາຍກໍຕ້ອງເຝົ້າລະວັງຮັກສາ ແຕ່ຂ້າພຣະອົງທັງຫຼາຍບໍ່ຮູ້ສຶກວ່າຈະໃຫ້ຄວາມຄິດຊົ່ວ ໆ ເກີດຂຶ້ນໃນພຣະຊາຍາເຫຼົ່ານັ້ນໄດ້ເລີຍ ນີ້ແລຄືຄວາມຄັບແຄບ ອື່ນທີ່ຄັບແຄບກວ່າ ແລະທີ່ນັບວ່າເປັນຄວາມຄັບແຄບກວ່າຄວາມຄັບແຄບນີ້ຂອງຂ້າພຣະອົງ ທັງຫຼາຍ ຂ້ານ້ອຍ

ຊ່າງໄມ້ທັງຫຼາຍ ຍ້ອນເຫດນັ້ນ ການຢູ່ຄອງເຮືອນໃນໂລກນີ້ຈຶ່ງຄັບແຄບ ເປັນທາງມາແຫ່ງທຸລີ ສ່ວນບັນພະຊາປອດໂປ່ງ ທ່ານທັງຫຼາຍຢ່າໄດ້ຜະໝາດເລີຍ ອະຣິຍະສາວົກຜູ້ປະກອບດ້ວຍທຳ ໔ ປະການ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ທຳ ໔ ປະການ ອັນໃດແດ່

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນ ພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ
໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ
໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ
໔. ມີໃຈປາສະຈາກຄວາມຂີ້ຖີ່ອັນເປັນມົນທິນ ມີຈາຄະອັນສະລະແລ້ວ ມີຝາມືຊຸ່ມຍິນດີໃນການສະລະ ຄວນແກ່ການຂໍ ຍິນດີໃນການໃຫ້ທານແລະການແຈກທານຢູ່ຄອງເຮືອນ

ຊ່າງໄມ້ທັງຫຼາຍ ອະຣິຍະສາວົກຜູ້ປະກອບດ້ວຍທຳ ໔ ປະການນີ້ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ຊ່າງໄມ້ທັງຫຼາຍ ທ່ານທັງຫຼາຍ

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນ ພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ
໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ
໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ

ອັນໜຶ່ງ ໄທຍະທຳທຸກຢ່າງໃນຕະກູນ ເປັນຂອງບໍ່ແບ່ງແຍກກັບທ່ານຜູ້ມີສີນ ມີທຳອັນງາມທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຄື ຊາວໂກສົນມີຈຳນວນທໍ່ໃດ ທ່ານທັງຫຼາຍກໍແຈກຈ່າຍແບ່ງປັນໃຫ້ທໍ່ ໆ ກັນ

ຂ້າແດ່ ພຣະອົງຜູ້ຈະເລີນ ເປັນລາບຂອງຂ້າພຣະອົງທັງຫຼາຍ ຂ້າພຣະອົງທັງຫຼາຍ ໄດ້ດີແລ້ວ ທີ່ພຣະຜູ້ມີພຣະພາກເຈົ້າຊົງຮູ້ແຈ້ງແນວນີ້

**ຖະປະຕິສູດທີ ໓ ຈົບ**

# ໗. ເວລຸທະວາເຣີຍຍະສູດ

## ວ່າດ້ວຍພາມແລະຄະຫະບໍດີຊາວເວລຸທະວາຣະຄາມ

[໑໐໐໕] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ສະເດັດຈາຣິກໄປໃນແຄວັນໂກສົນພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ສະເດັດເຖິງໝູ່ບ້ານພາມຂອງຊາວໂກສົນຊື່ເວລຸທະວາຣະ ພວກພາມແລະຄະຫະບໍດີຊາວເວລຸທະວາຣະຄາມໄດ້ຟັງຂ່າວວ່າ ພຣະສະມະນະໂຄດົມເປັນສາກະຍະບຸດສະເດັດອອກບວດ ຈາກສາກະຍະຕະກູນ ສະເດັດຈາຣິກຢູ່ໃນແຄວັນໂກສົນພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ສະເດັດເຖິງເວລຸທະວາຣະຄາມໂດຍລຳດັບ ທ່ານພຣະໂຄດົມນັ້ນມີກິດຕິສັບອັນງາມຂ່າລືໄປແນວນີ້ວ່າ ແມ່ນຍ້ອນເຫດນີ້ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນເປັນພຣະອະຣະຫັນ ຕັດສະຮູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ພຣະອົງຊົງຮູ້ແຈ້ງໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດດ້ວຍພຣະອົງເອງແລ້ວ ຊົງປະກາດໃຫ້ຜູ້ອື່ນຮູ້ຕາມ ຊົງສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນບ່ອນສຸດ ແລະຊົງປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະບໍລິສຸດ ບໍລິບູນຄົບຖ້ວນ ການໄດ້ພົບພຣະອະຣະຫັນທັງຫຼາຍແນວນີ້ເປັນຄວາມດີຢ່າງແທ້ຈິງ

ຄັ້ງນັ້ນ ພາມແລະຄະຫະບໍດີຊາວເວລຸທະວາຣະຄາມເຫຼົ່ານັ້ນ ເຂົ້າໄປເຝົ້າ ພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ລາງພວກກໍຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ລາງພວກກໍສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ລາງພວກກໍປະນົມມືໄປທາງພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ບ່ອນທີ່ສົມຄວນ ລາງພວກກໍປະກາດ ຊື່ແລະໂຄດໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າແລ້ວນັ່ງ ຢູ່ບ່ອນທີ່ສົມຄວນ ລາງພວກກໍມິດເສີຍແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ພາກັນຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ທ່ານພຣະໂຄດົມ ຂ້າພຣະອົງທັງຫຼາຍມີຄວາມປາຖະໜາ ມີຄວາມພໍໃຈ ມີຄວາມປະສົງແນວນີ້ ໆ ວ່າ ຂໍເຮົາທັງຫຼາຍເພິ່ງຢູ່ຄອງເຮືອນ ນອນບຽດສຽດບຸດ ເພິ່ງໃຊ້ສອຍຜົງແກ່ນຈັນຈາກແຄວັນກາສີ ທັດຊົງດອກໄມ້ ຂອງຫອມແລະເຄື່ອງລູບທາ ເພິ່ງຍິນດີຄຳແລະເງິນ ຫຼັງຈາກຕາຍແລ້ວເພິ່ງໄປເກີດໃນສຸກຄະຕິໂລກສະຫວັນ ຂ້າພຣະອົງທັງຫຼາຍເພິ່ງຢູ່ຄອງເຮືອນນອນບຽດສຽດບຸດ ຯລຯ ເພິ່ງໄປເກີດໃນສຸກຄະຕິໂລກສະຫວັນດ້ວຍວິທີໃດ ຂໍທ່ານພຣະໂຄດົມໂຜດສະແດງທຳດ້ວຍວິທີນັ້ນແກ່ຂ້າພຣະອົງທັງຫຼາຍຜູ້ມີຄວາມປາຖະໜາ ມີຄວາມພໍໃຈ ມີຄວາມປະສົງແນວນັ້ນ ໆ ເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພາມແລະຄະຫະບໍດີທັງຫຼາຍ ເຮົາຈັກສະແດງທໍາບັນລະຍາຍທີ່ຄວນນ້ອມເຂົ້າມາໃນຕົນແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພາມແລະຄະຫະບໍດີຊາວເວລຸທະວາຣະຄາມເຫຼົ່ານັ້ນ ທູນຮັບສະໜອງພຣະດໍາຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ ພາມແລະຄະຫະບໍດີທັງຫຼາຍ

ທໍາບັນລະຍາຍທີ່ຄວນນ້ອມເຂົ້າມາໃນຕົນ ເປັນແນວໃດ?

ຄື ອະຣິຍະສາວົກໃນທໍາວິໄນນີ້

໑. ພິຈາລະນາເຫັນດັ່ງນີ້ວ່າ ເຮົາຢາກເປັນຢູ່ ບໍ່ຢາກຕາຍ ມັກສຸກຊັງທຸກ ຂໍ້ທີ່ບຸກຄົນເພິ່ງປົງຊີວິດເຮົາຜູ້ຢາກເປັນຢູ່ ບໍ່ຢາກຕາຍ ມັກສຸກຊັງທຸກນັ້ນ ບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ຂໍ້ທີ່ເຮົາເພິ່ງປົງຊີວິດຜູ້ອື່ນ ຜູ້ຢາກເປັນຢູ່ ບໍ່ຢາກຕາຍ ມັກສຸກຊັງທຸກນັ້ນ ກໍບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈແມ່ນຂອງຜູ້ອື່ນ ສິ່ງໃດບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈຂອງເຮົາ ສິ່ງນັ້ນກໍບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈແມ່ນຂອງຜູ້ອື່ນ ສິ່ງໃດບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ເຮົາຈະນໍາສິ່ງນັ້ນໄປຜູກມັດກັບຜູ້ອື່ນໄດ້ແນວໃດ ອະຣິຍະສາວົກນັ້ນພິຈາລະນາ ແນວນີ້ແລ້ວ ເປັນຜູ້ເວັ້ນຂາດຈາກການຂ້າສັດເອງດ້ວຍ ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການຂ້າສັດດ້ວຍ ກ່າວສັນເສີນການງົດເວັ້ນຈາກການ ຂ້າສັດດ້ວຍ ກາຍສະມາຈານນີ້ຂອງອະຣິຍະສາວົກນັ້ນຍ່ອມບໍລິສຸດທັງ ໓ ສ່ວນດັ່ງທີ່ກ່າວມານີ້

໒. ພິຈາລະນາເຫັນດັ່ງນີ້ວ່າ ຂໍ້ທີ່ບຸກຄົນເພິ່ງຖືເອົາສິ່ງຂອງຂອງເຮົາທີ່ເຮົາບໍ່ໃຫ້ດ້ວຍອາການລັກນັ້ນ ບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ຂໍ້ທີ່ເຮົາເພິ່ງຖືເອົາສິ່ງຂອງຂອງຜູ້ອື່ນທີ່ເຂົາບໍ່ໃຫ້ດ້ວຍອາການລັກນັ້ນ ກໍບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈແມ່ນຂອງຜູ້ອື່ນ ສິ່ງໃດບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ສິ່ງນັ້ນກໍບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈແມ່ນຂອງຜູ້ອື່ນ ສິ່ງໃດບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ເຮົາຈະນໍາສິ່ງນັ້ນໄປຜູກມັດກັບຜູ້ອື່ນໄດ້ແນວໃດ ອະຣິຍະສາວົກນັ້ນພິຈາລະນາແນວນີ້ແລ້ວ ເປັນຜູ້ເວັ້ນຂາດຈາກການລັກຊັບເອງດ້ວຍ ຊັກຊວນຜູ້ອື່ນ ໃຫ້ງົດເວັ້ນຈາກການລັກຊັບດ້ວຍ ກ່າວສັນເສີນການງົດເວັ້ນຈາກການລັກຊັບດ້ວຍ ກາຍສະມາຈານນີ້ຂອງອະຣິຍະສາວົກນັ້ນຍ່ອມບໍລິສຸດທັງ ໓ ສ່ວນດັ່ງທີ່ກ່າວມານີ້

໓. ພິຈາລະນາເຫັນດັ່ງນີ້ວ່າ ຂໍ້ທີ່ບຸກຄົນເພິ່ງປະພຶດລ່ວງພັນລະຍາຂອງເຮົາ ຂໍ້ນັ້ນບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ຂໍ້ທີ່ເຮົາເພິ່ງປະພຶດລ່ວງພັນລະຍາຂອງຜູ້ອື່ນນັ້ນ ກໍບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈແມ່ນຂອງຜູ້ອື່ນ ສິ່ງໃດບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ສິ່ງນັ້ນກໍບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈແມ່ນຂອງຜູ້ອື່ນ ສິ່ງໃດບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ເຮົາຈະນໍາສິ່ງນັ້ນໄປຜູກມັດກັບຜູ້ອື່ນໄດ້ແນວໃດ ອະຣິຍະສາວົກນັ້ນພິຈາລະນາແນວນີ້ແລ້ວ ເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມເອງດ້ວຍ ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການປະພຶດຜິດໃນກາມດ້ວຍ ກ່າວສັນເສີນການງົດເວັ້ນຈາກການປະພຶດຜິດໃນກາມດ້ວຍ ກາຍສະມາຈານນີ້ຂອງອະຣິຍະສາວົກນັ້ນ

ຍ່ອມບໍລິສຸດທັງ ໓ ສ່ວນດັ່ງທີ່ກ່າວມານີ້

໔. ພິຈາລະນາເຫັນດັ່ງນີ້ວ່າ ຂໍ້ທີ່ບຸກຄົນເພິ່ງທຳລາຍປະໂຫຍດຂອງເຮົາດ້ວຍການເວົ້າຕົວະນັ້ນ ບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ຂໍ້ທີ່ເຮົາເພິ່ງທຳລາຍປະໂຫຍດຂອງຜູ້ອື່ນດ້ວຍການເວົ້າຕົວະ ຂໍ້ນັ້ນກໍບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈແມ່ນຂອງຜູ້ອື່ນ ສິ່ງໃດບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ສິ່ງນັ້ນກໍບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈແມ່ນຂອງຜູ້ອື່ນ ສິ່ງໃດບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ເຮົາຈະນຳສິ່ງນັ້ນໄປຜູກມັດກັບຜູ້ອື່ນໄດ້ແນວໃດ ອະຣິຍະສາວົກນັ້ນພິຈາລະນາແນວນີ້ແລ້ວ ເປັນຜູ້ເວັ້ນຂາດຈາກການເວົ້າຕົວະເອງດ້ວຍ ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າຕົວະດ້ວຍ ກ່າວສັນເສີນການງົດເວັ້ນຈາກການເວົ້າຕົວະດ້ວຍ ວະຈີສະມາຈານນີ້ຂອງອະຣິຍະສາວົກນັ້ນຍ່ອມບໍລິສຸດທັງ ໓ ສ່ວນດັ່ງທີ່ກ່າວມານີ້

໕. ພິຈາລະນາເຫັນດັ່ງນີ້ວ່າ ຂໍ້ທີ່ບຸກຄົນເພິ່ງຍຸຍົງເຮົາໃຫ້ແຕກຈາກມິດດ້ວຍການເວົ້າສັບສໍ່ນັ້ນ ບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ຂໍ້ທີ່ເຮົາເພິ່ງຍຸຍົງຜູ້ອື່ນໃຫ້ແຕກຈາກມິດດ້ວຍການເວົ້າສັບສໍ່ ຂໍ້ນັ້ນກໍບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈແມ່ນຂອງຜູ້ອື່ນ ຯລຯ ວະຈີສະມາຈານ ນີ້ຂອງອະຣິຍະສາວົກນັ້ນຍ່ອມບໍລິສຸດທັງ ໓ ສ່ວນດັ່ງທີ່ກ່າວມານີ້

໖. ພິຈາລະນາເຫັນດັ່ງນີ້ວ່າ ຂໍ້ທີ່ບຸກຄົນເພິ່ງເວົ້າກັບເຮົາດ້ວຍຄຳຫຍາບນັ້ນ ບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ອັນໜຶ່ງ ຂໍ້ທີ່ເຮົາເພິ່ງເວົ້າກັບຜູ້ອື່ນດ້ວຍຄຳຫຍາບນັ້ນ ກໍບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈແມ່ນຂອງຜູ້ອື່ນ ສິ່ງໃດບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ຯລຯ ວະຈີສະມາຈານນີ້ຂອງອະຣິຍະສາວົກນັ້ນຍ່ອມບໍລິສຸດທັງ ໓ ສ່ວນດັ່ງທີ່ກ່າວມານີ້

໗. ພິຈາລະນາເຫັນດັ່ງນີ້ວ່າ ຂໍ້ທີ່ບຸກຄົນເພິ່ງເວົ້າກັບເຮົາດ້ວຍການເວົ້າບໍ່ມີສາຣະ ຂາດປະໂຫຍດນັ້ນ ບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ຂໍ້ທີ່ເຮົາເພິ່ງເວົ້າກັບຜູ້ອື່ນດ້ວຍການເວົ້າບໍ່ມີສາຣະ ຂາດປະໂຫຍດນັ້ນ ກໍບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈແມ່ນຂອງຜູ້ອື່ນ ສິ່ງໃດບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈຂອງເຮົາ ສິ່ງນັ້ນກໍບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈແມ່ນຂອງຜູ້ອື່ນ ສິ່ງໃດບໍ່ເປັນທີ່ຮັກ ບໍ່ເປັນທີ່ພໍໃຈຂອງເຮົາ ເຮົາຈະນຳສິ່ງນັ້ນໄປຜູກມັດ ກັບຜູ້ອື່ນໄດ້ແນວໃດ ອະຣິຍະສາວົກນັ້ນພິຈາລະນາແນວນີ້ແລ້ວ ເປັນຜູ້ເວັ້ນຂາດຈາກການເວົ້າເວົ້າບໍ່ມີສາຣະເອງດ້ວຍ ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າບໍ່ມີສາຣະດ້ວຍ ກ່າວສັນເສີນການງົດເວັ້ນຈາກການເວົ້າບໍ່ມີສາຣະດ້ວຍ ວະຈີສະມາຈານນີ້ຂອງອະຣິຍະສາວົກນັ້ນຍ່ອມບໍລິສຸດທັງ ໓ ສ່ວນດັ່ງທີ່ກ່າວມານີ້

ອະຣິຍະສາວົກນັ້ນ

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງ

ເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ

໔. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ

໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງວ່າ ພຣະສົງ ສາວົກຂອງພຣະຜູ້ມີພຣະພາກເຈົ້າ ເປັນຜູ້ປະຕິບັດດີ ຯລຯ ເປັນນາບຸນອັນປະເສີດຂອງໂລກ

໔. ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ບໍ່ຊອດ ບໍ່ດ່າງ ບໍ່ໝອງ ເປັນອິດສະຫຼະ ທ່ານຜູ້ຮູ້ສັນເສີນ ບໍ່ຖືກຕັນຫາແລະທິດຖິຄອບງຳ ເປັນໄປເພື່ອສະມາທິ

ພາມ ແລະຄະຫະບໍດີທັງຫຼາຍ ເມື່ອໃດ ອະຣິຍະສາວົກປະກອບດ້ວຍສັດທຳ ໗ ປະການນີ້ ດ້ວຍຖານະອັນເປັນບ່ອນຕັ້ງແຫ່ງຄວາມຫວັງ ໔ ປະການນີ້ ເມື່ອນັ້ນ ອະຣິຍະສາວົກນັ້ນເມື່ອຫວັງ ເພິ່ງພະຍາກອນຕົນເອງວ່າ ເຮົາມີນະຣົກໝົດແລ້ວ ມີກຳເນີດສັດເດຍຣັດສານໝົດແລ້ວ ມີພູມແຫ່ງເຜດໝົດແລ້ວ ມີອະບາຍ ທຸກຄະຕິ ແລະວິນິບາດໝົດແລ້ວ ເຮົາເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພາມແລະຄະຫະບໍດີຊາວເວລຸທະວາຣະຄາມໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ທ່ານພຣະໂຄດົມ ພຣະພາສິດຂອງທ່ານພຣະໂຄດົມຊັດເຈນມ່ວນຫຼາຍ ຯລຯ ຂ້າພຣະອົງທັງຫຼາຍຂໍເຖິງທ່ານພຣະໂຄດົມ ພຣະທຳ ແລະພຣະສົງເປັນສະຣະນະ ຂໍທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງທັງຫຼາຍວ່າເປັນອຸປາສົກ ຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ

**ເວລຸທະວາເຣີຍຍະສູດທີ ໗ ຈົບ**

# ໘. ປະຖົມຄິຍະຊະກາວະສະຖະສູດ

## ວ່າດ້ວຍທຳບັນລະຍາຍທີ່ພຣະຕຳໜັກດິນຈີ່ ສູດທີ ໑

[໑໐໐໔] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະຕຳໜັກດິນຈີ່ ໃນໝູ່ເຮືອນຍາຕິກະ ຄັ້ງນັ້ນ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ສາລະທະພິກຂຸມໍຣະນະພາບແລ້ວ ຄະຕິຂອງທ່ານເປັນແນວໃດ? ອະພິສຳປະຣາຍະພົບເປັນແນວໃດ? ນັນທາພິກຂຸນີມໍຣະນະພາບແລ້ວ ຄະຕິຂອງນາງເປັນແນວໃດ? ອະພິສຳປະຣາຍະພົບເປັນ

ແນວໃດ? ສຸທັດຕະອຸປາສົກເຖິງແກ່ກຳແລ້ວ ຄະຕິຂອງເຂົາເປັນແນວໃດ? ອະພິສຳປະຣາຍະພົບເປັນແນວໃດ? ສຸຊາດາອຸປາສິກາເຖິງແກ່ກຳແລ້ວ ຄະຕິຂອງນາງເປັນແນວໃດ? ອະພິສຳປະຣາຍະພົບເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອານົນ ສາລະທະພິກຂຸນີ່ຣະນະພາບແລ້ວເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ນັນທາພິກຂຸນີມໍຣະນະພາບແລ້ວໄປເກີດເປັນໂອປະປາຕິກະ ປະຣິນິບພານໃນພົບນັ້ນບໍ່ຫວນກັບມາຈາກໂລກນັ້ນອີກ ຍ້ອນໂອຣຳພາຄິຍະສັງໂຍດ ໕ ປະການສິ້ນໄປ ສຸທັດຕະອຸປາສົກເຖິງແກ່ກຳແລ້ວໄດ້ເປັນພຣະສະກະທາຄາມີ ຍ້ອນສັງໂຍດ ໓ ປະການສິ້ນໄປ ແລະບັນເທົາຣາຄະໂທສະ ໂມຫະໃຫ້ເບົາບາງໄດ້ ມາສູ່ໂລກນີ້ອີກພຽງເທື່ອດຽວກໍຈະເຮັດບ່ອນສຸດແຫ່ງທຸກໄດ້ ສຸຊາດາອຸປາສິກາເຖິງແກ່ກຳແລ້ວໄດ້ເປັນໂສດາບັນ ຍ້ອນສັງໂຍດ ໓ ປະການສິ້ນໄປ ບໍ່ມີທາງຕົກຕ່ຳມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ອານົນ ບໍ່ໜ້າອັດສະຈັນເລີຍທີ່ບຸກຄົນເກີດເປັນມະນຸດແລ້ວຕາຍໄປ ຫາກເມື່ອບຸກຄົນນັ້ນ ໆ ຕາຍໄປ ທ່ານທັງຫຼາຍຈັກເຂົ້າມາສອບຖາມເລື້ອງນີ້ກັບເຮົາ ກໍຈະເພິ່ງເປັນຄວາມລຳບາກແກ່ຕະຖາຄົດ ຍ້ອນແນວນັ້ນ ເຮົາຈັກສະແດງທຳບັນລະຍາຍຊື່ທຳມາທາດ (ແວ່ນສ່ອງທຳ) ທີ່ພຣະອະຣິຍະສາວົກຜູ້ປະກອບແລ້ວ ເມື່ອຫວັງກໍເພິ່ງພະຍາກອນຕົນເອງໄດ້ວ່າ ເຮົາມີນະຣົກໝົດແລ້ວ ມີກຳເນີດສັດເດຍຣັດສານໝົດແລ້ວ ມີພູມແຫ່ງເຜດໝົດແລ້ວ ມີອະບາຍ ທຸກຄະຕິ ແລະວິນິບາດໝົດແລ້ວເຮົາເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ທຳບັນລະຍາຍຊື່ທຳມາທາດທີ່ພຣະອະຣິຍະສາວົກຜູ້ປະກອບແລ້ວ ເມື່ອຫວັງເພິ່ງພະຍາກອນຕົນເອງໄດ້ວ່າ ເຮົາມີນະຣົກໝົດແລ້ວ ມີກຳເນີດສັດເດຍຣັດສານໝົດແລ້ວ ມີພູມແຫ່ງເຜດໝົດແລ້ວ ມີອະບາຍ ທຸກຄະຕິ ແລະວິນິບາດໝົດແລ້ວ ເຮົາເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ໆລໆ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ
໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ໆລໆ
໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ໆລໆ
໔. ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ໆລໆ ເປັນໄປເພື່ອສະມາທິ

ອານົນ ນີ້ແລຄືທຳບັນລະຍາຍຊື່ທຳມາທາດທີ່ພຣະອະຣິຍະສາວົກຜູ້ປະກອບແລ້ວ ເມື່ອຫວັງກໍເພິ່ງພະຍາກອນຕົນເອງໄດ້ວ່າ ເຮົາມີນະຮົກໝົດແລ້ວ ມີກຳເນີດສັດເດຍຣັດສານໝົດແລ້ວ ມີພູມແຫ່ງເຜດໝົດແລ້ວ ມີອະບາຍ ທຸກຄະຕິ ແລະວິນິບາດໝົດແລ້ວ ເຮົາເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

**ປະຖົມຄິຍະຊະກາວະສະຖະສູດທີ ໗ ຈົບ**

(ພຣະສູດທັງ ໓ ສູດມີເຫດເກີດແນວດຽວກັນ)

# ໘. ທຸຕິຍະຄິຍະຊະກາວະສະຖະສູດ

## ວ່າດ້ວຍທຳບັນລະຍາຍທີ່ພຣະຕຳໜັກດິນຈີ່ ສູດທີ ໘

[໑໐໐໕] ທ່ານພຣະອານົນນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ອະໂສກະພິກຂຸມໍຣະນະພາບແລ້ວ ຄະຕິຂອງທ່ານເປັນແນວໃດ? ອະພິສຳປະຣາຍະພົບເປັນແນວໃດ? ອະໂສກາພິກຂຸນີມໍຣະນະພາບແລ້ວ ຯລຯ ອະໂສກະອຸປາສົກເຖິງແກ່ກຳແລ້ວ ຯລຯ ອະໂສກາອຸປາສິກາເຖິງແກ່ກຳແລ້ວ ຄະຕິຂອງນາງເປັນແນວໃດ? ອະພິສຳປະຣາຍະພົບເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອານົນ ອະໂສກະພິກຂຸມໍຣະນະພາບແລ້ວ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ຯລຯ

(ເນື້ອເລື້ອງກໍແນວດຽວກັບການພະຍາກອນບັນຫາຂ້າງຕົ້ນ)

ອານົນ ນີ້ແລ ຄື ທຳບັນລະຍາຍຊື່ທຳມາທາດທີ່ອະຣິຍະສາວົກຜູ້ປະກອບແລ້ວ ເມື່ອຫວັງກໍເພິ່ງພະຍາກອນຕົນເອງໄດ້ວ່າ ເຮົາມີນະຮົກໝົດແລ້ວ ມີກຳເນີດສັດເດຍຣັດສານໝົດແລ້ວ ມີພູມແຫ່ງເຜດໝົດແລ້ວ ມີອະບາຍ ທຸກຄະຕິ ແລະວິນິບາດໝົດແລ້ວ ເຮົາເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

**ທຸຕິຍະຄິຍະຊະກາວະສະຖະສູດທີ ໘ ຈົບ**

# ໑໐. ຕະຕິຍະຄິຍະຊະກາວະສະຖະສູດ

## ວ່າດ້ວຍທຳບັນລະຍາຍທີ່ພຣະຕຳໜັກດິນຈີ່ ສູດທີ ໑໐

[໑໐໐໗] ທ່ານພຣະອານົນນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ກະກຸຕະອຸປາສົກໃນໝູ່ບ້ານຍາຕິກະເຖິງແກ່ກຳແລ້ວ ຄະຕິຂອງເຂົາເປັນແນວໃດ? ອະພິສຳປະຣາຍະພົບເປັນແນວໃດ? ກະລິພະອຸປາສົກໃນໝູ່ບ້ານຍາຕິກະ ฯລฯ ນິກະຕະອຸປາສົກໃນໝູ່ບ້ານຍາຕິກະ ฯລฯ ກະຕິດສະຫະອຸປາສົກໃນໝູ່ບ້ານຍາຕິກະ ฯລฯ ຕຸດຖະອຸປາສົກໃນໝູ່ບ້ານຍາຕິກະ ฯລฯ ສັນຕຸດຖະອຸປາສົກໃນໝູ່ບ້ານຍາຕິກະ ฯລฯ ພັດທະອຸບາສົກໃນໝູ່ບ້ານຍາຕິກະ ฯລฯ ສຸພັດທະອຸບາສົກໃນໝູ່ບ້ານຍາຕິກະເຖິງແກ່ກຳແລ້ວ ຄະຕິຂອງເຂົາເປັນແນວໃດ? ອະພິສຳປະຣາຍະພົບເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອານົນ ກະກຸຕະອຸປາສົກເຖິງແກ່ກຳແລ້ວໄປເກີດເປັນ ໂອປະປາຕິກະ ຍ້ອນໂອຣຳພາຄິຍະສັງໂຍດ ໕ ປະການສິ້ນໄປ ປະຣິນິບພານໃນພົບນັ້ນບໍ່ຫວນກັບມາຈາກໂລກນັ້ນອີກ ກະລິພະອຸປາສົກ ฯລฯ ນິກະຕະອຸປາສົກ ฯລฯ ກະຕິດສະຫະອຸປາສົກ ฯລฯ ຕຸດຖະອຸປາສົກ ฯລฯ ສັນຕຸດຖະອຸປາສົກ ฯລฯ ສຸພັດທະອຸປາສົກ ฯລฯ ພັດທະອຸປາສົກເຖິງແກ່ກຳແລ້ວ ໄປເກີດເປັນໂອປະປາຕິກະ ຍ້ອນໂອຣຳພາຄິຍະສັງໂຍດ ໕ ປະການສິ້ນໄປ ປະຣິນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນອີກ

(ອຸປາສົກທຸກຄົນເພິ່ງເຮັດໃຫ້ມີຄະຕິແນວດຽວກັນ)

ອານົນ ອຸປາສົກກວ່າ ໕໐ ຄົນໃນໝູ່ບ້ານຍາຕິກະເຖິງແກ່ກຳແລ້ວໄປເກີດເປັນໂອປະປາຕິກະ ຍ້ອນໂອຣຳພາຄິຍະສັງໂຍດ ໕ ປະການສິ້ນໄປ ປະຣິນິບພານໃນພົບນັ້ນບໍ່ ຫວນກັບມາຈາກໂລກນັ້ນອີກ ອຸປາສົກກວ່າ ໗໐ ຄົນໃນໝູ່ບ້ານຍາຕິກະເຖິງແກ່ກຳແລ້ວ ໄດ້ເປັນສະກະທາຄາມີ ຍ້ອນສັງໂຍດ ໓ ປະການສິ້ນໄປ ແລະບັນເທົາຣາຄະ ໂທສະ ໂມຫະ ໃຫ້ເບົາບາງໄດ້ກັບມາສູ່ໂລກນີ້ອີກພຽງເທື່ອດຽວ ຈະເຮັດບ່ອນສຸດແຫ່ງທຸກໄດ້ ອຸປາສົກກວ່າ ໕໐໐-໗໐໐ ຄົນໃນໝູ່ບ້ານຍາຕິກະເຖິງແກ່ກຳແລ້ວໄດ້ເປັນໂສດາບັນ ຍ້ອນສັງໂຍດ ໓ ປະການສິ້ນໄປ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ອານົນ ບໍ່ໜ້າອັດສະຈັນເລີຍທີ່ບຸກຄົນເກີດເປັນມະນຸດແລ້ວຕາຍໄປ ຫາກເມື່ອບຸກຄົນນັ້ນຕາຍໄປ ທ່ານທັງຫຼາຍຈັກເຂົ້າມາສອບຖາມເລື້ອງນີ້ກັບເຮົາ ກໍຈະເພິ່ງເປັນຄວາມລຳບາກແກ່ຕະຖາຄົດ ຍ້ອນເຫດນັ້ນ ເຮົາຈັກສະແດງທຳບັນລະຍາຍຊື່ທຳມາທາດ (ແວ່ນສ່ອງທຳ) ທີ່ອະຣິຍະສາວົກຜູ້ປະກອບແລ້ວ ເມື່ອຫວັງກໍເພິ່ງພະຍາກອນຕົນເອງໄດ້ວ່າ ເຮົາມີນະຣົກໝົດແລ້ວ ມີກຳ

ເນີດສັດເດຍຣັດສານໝົດແລ້ວ ມີພູມແຫ່ງເຜດໝົດແລ້ວ ມີອະບາຍ ທຸກຄະຕິ ແລະວິນິບາດໝົດແລ້ວ ເຮົາເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ທຳບັນລະຍາຍຊື່ທຳມາທາດ ທີ່ອະຣິຍະສາວົກຜູ້ປະກອບແລ້ວ ເມື່ອຫວັງກໍເພິ່ງພະຍາກອນຕົນເອງໄດ້ວ່າ ເຮົາມີນະຮົກໝົດແລ້ວ ມີກຳເນີດສັດເດຍຣັດສານໝົດແລ້ວ ມີພູມແຫ່ງເຜດໝົດແລ້ວ ມີອະບາຍ ທຸກຄະຕິ ແລະວິນິບາດໝົດແລ້ວ ເຮົາເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ໆລໆ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນ ພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ
໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ໆລໆ
໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ໆລໆ
໔. ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ໆລໆ ເປັນໄປເພື່ອສະມາທິ

ອານົນ ນີ້ແລ ຄື ທຳບັນລະຍາຍຊື່ທຳມາທາດ ທີ່ອະຣິຍະສາວົກຜູ້ປະກອບແລ້ວ ເມື່ອຫວັງກໍເພິ່ງພະຍາກອນຕົນເອງໄດ້ວ່າ ເຮົາມີນະຮົກໝົດແລ້ວ ມີກຳເນີດສັດເດຍຣັດສານໝົດແລ້ວ ມີພູມແຫ່ງເຜດໝົດແລ້ວ ມີອະບາຍ ທຸກຄະຕິ ແລະວິນິບາດໝົດແລ້ວ ເຮົາເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

**ຕະຕິຍະຄິຍະຊະກາວະສະຖະສູດທີ ໑໐ ຈົບ**

**ເວລຸທະວາຣະວັກທີ ໑ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື

໑. ຈັກກະວັດຕິຣາຊະສູດ
໒. ທີຄາວຸອຸປາສະກະສູດ
໓. ທຸຕິຍະສາຣີປຸດຕະສູດ
໔. ປະຖົມສາຣີປຸດຕະສູດ
໕. ທຸຕິຍະສາຣີປຸດຕະສູດ
໖. ຖະປະຕິສູດ
໗. ເວລຸທະວາເຣີຍຍະສູດ
໘. ປະຖົມຄິຍະຊະກາວະສະຖະສູດ
໙. ທຸຕິຍະຄິຍະຊະກາວະສະຖະສູດ
໑໐. ຕະຕິຍະຄິຍະຊະກາວະສະຖະສູດ

# ໔. ຣາຊະການາຣາມະວັກ

## ໝວດວ່າດ້ວຍພຣະທຳມະເທດສະໜາທີ່ຣາຊະການາຣາມ

## ໑. ສະຫັດສະພິກຂຸນີສັງຄະສູດ

### ວ່າດ້ວຍພິກຂຸນີສົງ ໑,໐໐໐ ອົງ

[໑໐໐໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ຣາຊະການາຣາມ ເຂດເມືອງສາວັດຖີ ຄັ້ງນັ້ນ ພິກຂຸນີສົງ ໑,໐໐໐ ອົງ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດ ແລ້ວຢືນຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບພິກຂຸນີເຫຼົ່ານັ້ນດັ່ງນີ້ ວ່າ

ພິກຂຸນີທັງຫຼາຍ ອະຣິຍະສາວົກຜູ້ປະກອບດ້ວຍທຳ ໔ ປະການ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ທຳ ໔ ປະການ ອັນໃດແດ່

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ฯລฯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ
໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ฯລฯ
໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ฯລฯ
໔. ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ฯລฯ ເປັນໄປເພື່ອສະມາທິ

ພິກຂຸນີທັງຫຼາຍ ອະຣິຍະສາວົກຜູ້ປະກອບດ້ວຍທຳ ໔ ປະການນີ້ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

**ສະຫັດສະພິກຂຸນີສັງຄະສູດທີ ໑ ຈົບ**

# ໔. ພາມມະນະສູດ

## ວ່າດ້ວຍຂໍ້ບັນຍັດຂອງພາມ

[໑໐໐໗] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພາມທັງຫຼາຍຍ່ອມບັນຍັດ

ອຸທະຍະຄາມີນີປະຕິປະທາ (ຂໍ້ປະຕິບັດທີ່ໃຫ້ເຖິງຄວາມຈະເລີນ) ພວກເຂົາຍ່ອມຊັກຊວນສາວົກແນວນີ້ວ່າ ມາເທີ້ນທ່ານຜູ້ຈະເລີນທັງຫຼາຍ ທ່ານຈົ່ງລຸກຂຶ້ນແຕ່ເຊົ້າມືດ ຍ່າງອວ່າຍໜ້າໄປທາງທິດປາຈີນ ຢ່າຫຼີກນໍ້າສ້າງ ເຫວ ຕໍທີ່ມີໜາມ ຂຸມຄູດ ນໍ້າສ້າງສົກກະປົກ ທ່ານຕົກລົງໄປໃນບ່ອນໃດ ກໍເພິ່ງຖ້າຄວາມຕາຍໃນບ່ອນນັ້ນແລ ດ້ວຍອຸບາຍແນວນີ້ ຫຼັງຈາກຕາຍແລ້ວ ຈັກໄປເກີດໃນສຸກຄະຕິໂລກສະຫວັນ

ພິກຂຸທັງຫຼາຍ ຂໍ້ບັນຍັດຂອງພາມເຫຼົ່ານັ້ນ ເປັນທາງໄປຂອງຄົນໂງ່ ເປັນທາງໄປຂອງຄົນຫຼົງ ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ບໍ່ເປັນໄປເພື່ອຄາຍກຳໜັດ ບໍ່ເປັນໄປເພື່ອດັບ ບໍ່ເປັນໄປເພື່ອສະງົບລະງັບ ບໍ່ເປັນໄປເພື່ອຮູ້ຍິ່ງ ບໍ່ເປັນໄປເພື່ອຕັດສະຮູ້ ບໍ່ເປັນໄປເພື່ອນິບພານ ສ່ວນໃນອະຣິຍະວິໄນ ເຮົາກໍບັນຍັດອຸທະຍະຄາມີນີປະຕິປະທາທີ່ເປັນໄປເພື່ອຄວາມເບື່ອໜ່າຍຢ່າງທີ່ສຸດ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ

ອຸທະຍະຄາມີນີປະຕິປະທາທີ່ເປັນໄປເພື່ອຄວາມເບື່ອໜ່າຍແນວບ່ອນສຸດ ຯລຯ ເພື່ອນິບພານນັ້ນ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ
໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ
໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ
໔. ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ

ພິກຂຸທັງຫຼາຍ ນີ້ແລ ຄື ອຸທະຍະຄາມີນີປະຕິປະທາທີ່ເປັນໄປເພື່ອຄວາມເບື່ອໜ່າຍຢ່າງທີ່ສຸດ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ

**ພາມມະນະສູດທີ ໔ ຈົບ**

# ៦. ອານັນທະເຖຣະສູດ

## ວ່າດ້ວຍພຣະອານົນເຖຣະ

[໑໐໐໗] ສະໄໝໜຶ່ງ ທ່ານພຣະອານົນແລະທ່ານພຣະສາຣີບຸດຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດເມືອງສາວັດຖີ ເມື່ອໃນເວລາຄ່ຳ ທ່ານພຣະສາຣີບຸດ ອອກຈາກບ່ອນຫຼີບຫຼີກແລ້ວ ເຂົ້າໄປຫາທ່ານພຣະອານົນຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະອານົນດັ່ງນີ້ວ່າ ທ່ານອານົນ ຍ້ອນລະທຳທີ່ໃດ ຍ້ອນປະກອບດ້ວຍທຳທີ່ໃດ ໝູ່ສັດນີ້ພຣະຜູ້ມີພຣະພາກເຈົ້າຈຶ່ງຊົງພະຍາກອນວ່າ ເປັນພຣະໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທີໃນມື້ທາງໜ້າ

ທ່ານພຣະອານົນຕອບວ່າ ຜູ້ມີອາຍຸ ຍ້ອນລະທຳ ໔ ປະການ ຍ້ອນປະກອບ ດ້ວຍທຳ ໔ ປະການ ໝູ່ສັດນີ້ພຣະຜູ້ມີພຣະພາກເຈົ້າຈຶ່ງຊົງພະຍາກອນວ່າ ເປັນພຣະໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທີໃນມື້ທາງໜ້າ

ທຳ ໔ ປະການ ອັນໃດແດ່

ຄື ປຸຖຸຊົນຜູ້ບໍ່ໄດ້ສະດັບ

໑. ປະກອບດ້ວຍຄວາມບໍ່ເຫຼື້ອມໃສເຊັ່ນໃດໃນພຣະພຸດທະເຈົ້າ ຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ຄວາມບໍ່ເຫຼື້ອມໃສເຊັ່ນນັ້ນໃນພຣະພຸດທະເຈົ້າຫາມີແກ່ປຸຖຸຊົນນັ້ນບໍ່ ສ່ວນອະຣິຍະສາວົກ ຜູ້ໄດ້ສະດັບ ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວເຊັ່ນໃດໃນພຣະພຸດທະເຈົ້າ ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ ຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວເຊັ່ນນັ້ນໃນພຣະພຸດທະເຈົ້າຍ່ອມມີແກ່ອະຣິຍະສາວົກນັ້ນວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ໆລໆ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ

໒. ປະກອບດ້ວຍຄວາມບໍ່ເຫຼື້ອມໃສເຊັ່ນໃດໃນພຣະທຳ ຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ຄວາມບໍ່ເຫຼື້ອມໃສເຊັ່ນນັ້ນໃນພຣະທຳຫາມີແກ່ປຸຖຸຊົນນັ້ນບໍ່ ສ່ວນອະຣິຍະສາວົກຜູ້ໄດ້ສະດັບ ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວເຊັ່ນໃດໃນພຣະທຳ ຫຼັງຈາກຕາຍແລ້ວ ຈະໄປ

ເກີດໃນສຸກຄະຕິໂລກສະຫວັນ ຄວາມເຫຼື້ອມໃສອັນ ບໍ່ຫວັ່ນ ໄຫວເຊັ່ນນັ້ນໃນພຣະທຳຍ່ອມມີແກ່ພຣະອະຣິຍະສາວົກນັ້ນວ່າ ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຯລຯ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ

໓. ປະກອບດ້ວຍຄວາມບໍ່ເຫຼື້ອມໃສເຊັ່ນໃດໃນພຣະສົງ ຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ຄວາມບໍ່ເຫຼື້ອມໃສເຊັ່ນນັ້ນ ໃນພຣະສົງບໍ່ມີແກ່ປຸຖຸຊົນນັ້ນ ສ່ວນອະຣິຍະສາວົກຜູ້ໄດ້ສະດັບ ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວເຊັ່ນໃດໃນພຣະສົງ ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ ຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວເຊັ່ນນັ້ນໃນພຣະສົງຍ່ອມມີແກ່ອະຣິຍະສາວົກນັ້ນວ່າ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າ ເປັນຜູ້ປະຕິບັດດີ ຯລຯ ເປັນນາບຸນອັນປະເສີດຂອງໂລກ

໔. ປະກອບດ້ວຍຄວາມເປັນຜູ້ທຸສີນເຊັ່ນໃດ ຫຼັງຈາກຕາຍແລ້ວ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ຄວາມເປັນຜູ້ທຸສີນເຊັ່ນນັ້ນບໍ່ມີແກ່ປຸຖຸຊົນນັ້ນ ສ່ວນອະຣິຍະສາວົກຜູ້ປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈເຊັ່ນໃດ ຫຼັງຈາກຕາຍແລ້ວ ຈະໄປເກີດໃນສຸກຄະຕິໂລກສະຫວັນ ສີນທີ່ພຣະອະຣິຍະພໍໃຈບໍ່ຂາດ ຯລຯ ເປັນໄປເພື່ອສະມາທິເຊັ່ນນັ້ນຍ່ອມມີແກ່ອະຣິຍະສາວົກນັ້ນ

ອາວຸໂສ ຍ້ອນລະທຳ ໔ ປະການນີ້ ຍ້ອນປະກອບດ້ວຍທຳ ໔ ປະການນີ້ ໝູ່ສັດນີ້ພຣະຜູ້ມີ ພຣະພາກເຈົ້າຈຶ່ງຊົງພະຍາກອນວ່າ ເປັນພຣະໂສດາບັນ ບໍ່ມີທາງຕົກຕໍ່າ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

**ອານັນທະເຖຣະສູດທີ ໓ ຈົບ**

# ໔. ທຸກຄະຕິພະຍະສູດ

**ວ່າດ້ວຍທຳທີ່ໃຫ້ພົ້ນໄພຄືທຸກຄະຕິ**

[໑໐໑໐] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ປະກອບດ້ວຍທຳ ໔ ປະການ ຍ່ອມພົ້ນໄພຄືທຸກຄະຕິທັງປວງ

ທຳ ໔ ປະການ ອັນໃດແດ່

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ
໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ
໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ
໔. ປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ປະກອບດ້ວຍທຳ ໔ ປະການນີ້ຍ່ອມພົ້ນໄພຄືທຸກຄະຕິທັງປວງ

**ທຸກຄະຕິພະຍະສູດທີ ໔ ຈົບ**

# ໕. ທຸກຄະຕິວິນິປາຕະພະຍະສູດ

## ວ່າດ້ວຍທຳທີ່ໃຫ້ພົ້ນໄພຄືທຸກຄະຕິແລະວິນິບາດ

[໑໐໑໑] ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ປະກອບດ້ວຍທຳ ໔ ປະການຍ່ອມພົ້ນ ໄພຄືທຸກຄະຕິ ແລະວິນິບາດທັງປວງ

ທຳ ໔ ປະການ ອັນໃດແດ່

ຄື ອະຣິຍະສາວົກໃນທຳວິໄນນີ້
໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນ ພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ
໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ
໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ
໔. ປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ປະກອບດ້ວຍທຳ ໔ ປະການນີ້ຍ່ອມພົ້ນໄພຄືທຸກຄະຕິແລະວິນິບາດທັງປວງ

**ທຸກຄະຕິວິນິປາຕະພະຍະສູດທີ ໕ ຈົບ**

# ໖. ປະຖົມມິດຕາມັດຈະສູດ

## ວ່າດ້ວຍການຊັກຊວນມິດອຳມາດ ສູດທີ ໑

[໑໐໑໔] ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງອະນຸເຄາະຄົນເຫຼົ່າໃດ ແລະຄົນເຫຼົ່າໃດຈະເປັນມິດ ອຳມາດ ຍາດ ສາໂລຫິດກໍຕາມ ໃຫ້ຄວາມສຳຄັນຄຳທີ່ຄວນຮັບຟັງ ທ່ານທັງຫຼາຍເພິ່ງຊັກຊວນຄົນເຫຼົ່ານັ້ນໃຫ້ຕັ້ງໝັ້ນ ໃຫ້ດຳລົງຢູ່ໃນອົງເຄື່ອງບັນລຸໂສດາ[໑] ໔ ປະການ

ອົງເຄື່ອງບັນລຸໂສດາ ໔ ປະການ ອັນໃດແດ່ ຄື

໑. ທ່ານທັງຫຼາຍເພິ່ງຊັກຊວນໃຫ້ຕັ້ງໝັ້ນ ໃຫ້ດຳລົງຢູ່ໃນຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນ ພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ໆລໆ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ
໒. ທ່ານທັງຫຼາຍເພິ່ງຊັກຊວນໃຫ້ຕັ້ງໝັ້ນ ໃຫ້ດຳລົງຢູ່ໃນຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນ ພຣະທຳ ໆລໆ
໓. ທ່ານທັງຫຼາຍເພິ່ງຊັກຊວນໃຫ້ຕັ້ງໝັ້ນ ໃຫ້ດຳລົງຢູ່ໃນຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ໆລໆ
໔. ທ່ານທັງຫຼາຍເພິ່ງຊັກຊວນໃຫ້ຕັ້ງໝັ້ນ ໃຫ້ດຳລົງຢູ່ໃນສີນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ໆລໆ ເປັນໄປເພື່ອສະມາທິ

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງອະນຸເຄາະຄົນເຫຼົ່າໃດ ແລະຄົນເຫຼົ່າໃດຈະເປັນມິດ ອຳມາດ ຍາດ ສາໂລຫິດກໍຕາມ ໃຫ້ຄວາມສຳຄັນຄຳທີ່ຄວນຮັບຟັງ ທ່ານທັງຫຼາຍ ເພິ່ງຊັກຊວນຄົນເຫຼົ່ານັ້ນໃຫ້ຕັ້ງໝັ້ນ ໃຫ້ດຳລົງຢູ່ໃນອົງເຄື່ອງບັນລຸໂສດາ ໔ ປະການນີ້

**ປະຖົມມິດຕາມັດຈະສູດທີ ໖ ຈົບ**

# ໗. ທຸຕິຍະມິດຕາມັດຈະສູດ

## ວ່າດ້ວຍການຊັກຊວນມິດອຳມາດ ສູດທີ ໒

[໑໐໑໓] ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງອະນຸເຄາະຄົນເຫຼົ່າໃດ ແລະຄົນເຫຼົ່າໃດຈະເປັນມິດ ອຳມາດ ຍາດ ສາໂລຫິດກໍຕາມ ໃຫ້ຄວາມສຳຄັນຄຳທີ່ຄວນຮັບຟັງ ທ່ານທັງຫຼາຍເພິ່ງຊັກຊວນຄົນເຫຼົ່ານັ້ນໃຫ້ຕັ້ງໝັ້ນ ໃຫ້ດຳລົງຢູ່ໃນອົງເຄື່ອງບັນລຸໂສດາ ໔ ປະການ

ອົງເຄື່ອງບັນລຸໂສດາ ໔ ປະການ ອັນໃດແດ່ ຄື

໑. ທ່ານທັງຫຼາຍເພິ່ງຊັກຊວນໃຫ້ຕັ້ງໝັ້ນ ໃຫ້ດຳລົງຢູ່ໃນຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ

ພິກຂຸທັງຫຼາຍ ມະຫາພູຕະຮູບ ໔ ຄື ປະຖະວີທາດ (ທາດດິນ) ອາໂປທາດ (ທາດນ້ຳ) ເຕໂຊທາດ (ທາດໄຟ) ວາໂຍທາດ (ທາດລົມ) ອາດກາຍເປັນແນວອື່ນໄດ້ ແຕ່ອະຣິຍະສາວົກຜູ້ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າ ບໍ່ເພິ່ງປ່ຽນເປັນແນວອື່ນໄດ້ເລີຍ ໃນເລື້ອງນັ້ນ ເປັນໄປບໍ່ໄດ້ເລີຍທີ່ຈະປ່ຽນເປັນແນວອື່ນ ຄື ອະຣິຍະສາວົກ ຜູ້ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າຈັກໄປເກີດ ໃນນະຮົກ ກຳເນີດສັດເດຍຣັດສານ ຫຼື ພູມແຫ່ງເຜດ

໒. ທ່ານທັງຫຼາຍ ເພິ່ງຊັກຊວນໃຫ້ຕັ້ງໝັ້ນ ໃຫ້ດຳລົງຢູ່ໃນຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນ ພຣະທຳ ຯລຯ

໓. ທ່ານທັງຫຼາຍເພິ່ງຊັກຊວນໃຫ້ຕັ້ງໝັ້ນ ໃຫ້ດຳລົງຢູ່ໃນຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ

໔. ທ່ານທັງຫຼາຍເພິ່ງຊັກຊວນໃຫ້ຕັ້ງໝັ້ນ ໃຫ້ດຳລົງຢູ່ໃນສິນທີ່ພຣະອະຣິຍະພໍໃຈບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ

ພິກຂຸທັງຫຼາຍ ມະຫາພູຕະຮູບ ໔ ຄື ປະຖະວີທາດ ອາໂປທາດ ເຕໂຊທາດ ວາໂຍທາດ ອາດກາຍເປັນແນວອື່ນໄດ້ ແຕ່ອະຣິຍະສາວົກຜູ້ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ບໍ່ເພິ່ງປ່ຽນເປັນແນວອື່ນໄດ້ເລີຍ ໃນເລື້ອງນັ້ນ ເປັນໄປບໍ່ໄດ້ເລີຍທີ່ຈະປ່ຽນເປັນແນວອື່ນ ຄື ອະຣິຍະສາວົກ ຜູ້ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ຈັກໄປເກີດໃນນະຮົກ ກຳເນີດສັດເດຍຣັດສານ ຫຼືພູມແຫ່ງເຜດ

ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງອະນຸເຄາະຄົນເຫຼົ່າໃດ ແລະຄົນເຫຼົ່າໃດຈະເປັນມິດອຳມາດ ຍາດ ສາໂລຫິດກໍຕາມ ໃຫ້ຄວາມສຳຄັນຄຳທີ່ຄວນຮັບຟັງ ທ່ານທັງຫຼາຍ ເພິ່ງຊັກຊວນຄົນເຫຼົ່ານັ້ນໃຫ້ຕັ້ງໝັ້ນ ໃຫ້ດຳລົງຢູ່ໃນອົງເຄື່ອງບັນລຸໂສດາ ໔ ປະການນີ້

**ທຸຕິຍະມິດຕາມັດຈະສູດທີ ໗ ຈົບ**

# ໓. ປະຖົມເທວະຈາຣິກະສູດ

## ວ່າດ້ວຍການຈາຣິກໃນເທວະໂລກ ສູດທີ ໑

[໑໐໑໔] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ຄັ້ງນັ້ນ ທ່ານພຣະມະຫາໂມກຄັນລານະໄດ້ຫາຍໂຕຈາກພຣະເຊຕະວັນໄປຜາກົດເທິງສະຫວັນ ຊັ້ນຕາວະຕິງສາຄືບຸຣຸດຜູ້ມີກຳລັງຢຽດແຂນອອກ ຫຼື ຄູ້ແຂນເຂົ້າສັນນັ້ນ ລຳດັບນັ້ນ ເທບຊັ້ນຕາວະຕິງສາຈຳນວນຫຼາຍ ເຂົ້າໄປຫາທ່ານພຣະມະຫາໂມກຄັນລານະຮອດບ່ອນຢູ່ ອະພິວາດແລ້ວໄດ້ຢືນຢູ່ບ່ອນທີ່ສົມຄວນ ທ່ານພຣະມະຫາໂມກຄັນລານະໄດ້ກ່າວກັບເທບເຫຼົ່ານັ້ນດັ່ງນີ້ ວ່າ

ທ່ານຜູ້ມີອາຍຸທັງຫຼາຍ

໑. ການປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າແມ່ນ ຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ໆລໆ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ເປັນຄວາມດີ ຍ້ອນການປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈຶ່ງຈະໄປເກີດໃນສຸກຄະຕິໂລກສະຫວັນ
໒. ການປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ໆລໆ
໓. ການປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ໆລໆ
໔. ການປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ໆລໆ ເປັນໄປເພື່ອສະມາທິ ເປັນຄວາມດີ ຍ້ອນປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈຶ່ງຈະໄປເກີດໃນສຸກຄະຕິໂລກສະຫວັນ

ເທບເຫຼົ່ານັ້ນກ່າວວ່າ ທ່ານໂມກຄັນລານະຜູມີຣະທຸກ

໑. ການປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າແມ່ນ ຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ໆລໆ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ເປັນຄວາມດີ ຍ້ອນການປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈຶ່ງຈະໄປເກີດໃນສຸກຄະຕິໂລກສະຫວັນ
໒. ການປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ໆລໆ

໓. ການປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ
໔. ການປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອ ສະມາທິ ເປັນຄວາມດີ ຍ້ອນການປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈ ເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈຶ່ງຈະໄປເກີດໃນສຸກຄະຕິໂລກສະຫວັນ

**ປະຖົມເທວະຈາຣິກະສູດທີ ๗ ຈົບ**

# ໘. ທຸຕິຍະເທວະຈາຣິກະສູດ

## ວ່າດ້ວຍການຈາຣິກໃນເທວະໂລກ ສູດທີ ໘

[໑໐໑໘] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ຄັ້ງນັ້ນ ທ່ານພຣະມະຫາໂມກຄັນລານະໄດ້ຫາຍໂຕຈາກພຣະເຊຕະວັນໄປຜາກົດເທິງສະຫວັນ ຊັ້ນຕາວະຕຶງສາຄືບຸຣຸດຜູ້ມີກຳລັງຢຽດແຂນອອກ ຫຼື ຄູ້ແຂນເຂົ້າສັນນັ້ນ

ລຳດັບນັ້ນ ເທບຊັ້ນຕາວະຕຶງສາຈຳນວນຫຼາຍ ເຂົ້າໄປຫາທ່ານພຣະມະຫາໂມກຄັນລານະຮອດບ່ອນຢູ່ ອະພິວາດແລ້ວໄດ້ຢືນຢູ່ບ່ອນທີ່ສົມຄວນ ທ່ານພຣະມະຫາໂມກຄັນລານະໄດ້ກ່າວກັບເທບເຫຼົ່ານັ້ນດັ່ງນີ້ ວ່າ

ທ່ານຜູ້ມີອາຍຸທັງຫຼາຍ

໑. ການປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ເປັນຄວາມດີ ຍ້ອນການປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າເປັນເຫດ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວຈຶ່ງໄດ້ໄປເກີດໃນສຸກຄະຕິໂລກສະຫວັນ
໒. ການປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ
໓. ການປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ
໔. ການປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ ເປັນຄວາມດີ ຍ້ອນການປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວ ຈຶ່ງໄດ້ໄປເກີດໃນສຸກຄະຕິໂລກສະຫວັນ

ເທບເຫຼົ່ານັ້ນກ່າວວ່າ ທ່ານໂມກຄັນລານະຜູ້ນິຣະທຸກ

໑. ການປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນ ຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ເປັນຄວາມດີ ຍ້ອນການປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າເປັນເຫດ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວຈຶ່ງໄດ້ໄປເກີດໃນສຸກຄະຕິໂລກສະຫວັນ

໒. ການປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ

໓. ການປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ

໔. ການປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ ເປັນຄວາມດີ ຍ້ອນການປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈເປັນເຫດ ສັດລາງພວກໃນໂລກນີ້ຫຼັງຈາກຕາຍແລ້ວຈຶ່ງໄດ້ໄປເກີດໃນສຸກຄະຕິໂລກສະຫວັນ

**ທຸຕິຍະເທວະຈາຣິກະສູດທີ ໙ ຈົບ**

# ໑໐. ຕະຕິຍະເທວະຈາຣິກະສູດ

## ວ່າດ້ວຍການຈາຣິກໃນເທວະໂລກ ສູດທີ ໓

[໑໐໑໓] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງຫາຍພຣະອົງຈາກພຣະເຊຕະວັນໄປປາກົດເທິງສະຫວັນຊັ້ນຕາວະຕິງສາ ຄືບຸຣຸດຜູ້ມີກຳລັງຢຽດແຂນອອກຫຼືຄູ້ແຂນເຂົ້າສັນນັ້ນ

ລຳດັບນັ້ນ ເທບຊັ້ນຕາວະຕິງສາຈຳນວນຫຼາຍເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວໄດ້ຢືນຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບເທບເຫຼົ່ານັ້ນດັ່ງນີ້ ວ່າ ທ່ານທັງຫຼາຍ

໑. ການປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນ ຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ເປັນຄວາມດີ ຍ້ອນການປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າເປັນເຫດ ສັດລາງພວກໃນໂລກນີ້ ຈຶ່ງເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

໒. ການປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ
໓. ການປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ
໔. ການປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ ເປັນຄວາມດີ ຍ້ອນການປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈເປັນເຫດ ສັດລາງພວກໃນໂລກນີ້ຈຶ່ງເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ເທບເຫຼົ່ານັ້ນຂາບທູນວ່າ ຂ້າແດ່ພຣະອົງຜູ້ນິຣະທຸກ

໑. ການປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ເປັນຄວາມດີ ຍ້ອນການປະກອບດ້ວຍຄວາມເຫຼື້ອມໃສອັນ ບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າເປັນເຫດ ໝູ່ສັດນີ້ຈຶ່ງເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ
໒. ການປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ
໓. ການປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ
໔. ການປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ ເປັນຄວາມດີ ຍ້ອນການປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈເປັນເຫດ ໝູ່ສັດນີ້ຈຶ່ງເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

**ຕະຕິຍະເທວະຈາຣິກະສູດທີ ໑໐ ຈົບ**

**ຣາຊະການາມະວັກທີ ໒ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໓. ສະຣະນານິວັກ

## ໝວດວ່າດ້ວຍເຈົ້າສາກະຍະພຣະນາມວ່າສະຣະນານິ

## ໑. ປະຖົມມະຫານາມະສູດ

### ວ່າດ້ວຍເຈົ້າສາກະຍະພຣະນາມວ່າມະຫານາມ ສູດທີ ໑

[໑໐໑໗] ຂ້າພະເຈົ້າໄດ້ຟັງມາແບວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນິໂຄທາຣາມ ເຂດເມືອງກະບິນລະພັດ ແຄວັ້ນສັກກະ ຄັ້ງນັ້ນ ເຈົ້າສາກະຍະພຣະນາມວ່າມະຫານາມສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດບ່ອນຢູ່ ຖວາຍອະພິວາດແລ້ວ ປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ເມືອງກະບິນລະພັດນີ້ຮັ່ງມີ ອຸດົມສົມບູນ ມີປະຊາກອນຫຼາຍ ມີຖະໜົນຄັບແຄບ ຂ້ານ້ອຍນັ່ງໃກ້ພຣະຜູ້ມີພຣະພາກເຈົ້າຫຼືພິກຂຸທັງຫຼາຍຜູ້ເປັນທີ່ຈະເລີນໃຈ ເວລາຄ່ຳ ເຂົ້າໄປສູ່ເມືອງກະບິນລະພັດ ພົບເຫັນຊ້າງແດ່ ມ້າແດ່ ລົດແດ່ ກວຽນແດ່ ຜູ້ຄົນແດ່ ທີ່ສາລະວົນຂວັກໄຂວ່ ສະໄໝນັ້ນ ຂ້ານ້ອຍລືມສະຕິຜາຣົບພຣະຜູ້ມີພຣະພາກເຈົ້າ ພຣະທຳ ແລະພຣະສົງ ຂ້ານ້ອຍຄິດວ່າ ຫາກເຮົາເຖິງແກ່ກຳໃນເວລານີ້ ຄະຕິຂອງເຮົາຈະເປັນແນວໃດ? ອະພິສຳປະຣາຍະພົບຈະເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດວ່າ ຢ່າຊົງຢ້ານເລີຍ ມະຫາບໍພິດ ຢ່າຊົງຢ້ານເລີຍ ມະຫາບໍພິດ ການສະຫວັນຄົດຂອງພຣະອົງຈັກບໍ່ຊົ່ວຊາມ ກາລະກິຣິຍາກໍຈັກບໍ່ຊົ່ວຊາມ

ມະຫາບໍພິດ ຈິດຂອງຜູ້ໃດຜູ້ໜຶ່ງທີ່ໄດ້ຈະເລີນດ້ວຍສັດທາ ທີ່ໄດ້ຈະເລີນດ້ວຍສີນ ທີ່ໄດ້ຈະເລີນດ້ວຍສຸຕະ ທີ່ໄດ້ຈະເລີນດ້ວຍຈາຄະ ແລະທີ່ໄດ້ຈະເລີນດ້ວຍປັນຍາມາເປັນເວລາດົນ ກາຍນີ້ຂອງຜູ້ນັ້ນຄຸມກັນເປັນຮູບຮ່າງທີ່ປະກອບຂຶ້ນຈາກມະຫາພູຕະຮູບ ໔ ເກີດຈາກມານດາບິດາ ຈະເລີນໄວຍ້ອນເຂົ້າສຸກແລະເຂົ້າໜົມກຸມມາດ ບໍ່ທ່ຽງແທ້ ຕ້ອງອົບ ຕ້ອງນວດເຟັ້ນ ມີອັນແຕກກະຈັດກະຈາຍໄປເປັນທຳມະດາ ກາແດ່ ແຮ້ງແດ່ ນົກຕະກຸມແດ່ ໝາບ້ານແດ່ ໝາຈອກແດ່ ສັດຫຼາຍຊະນິດແດ່ ຍ່ອມກັດກິນກາຍນີ້ ສ່ວນຈິດຂອງຜູ້ນັ້ນທີ່ໄດ້ຈະເລີນດ້ວຍສັດທາ ຯລຯ ແລະທີ່ໄດ້ຈະເລີນດ້ວຍປັນຍາມາເປັນເວລາດົນ ຍ່ອມສູງຂຶ້ນໄປຈົນເຖິງບັນລຸຄຸນວິເສດ

ມະຫາບໍພິດ ບຸຣຸດມຸດລົງໃນແມ່ນ້ຳເລິກແລ້ວທຸບໝໍ້ເນີຍໃສຫຼືໝໍ້ນ້ຳມັນ ກ້ອນຫີນຫຼືກະເບື້ອງໝໍ້ນັ້ນເພິ່ງຈົມລົງ ສ່ວນເນີຍໃສຫຼືນ້ຳມັນໃນໝໍ້ນັ້ນເພິ່ງລອຍຂຶ້ນເໜືອນ້ຳ ແມ່ນສັນໃດ ຈິດ

ຂອງຜູ້ໃດຜູ້ໜຶ່ງທີ່ໄດ້ຈະເລີນດ້ວຍສັດທາ ຯລຯ ແລະ ທີ່ໄດ້ຈະເລີນດ້ວຍປັນຍາມາເປັນເວລາດົນ ກາຍນີ້ຂອງຜູ້ນັ້ນຄຸມກັນເປັນຮູບຮ່າງທີ່ປະກອບຂຶ້ນຈາກມະຫາພູຕະຮູບ ໔ ເກີດຈາກມານດາບິດາ ຈະເລີນໄວຍ້ອນເຂົ້າສຸກ ແລະເຂົ້າໜົມກຸມມາດ ບໍ່ທ່ຽງແທ້ ຕ້ອງອົບ ຕ້ອງນວດເຟັ້ນ ມີອັນແຕກ ກະຈັດກະຈາຍໄປເປັນທຳມະດາ ກາແດ່ ແຮ້ງແດ່ ນົກຕະກຸມແດ່ ໝາບ້ານແດ່ ໝາຈອກແດ່ ສັດຫຼາຍຊະນິດແດ່ ຍ່ອມກັດກິນກາຍນີ້ ສ່ວນຈິດຂອງຜູ້ນັ້ນທີ່ໄດ້ຈະເລີນດ້ວຍສັດທາ ຯລຯ ແລະທີ່ໄດ້ຈະເລີນດ້ວຍປັນຍາມາເປັນເວລາດົນ ຍ່ອມສູງຂຶ້ນໄປຈົນເຖິງບັນລຸຄຸນວິເສດ ແຕ່ຈິດຂອງພຣະອົງທີ່ໄດ້ຈະເລີນດ້ວຍສັດທາ ຯລຯ ແລະ ທີ່ໄດ້ຈະເລີນດ້ວຍປັນຍາມາເປັນເວລາດົນກໍຄືກັນສັນນັ້ນ ຢ່າຊົງຢ້ານເລີຍ ມະຫາບໍພິດ ຢ່າຊົງຢ້ານເລີຍ ມະຫາບໍພິດ ການສະຫວັນຄົດຂອງພຣະອົງ ຈັກບໍ່ຊົ່ວຊາມ ກາລະກິຣິຍາກໍຈັກບໍ່ຊົ່ວຊາມ

**ປະຖົມມະຫານາມະສູດທີ ໑ ຈົບ**

# ໘. ທຸຕິຍະມະຫານາມະສູດ

## ວ່າດ້ວຍເຈົ້າສາກະຍະພຣະນາມວ່າມະຫານາມ ສູດທີ ໘

[໑໐໑໙] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນິໂຄທາຣາມ ເຂດເມືອງກະບິນລະພັດ ແຄວັນສັກກະ ຄັ້ງນັ້ນ ເຈົ້າສາກະຍະພຣະນາມວ່າມະຫານາມສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດບ່ອນຢູ່ ຖວາຍອະພິວາດແລ້ວ ປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ເມືອງກະບິນລະພັດນີ້ ຮັ່ງມີ ອຸດົມສົມບູນ ມີປະຊາກອນຫຼາຍ ມີຖະໜົນຄັບແຄບ ຂ້ານ້ອຍນັ່ງໃກ້ພຣະຜູ້ມີພຣະພາກເຈົ້າ ຫຼື ພິກຂຸທັງຫຼາຍຜູ້ເປັນທີ່ຈະເລີນໃຈ ເວລາຄ່ຳ ເຂົ້າໄປສູ່ເມືອງກະບິນລະພັດ ພົບເຫັນຊ້າງແດ່ ມ້າແດ່ ລົດແດ່ ກວຽນແດ່ ຜູ້ຄົນແດ່ ທີ່ສາລະວົນຂວັກໄຂວ່ ສະໄໝນັ້ນ ຂ້ານ້ອຍລືມສະຕິທີ່ປາຣັບພຣະຜູ້ມີພຣະພາກເຈົ້າ ພຣະທຳ ແລະພຣະສົງ ຂ້ານ້ອຍຄິດວ່າ ຫາກເຮົາເພິ່ງເຖິງແກ່ກຳໃນເວລານີ້ ຄະຕິຂອງເຮົາຈະເປັນແນວໃດ? ອະພິສຳປະຣາຍະພົບຈະເປັນແນວໃດ?

ພຣະຜູ້ມີພຣະພາກເຈົ້າຕັດວ່າ ຢ່າຊົງຢ້ານເລີຍ ມະຫາບໍພິດ ຢ່າຊົງຢ້ານເລີຍ ມະຫາບໍພິດ ການສະຫວັນຄົດຂອງພຣະອົງຈັກບໍ່ຊົ່ວຊາມ ກາລະກິຣິຍາກໍຈັກບໍ່ຊົ່ວຊາມ ມະຫາບໍພິດ ອະຣິຍະສາວົກຜູ້ປະກອບດ້ວຍທຳ ໔ ປະການຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

ທຳ ໔ ປະການ ອັນໃດແດ່

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ
໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ
໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ
໔. ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ ມະຫາບໍພິດ ປຽບຄືຕົ້ນໄມ້ທີ່ນ້ອມໄປທາງທິດປາຈີນ ອຽງໄປທາງທິດປາຈີນ ໂອນໄປທາງທິດປາຈີນ ຕົ້ນໄມ້ນັ້ນເມື່ອຖືກຕັດເຫງົ້າຈະລົ້ມໄປທາງໃດ ຈະລົ້ມໄປທາງທີ່ຕົ້ນໄມ້ນ້ອມໄປ ອຽງໄປ ໂອນໄປ ຂ້ານ້ອຍ

ມະຫາບໍພິດ ອຸປະມານີ້ສັນໃດ ອຸປະໄມກໍຄືກັນສັນນັ້ນ ອະຣິຍະສາວົກຜູ້ປະກອບດ້ວຍທຳ ໔ ປະການນີ້ຍ່ອມນ້ອມໄປສູ່ນິບພານ ອຽງໄປສູ່ນິບພານ ໂອນໄປສູ່ນິບພານ

**ທຸຕິຍະມະຫານາມະສູດທີ ໒ ຈົບ**

# ໓. ໂຄທະສັກກະສູດ

## ວ່າດ້ວຍເຈົ້າສາກະຍະພຣະນາມວ່າໂຄທາ

[໑໐໑໗] ເລື້ອງເກີດຂຶ້ນທີ່ເມືອງກະບິນລະພັດ

ຄັ້ງນັ້ນ ເຈົ້າສາກະຍະພຣະນາມວ່າ ມະຫານາມ ສະເດັດເຂົ້າໄປຫາເຈົ້າສາກະຍະພຣະນາມວ່າໂຄທາຮອດບ່ອນຢູ່ແລ້ວໄດ້ຕັດຖາມເຈົ້າສາກະຍະພຣະນາມວ່າໂຄທານັ້ນດັ່ງນີ້ວ່າ ໂຄທາ ພຣະອົງຊົງຮູ້ບຸກຄົນຜູ້ປະກອບດ້ວຍທຳທີ່ໃດວ່າ ເປັນພຣະໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ເຈົ້າໂຄທາສາກະຍະຕັດຕອບວ່າ ມະຫານາມ ຂ້ານ້ອຍຮູ້ບຸກຄົນຜູ້ປະກອບດ້ວຍທຳ ໓ ປະການວ່າ ເປັນພຣະໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ທຳ ໓ ປະການ ອັນໃດແດ່

ຄື ພຣະອະຣິຍະສາວົກໃນພຣະທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນ ຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງ ເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ
໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ
໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງວ່າ ພຣະສົງ ສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີ ຯລຯ ເປັນນາບຸນອັນປະ ເສີດຂອງໂລກ

ມະຫານາມ ຂ້ານ້ອຍຮູ້ບຸກຄົນຜູ້ປະກອບດ້ວຍທຳ ໓ ປະການນີ້ວ່າ ເປັນພຣະໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ມະຫານາມ ສ່ວນພຣະອົງຊົງຮູ້ບຸກຄົນຜູ້ປະກອບດ້ວຍທຳທໍ່ໃດວ່າ ເປັນພຣະໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ໂຄທາ ຂ້ານ້ອຍຮູ້ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການວ່າ ເປັນພຣະໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ທຳ ໔ ປະການ ອັນໃດແດ່

ຄື ພຣະອະຣິຍະສາວົກໃນພຣະທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນ ຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງ ເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ
໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ
໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ
໔. ປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ

ໂຄທາ ຂ້ານ້ອຍຮູ້ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ວ່າ ເປັນພຣະໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ຊ້າກ່ອນ ມະຫານາມ ຊ້າກ່ອນ ມະຫານາມ ພຣະຜູ້ມີພຣະພາກເຈົ້າທໍ່ນັ້ນ ເພິ່ງຊົງຮູ້ບຸກ ຄົນນັ້ນວ່າ ປະກອບບໍປະກອບດ້ວຍທຳເຫຼົ່ານີ້

ມາເທີ້ນ ໂຄທາ ເຮົາຈັກເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າແລ້ວທູນຖາມເລື້ອງນີ້

ລຳດັບນັ້ນ ເຈົ້າມະຫານາມະສາກະຍະແລະເຈົ້າໂຄທາສາກະຍະສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບນັ່ງ ໃນທີ່ສົມຄວນ ເຈົ້າມະຫານາມະສາກະຍະ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ຂ້າພຣະອົງເຂົ້າໄປຫາເຈົ້າໂຄທາສາກະຍະແລ້ວຖາມວ່າ ໂຄທາ ພຣະອົງຊົງຮູ້ບຸກຄົນຜູ້ປະກອບດ້ວຍທຳທໍ່ໃດວ່າ ເປັນພຣະໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອຂ້າພຣະອົງຖາມແນວນີ້ແລ້ວ ເຈົ້າໂຄທາສາກະຍະໄດ້ຕັດຕອບວ່າ ມະຫານາມ ຂ້ານ້ອຍຮູ້ບຸກຄົນຜູ້ປະກອບດ້ວຍທຳ ໓ ປະການວ່າ ເປັນພຣະໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ທຳ ໓ ປະການ ອັນໃດແດ່

ຄື ພຣະອະຣິຍະສາວົກໃນພຣະທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ
໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ
໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງວ່າ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີ ຯລຯ ເປັນນາບຸນອັນປະເສີດຂອງໂລກ

ຂ້ານ້ອຍຮູ້ບຸກຄົນຜູ້ປະກອບດ້ວຍທຳ ໓ ປະການນີ້ວ່າ ເປັນພຣະໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ ສ່ວນພຣະອົງຊົງຮູ້ບຸກຄົນຜູ້ປະກອບດ້ວຍທຳທໍ່ໃດວ່າ ເປັນພຣະໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອເຈົ້າໂຄທາສາກະຍະຕັດຖາມແນວນີ້ແລ້ວ ຂ້າພຣະອົງໄດ້ຕອບເຈົ້າໂຄທາສາກະຍະດັ່ງນີ້ວ່າ ໂຄທາ ຂ້ານ້ອຍຮູ້ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການວ່າ ເປັນພຣະໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ທຳ ໔ ປະການ ອັນໃດແດ່

ຄື ພຣະອະຣິຍະສາວົກໃນພຣະທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ
໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ
໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ
໔. ປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ

ໂຄທາ ຂ້ານ້ອຍຮູ້ບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ວ່າ ເປັນພຣະ ໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອຂ້າພຣະອົງຕອບແນວນີ້ແລ້ວ ເຈົ້າໂຄທາສາກະຍະໄດ້ຕັດວ່າ ດງອກ່ອນ ມະຫານາມ ດງອກ່ອນ ມະຫານາມ ພຣະຜູ້ມີພຣະພາກເຈົ້າທີ່ນັ້ນເພິ່ງຊົງຮູ້ບຸກຄົນນັ້ນວ່າປະກອບບໍ່ປະກອບດ້ວຍທຳເຫຼົ່ານີ້

ຂ້າແດ່ ພຣະອົງຜູ້ຈະເລີນ ເຫດການ໌ບາງຢ່າງເກີດຂຶ້ນໃນພຣະທຳວິໄນນີ້ ໂດຍຝ່າຍໜຶ່ງເປັນຝ່າຍພຣະຜູ້ມີພຣະພາກເຈົ້າ ອີກຝ່າຍໜຶ່ງເປັນຝ່າຍພິກຂຸສົງ ຂ້າພຣະອົງເປັນຝ່າຍພຣະຜູ້ມີພຣະພາກເຈົ້າທີ່ນັ້ນ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຈຳຂ້າພຣະອົງວ່າເປັນຜູ້ເຫຼື້ອມໃສແນວນີ້

ຂ້າແດ່ ພຣະອົງຜູ້ຈະເລີນ ເຫດການບາງຢ່າງເກີດຂຶ້ນໃນພຣະທຳວິໄນນີ້ ໂດຍຝ່າຍໜຶ່ງເປັນຝ່າຍພຣະຜູ້ມີພຣະພາກເຈົ້າ ອີກຝ່າຍໜຶ່ງເປັນຝ່າຍພິກຂຸສົງ ແລະພິກຂຸນີສົງ ຂ້າພຣະອົງເປັນຝ່າຍພຣະຜູ້ມີພຣະພາກເຈົ້າທີ່ນັ້ນ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຈຳຂ້າພຣະອົງວ່າເປັນຜູ້ເຫຼື້ອມໃສແນວນີ້

ຂ້າແດ່ ພຣະອົງຜູ້ຈະເລີນ ເຫດການບາງຢ່າງເກີດຂຶ້ນໃນພຣະທຳວິໄນນີ້ ໂດຍຝ່າຍໜຶ່ງເປັນຝ່າຍພຣະຜູ້ມີພຣະພາກເຈົ້າ ອີກຝ່າຍໜຶ່ງເປັນຝ່າຍພິກຂຸສົງ ພິກຂຸນີສົງ ແລະອຸປາສົກທັງຫຼາຍ ຂ້າພຣະອົງເປັນຝ່າຍພຣະຜູ້ມີພຣະພາກເຈົ້າທີ່ນັ້ນ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງຊົງຈຳຂ້າພຣະອົງວ່າເປັນຜູ້ເຫຼື້ອມໃສແນວນີ້

ຂ້າແດ່ ພຣະອົງຜູ້ຈະເລີນ ເຫດການບາງຢ່າງເກີດຂຶ້ນໃນພຣະທຳວິໄນນີ້ ໂດຍຝ່າຍໜຶ່ງເປັນຝ່າຍພຣະຜູ້ມີພຣະພາກເຈົ້າ ອີກຝ່າຍໜຶ່ງເປັນຝ່າຍພິກຂຸສົງ ພິກຂຸນີສົງ ອຸປາສົກ ແລະອຸປາສິກາທັງຫຼາຍ ຂ້າພຣະອົງເປັນຝ່າຍພຣະຜູ້ມີພຣະພາກເຈົ້າທີ່ນັ້ນ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຈຳຂ້າພຣະອົງວ່າເປັນຜູ້ເຫຼື້ອມໃສແນວນີ້

ຂ້າແດ່ ພຣະອົງຜູ້ຈະເລີນ ເຫດການບາງຢ່າງເກີດຂຶ້ນໃນພຣະທຳວິໄນນີ້ ໂດຍຝ່າຍໜຶ່ງ

ເປັນຝ່າຍພຣະຜູ້ມີພຣະພາກເຈົ້າ ອີກຝ່າຍໜຶ່ງເປັນຝ່າຍພິກຂຸສົງ ພິກຂຸນີສົງ ອຸປາສົກ ອຸປາສິກາ ຊາວໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດ ຂ້າພຣະອົງເປັນຝ່າຍພຣະຜູ້ມີພຣະພາກເຈົ້າທໍ່ນັ້ນ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຈຳຂ້າພຣະອົງວ່າເປັນຜູ້ເຫຼື້ອມໃສແນວນີ້

ພຣະຜູ້ມີພຣະພາກເຈົ້າຕັດກັບເຈົ້າໂຄທາວ່າ ມະຫາບໍພິດ ພຣະອົງຈະຕັດອັນໃດກັບເຈົ້າມະຫານາມະສາກະຍະຜູ້ມີວາທະແນວນີ້

ເຈົ້າໂຄທາສາກະຍະຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງບໍ່ໄດ້ກ່າວອັນໃດໆ ກັບເຈົ້າມະຫານາມະສາກະຍະຜູ້ມີວາທະແນວນີ້ເລີຍ ນອກຈາກກັນລະຍານະທຳ ນອກຈາກກຸສົນທຳ

**ໂຄທະສັກກະສູດທີ ໓ ຈົບ**

# ໔. ປະຖົມສະຣະນານິສັກກະສູດ

## ວ່າດ້ວຍເຈົ້າສາກະຍະພຣະນາມວ່າສະຣະນານີ ສູດທີ ໑

[໑໐໔໐] ເລື້ອງເກີດຂຶ້ນທີ່ເມືອງກະບິນລະພັດ

ສະໄໝນັ້ນ ເຈົ້າສາກະຍະພຣະນາມວ່າ ສະຣະນານິສະຫວັນຄົດແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຊົງພະຍາກອນພຣະອົງວ່າ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທີໃນມື້ທາງໜ້າ ໄດ້ຂ່າວວ່າໃນບ່ອນນັ້ນ ເຈົ້າສາກະຍະຫຼາຍພຣະອົງມາປະຊຸມພ້ອມກັນຕ່າງຕຳໜິ ປະນາມ ໂພນທະນາວ່າ ທ່ານທັງຫຼາຍ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດບັດນີ້ໃຜນໍ ໃນບ່ອນນີ້ ຈັກບໍ່ເປັນພຣະໂສດາບັນ ຍ້ອນເຈົ້າສະຣະນານິສາກະຍະສະຫວັນຄົດແລ້ວ ພຣະຜູ້ມີພຣະພາກເຈົ້າ ໄດ້ຊົງພະຍາກອນພຣະສະຣະນາໄວ້ວ່າ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທີໃນມື້ທາງໜ້າ ແຕ່ເປັນຫຍັງ? ເຈົ້າສະຣະນານິສາກະຍະ ຈຶ່ງຍັງຊົງສະແດງໃຫ້ເຫັນເຖິງຄວາມທໍ້ແທ້ໃນສິກຂາ ສະເຫວີຍນ້ຳຈັນຢູ່

ຄັ້ງນັ້ນ ເຈົ້າສາກະຍະພຣະນາມວ່າ ມະຫານາມສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ເຈົ້າສະຣະນານິສາກະຍະສະຫວັນຄົດແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຊົງພະຍາກອນພຣະອົງວ່າ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທີໃນມື້ທາງໜ້າ ໄດ້ຂ່າວວ່າໃນບ່ອນນັ້ນ ເຈົ້າສາກະຍະຫຼາຍພຣະອົງມາປະຊຸມພ້ອມກັນຕ່າງຕຳໜິ ປະນາມ ໂພນທະນາວ່າ ທ່ານທັງຫຼາຍໜ້າ

ອັດສະຈັນຈິງ ບໍ່ເຄີຍຜາກົດ ບັດນີ້ໃຜບໍ ໃນບ່ອນນີ້ຈັກບໍ່ເປັນພຣະໂສດາບັນຍ້ອນເຈົ້າສະຣະນານິສາກະຍະສະຫວັນຄົດແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຊົງພະຍາກອນພຣະອົງວ່າ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ ແຕ່ເປັນຫຍັງ? ເຈົ້າສະຣະນານິສາກະຍະ ຈຶ່ງຍັງຊົງສະແດງໃຫ້ເຫັນເຖິງຄວາມທໍ້ແທ້ໃນສິກຂາ ສະເຫວີຍນ້ຳຈັນຢູ່

ພຣະຜູ້ມີພຣະພາກເຈົ້າຕັດວ່າ ມະຫາບໍພິດ ອຸປາສົກຜູ້ເຖິງພຣະພຸດທະ ພຣະທຳ ແລະພຣະສົງເປັນສະຣະນະຕະຫຼອດການລະນານ ຈະເຖິງຄວາມຕົກຕ່ຳໄດ້ແນວໃດ ບຸກຄົນເມື່ອຈະກ່າວໃຫ້ຖືກຕ້ອງ ເພິ່ງກ່າວເຖິງອຸປາສົກນັ້ນໃດວ່າ ເປັນຜູ້ເຖິງພຣະພຸດ ພຣະທຳ ແລະພຣະສົງເປັນສະຣະນະຕະຫຼອດການລະນານ ບຸກຄົນເມື່ອຈະກ່າວໃຫ້ຖືກຕ້ອງ ກໍເພິ່ງກ່າວເຖິງເຈົ້າສາກະຍະພຣະນາມວ່າສະຣະນານິວ່າ ເປັນອຸປາສົກ ຜູ້ຊົງເຖິງພຣະພຸດ ພຣະທຳ ແລະພຣະສົງເປັນສະຣະນະຕະຫຼອດການລະນານ ພຣະອົງຈະເຖິງຄວາມຕົກຕ່ຳໄດ້ແນວໃດ

ມະຫາບໍພິດ ບຸກຄົນລາງຄົນໃນໂລກນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ໆລໆ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ໆລໆ ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ໆລໆ ມີຫາສະປັນຍາ (ປັນຍາແຈ່ມໃສ) ມີຊະວະນະປັນຍາ (ປັນຍາແລ່ນໄປ) ແລະເຖິງພ້ອມດ້ວຍວິມຸດຕິ ເຂົາເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ແມ່ນບຸກຄົນນີ້ກໍພົ້ນຈາກນະຮົກ ກຳເນີດສັດເດຍຣັດສານ ພູມແຫ່ງເຜດ ອະບາຍ ທຸກຄະຕິ ແລະວິນິບາດ

໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ໆລໆ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ໆລໆ ໃນພຣະສົງ ໆລໆ ມີຫາສະປັນຍາ ມີຊະວະນະປັນຍາ ແຕ່ບໍ່ເຖິງພ້ອມດ້ວຍວິມຸດຕິ ເຂົາຈຶ່ງເປັນໂອປະປາຕິກະ ຍ້ອນໂອຣຳພາຄິຍະສັງໂຍດ ໕ ປະການສິ້ນໄປ ຈັກປະຣິນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນອີກ ແມ່ນບຸກຄົນນີ້ກໍພົ້ນຈາກນະຮົກ ກຳເນີດສັດເດຍຣັດສານ ພູມແຫ່ງເຜດ ອະບາຍ ທຸກຄະຕິ ແລະວິນິບາດ

໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ໆລໆ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວ

ໃນພຣະທຳ ຯລຯ ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ ບໍ່ມີຫາສະປັນຍາ ບໍ່ມີຊະວະນະປັນຍາ ທັງບໍ່ເຖິງພ້ອມດ້ວຍວິມຸດຕິ ເຂົາຈຶ່ງເປັນພຣະສະກະທາຄາມີ ມາສູ່ໂລກນີ້ອີກພຽງເທື່ອດຽວ ກໍຈະເຮັດບ່ອນສຸດແຫ່ງທຸກໄດ້ ຍ້ອນສັງໂຍດ ໓ ປະການສິ້ນໄປ ຍ້ອນບັນເທົາຣາຄະ ໂທສະ ໂມຫະໃຫ້ເບົາບາງໄດ້ ແມ່ນບຸກຄົນນີ້ກໍພົ້ນຈາກນະຮົກ ກຳເນີດສັດເດຍຣັດສານ ພູມແຫ່ງເຜດ ອະບາຍ ທຸກຄະຕິ ແລະວິນິບາດ

໔. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໃນພຣະສົງ ຯລຯ ບໍ່ມີຫາສະປັນຍາ ບໍ່ມີຊະວະນະປັນຍາ ທັງບໍ່ເຖິງພ້ອມດ້ວຍວິມຸດຕິ ເຂົາຈຶ່ງເປັນພຣະໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ ຍ້ອນສັງໂຍດ ໓ ປະການສິ້ນໄປ ແມ່ນບຸກຄົນນີ້ກໍພົ້ນຈາກນະຮົກ ກຳເນີດສັດເດຍຣັດສານ ພູມແຫ່ງເຜດ ອະບາຍ ທຸກຄະຕິ ແລະວິນິບາດ

໕. ບໍ່ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າ ຯລຯ ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ ບໍ່ມີ ຫາສະປັນຍາ ບໍ່ມີຊະວະນະປັນຍາ ທັງບໍ່ເຖິງພ້ອມດ້ວຍວິມຸດຕິ ແຕ່ເຂົາມີທຳເຫຼົ່ານີ້ ຄື ສັດທິນຊີ ວິຣິຍິນຊີ ສະຕິນຊີ ສະມາທິນຊີ ປັນຍິນຊີ ແລະທຳທັງຫຼາຍທີ່ຕະຖາຄົດປະກາດແລ້ວ ຍ່ອມຄວນແກ່ການພິຈາລະນາດ້ວຍປັນຍາໂດຍປະມານ ແມ່ນບຸກຄົນນີ້ກໍບໍ່ໄປສູ່ນະຮົກ ກຳເນີດສັດເດຍຣັດສານ ພູມແຫ່ງເຜດ ອະບາຍ ທຸກຄະຕິ ແລະວິນິບາດ

໖. ບໍ່ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າ ຯລຯ ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ ບໍ່ມີ ຫາສະປັນຍາ ບໍ່ມີຊະວະນະປັນຍາ ທັງບໍ່ເຖິງພ້ອມດ້ວຍວິມຸດຕິ ແຕ່ເຂົາມີທຳເຫຼົ່ານີ້ ຄື ສັດທິນຊີ ຯລຯ ປັນຍິນຊີ ແລະເຂົາມີສັດທາພໍປະມານ ຄວາມຮັກພໍປະມານໃນພຣະຕະຖາຄົດ ແມ່ນບຸກຄົນເຫຼົ່ານີ້ກໍບໍ່ໄປສູ່ນະຮົກ ກຳເນີດສັດເດຍຣັດສານ ພູມແຫ່ງເຜດ ອະບາຍ ທຸກຄະຕິ ແລະວິນິບາດ

ມະຫາບໍພິດ ແມ່ນທາກຕົ້ນສາລະໃຫຍ່ເຫຼົ່ານີ້ເພິ່ງຮູ້ຈັກຄຳສຸພາສິດ ຄຳທຸບພາສິດ ອາຕະມາພາບກໍຈະພະຍາກອນຕົ້ນສາລະໃຫຍ່ເຫຼົ່ານີ້ວ່າ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ ບໍ່ຈຳເປັນຕ້ອງກ່າວເຖິງເຈົ້າສະຣະນານິສາກະຍະເລີຍ ຍ້ອນເຈົ້າສະຣະນານິສາກະຍະໄດ້ສະມາທານສິກຂາບົດ ໃນເວລາກ່ອນຈະສະຫວັນຄົດ

**ປະຖົມສະຣະນານິສັກກະສູດທີ ໔ ຈົບ**

# ໔. ທຸຕິຍະສະຣະນານິສັກກະສູດ

## ວ່າດ້ວຍເຈົ້າສາກະຍະພຣະນາມວ່າສະຣະນານິ ສູດທີ ໔

[໑໐໔໑] ເລື່ອງເກີດຂຶ້ນທີ່ເມືອງກະບິນລະພັດ

ສະໄໝນັ້ນ ເຈົ້າສາກະຍະພຣະນາມວ່າສະຣະນານິສະຫວັນຄົດແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຊົງພະຍາກອນພຣະອົງວ່າ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ ໄດ້ຂ່າວວ່າໃນບ່ອນນັ້ນ ເຈົ້າສາກະຍະຫຼາຍພຣະອົງມາປະຊຸມພ້ອມກັນຕ່າງຕຳໜິ ປະນາມ ໂພນທະນາວ່າ ທ່ານທັງຫຼາຍ ໜ້າອັດສະຈັນຈິງແທ້ນໍ ບໍ່ເຄີຍຜາກົດ ບັດນີ້ໃຜນໍ ໃນບ່ອນນີ້ຈັກບໍ່ເປັນພຣະໂສດາບັນ ຍ້ອນເຈົ້າສະຣະນານິສາກະຍະສະຫວັນຄົດແລ້ວພຣະຜູ້ມີພຣະພາກເຈົ້າໄດ້ຊົງພະຍາກອນພຣະອົງວ່າ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ ແຕ່ເຈົ້າສະຣະນານິສາກະຍະບໍ່ໄດ້ຊົງພ່ຳເພັງສິກຂາໃຫ້ບໍລິບູນ

ຄັ້ງນັ້ນ ເຈົ້າສາກະຍະພຣະນາມວ່າ ມະຫານາມ ສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ ປະທັບ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ເຈົ້າສະຣະນານິສາກະຍະສະຫວັນຄົດແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຊົງພະຍາກອນພຣະອົງວ່າ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ ໄດ້ຂ່າວວ່າໃນບ່ອນນັ້ນ ເຈົ້າສາກະຍະຫຼາຍພຣະອົງມາປະຊຸມພ້ອມກັນ ຕ່າງຕຳໜິ ປະນາມ ໂພນທະນາວ່າ ທ່ານທັງຫຼາຍ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ບັດນີ້ໃຜນໍ ໃນບ່ອນນີ້ຈັກບໍ່ເປັນພຣະໂສດາບັນ ຍ້ອນເຈົ້າສະຣະນານິສາກະຍະສະຫວັນຄົດແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຊົງພະຍາກອນພຣະອົງວ່າ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ ແຕ່ເຈົ້າສະຣະນານິສາກະຍະບໍ່ໄດ້ຊົງພ່ຳເພັງສິກຂາໃຫ້ບໍລິບູນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ມະຫາບໍພິດ ອຸປາສົກຜູ້ເຖິງພຣະພຸດ ພຣະທຳ ແລະພຣະສົງເປັນສະຣະນະຕະຫຼອດການລະນານ ຈະເຖິງຄວາມຕົກຕ່ຳໄດ້ແນວໃດ ບຸກຄົນເມື່ອຈະກ່າວໃຫ້ຖືກຕ້ອງ ເພິ່ງກ່າວເຖິງອຸປາສົກນັ້ນໃດວ່າ ເປັນຜູ້ເຖິງພຣະພຸດທະ ພຣະທຳ ແລະພຣະສົງເປັນສະຣະນະຕະຫຼອດການລະນານ ບຸກຄົນເມື່ອຈະກ່າວໃຫ້ຖືກຕ້ອງ ເພິ່ງກ່າວເຖິງເຈົ້າສະຣະນານິສາກະຍະວ່າ ເປັນຜູ້ເຖິງພຣະພຸດທະ ພຣະທຳ ແລະພຣະສົງເປັນສະຣະນະຕະຫຼອດການລະນານ ພຣະອົງຈະເຖິງຄວາມຕົກຕ່ຳໄດ້ແນວໃດ

ມະຫາບໍພິດ ບຸກຄົນລາງຄົນໃນໂລກນີ້

໑. ເປັນຜູ້ໝັ້ນຄົງ ເຫຼື້ອມໃສຍິ່ງໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ฯລฯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ເປັນຜູ້ໝັ້ນຄົງ ເຫຼື້ອມໃສຍິ່ງໃນພຣະທຳ ฯລฯ ໃນພຣະສົງ ฯລฯ ມີຫາສະປັນຍາ ມີຊະວະນະປັນຍາ ແລະເຖິງພ້ອມດ້ວຍວິມຸດຕິ ເຂົາຍ່ອມເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ແມ່ນບຸກຄົນນີ້ກໍພົ້ນຈາກນະຮົກ ກຳເນີດສັດເດຍຣັດສານ ພູມແຫ່ງເຜດ ອະບາຍ ທຸກຄະຕິ ແລະວິນິບາດ

໒. ເປັນຜູ້ໝັ້ນຄົງ ເຫຼື້ອມໃສຍິ່ງໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ฯລฯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ເປັນຜູ້ໝັ້ນຄົງ ເຫຼື້ອມໃສຍິ່ງໃນພຣະທຳ ฯລฯ ໃນພຣະສົງ ฯລฯ ມີຫາສະປັນຍາ ມີຊະວະນະປັນຍາ ແຕ່ບໍ່ເຖິງພ້ອມດ້ວຍວິມຸດຕິ ຍ້ອນໂອຣຳພາຄິຍະສັງໂຍດ ๕ ປະການສິ້ນໄປ ເຂົາຈຶ່ງເປັນພຣະອະນາຄາມີຜູ້ອັນຕະຣາປະຣິນິບພາຍີ ເປັນພຣະອະນາຄາມີຜູ້ອຸປະຫັດຈະປະຣິນິບພາຍີ ເປັນພຣະອະນາຄາມີຜູ້ອະສັງຂາຣະປະຣິນິບພາຍີ ເປັນພຣະອະນາຄາມີຜູ້ສະສັງຂາຣະປະຣິນິບພາຍີ ເປັນພຣະອະນາຄາມີຜູ້ອຸດທັງໂສໂຕອະກະນິດຖະຄາມີ ແມ່ນບຸກຄົນນີ້ກໍພົ້ນຈາກນະຮົກ ກຳເນີດສັດເດຍຣັດສານ ພູມແຫ່ງເຜດ ອະບາຍ ທຸກຄະຕິ ແລະວິນິບາດ

໓. ເປັນຜູ້ໝັ້ນຄົງ ເຫຼື້ອມໃສຍິ່ງໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ฯລฯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ເປັນຜູ້ໝັ້ນຄົງ ເຫຼື້ອມໃສຍິ່ງໃນພຣະທຳ ฯລฯ ໃນພຣະສົງ ฯລฯ ບໍ່ມີຫາສະປັນຍາ ບໍ່ມີຊະວະນະປັນຍາ ທັງບໍ່ເຖິງພ້ອມດ້ວຍວິມຸດຕິ ເຂົາຈຶ່ງເປັນພຣະສະກະທາຄາມີ ຍ້ອນສັງໂຍດ ໓ ປະການສິ້ນໄປ ຍ້ອນບັນເທົາຣາຄະ ໂທສະ ແລະໂມຫະໃຫ້ເບົາບາງ ມາສູ່ໂລກນີ້ອີກພຽງຄັ້ງ ດຽວກໍຈະເຮັດບ່ອນສຸດແຫ່ງທຸກໄດ້ ແມ່ນບຸກຄົນນີ້ກໍພົ້ນຈາກນະຮົກ ກຳເນີດ ສັດເດຍຣັດສານ ພູມແຫ່ງເຜດ ອະບາຍ ທຸກຄະຕິ ແລະວິນິບາດ

໔. ເປັນຜູ້ໝັ້ນຄົງ ເຫຼື້ອມໃສຍິ່ງໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ฯລฯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ເປັນຜູ້ໝັ້ນຄົງ ເຫຼື້ອມໃສຍິ່ງໃນພຣະທຳ ฯລฯ ໃນພຣະສົງ ฯລฯ ບໍ່ມີຫາສະປັນຍາ ບໍ່ມີຊະວະນະປັນຍາ ທັງບໍ່ເຖິງພ້ອມດ້ວຍວິມຸດຕິ ເຂົາຈຶ່ງເປັນພຣະໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ ຍ້ອນສັງໂຍດ ໓

ປະການສິ້ນໄປ ແມ່ນບຸກຄົນ ນີ້ກໍພົ້ນຈາກນະຮົກ ກຳເນີດສັດເດຍຣັດສານ ພູມແຫ່ງເຜດ ອະບາຍ ທຸກຄະຕິ ແລະວິນິບາດ

໕. ເປັນຜູ້ໝັ້ນຄົງ ເຫຼື້ອມໃສຍິ່ງໃນພຣະພຸດທະເຈົ້າ ໆລໆ ໃນພຣະທຳ ໆລໆ ໃນພຣະສົງ ໆລໆ ບໍ່ມີຫາສະປັນຍາ ບໍ່ມີຊະວະນະປັນຍາ ທັງບໍ່ເຖິງພ້ອມດ້ວຍວິມຸດຕິ ແຕ່ເຂົາມີທຳເຫຼົ່ານີ້ ຄື ສັດທິນຊີ ໆລໆ ປັນຍິນຊີ ແລະທຳທັງຫຼາຍທີ່ຕະຖາຄົດປະກາດ ຍ່ອມຄວນແກ່ການພິຈາລະນາດ້ວຍປັນຍາໂດຍປະມານ ແມ່ນບຸກຄົນນີ້ກໍບໍ່ໄປສູ່ນະຮົກ ກຳເນີດສັດເດຍຣັດສານ ພູມແຫ່ງເຜດ ອະບາຍ ທຸກຄະຕິ ແລະວິນິບາດ

໖. ເປັນຜູ້ໝັ້ນຄົງ ເຫຼື້ອມໃສຍິ່ງໃນພຣະພຸດທະເຈົ້າ ໆລໆ ໃນພຣະທຳ ໆລໆ ໃນພຣະສົງ ໆລໆ ບໍ່ມີຫາສະປັນຍາ ບໍ່ມີຊະວະນະປັນຍາ ທັງບໍ່ເຖິງພ້ອມດ້ວຍວິມຸດຕິ ແຕ່ເຂົາມີທຳເຫຼົ່ານີ້ ຄື ສັດທິນຊີ ໆລໆ ປັນຍິນຊີ ແລະເຂົາມີສັດທາພໍປະມານ ມີຄວາມຮັກພໍປະມານໃນພຣະຕະຖາຄົດ ແມ່ນບຸກຄົນນີ້ກໍບໍ່ໄປສູ່ນະຮົກກ ກຳເນີດສັດເດຍຣັດສານ ພູມແຫ່ງເຜດ ອະບາຍ ທຸກຄະຕິ ແລະວິນິບາດ

ມະຫາບໍພິດ ປຽບຄື ນາບໍ່ດີ ພື້ນດິນເສຍ ບໍ່ໄດ້ຂຸດຕໍ ພືດກໍຫັກ ເນົ່າເສຍ ຖືກລົມແລະແດດທຳລາຍ ບໍ່ມີແກ່ນສານ ເກັບໄວ້ບໍ່ດີ ເຖິງຝົນກໍຕົກລົງມາບໍ່ດີ ພືດເຫຼົ່ານັ້ນຈະຈະເລີນງອກງາມເຕີບໃຫຍ່ໄດ້ບໍ?

ບໍ່ໄດ້ ຂ້ານ້ອຍ

ມະຫາບໍພິດ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ທຳໃນສາດສະໜານີ້ທີ່ກ່າວບໍ່ດີ ປະກາດບໍ່ດີ ບໍ່ນຳສັດອອກຈາກທຸກ ບໍ່ເປັນໄປເພື່ອຄວາມສະງົບ ບໍ່ແມ່ນພຣະສຳມາສຳພຸດ ທະເຈົ້າປະກາດ ອາຕະມາພາບກ່າວເຖິງເລື້ອງນີ້ໃນຍ້ອນນາບໍ່ດີ ແລະສາວົກກໍເປັນຜູ້ປະຕິບັດທຳສົມຄວນແກ່ທຳ ປະຕິບັດຖືກ ປະພຶດຕາມທຳໃນທຳນັ້ນຢູ່

ອາຕະມາພາບກ່າວເຖິງເລື້ອງນີ້ໃນຍ້ອນພືດບໍ່ດີ

ມະຫາບໍພິດ ປຽບຄືນາດີ ພື້ນດິນດີ ຂຸດຕໍແລ້ວ ພືດກໍບໍ່ຫັກ ບໍ່ເນົ່າເສຍ ບໍ່ຖືກລົມແລະແດດທຳລາຍ ມີແກ່ນສານ ເກັບໄວ້ດີ ແລະຝົນກໍຕົກລົງມາດີ ພືດເຫຼົ່ານັ້ນຈະຈະເລີນງອກງາມເຕີບໃຫຍ່ໄດ້ບໍ?

ໄດ້ ຂ້ານ້ອຍ

ມະຫາບໍພິດ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ທຳໃນສາດສະໜານີ້ທີ່ກ່າວດີ ປະກາດ

ດີ ນຳສັດອອກຈາກທຸກ ເປັນໄປເພື່ອຄວາມສະງົບ ພຣະສຳມາສຳພຸດທະເຈົ້າປະກາດ ອາຕະມາພາບກ່າວເຖິງເລື້ອງນີ້ໃນຍ້ອນນາດີ ແລະສາວົກກໍເປັນຜູ້ປະຕິບັດທຳສົມຄວນແກ່ທຳ ປະຕິບັດຖືກ ປະພຶດຕາມທຳໃນທຳນັ້ນຢູ່ ອາຕະມາພາບກ່າວເຖິງເລື້ອງນີ້ໃນຍ້ອນພຶດດີ ບໍ່ຈຳເປັນຕ້ອງກ່າວເຖິງເຈົ້າສະຣະນານິສາກະຍະເລີຍ ຍ້ອນເຈົ້າສະຣະນານິສາກະຍະໄດ້ຊົງພ່ຳເພັງສິກຂາໃຫ້ບໍລິບູນໃນເວລາກ່ອນຈະສະຫວັນຄົດໄວ້ແລ້ວ

**ທຸຕິຍະສະຣະນານິສັກກະສູດທີ ໕ ຈົບ**

# ໖. ປະຖົມອະນາຖະປິນທິກະສູດ

## ວ່າດ້ວຍອະນາຖະບິນທິກະຄະຫະບໍດີ ສູດທີ ໑

[໑໐໔໔] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ສະໄໝນັ້ນ ທ່ານອະນາຖະບິນດິກະຄະຫະບໍດີປ່ວຍ ໄດ້ຮັບທຸກ ເປັນໄຂ້ໜັກ ຄັ້ງນັ້ນທ່ານອະນາຖະບິນດິກະຄະຫະບໍດີຮຽກບຸຣຸດຄົນໜຶ່ງມາສັ່ງວ່າ ມາເທີ້ນ ທ່ານຜູ້ຈະເລີນ ເຈົ້າຈົ່ງເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ ຂາບຕີນທັງສອງຂອງທ່ານດ້ວຍຂະໜ່ອມຕາມຄຳຂອງເຮົາວ່າ ພຣະຜູ້ເປັນເຈົ້າຜູ້ຈະເລີນ ທ່ານອະນາຖະບິນດິກະຄະຫະບໍດີປ່ວຍ ໄດ້ຮັບທຸກ ເປັນໄຂ້ໜັກ ທ່ານຂໍຂາບຕີນທັງສອງຂອງພຣະຜູ້ເປັນເຈົ້າດ້ວຍຂະໜ່ອມ ແລະເຈົ້າຈົ່ງຂາບຮຽນແນວນີ້ວ່າ ຂໍທ່ານພຣະສາຣີບຸດໂຜດອະນຸເຄາະເຂົ້າ ໂຜດຊົງໄປຢ້ຽມທ່ານອະນາຖະບິນດິກະຄະຫະບໍດີເຖິງນິເວດດ້ວຍເທີ້ນ

ບຸຣຸດນັ້ນຮັບຄຳແລ້ວ ເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ ອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບຮຽນທ່ານພຣະສາຣີບຸດດັ່ງນີ້ວ່າ ພຣະຜູ້ເປັນເຈົ້າຜູ້ຈະເລີນ ທ່ານອະນາຖະບິນທິກະຄະຫະບໍດີປ່ວຍ ໄດ້ຮັບທຸກ ເປັນໄຂ້ໜັກ ທ່ານຂໍຂາບຕີນທັງສອງຂອງພຣະຜູ້ເປັນເຈົ້າດ້ວຍຂະໜ່ອມ ແລະຝາກມາຂາບຮຽນແນວນີ້ວ່າ ຂໍທ່ານພຣະສາຣີບຸດໂຜດອະນຸເຄາະເຂົ້າໄປຢ້ຽມທ່ານອະນາຖະບິນດິກະຄະຫະບໍດີເຖິງນິເວດດ້ວຍເທີ້ນ

ທ່ານພຣະສາຣີບຸດ ຮັບນິມົນໂດຍດຸດສະນີພາບ

ເມື່ອໃນເວລາເຊົ້າ ທ່ານພຣະສາຣີບຸດຄອງອັນຕະຣະວາສົກ ຖືບາດແລະຈີວອນ ມີທ່ານພຣະອານົນເປັນປັດສາສະມະນະ ເຂົ້າໄປສູ່ນິເວດຂອງທ່ານອະນາຖະບິນດິກະຄະຫະບໍດີ ນັ່ງເທິງອາສະນະທີ່ປູລາດໄວ້ແລ້ວ ຖາມທ່ານອະນາຖະບິນດິກະຄະຫະບໍດີດັ່ງນີ້ວ່າ ຄະຫະບໍດີທ່ານຍັງສະບາຍດີບໍ ຍັງພໍເປັນຢູ່ໄດ້ບໍ ທຸກຂະເວທະນາທຸເລົາລົງ ບໍ່ກຳເຣີບຂຶ້ນບໍ ອາການທຸເລົາຜາກົດ ອາການກຳເຣີບບໍ່ຜາກົດບໍ?

ທ່ານອະນາຖະບິນດິກະຄະຫະບໍດີຕອບວ່າ ຂ້ານ້ອຍບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ທຸກຂະເວທະນາ ມີແຕ່ກຳເຣີບໜັກຂຶ້ນ ບໍ່ທຸເລົາລົງເລີຍ ອາການກຳເຣີບຜາກົດ ອາການທຸເລົາບໍ່ຜາກົດຂ້ານ້ອຍ

ຄະຫະບໍດີ ປຸຖຸຊົນຜູ້ບໍ່ໄດ້ສະດັບ

໑. ປະກອບດ້ວຍຄວາມບໍ່ເຫຼື້ອມໃສເຊັ່ນໃດໃນພຣະພຸດທະເຈົ້າ ຫຼັງຈາກຕາຍ ແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ຄວາມບໍ່ເຫຼື້ອມໃສ ເຊັ່ນນັ້ນໃນພຣະພຸດທະເຈົ້າຍ່ອມບໍ່ມີແກ່ທ່ານ ຍ້ອນທ່ານມີຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີ ພຣະພາກເຈົ້າພຣະອົງນັ້ນ ໆລໆ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ກໍເມື່ອທ່ານພິຈາລະນາເຫັນຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້ານັ້ນວ່າມີຢູ່ໃນຕົນ ເວທະນາກໍຈະສະງົບລະງັບໄປໂດຍທັນທີ

໒. ປະກອບດ້ວຍຄວາມບໍ່ເຫຼື້ອມໃສເຊັ່ນໃດໃນພຣະທຳ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ຄວາມບໍ່ເຫຼື້ອມໃສເຊັ່ນນັ້ນໃນພຣະທຳ ຍ່ອມບໍ່ມີແກ່ທ່ານຍ້ອນທ່ານມີຄວາມເຫຼື້ອມໃສ ອັນບໍ່ຫວັ່ນໄຫວໃນພຣະທຳວ່າ ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ໆລໆ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ກໍເມື່ອທ່ານພິຈາລະນາເຫັນຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳນັ້ນວ່າມີຢູ່ໃນຕົນ ເວທະນາກໍຈະສະງົບລະງັບໄປໂດຍທັນທີ

໓. ປະກອບດ້ວຍຄວາມບໍ່ເຫຼື້ອມໃສເຊັ່ນໃດໃນພຣະສົງ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ຄວາມບໍ່ເຫຼື້ອມໃສເຊັ່ນນັ້ນໃນພຣະສົງ ຍ່ອມບໍ່ມີແກ່ທ່ານຍ້ອນທ່ານມີຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງວ່າ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີ ໆລໆ ເປັນນາບຸນອັນປະເສີດຂອງໂລກ ກໍເມື່ອທ່ານພິຈາລະນາເຫັນຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງນັ້ນວ່າມີຢູ່ໃນຕົນ ເວທະນາກໍຈະສະງົບລະງັບໄປໂດຍທັນທີ

໔. ປະກອບດ້ວຍຄວາມເປັນຜູ້ທຸສິນເຊັ່ນໃດ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ຄວາມເປັນຜູ້ທຸສິນເຊັ່ນນັ້ນ ຍ່ອມບໍ່ມີແກ່ທ່ານ ຍ້ອນທ່ານມີສິນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ໆລໆ ເປັນໄປເພື່ອສະມາທິ ກໍເມື່ອທ່ານພິຈາລະນາເຫັນສິນທີ່ພຣະອະຣິຍະພໍໃຈນັ້ນວ່າມີຢູ່ໃນຕົນ ເວທະນາກໍຈະສະງົບລະງັບໄປໂດຍທັນທີ

໕. ປະກອບດ້ວຍມິດສາທິດຖິເຊັ່ນໃດ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ມິດສາທິດຖິເຊັ່ນນັ້ນ ຍ່ອມບໍ່ມີແກ່ທ່ານ ຍ້ອນທ່ານມີສຳມາທິດຖິ ກໍເມື່ອທ່ານພິຈາລະນາເຫັນສຳມາທິດຖິນັ້ນວ່າມີຢູ່ໃນຕົນ ເວທະນາກໍຈະສະງົບລະງັບໄປໂດຍທັນທີ

໖. ປະກອບດ້ວຍມິດສາສັງກັບປະເຊັ່ນໃດ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍທຸກຄະຕິ ວິນິບາດ ນະຣົກ ມິດສາສັງກັບປະເຊັ່ນນັ້ນ ຍ່ອມບໍ່ມີແກ່ທ່ານ ຍ້ອນທ່ານມີສຳມາສັງກັບປະ ກໍເມື່ອທ່ານພິຈາລະນາເຫັນສຳມາສັງກັບປະນັ້ນວ່າມີຢູ່ໃນຕົນ ເວທະນາກໍຈະສະງົບລະງັບໄປໂດຍທັນທີ

໗. ປະກອບດ້ວຍມິດສາວາຈາເຊັ່ນໃດ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ມິດສາວາຈາເຊັ່ນນັ້ນ ຍ່ອມບໍ່ມີແກ່ທ່ານ ຍ້ອນທ່ານມີສຳມາວາຈາ ກໍເມື່ອທ່ານພິຈາລະນາເຫັນສຳມາວາຈານັ້ນວ່າມີຢູ່ໃນຕົນ ເວທະນາກໍຈະສະງົບລະງັບໄປໂດຍທັນທີ

໘. ປະກອບດ້ວຍມິດສາກຳມັນຕະເຊັ່ນໃດ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ມິດສາກຳມັນຕະເຊັ່ນນັ້ນ ຍ່ອມບໍ່ມີແກ່ທ່ານ ຍ້ອນທ່ານມີສຳມາກຳມັນຕະ ກໍເມື່ອທ່ານພິຈາລະນາເຫັນສຳມາກຳມັນຕະນັ້ນວ່າມີຢູ່ໃນຕົນ ເວທະນາກໍຈະສະງົບລະງັບໄປໂດຍທັນທີ

໙. ປະກອບດ້ວຍມິດສາອາຊີວະເຊັ່ນໃດ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ມິດສາອາຊີວະເຊັ່ນນັ້ນ ຍ່ອມບໍ່ມີແກ່ທ່ານ ຍ້ອນທ່ານມີສຳມາອາຊີວະ ກໍເມື່ອທ່ານພິຈາລະນາເຫັນສຳມາອາຊີວະນັ້ນວ່າມີຢູ່ໃນຕົນ ເວທະນາກໍຈະສະງົບລະງັບໄປໂດຍທັນທີ

໑໐. ປະກອບດ້ວຍມິດສາວາຍາມະເຊັ່ນໃດ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ມິດສາວາຍາມະເຊັ່ນນັ້ນ ຍ່ອມບໍ່ມີແກ່ທ່ານ ຍ້ອນທ່ານມີສຳມາວາຍາມະ ກໍເມື່ອທ່ານພິຈາລະນາເຫັນສຳມາວາຍາມະ ນັ້ນວ່າມີຢູ່ໃນຕົນ ເວທະນາກໍຈະສະງົບລະງັບໄປໂດຍທັນທີ

໑໑. ປະກອບດ້ວຍມິດສາສະຕິເຊັ່ນໃດ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ມິດສາສະຕິເຊັ່ນນັ້ນ ຍ່ອມບໍ່ມີແກ່ທ່ານ ຍ້ອນທ່ານມີສຳມາສະຕິ ກໍທ່ານພິຈາລະນາເຫັນສຳມາສະຕິນັ້ນວ່າມີຢູ່ໃນຕົນ ເວທະນາກໍຈະສະງົບລະງັບໄປໂດຍທັນທີ

໑໒. ປະກອບດ້ວຍມິດສາສະມາທິເຊັ່ນໃດ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ມິດສາສະມາທິເຊັ່ນນັ້ນ ຍ່ອມບໍ່ມີແກ່ທ່ານ ຍ້ອນທ່ານມີສຳມາສະມາທິ ກໍເມື່ອທ່ານພິຈາລະນາເຫັນສຳມາສະມາທິນັ້ນວ່າມີຢູ່ໃນຕົນ ເວທະນາກໍຈະສະງົບລະງັບໄປໂດຍທັນທີ

໑໓. ປະກອບດ້ວຍມິດສາຍານະເຊັ່ນໃດ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກ ຄະຕິ ວິນິບາດ ນະຣົກ ມິດສາຍານະເຊັ່ນນັ້ນ ຍ່ອມບໍ່ມີແກ່ທ່ານ ຍ້ອນທ່ານມີສຳມາຍານະ ກໍເມື່ອທ່ານ

ພິຈາລະນາເຫັນສຳມາຍານະນັ້ນວ່າມີຢູ່ໃນຕົນ ເວທະນາກໍຈະສະງົບລະງັບໄປໂດຍທັນທີ

໑໘. ປະກອບດ້ວຍມິດສາວິມຸດຕິເຊັ່ນໃດ ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ມິດສາວິມຸດຕິເຊັ່ນນັ້ນ ຍ່ອມບໍ່ມີແກ່ທ່ານ ຍ້ອນທ່ານມີສຳມາວິມຸດຕິ ກໍເມື່ອທ່ານພິຈາລະນາເຫັນສຳມາວິມຸດຕິນັ້ນວ່າມີຢູ່ໃນຕົນ ເວທະນາກໍຈະສະງົບລະງັບໄປໂດຍທັນທີ

ຂະນະນັ້ນ ເວທະນາຂອງທ່ານອະນາຖະບິນດິກະຄະຫະບໍດີ ໄດ້ສະງົບລະງັບໄປໂດຍທັນທີ ທ່ານອະນາຖະບິນດິກະຄະຫະບໍດີອັງຄາດທ່ານພຣະສາຣີບຸດ ແລະທ່ານພຣະອານົນດ້ວຍອາຫານທີ່ເຂົາຈັດໄວ້ສຳລັບຕົນແລ້ວ ຈຶ່ງເລືອກນັ່ງຢູ່ບ່ອນທີ່ສົມຄວນບ່ອນໃດທີ່ໜຶ່ງ ເຊິ່ງຕໍ່າກວ່າ ເມື່ອທ່ານພຣະສາຣີ ບຸດສັນສຳເລັດວາງມືຈາກບາດແລ້ວ ຈຶ່ງອະນຸໂມທະນາດ້ວຍຄາຖາເຫຼົ່ານີ້ວ່າ

ຜູ້ໃດມີສັດທາໃນພຣະຕະຖາຄົດຕັ້ງໝັ້ນ ບໍ່ຫວັ່ນໄຫວ
ມີສິນອັນງາມທີ່ພຣະອະຣິຍະພໍໃຈ (ແລະ) ສັນເສີນ
ມີຄວາມເຫຼື້ອມໃສໃນພຣະສົງ ແລະມີຄວາມເຫັນກົງ
ບັນດິດທັງຫຼາຍຮຽກຜູ້ນັ້ນວ່າ ເປັນຄົນບໍ່ຂັດສົນ
ຊີວິດຂອງເຂົາກໍບໍ່ສູນເປົ່າ
ຍ້ອນເຫດນັ້ນ ຜູ້ມີປັນຍາ
ເມື່ອຣະນຶກເຖິງຄຳສອນຂອງພຣະພຸດທະເຈົ້າທັງຫຼາຍ
ຄວນໝັ່ນປະກອບສັດທາ ສິນ
ຄວາມເຫຼື້ອມໃສ ແລະການເຫັນທຳ

ເມື່ອທ່ານພຣະສາຣີບຸດອະນຸໂມທະນາດ້ວຍຄາຖາເຫຼົ່ານີ້ແລ້ວ ກໍລຸກຈາກອາສະນະຈາກໄປ ຕໍ່ມາ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມທ່ານພຣະອານົນດັ່ງນີ້ວ່າ ອານົນທ່ານມາຈາກໃສແຕ່ຍັງເວັນນໍ

ທ່ານພຣະອານົນທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ທ່ານພຣະສາຣີບຸດກ່າວສອນທ່ານອະນາຖະບິນດິກະຄະຫະບໍດີດ້ວຍໂອວາດນີ້ ພຣະຜູ້ມີພຣະພາກເຈົ້າຕັດວ່າ ອານົນ ສາຣີບຸດ ເປັນບັນດິດ ມີປັນຍາຫຼາຍ ໄດ້ຈຳແນກອົງເຄື່ອງບັນລຸໂສດາດ້ວຍອາການ ໑໐ ຢ່າງ

**ປະຖົມອະນາຖະປິນທິກະສູດທີ ៦ ຈົບ**

# ໗. ທຸຕິຍະອະນາຖະປິນທິກະສູດ

## ວ່າດ້ວຍອະນາຖະບິນທິກະຄະຫະບໍດີ ສູດທີ ໘

[໑໐໘໘] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ສະໄໝນັ້ນ ທ່ານອະນາຖະບິນດິກະຄະຫະບໍດີປ່ວຍ ໄດ້ຮັບທຸກ ເປັນໄຂ້ໜັກ ຄັ້ງນັ້ນ ທ່ານອະນາຖະບິນດິກະຄະຫະບໍດີຮຽກບຸຣຸດຄົນໜຶ່ງມາສັ່ງວ່າ ມາເຫີ້ນ ທ່ານຜູ້ຈະເລີນ ເຈົ້າຈົ່ງເຂົ້າໄປຫາທ່ານພຣະອານົນ ຂາບຕີນທັງສອງຂອງທ່ານດ້ວຍຂະໜ່ອມຕາມຄຳຂອງເຮົາວ່າ ພຣະຜູ້ເປັນເຈົ້າຜູ້ຈະເລີນ ທ່ານອະນາຖະບິນດິກະຄະຫະບໍດີປ່ວຍ ໄດ້ຮັບທຸກ ເປັນໄຂ້ໜັກ ທ່ານຂໍຂາບຕີນທັງສອງຂອງພຣະຜູ້ເປັນເຈົ້າດ້ວຍຂະໜ່ອມ ແລະເຈົ້າຈົ່ງຂາບຮຽນແນວນີ້ວ່າ ຂໍທ່ານພຣະອານົນໂຜດອະນຸເຄາະເຂົ້າໄປຢັ້ງມທ່ານອະນາຖະບິນດິກະຄະຫະບໍດີເຖິງນິເວດດ້ວຍເທີ້ນ

ບຸຣຸດນັ້ນ ຮັບຄຳຂອງທ່ານອະນາຖະບິນດິກະຄະຫະບໍດີແລ້ວ ເຂົ້າໄປຫາທ່ານພຣະອານົນຮອດບ່ອນຢູ່ ອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບຮຽນທ່ານພຣະອານົນດັ່ງນີ້ ວ່າ ພຣະຜູ້ເປັນເຈົ້າຜູ້ຈະເລີນ ອະນາຖະບິນທິກະຄະຫະບໍດີປ່ວຍ ໄດ້ຮັບທຸກ ເປັນໄຂ້ໜັກ ທ່ານຂໍຂາບຕີນທັງສອງຂອງພຣະຜູ້ເປັນເຈົ້າດ້ວຍຂະໜ່ອມ ແລະຝາກມາຂາບຮຽນແນວນີ້ວ່າ ຂໍທ່ານພຣະອານົນໂຜດອະນຸເຄາະເຂົ້າໄປຢັ້ງມທ່ານອະນາຖະບິນດິກະຄະຫະບໍດີເຖິງນິເວດດ້ວຍເທີ້ນ

ທ່ານພຣະອານົນ ຮັບນິມົນໂດຍດຸດສະນີພາບ

ເມື່ອໃນເວລາເຊົ້າ ທ່ານພຣະອານົນຄອງອັນຕະຣະວາສົກ ຖືບາດແລະຈີວອນ ເຂົ້າໄປສູ່ນິເວດຂອງທ່ານອະນາຖະບິນດິກະຄະຫະບໍດີ ນັ່ງເທິງອາສະນະທີ່ປູລາດໄວ້ແລ້ວຖາມອະນາຖະບິນທິກະຄະຫະບໍດີດັ່ງນີ້ວ່າ ຄະຫະບໍດີ ທ່ານຍັງສະບາຍດີບໍ ຍັງພໍເປັນຢູ່ໄດ້ບໍ ທຸກຂະເວທະນາທຸເລົາລົງ ບໍ່ກຳເຣີບຂຶ້ນບໍ ອາການທຸເລົາຜາກົດ ອາການກຳເຣີບບໍ່ຜາກົດບໍ?

ທ່ານອະນາຖະບິນດິກະຄະຫະບໍດີຕອບວ່າ ກະຂ້ານ້ອຍບໍ່ສະບາຍ ຈະເປັນຢູ່ບໍ່ໄດ້ ທຸກຂະເວທະນາມີແຕ່ກຳເຣີບໜັກຂຶ້ນ ບໍ່ທຸເລົາລົງເລີຍ ອາການກຳເຣີບຜາກົດ ອາການທຸເລົາບໍ່ຜາກົດຂ້ານ້ອຍ

ຄະຫະບໍດີ ປຸຖຸຊົນຜູ້ບໍ່ໄດ້ສະດັບ ປະກອບດ້ວຍທຳ ໔ ປະການ ຍ່ອມສະດຸ້ງຫວາດຫວັ່ນຢ້ານຄວາມຕາຍທີ່ຈະມາເຖິງພາຍໜ້າ

ທຳ ໔ ປະການ ອັນໃດແດ່

ຄື ປຸຖຸຊົນຜູ້ບໍ່ໄດ້ສະດັບໃນໂລກນີ້

໑. ປະກອບດ້ວຍຄວາມບໍ່ເຫຼື້ອມໃສໃນພຣະພຸດທະເຈົ້າ ກໍເມື່ອເຂົາພິຈາລະນາເຫັນຄວາມບໍ່ເຫຼື້ອມໃສໃນພຣະພຸດທະເຈົ້ານັ້ນວ່າມີຢູ່ໃນຕົນ ຍ່ອມສະດຸ້ງ ຫວາດຫວັ່ນ ຢ້ານຄວາມຕາຍທີ່ຈະມາເຖິງພາຍໜ້າ

໒. ປະກອບດ້ວຍຄວາມບໍ່ເຫຼື້ອມໃສໃນພຣະທຳ ກໍເມື່ອເຂົາພິຈາລະນາເຫັນຄວາມບໍ່ເຫຼື້ອມໃສໃນພຣະທຳນັ້ນວ່າມີຢູ່ໃນຕົນ ຍ່ອມສະດຸ້ງ ຫວາດຫວັ່ນ ຢ້ານຄວາມຕາຍທີ່ຈະມາເຖິງພາຍໜ້າ

໓. ປະກອບດ້ວຍຄວາມບໍ່ເຫຼື້ອມໃສໃນພຣະສົງ ກໍເມື່ອເຂົາພິຈາລະນາເຫັນຄວາມບໍ່ເຫຼື້ອມໃສໃນພຣະສົງນັ້ນວ່າມີຢູ່ໃນຕົນ ຍ່ອມສະດຸ້ງ ຫວາດຫວັ່ນ ຢ້ານຄວາມຕາຍທີ່ຈະມາເຖິງພາຍໜ້າ

໔. ປະກອບດ້ວຍຄວາມທຸສີນ ກໍເມື່ອເຂົາພິຈາລະນາເຫັນຄວາມທຸສີນນັ້ນວ່າມີຢູ່ໃນຕົນ ຍ່ອມສະດຸ້ງ ຫວາດຫວັ່ນ ຢ້ານຄວາມຕາຍທີ່ຈະມາເຖິງພາຍໜ້າ

ຄະຫະບໍດີ ປຸຖຸຊົນຜູ້ບໍ່ໄດ້ສະດັບ ປະກອບດ້ວຍທຳ ໔ ປະການນີ້ ຍ່ອມສະດຸ້ງ ຫວາດຫວັ່ນ ຢ້ານຄວາມຕາຍທີ່ຈະມາເຖິງພາຍໜ້າ

ອະຣິຍະສາວົກຜູ້ໄດ້ສະດັບ ປະກອບດ້ວຍທຳ ໔ ປະການ ຍ່ອມບໍ່ສະດຸ້ງ ບໍ່ຫວາດຫວັ່ນ ບໍ່ຢ້ານຄວາມຕາຍທີ່ຈະມາເຖິງພາຍໜ້າ

ທຳ ໔ ປະການ ອັນໃດແດ່

ຄື ພຣະອະຣິຍະສາວົກຜູ້ໄດ້ສະດັບໃນພຣະທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນ ພຣະພຸດທະເຈົ້າເປັນພຣະຜູ້ມີພຣະພາກເຈົ້າກໍເມື່ອທ່ານພິຈາລະນາເຫັນຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວ ໃນພຣະພຸດທະເຈົ້ານັ້ນວ່າມີຢູ່ໃນຕົນ ຍ່ອມບໍ່ສະດຸ້ງ ບໍ່ຫວາດຫວັ່ນ ບໍ່ຢ້ານຄວາມຕາຍທີ່ຈະມາເຖິງພາຍໜ້າ

໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳວ່າ ພຣະທຳ ເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຯລຯ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ກໍເມື່ອທ່ານພິຈາລະນາເຫັນຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳນັ້ນວ່າມີຢູ່ໃນຕົນ ຍ່ອມບໍ່ສະດຸ້ງ ບໍ່ຫວາດຫວັ່ນ ບໍ່ຢ້ານຄວາມຕາຍທີ່ຈະມາເຖິງພາຍໜ້າ

໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງວ່າ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີ ຯລຯ ເປັນນາບຸນອັນປະເສີດຂອງໂລກ ກໍເມື່ອທ່ານພິຈາລະນາເຫັນຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງນັ້ນວ່າມີຢູ່ໃນຕົນ ຍ່ອມບໍ່ສະດຸ້ງ ບໍ່ຫວາດຫວັ່ນ ບໍ່ຢ້ານຄວາມຕາຍທີ່ຈະມາເຖິງພາຍໜ້າ

໔. ປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ ກໍເມື່ອທ່ານພິຈາລະນາເຫັນສີນທີ່ພຣະອະຣິຍະພໍໃຈນັ້ນວ່າມີຢູ່ໃນຕົນ ຍ່ອມບໍ່ສະດຸ້ງ ບໍ່ຫວາດຫວັ່ນ ບໍ່ຢ້ານຄວາມຕາຍທີ່ຈະມາເຖິງພາຍໜ້າ

ຄະຫະບໍດີ ພຣະອະຣິຍະສາວົກຜູ້ໄດ້ສະດັບ ປະກອບດ້ວຍທຳ ໔ ປະການນີ້ ຍ່ອມບໍ່ສະດຸ້ງ ບໍ່ຫວາດຫວັ່ນ ບໍ່ຢ້ານຄວາມຕາຍທີ່ຈະມາເຖິງພາຍໜ້າ

ທ່ານອະນາຖະບິນດິກະຄະຫະບໍດີກ່າວວ່າ ທ່ານພຣະອານົນຜູ້ຈະເລີນ ຂ້ານ້ອຍບໍ່ຢ້ານແລ້ວ ຍ້ອນວ່າຂ້ານ້ອຍ

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາ ແລະ ມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ
໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ
໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງວ່າ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີ ຯລຯ ເປັນນາບຸນອັນປະເສີດຂອງໂລກ
໔. ສິກຂາບົດເຫຼົ່າໃດເຊິ່ງສົມຄວນແກ່ຄະລິຫັດທີ່ພຣະຜູ້ມີພຣະພາກເຈົ້າ ຊົງສະແດງໄວ້ ຂ້ານ້ອຍ ຍັງແນມບໍ່ເຫັນສິກຂາບົດທັງຫຼາຍໃນຕົນ ບໍ່ມີຈັກຂໍ້ວ່າຂາດໄປເລີຍ

ຄະຫະບໍດີ ເປັນລາບຂອງທ່ານ ທ່ານໄດ້ດີແລ້ວ ໂສດາປັດຕິຜົນທ່ານເຮັດໃຫ້ແຈ້ງແລ້ວ

**ທຸຕິຍະອະນາຖະປິນທິກະສູດທີ ໗ ຈົບ**

# ๓. ປະຖົມພະຍະເວຣູປະສັນຕະສູດ

## ວ່າດ້ວຍອະຣິຍະສາວົກລະງັບໄພເວນ ສູດທີ ๑

[๑໐໔໔] ເລື້ອງເກີດຂື້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດກັບທ່ານອະນາຖະບິນດິກະຄະຫະບໍດີ ຜູ້ນັ່ງຢູ່ບ່ອນທີ່ສົມຄວນວ່າ ຄະຫະບໍດີ ເມື່ອໃດ ອະຣິຍະສາວົກລະງັບໄພເວນ ໕ ປະການໄດ້ແລ້ວ ປະກອບດ້ວຍອົງ ເຄື່ອງບັນລຸໂສດາ ໔ ປະການ ແລະເຫັນແຈ້ງແທງຕະຫຼອດອະຣິຍະຍາຍະທຳດ້ວຍປັນຍາແລ້ວ ເມື່ອນັ້ນ ອະຣິຍະສາວົກນັ້ນເມື່ອຫວັງຢູ່ ເພິ່ງພະຍາກອນຕົນເອງໄດ້ວ່າ ເຮົາມີນະຮົກໝົດແລ້ວ ມີກຳເນີດສັດເດຍຣັດສານໝົດແລ້ວ ມີພູມແຫ່ງເຜດໝົດແລ້ວ ມີອະບາຍ ທຸກຄະຕິ ແລະວິນິບາດໝົດແລ້ວ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ອະຣິຍະສາວົກລະງັບໄພເວນ ໕ ປະການ ອັນໃດແດ່ ຄື

๑. ບຸກຄົນຜູ້ຂ້າສັດ ຍ້ອນການຂ້າສັດເປັນປັດໃຈ ຈຶ່ງປະສົບໄພເວນທີ່ເປັນໄປໃນປັດຈຸບັນແດ່ ໃນສຳປະຣາຍະພົບແດ່ ສະເຫວີຍທຸກໂທມະນັດທາງໃຈແດ່ ບຸກຄົນຜູ້ເວັ້ນຂາດຈາກການຂ້າສັດແລ້ວ ຍ່ອມລະງັບໄພເວນນັ້ນໄດ້ແນວນີ້
໒. ບຸກຄົນຜູ້ລັກຊັບ ฯລฯ
໓. ບຸກຄົນຜູ້ປະພຶດຜິດໃນກາມ ฯລฯ
໔. ບຸກຄົນຜູ້ເວົ້າຕົວະ ฯລฯ
໕. ບຸກຄົນຜູ້ເສບຂອງມຶນເມົາຄືສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ຍ້ອນການເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດເປັນປັດໃຈ ຈຶ່ງປະສົບໄພເວນທີ່ເປັນໄປໃນປັດຈຸບັນແດ່ ໃນສຳປະຣາຍະພົບແດ່ ສະເຫວີຍທຸກໂທມະນັດທາງໃຈແດ່ ບຸກຄົນຜູ້ເວັ້ນຂາດຈາກການເສບຂອງມຶນເມົາ ຄື ສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດແລ້ວ ຍ່ອມລະງັບໄພເວນນັ້ນໄດ້ຢ່າງນີ້

ອະຣິຍະສາວົກລະງັບໄພເວນ ໕ ປະການນີ້

ອະຣິຍະສາວົກປະກອບດ້ວຍອົງເຄື່ອງບັນລຸໂສດາ ໔ ປະການ ອັນໃດແດ່

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ
໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ
໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ
໔. ປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ

ອະຣິຍະສາວົກປະກອບດ້ວຍອົງເຄື່ອງບັນລຸໂສດາ ໔ ປະການນີ້

ອະຣິຍະສາວົກນັ້ນເຫັນແຈ້ງແທງຕະຫຼອດອະຣິຍະຍາຍະທຳດ້ວຍປັນຍາ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ມະນະສິການໂດຍແຍບຄາຍດ້ວຍດີ ເຊິ່ງປະຕິດຈະສະມຸບບາດ ຄື ເມື່ອເຫດ (ມີອະວິດຊາເປັນຕົ້ນ) ນີ້ມີ ຜົນ (ມີສັງຂານເປັນຕົ້ນ) ນີ້ຈຶ່ງມີ ຍ້ອນສະຫະຊາຕະປັດໄຈ ນີ້ເກີດ ຜົນນີ້ຈຶ່ງເກີດ ເມື່ອເຫດນີ້ບໍ່ມີ ຜົນນີ້ຈຶ່ງບໍ່ມີ ຍ້ອນເຫດນີ້ດັບ ຜົນນີ້ຈຶ່ງດັບ ຄື

ຍ້ອນອະວິດຊາ ເປັນປັດໄຈ ສັງຂານ ຈຶ່ງມີ
ຍ້ອນສັງຂານ ເປັນປັດໄຈ ວິນຍານ ຈຶ່ງມີ
ຯລຯ
ຄວາມເກີດແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້
ຍ້ອນອະວິດຊາດັບບໍ່ເຫຼືອດ້ວຍວິຣາຄະ ສັງຂານຈຶ່ງດັບ
ຯລຯ
ຄວາມດັບແຫ່ງກອງທຸກທັງມວນນີ້ມີໄດ້ດ້ວຍປະການດັ່ງນີ້

ອະຣິຍະສາວົກນັ້ນ ເຫັນແຈ້ງແທງຕະຫຼອດອະຣິຍະຍາຍະທຳດ້ວຍປັນຍາ ເປັນແນວນີ້

ເມື່ອໃດ ອະຣິຍະສາວົກລະງັບໄພເວນ ໕ ປະການນີ້ ປະກອບດ້ວຍອົງເຄື່ອງບັນລຸໂສດາ ໔ ປະການນີ້ ແລະ ເຫັນແຈ້ງແທງຕະຫຼອດອະຣິຍະຍາຍະທຳດ້ວຍປັນຍາແລ້ວ ເມື່ອນັ້ນ ອະຣິຍະສາວົກນັ້ນ ເມື່ອຫວັງຢູ່ ເພິ່ງພະຍາກອນຕົນເອງໄດ້ວ່າ ເຮົາມີນະຣົກໝົດແລ້ວ ມີກຳເນີດສັດເດຍຣັດສານໝົດແລ້ວ ມີພູມແຫ່ງເຜດໝົດແລ້ວ ມີອະບາຍ ທຸກຄະຕິ ແລະວິນິບາດໝົດແລ້ວ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

**ປະຖົມພະຍະເວຣູປະສັນຕະສູດທີ ໗ ຈົບ**

# ໙. ທຸຕິຍະພະຍະເວຣູປະສັນຕະສູດ

## ວ່າດ້ວຍອະຣິຍະສາວົກລະງັບໄພເວນ ສູດທີ ໘

[໑໐໘໕] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເມື່ອໃດ ອະຣິຍະສາວົກລະງັບໄພເວນ ໕ ປະການນີ້ ປະກອບດ້ວຍອົງເຄື່ອງບັນລຸໂສດາ ໔ ປະການນີ້ ແລະ ເຫັນແຈ້ງແທງຕະຫຼອດອະຣິຍະຍາຍະທຳດ້ວຍປັນຍາແລ້ວ ເມື່ອນັ້ນ ອະຣິຍະສາວົກນັ້ນເມື່ອຫວັງຢູ່ ເພິ່ງພະຍາກອນຕົນເອງໄດ້ວ່າ ເຮົາມີນະຮົກໝົດແລ້ວ ມີກຳເນີດສັດເດຍຣັດສານໝົດແລ້ວ ມີພູມແຫ່ງເຜດໝົດແລ້ວ ມີອະບາຍ ທຸກຄະຕິ ແລະວິນິບາດສິ້ນແລ້ວ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

**ທຸຕິຍະພະຍະເວຣູປະສັນຕະສູດທີ ໙ ຈົບ**

# ໑໐. ນັນທະກະລິດສະວິສູດ

## ວ່າດ້ວຍມະຫາອຳມາດຂອງເຈົ້າລິດສະຫວີ ຊື່ນັນທະກະ

[໑໐໘໖] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ກູຕາຄາຣະສາລາ ປ່າມະຫາວັນ ເຂດເມືອງເວສາລີ ຄັ້ງນັ້ນ ມະຫາອຳມາດຂອງເຈົ້າລິດສະຫວີ ຊື່ນັນທະກະ ເຂົ້າໄປເຝົ້າພຣະຜູ້ມີພຣະພາກ ເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມມະຫາອຳມາດຂອງເຈົ້າລິດສະຫວີ ຊື່ ນັນທະກະ ດັ່ງນີ້ ວ່າ

ນັນທະກະ ອະຣິຍະສາວົກຜູ້ປະກອບດ້ວຍທຳ ໔ ປະການ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ທຳ ໔ ປະການ ອັນໃດແດ່

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ
໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ

໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ

໔. ປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ

ບັນທະກະ ອະຣິຍະສາວົກຜູ້ປະກອບດ້ວຍທຳ ໔ ປະການນີ້ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ອັນໜຶ່ງ ອະຣິຍະສາວົກຜູ້ປະກອບດ້ວຍທຳ ໔ ປະການນີ້ ຊື່ວ່າເປັນຜູ້ປະກອບດ້ວຍ ອາຍຸທັງທີ່ເປັນທິບ ທັງທີ່ເປັນຂອງມະນຸດ ເປັນຜູ້ປະກອບດ້ວຍວັນນະທັງທີ່ເປັນທິບ ທັງທີ່ເປັນຂອງມະນຸດ ເປັນຜູ້ປະກອບດ້ວຍສຸກທັງທີ່ເປັນທິບ ທັງທີ່ເປັນຂອງມະນຸດ ເປັນຜູ້ປະກອບດ້ວຍຍົດທັງທີ່ເປັນທິບ ທັງທີ່ເປັນຂອງມະນຸດ ເປັນຜູ້ປະກອບດ້ວຍຄວາມເປັນໃຫຍ່ທັງທີ່ເປັນທິບ ທັງທີ່ເປັນຂອງມະນຸດ

ບັນທະກະ ກໍເຮົາໄດ້ຟັງສະມະນະຫຼືພາມອື່ນ ຈຶ່ງກ່າວເລື້ອງນັ້ນເປັນໄປບໍ່ໄດ້ ແຕ່ເຮົາຮູ້ເອງ ເຫັນເອງ ຮູ້ເອງ ຈຶ່ງກ່າວເລື້ອງນັ້ນ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ບຸຣຸດຄົນໜຶ່ງໄດ້ກ່າວກັບມະຫາອຳມາດຂອງເຈົ້າລິດສະຫວີ ຊື່ບັນທະກະວ່າ ເຖິງເວລາອາບນ້ຳແລ້ວ ຂ້ານ້ອຍ ມະຫາອຳມາດຂອງເຈົ້າລິດສະຫວີ ຊື່ບັນທະກະກ່າວວ່າ ທ້າວ ບັດນີ້ ເຮົາຍັງບໍ່ຕ້ອງການອາບນ້ຳພາຍນອກ ຕ້ອງການອາບນ້ຳພາຍໃນ ຄືຄວາມເຫຼື້ອມໃສໃນພຣະຜູ້ມີພຣະພາກເຈົ້າ

**ບັນທະກະລິດສະວີສູດທີ ໑໐ ຈົບ**

**ສະຣະນານິວັກທີ ໓ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື

໑. ປະຖົມມະຫານາມະສູດ

໒. ທຸຕິຍະມະຫານາມະສູດ

໓. ໂຄທະສັກກະສູດ

໔. ປະຖົມສະຣະນານິສັກກະສູດ

໕. ທຸຕິຍະສະຣະນານິສັກກະສູດ

໖. ປະຖົມອະນາຖະປິນທິກະສູດ

໗. ທຸຕິຍະອະນາຖະປິນທິກະສູດ

໘. ປະຖົມພະຍະເວຣູປະສັນຕະສູດ

໙. ທຸຕິຍະພະຍະເວຣູປະສັນຕະສູດ

໑໐. ບັນທະກະລິດສະວີສູດ

# ໔. ປຸນຍາພິສັນທະວັກ

## ໝວດວ່າດ້ວຍຫ້ວງບຸນກຸສົນ

# ໑. ປະຖົມປຸນຍາພິສັນທະສູດ

## ວ່າດ້ວຍຫ້ວງບຸນກຸສົນ ສູດທີ ໑

[໑໐໘ໆ] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຫ້ວງບຸນກຸສົນ ໔ ປະການນີ້ ນຳສຸກມາໃຫ້

ຫ້ວງບຸນກຸສົນ ໔ ປະການ ອັນໃດແດ່

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ໆລໆ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນ ພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ນີ້ເປັນຫ້ວງບຸນກຸສົນນຳສຸກມາໃຫ້ປະການທີ ໑

໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳວ່າ ພຣະທຳ ເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ໆລໆ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ ນີ້ເປັນຫ້ວງບຸນກຸສົນນຳສຸກມາໃຫ້ປະການທີ ໒

໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງວ່າ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າເປັນຜູ້ປະຕິບັດດີ ໆລໆ ເປັນນາບຸນອັນປະເສີດຂອງໂລກ ນີ້ເປັນຫ້ວງບຸນກຸສົນນຳສຸກມາໃຫ້ປະການທີ ໓

໔. ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ໆລໆ ເປັນໄປເພື່ອສະມາທິ ນີ້ເປັນຫ້ວງບຸນກຸສົນນຳສຸກມາໃຫ້ປະການທີ ໔

ພິກຂຸທັງຫຼາຍ ຫ້ວງບຸນກຸສົນນຳສຸກມາໃຫ້ ໔ ປະການນີ້

**ປະຖົມປຸນຍາພິສັນທະສູດທີ ໑ ຈົບ**

# ໒. ທຸຕິຍະປຸນຍາພິສັນທະສູດ

## ວ່າດ້ວຍຫ້ວງບຸນກຸສົນ ສູດທີ ໒

[໑໐໒໗] ພິກຂຸທັງຫຼາຍ ຫ້ວງບຸນກຸສົນນຳສຸກມາໃຫ້ ໔ ປະການນີ້

ຫ້ວງບຸນກຸສົນ ໔ ປະການ ອັນໃດແດ່

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນ ພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ນີ້ເປັນຫ້ວງບຸນກຸສົນນຳສຸກມາໃຫ້ປະການທີ ໑
໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ
໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ
໔. ມີໃຈປາສະຈາກຄວາມຂີ້ຖີ່ອັນເປັນມົນທິນ ມີຈາຄະອັນສະລະແລ້ວ ມີຝາມືຊຸ່ມ ຍິນດີໃນການສະລະ ຄວນແກ່ການຂໍ ຍິນດີໃນການໃຫ້ທານແລະການແຈກທານ ຢູ່ຄອງເຮືອນ ນີ້ເປັນຫ້ວງບຸນກຸສົນນຳສຸກມາໃຫ້ປະການທີ ໔

ພິກຂຸທັງຫຼາຍ ຫ້ວງບຸນກຸສົນນຳສຸກມາໃຫ້ ໔ ປະການນີ້

**ທຸຕິຍະປຸນຍາພິສັນທະສູດທີ ໒ ຈົບ**

# ໓. ຕະຕິຍະປຸນຍາພິສັນທະສູດ

## ວ່າດ້ວຍຫ້ວງບຸນກຸສົນ ສູດທີ ໓

[໑໐໒໘] ພິກຂຸທັງຫຼາຍ ຫ້ວງບຸນກຸສົນນຳສຸກມາໃຫ້ ໔ ປະການນີ້

ຫ້ວງບຸນກຸສົນ ໔ ປະການ ອັນໃດແດ່

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນ

ຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ໆລໆ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນ ພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ນີ້ເປັນຫ້ວງບຸນກຸສົນນຳສຸກມາໃຫ້ປະການທີ ໑

໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ໆລໆ

໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ໆລໆ

໔. ເປັນຜູ້ມີປັນຍາ ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນທັງຄວາມເກີດ ແລະຄວາມດັບ ອັນເປັນອະຣິຍະ ທຳລາຍກິເລດ ໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງ ນີ້ເປັນຫ້ວງບຸນກຸສົນນຳສຸກມາໃຫ້ປະການທີ ໔

ພິກຂຸທັງຫຼາຍ ຫ້ວງບຸນກຸສົນນຳສຸກມາໃຫ້ ໔ ປະການນີ້

**ຕະຕິຍະປຸນຍາພິສັນທະສູດທີ ໓ ຈົບ**

# ໔. ປະຖົມເທວະປະທະສູດ

## ວ່າດ້ວຍເທວະບົດ ສູດທີ ໑

[໑໐໓໐] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເທວະບົດ (ຂໍ້ປະຕິບັດຂອງເທບ) ຂອງເທບທັງຫຼາຍ ໔ ປະການນີ້ ຍ່ອມເປັນໄປເພື່ອຄວາມບໍລິສຸດຂອງສັດທັງຫຼາຍຜູ້ບໍ່ບໍລິສຸດ ເພື່ອຄວາມຜ່ອງແຜ້ວຂອງສັດທັງຫຼາຍຜູ້ບໍ່ຜ່ອງແຜ້ວ

ເທວະບົດ ໔ ປະການ ອັນໃດແດ່

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ໆລໆ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນ ພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ນີ້ເປັນເທວະບົດຂອງເທບທັງຫຼາຍ ຍ່ອມເປັນໄປເພື່ອຄວາມບໍລິສຸດຂອງສັດທັງຫຼາຍຜູ້ບໍ່ບໍລິສຸດ ເພື່ອຄວາມຜ່ອງແຜ້ວຂອງສັດທັງຫຼາຍຜູ້ບໍ່ຜ່ອງແຜ້ວປະການທີ ໑

໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ໆລໆ

໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ

໔. ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ ນີ້ເປັນເທວະບົດຂອງເທບທັງຫຼາຍ ຍ່ອມເປັນໄປເພື່ອຄວາມບໍລິສຸດຂອງສັດທັງຫຼາຍ ຜູ້ບໍ່ບໍລິສຸດ ເພື່ອຄວາມຜ່ອງແຜ້ວຂອງສັດທັງຫຼາຍຜູ້ບໍ່ຜ່ອງແຜ້ວປະການທີ ໔

ພິກຂຸທັງຫຼາຍ ເທວະບົດຂອງເທບທັງຫຼາຍ ໔ ປະການນີ້ ຍ່ອມເປັນໄປເພື່ອຄວາມບໍລິສຸດຂອງສັດທັງຫຼາຍຜູ້ບໍ່ບໍລິສຸດ ເພື່ອຄວາມຜ່ອງແຜ້ວຂອງສັດທັງຫຼາຍຜູ້ບໍ່ຜ່ອງແຜ້ວ

**ປະຖົມເທວະປະທະສູດທີ ໔ ຈົບ**

## ໕. ທຸຕິຍະເທວະປະທະສູດ

### ວ່າດ້ວຍເທວະບົດ ສູດທີ ໔

[໑໐໓໑] ພິກຂຸທັງຫຼາຍ ເທວະບົດຂອງເທບທັງຫຼາຍ ໔ ປະການນີ້ ຍ່ອມເປັນໄປເພື່ອຄວາມບໍລິສຸດຂອງສັດທັງຫຼາຍຜູ້ບໍ່ບໍລິສຸດ ເພື່ອຄວາມຜ່ອງແຜ້ວຂອງສັດທັງຫຼາຍ ຜູ້ບໍ່ຜ່ອງແຜ້ວ

ເທວະບົດ ໔ ປະການ ອັນໃດແດ່

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ອະຣິຍະສາວົກນັ້ນພິຈາລະນາດັ່ງນີ້ວ່າ ອັນໃດນໍເປັນເທວະບົດຂອງເທບທັງຫຼາຍ ທ່ານຮູ້ແຈ້ງແນວນີ້ວ່າ ເຮົາໄດ້ຍິນໃນບັດນີ້ວ່າ ເທບທັງຫຼາຍມີຄວາມບໍ່ບຽດບຽນເປັນຢ່າງຍິ່ງ ເຮົາກໍບໍ່ໄດ້ບຽດບຽນໃຜ ໆ ບໍ່ວ່າຜູ້ສະດຸ້ງຫຼືໝັ້ນຄົງ ເຮົາເປັນຜູ້ປະກອບດ້ວຍທຳຄືເທວະບົດຢູ່ແນ່ແທ້ ນີ້ເປັນເທວະບົດຂອງເທບທັງຫຼາຍ ຍ່ອມເປັນໄປເພື່ອຄວາມບໍລິສຸດຂອງສັດທັງຫຼາຍຜູ້ບໍ່ບໍລິສຸດ ເພື່ອຄວາມຜ່ອງແຜ້ວຂອງສັດທັງຫຼາຍຜູ້ບໍ່ຜ່ອງແຜ້ວປະການທີ່ ໑

໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ

໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ

໔. ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ ອະຣິຍະສາວົກນັ້ນພິຈາລະນາດັ່ງນີ້ວ່າ ອັນໃດນໍເປັນເທວະບົດ ຂອງເທບທັງຫຼາຍ ທ່ານຮູ້ແຈ້ງແນວນີ້ວ່າ ເຮົາໄດ້ຍິນໃນບັດນີ້ວ່າ ເທບທັງຫຼາຍມີຄວາມບໍ່ບຽດບຽນເປັນຢ່າງຍິ່ງ ເຮົາກໍບໍ່ໄດ້ບຽດບຽນໃຜ ໆ ບໍ່ວ່າຜູ້ສະດຸ້ງຫຼືໝັ້ນຄົງ ເຮົາເປັນຜູ້ປະກອບດ້ວຍທຳຄື ເທວະບົດຢູ່ແນ່ແທ້ ນີ້ເປັນເທວະບົດຂອງເທບທັງຫຼາຍຍ່ອມເປັນໄປເພື່ອຄວາມບໍລິສຸດຂອງສັດທັງຫຼາຍຜູ້ບໍ່ບໍລິສຸດ ເພື່ອຄວາມຜ່ອງແຜ້ວຂອງສັດທັງຫຼາຍ ຜູ້ບໍ່ຜ່ອງແຜ້ວປະການທີ ໔

ພິກຂຸທັງຫຼາຍ ເທວະບົດຂອງເທບທັງຫຼາຍ ໔ ປະການນີ້ ຍ່ອມເປັນໄປເພື່ອຄວາມບໍລິສຸດຂອງສັດທັງຫຼາຍຜູ້ບໍ່ບໍລິສຸດ ເພື່ອຄວາມຜ່ອງແຜ້ວຂອງສັດທັງຫຼາຍຜູ້ບໍ່ຜ່ອງແຜ້ວ

**ທຸຕິຍະເທວະປະທະສູດທີ ໕ ຈົບ**

# ໖. ເທວະສະພາຄະສູດ

## ວ່າດ້ວຍຜູ້ມີທຳມາສູ່ເທວະສະພາ

[໑໐໖໔] ພິກຂຸທັງຫຼາຍ ເທບທັງຫຼາຍພໍໃຈກ່າວເຖິງບຸກຄົນຜູ້ປະກອບດ້ວຍທຳ ໔ ປະການ ເຊິ່ງມາໃນບ່ອນປະຊຸມ (ຂອງເທບ)

ທຳ ໔ ປະການ ອັນໃດແດ່

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນ ພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ເທບທັງຫຼາຍຜູ້ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າ ຈຸຕິຈາກພົບນີ້ແລ້ວ ໄປເກີດໃນພົບນັ້ນ ຄິດວ່າ ພວກເຮົາປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວເຊັ່ນໃດ ໃນພຣະພຸດທະເຈົ້າ ຈຶ່ງຈຸຕິຈາກພົບນັ້ນແລ້ວ ມາເກີດໃນບ່ອນນີ້ ແມ່ນອະຣິຍະສາວົກ ຜູ້ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວເຊັ່ນນັ້ນໃນພຣະພຸດທະເຈົ້າ ກໍໄປເກີດໃນສຳນັກເທບທັງຫຼາຍ ໄດ້ຮັບຄຳເຊື້ອເຊີນວ່າມາເທີ້ນ

໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ໆລໆ

໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ໆລໆ

໔. ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ໆລໆ ເປັນໄປເພື່ອສະມາທິ ເທບທັງຫຼາຍຜູ້ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ຈຸຕິຈາກພົບນີ້ແລ້ວ ໄປເກີດໃນພົບນັ້ນຄິດວ່າ ພວກເຮົາປະກອບດ້ວຍສິນ ທີ່ພຣະອະຣິຍະພໍໃຈເຊັ່ນໃດ ຈຸຕິຈາກພົບນັ້ນແລ້ວ ມາເກີດໃນບ່ອນນີ້ ແມ່ນອະຣິຍະສາວົກຜູ້ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈເຊັ່ນນັ້ນ ກໍໄປເກີດໃນສຳນັກຂອງເທບທັງຫຼາຍ ໄດ້ຮັບຄຳເຊື້ອເຊີນວ່າມາເທີ້ນ

ພິກຂຸທັງຫຼາຍ ເທບທັງຫຼາຍພໍໃຈ ກ່າວເຖິງບຸກຄົນຜູ້ປະກອບດ້ວຍທຳ ໔ ປະການນີ້ເຊິ່ງມາໃນບ່ອນປະຊຸມ(ຂອງເທບ)

**ເທວະສະພາຄະສູດທີ ໖ ຈົບ**

# ໗. ມະຫານາມະສູດ

## ວ່າດ້ວຍເຈົ້າສາກະຍະພຣະນາມວ່າມະຫານາມ

[໑໐໓໓] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນິໂຄທາຣາມ ເຂດເມືອງກະບິນລະພັດ ແຄວັ້ນສັກກະ ຄັ້ງນັ້ນ ເຈົ້າສາກະຍະພຣະນາມວ່າມະຫານາມສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ດ້ວຍເຫດພຽງທໍ່ໃດ ບຸກຄົນຈຶ່ງຊື່ວ່າເປັນອຸປາສົກ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ມະຫາບໍພິດ ບຸກຄົນເຖິງພຣະພຸດທະເຈົ້າເປັນສະຣະນະ ເຖິງພຣະທຳເປັນສະຣະນະ ແລະເຖິງພຣະສົງເປັນສະຣະນະ ດ້ວຍເຫດພຽງທໍ່ນີ້ ບຸກຄົນຈຶ່ງຊື່ວ່າເປັນອຸປາສົກ

ຂ້າແດ່ ພຣະອົງຜູ້ຈະເລີນ ອັນໜຶ່ງ ດ້ວຍເຫດພຽງທໍ່ໃດ? ອຸປາສົກຈຶ່ງຊື່ວ່າເປັນຜູ້ເຖິງພ້ອມດ້ວຍສິນ

ມະຫາບໍພິດ ອຸປາສົກເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຕົວະ ແລະເວັ້ນຂາດຈາກການເສບ

ຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດ ດ້ວຍເຫດພຽງທໍ່ນີ້ ອຸປາສິກາຈຶ່ງຊື່ວ່າເປັນຜູ້ເຖິງພ້ອມດ້ວຍສິນ

ຂ້າແດ່ ພຣະອົງຜູ້ຈະເລີນ ອັນໜຶ່ງ ດ້ວຍເຫດພຽງທໍ່ໃດ? ອຸປາສິກາຈຶ່ງຊື່ວ່າເປັນຜູ້ເຖິງພ້ອມດ້ວຍສັດທາ

ມະຫາບໍພິດ ອຸປາສິກາໃນທຳວິໄນນີ້ເປັນຜູ້ມີສັດທາ ເຊື່ອພຣະປັນຍາຕັດສະຣູ້ຂອງຕະຖາຄົດວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາ ແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ດ້ວຍເຫດພຽງທໍ່ນີ້ ອຸປາສິກາຈຶ່ງຊື່ວ່າເປັນຜູ້ເຖິງພ້ອມດ້ວຍສັດທາ

ຂ້າແດ່ ພຣະອົງຜູ້ຈະເລີນ ອັນໜຶ່ງ ດ້ວຍເຫດພຽງທໍ່ໃດ? ອຸປາສິກາຈຶ່ງຊື່ວ່າເປັນຜູ້ເຖິງພ້ອມດ້ວຍຈາຄະ

ມະຫາບໍພິດ ອຸປາສິກາໃນທຳວິໄນນີ້ມີໃຈປາສະຈາກຄວາມຂີ້ຖີ່ອັນເປັນມົນທິນ ມີຈາຄະອັນສະລະແລ້ວ ມີຝາມືຊຸ່ມ ຍິນດີໃນການສະລະ ຄວນແກ່ການຂໍ ຍິນດີໃນການໃຫ້ທານແລະການແຈກທານ ຢູ່ຄອງເຮືອນ ດ້ວຍເຫດພຽງທໍ່ນີ້ ອຸປາສິກາຈຶ່ງຊື່ວ່າເປັນຜູ້ເຖິງ ພ້ອມດ້ວຍຈາຄະ

ຂ້າແດ່ ພຣະອົງຜູ້ຈະເລີນ ອັນໜຶ່ງ ດ້ວຍເຫດພຽງທໍ່ໃດ? ອຸປາສິກາຈຶ່ງຊື່ວ່າເປັນຜູ້ເຖິງພ້ອມດ້ວຍປັນຍາ

ມະຫາບໍພິດ ອຸປາສິກາໃນທຳວິໄນນີ້ເປັນຜູ້ມີປັນຍາ ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນທັງຄວາມເກີດແລະຄວາມດັບ ອັນເປັນອະຣິຍະ ທຳລາຍກິເລດ ໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງ ດ້ວຍເຫດພຽງທໍ່ນີ້ ອຸປາສິກາຈຶ່ງຊື່ວ່າເປັນຜູ້ເຖິງພ້ອມດ້ວຍປັນຍາ

**ມະຫານາມະສູດທີ ໗ ຈົບ**

# ໘. ວັດສະສູດ

## ວ່າດ້ວຍອຸປະມາດ້ວຍຝົນຕົກ

[໑໐໖໘] ພິກຂຸທັງຫຼາຍ ເມື່ອຝົນເມັດໃຫຍ່ຕົກເທິງຈອມພູ ນ້ຳນັ້ນໄຫຼໄປຕາມບ່ອນຫຼຸບ ເຮັດຮ່ອມພູ ລຳທານ ແລະຫ້ວຍໃຫ້ເຕັມ ຮ່ອມພູ ລຳທານ ແລະຫ້ວຍເຕັມແລ້ວ ເຮັດໜອງໃຫ້ເຕັມ ໜອງເຕັມແລ້ວ ເຮັດບຶງໃຫ້ເຕັມ ບຶງເຕັມແລ້ວ ເຮັດແມ່ນ້ຳນ້ອຍໃຫ້ເຕັມ ແມ່ນ້ຳນ້ອຍເຕັມແລ້ວ ເຮັດແມ່ນ້ຳໃຫຍ່ໃຫ້ເຕັມ ແມ່ນ້ຳໃຫຍ່ເຕັມແລ້ວ ກໍເຮັດມະຫາສະມຸດໃຫ້ເຕັມ ແມ່ນສັນໃດ

ທຳເຫຼົ່ານີ້ຂອງອະຣິຍະສາວິກ ຄື ຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າ ຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນ ພຣະທຳ ຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ແລະສິນທີ່ພຣະອະຣິຍະພໍໃຈ ໄຫຼໄປເຖິງຝັ່ງແລ້ວຍ່ອມເປັນໄປເພື່ອຄວາມສິ້ນອາສະວະທັງຫຼາຍ ກໍຄືກັນສັນນັ້ນ

**ວັດສະສູດທີ ໗ ຈົບ**

# ໘. ກາລິໂຄທະສູດ

## ວ່າດ້ວຍພຣະນາງສາກິຍານີພຣະນາມວ່າກາລິໂຄທາ

[໑໐໓໕] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນິໂຄທາຣາມ ເຂດເມືອງກະບິນລະພັດແຄວັ້ນສັກກະ ເມື່ອໃນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຊົງຖືບາດແລະຈີວອນສະເດັດເຂົ້າໄປສູ່ນິເວດຂອງພຣະນາງສາກິຍານີພຣະນາມວ່າ ກາລິໂຄທາ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ແລ້ວ ພຣະນາງກາລິໂຄທາສາກິຍານີສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບພຣະນາງກາລິໂຄທາສາກິຍານີດັ່ງນີ້ ວ່າ

ໂຄທາ ອະຣິຍະສາວິກາຜູ້ປະກອບດ້ວຍທຳ ໔ ປະການ ເປັນໂສດາບັນ ບໍ່ມີທາງຕົກຕ່ຳມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ທຳ ໔ ປະການ ອັນໃດແດ່

ຄື ອະຣິຍະສາວິກາໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ

໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ

໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ

໔. ມີໃຈປາສະຈາກຄວາມຂີ້ຖີ່ອັນເປັນມົນທິນ ມີຈາຄະອັນສະລະແລ້ວ ມີຝາມືຊຸ່ມ ຍິນດີໃນການສະລະ ຄວນແກ່ການຂໍ ຍິນດີໃນການໃຫ້ທານແລະການແຈກທານຢູ່ຄອງເຮືອນ

ໂຄທາ ອະຣິຍະສາວິກາຜູ້ປະກອບດ້ວຍທຳ ໔ ປະການນີ້ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ພຣະນາງກາລິໂຄທາສາກິຍານີຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ອົງເຄື່ອງບັນລຸໂສດາ ໔ ປະການນີ້ທີ່ພຣະອົງຊົງສະແດງໄວ້ ທຳ (ຄືອົງເຄື່ອງບັນລຸໂສດາ) ເຫຼົ່ານັ້ນ ມີຢູ່ໃນຂ້ານ້ອຍ ແລະຂ້ານ້ອຍກໍເຫັນທຳເຫຼົ່ານັ້ນ ຍ້ອນວ່າຂ້ານ້ອຍ

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ฯລฯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ
໔. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ฯລฯ
໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ฯລฯ

ອັນໜຶ່ງ ໄທຍະທຳທຸກຢ່າງໃນຕະກູນ ເປັນຂອງບໍ່ແບ່ງແຍກກັບທ່ານຜູ້ມີສີນ ມີທຳອັນງາມ ໂຄທາ ເປັນລາບຂອງທ່ານ ທ່ານໄດ້ດີແລ້ວ ໂສດາປັດຕິຜົນທ່ານເຮັດໃຫ້ແຈ້ງແລ້ວ

**ກາລິໂຄທາສູດທີ ໗ ຈົບ**

# ໑໐. ບັນທິຍະສັກກະສູດ

## ວ່າດ້ວຍເຈົ້າສາກະຍະພຣະນາມວ່າບັນທິຍະ

[໑໐໓໖] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນິໂຄທາຣາມ ເຂດເມືອງກະບິນລະພັດ ແຄວ້ນສັກກະ ຄັ້ງນັ້ນ ເຈົ້າສາກະຍະພຣະນາມວ່າ ບັນທິຍະສະ ເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອະຣິຍະສາວົກໃດ ບໍ່ມີອົງເຄື່ອງບັນລຸໂສດາ ໔ ປະການ ໂດຍປະການທັງປວງ ພຣະອະຣິຍະສາວົກນັ້ນຊື່ວ່າ ຢູ່ດ້ວຍຄວາມຜະໝາດບໍ?

ພຣະຜູ້ມີພຣະພາກເຈົ້າຕັດວ່າ ບັນທິຍະ ບຸກຄົນໃດ ບໍ່ມີອົງເຄື່ອງບັນລຸໂສດາ ໔ ປະການ ໂດຍປະການທັງປວງ ເຮົາຮຽກບຸກຄົນນັ້ນວ່າ ເປັນຜູ້ເຫີນຫ່າງ ຕັ້ງຢູ່ໃນຝ່າຍປຸຖຸຊົນ ອະຣິຍະສາວົກເປັນຜູ້ຢູ່ດ້ວຍຄວາມຜະໝາດ ແລະຢູ່ດ້ວຍຄວາມບໍ່ຜະໝາດ ໂດຍວິທີໃດ ທ່ານຈົ່ງຟັງຈົ່ງໃສ່ໃຈວິທີນັ້ນໃຫ້ດີ ເຮົາຈັກກ່າວ ເຈົ້າບັນທິຍະສາກະຍະທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຕັດວ່າ

ບັນທິຍະ ອະຣິຍະສາວົກຜູ້ຢູ່ດ້ວຍຄວາມຜະໝາດ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ໆລໆ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນ ພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ອະຣິຍະສາວົກພໍໃຈດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວ ໃນພຣະພຸດທະເຈົ້ານັ້ນ ບໍ່ພະຍາຍາມໃຫ້ຍິ່ງຂຶ້ນໄປເພື່ອຄວາມສະຫງັດໃນກາງເວັນ ເພື່ອຫຼີບຫຼີກໃນກາງຄືນ ເມື່ອອະຣິຍະສາວົກເປັນຜູ້ຜະໝາດຢູ່ແນວນີ້ ຍ່ອມບໍ່ມີປາໂມດ ເມື່ອບໍ່ມີປາໂມດ ກໍບໍ່ມີປິຕິ ເມື່ອບໍ່ມີປິຕິ ກໍບໍ່ມີປັດສັດທິ ເມື່ອບໍ່ມີປັດສັດທິ ກໍຢູ່ເປັນທຸກ ຈິດຂອງຜູ້ມີທຸກຍ່ອມບໍ່ຕັ້ງໝັ້ນ ເມື່ອຈິດບໍ່ຕັ້ງໝັ້ນ ທຳທັງຫຼາຍກໍບໍ່ຜາກົດ ຍ້ອນທຳທັງຫຼາຍບໍ່ຜາກົດ ຈຶ່ງນັບວ່າເປັນຜູ້ຢູ່ດ້ວຍຄວາມຜະໝາດໂດຍແທ້

໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ໆລໆ

໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ໆລໆ

໔. ປະກອບດ້ວຍສີນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ໆລໆ ເປັນໄປເພື່ອສະມາທິ ອະຣິຍະສາວົກພໍໃຈດ້ວຍສີນທີ່ພຣະອະຣິຍະພໍໃຈນັ້ນ ບໍ່ພະຍາຍາມ ໃຫ້ຍິ່ງຂຶ້ນໄປເພື່ອຄວາມສະຫງັດໃນກາງເວັນ ເພື່ອຫຼີບຫຼີກໃນກາງຄືນ ເມື່ອອະຣິຍະສາວົກເປັນຜູ້ຜະໝາດຢູ່ແນວນີ້ ຍ່ອມບໍ່ມີປາໂມດ ເມື່ອ ບໍ່ມີປາໂມດ ກໍບໍ່ມີປິຕິ ເມື່ອບໍ່ມີປິຕິ ກໍບໍ່ມີປັດສັດທິ ເມື່ອບໍ່ມີປັດສັດທິ ກໍຢູ່ເປັນທຸກ ຈິດຂອງຜູ້ມີທຸກຍ່ອມບໍ່ຕັ້ງໝັ້ນ ເມື່ອຈິດບໍ່ຕັ້ງໝັ້ນ ທຳທັງຫຼາຍກໍບໍ່ຜາກົດ ຍ້ອນທຳທັງຫຼາຍບໍ່ຜາກົດ ຈຶ່ງນັບວ່າເປັນຜູ້ຢູ່ດ້ວຍຄວາມຜະໝາດໂດຍແທ້

ນັນທິຍະ ອະຣິຍະສາວົກຜູ້ຢູ່ດ້ວຍຄວາມຜະໝາດ ເປັນແນວນີ້ແລ

ອະຣິຍະສາວົກຜູ້ຢູ່ດ້ວຍຄວາມບໍ່ຜະໝາດ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ໆລໆ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນ ພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ອະຣິຍະສາວົກບໍ່ພໍໃຈດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວ ໃນພຣະພຸດ

ທະເຈົ້ານັ້ນ ພະຍາຍາມໃຫ້ຍິ່ງຂຶ້ນໄປເພື່ອຄວາມສະຫງັດໃນກາງເວັນ ເພື່ອຫຼີບຫຼີກໃນກາງຄືນ ເມື່ອອະຣິຍະສາວິກາເປັນຜູ້ບໍ່ຜະໝາດຢູ່ແນວນີ້ ປາໂມດຍ່ອມເກີດ ເມື່ອປາໂມດເກີດແລ້ວ ປີຕິຍ່ອມເກີດ ເມື່ອໃຈມີປີຕິ ກາຍຍ່ອມລະງັບ ຜູ້ມີກາຍລະງັບຍ່ອມສະເຫວີຍສຸກ ຈິດຂອງຜູ້ມີສຸກຍ່ອມຕັ້ງໝັ້ນ ເມື່ອຈິດຕັ້ງໝັ້ນ ທຳທັງຫຼາຍກໍຜາກົດ ຍ້ອນທຳທັງຫຼາຍຜາກົດ ຈຶ່ງນັບວ່າເປັນຜູ້ຢູ່ດ້ວຍຄວາມບໍ່ຜະໝາດໂດຍແທ້

໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ

໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ

໔. ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ ອະຣິຍະສາວິກາບໍ່ພໍໃຈດ້ວຍສິນທີ່ພຣະອະຣິຍະພໍໃຈ ພະຍາຍາມ ໃຫ້ຍິ່ງຂຶ້ນໄປ ເພື່ອຄວາມສະຫງັດໃນກາງເວັນ ເພື່ອຫຼີບຫຼີກໃນກາງຄືນ ເມື່ອອະຣິຍະສາວິກາເປັນຜູ້ບໍ່ຜະໝາດຢູ່ແນວນີ້ ປາໂມດຍ່ອມເກີດ ເມື່ອປາໂມດເກີດແລ້ວ ປີຕິຍ່ອມເກີດ ເມື່ອໃຈມີປີຕິ ກາຍຍ່ອມລະງັບ ຜູ້ມີກາຍລະງັບຍ່ອມສະເຫວີຍສຸກ ຈິດຂອງຜູ້ມີສຸກຍ່ອມຕັ້ງໝັ້ນ ເມື່ອຈິດຕັ້ງໝັ້ນ ທຳທັງຫຼາຍກໍຜາກົດ ຍ້ອນທຳທັງຫຼາຍຜາກົດ ຈຶ່ງນັບວ່າເປັນຜູ້ຢູ່ດ້ວຍຄວາມບໍ່ຜະໝາດໂດຍແທ້

ນັນທິຍະ ອະຣິຍະສາວິກາຜູ້ຢູ່ດ້ວຍຄວາມບໍ່ຜະໝາດ ເປັນແນວນີ້ແລ

**ນັນທິຍະສັກກະສູດທີ ໑໐ ຈົບ**

**ປຸນຍາພິສັນທະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໕. ສະຄາຖະກະປຸນຍາພິສັນທະວັກ

## ໝວດວ່າດ້ວຍຫ້ວງບຸນກຸສົນທີ່ມີຄາຖາປິນ

# ໑. ປະຖົມອະພິສັນທະສູດ

## ວ່າດ້ວຍຫ້ວງບຸນກຸສົນ ສູດທີ ໑

[໑໐໓໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຫ້ວງບຸນກຸສົນນຳສຸກມາໃຫ້ ໔ ປະການນີ້

ຫ້ວງບຸນກຸສົນ ໔ ປະການ ອັນໃດແດ່
ຄື ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນ ພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ນີ້ເປັນຫ້ວງບຸນກຸສົນນຳສຸກມາໃຫ້ປະການທີ ໑
໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ
໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ
໔. ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ ນີ້ເປັນຫ້ວງບຸນກຸສົນນຳສຸກມາໃຫ້ປະການທີ ໔

ຫ້ວງບຸນກຸສົນນຳສຸກມາໃຫ້ ໔ ປະການນີ້

ການທີ່ຈະກຳນົດປະມານບຸນຂອງອະຣິຍະສາວົກຜູ້ປະກອບດ້ວຍຫ້ວງບຸນກຸສົນ ໔ ປະການນີ້ວ່າ ຫ້ວງບຸນກຸສົນມີປະມານທໍ່ນີ້ ນຳສຸກມາໃຫ້ ດັ່ງນີ້ ບໍ່ແມ່ນຈະເຮັດໄດ້ງ່າຍ ແທ້ຈິງ ຫ້ວງບຸນກຸສົນນີ້ຍ່ອມເຖິງການນັບວ່າ ເປັນກອງບຸນໃຫຍ່ທີ່ນັບບໍ່ໄດ້ ປະມານບໍ່ໄດ້ເລີຍ

ການທີ່ຈະກຳນົດປະລິມານຂອງນ້ຳໃນມະຫາສະມຸດວ່າ ນ້ຳມີປະລິມານທໍ່ນີ້ອາລະຫະກະ ນ້ຳມີປະລິມານທໍ່ນີ້ ໑໐໐ ອາລະຫະກະ ນ້ຳມີປະລິມານທໍ່ນີ້ ໑,໐໐໐ ອາລະຫະກະ ຫຼື ນ້ຳມີປະລິມານທໍ່ນີ້ ໑໐໐,໐໐໐ ອາລະຫະກະ ດັ່ງນີ້ ບໍ່ແມ່ນຈະເຮັດໄດ້ງ່າຍ ແທ້ຈິງ ປະລິມານຂອງນ້ຳໃນມະຫາສະມຸດນັ້ນຍ່ອມເຖິງການນັບວ່າ ເປັນແມ່ນ້ຳໃຫຍ່ທີ່ນັບບໍ່ໄດ້ ປະມານບໍ່ໄດ້ເລີຍ ແມ່ນສັນໃດ

ການທີ່ຈະກຳນົດປະມານບຸນຂອງອະຣິຍະສາວົກຜູ້ປະກອບດ້ວຍຫ້ວງບຸນກຸສົນ ໔ ປະການນີ້ວ່າ ຫ້ວງບຸນກຸສົນມີປະມານທໍ່ນີ້ ນຳສຸກມາໃຫ້ ດັ່ງນີ້ ບໍ່ແມ່ນຈະເຮັດໄດ້ງ່າຍ ແທ້ຈິງຫ້ວງບຸນກຸສົນນີ້ຍ່ອມເຖິງການນັບວ່າ ເປັນກອງບຸນໃຫຍ່ທີ່ນັບບໍ່ໄດ້ ປະມານບໍ່ໄດ້ເລີຍ ຄືກັນສັນນັ້ນ

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ແມ່ນ້ຳຫຼາຍສາຍຄັບຄັ່ງໄປດ້ວຍໝູ່ປາ
ໄຫຼບ່າໄປສູ່ມະຫາສະມຸດ ອັນເປັນທີ່ຂັງນ້ຳຂະໜາດໃຫຍ່
ປະມານບໍ່ໄດ້ ມີສິ່ງທີ່ເປັນຕາຢ້ານຫຼາຍ
ເປັນແຫຼ່ງຣັດຕະນະຊັ້ນເລີດ ສັນໃດ
ສາຍນ້ຳແຫ່ງບຸນຍ່ອມຫຼັ່ງໄຫຼໄປສູ່ນໍຣະຊົນ
ຜູ້ເປັນບັນດິດ ຜູ້ໃຫ້ເຂົ້າ ນ້ຳ ຜ້າ
ບ່ອນນອນ ບ່ອນນັ່ງ ແລະເຄື່ອງປູລາດ
ປຽບຄື ແມ່ນ້ຳຄືແມ່ນ້ຳໄຫຼໄປສູ່ມະຫາສະມຸດ ສັນນັ້ນ

**ປະຖົມອະພິສັນທະສູດທີ ໑ ຈົບ**

# ໒. ທຸຕິຍະອະພິສັນທະສູດ

## ວ່າດ້ວຍຫ້ວງບຸນກຸສົນ ສູດທີ ໒

[໑໐໓໘] ພິກຂຸທັງຫຼາຍ ຫ້ວງບຸນກຸສົນນຳສຸກມາໃຫ້ ໔ ປະການນີ້

ຫ້ວງບຸນກຸສົນ ໔ ປະການ ອັນໃດແດ່

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ໆລໆ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ນີ້ເປັນຫ້ວງບຸນກຸສົນນຳສຸກມາໃຫ້ປະການທີ ໑

໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ໆລໆ

໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ

໔. ມີໃຈປາສະຈາກຄວາມຂີ້ຖີ່ອັນເປັນມົນທິນ ມີຈາຄະອັນສະລະແລ້ວ ມີຝາມືຊຸ່ມ ຍິນດີໃນການສະລະ ຄວນແກ່ການຂໍ ຍິນດີໃນການໃຫ້ທານແລະການແຈກທານ ຢູ່ຄອງເຮືອນ ນີ້ເປັນຫ້ວງບຸນກຸສົນນໍາສຸກມາໃຫ້ປະການທີ ໔

ຫ້ວງບຸນກຸສົນນໍາສຸກມາໃຫ້ ໔ ປະການນີ້

ການທີ່ຈະກໍານົດປະມານບຸນຂອງອະຣິຍະສາວົກຜູ້ປະກອບດ້ວຍຫ້ວງບຸນກຸສົນ ໔ ປະການນີ້ວ່າ ຫ້ວງບຸນກຸສົນມີປະມານທໍ່ນີ້ນໍາສຸກມາໃຫ້ ດັ່ງນີ້ ບໍ່ແມ່ນຈະເຮັດໄດ້ງ່າຍ ແທ້ຈິງ ຫ້ວງບຸນກຸສົນນີ້ຍ່ອມເຖິງການນັບວ່າ ເປັນກອງບຸນໃຫຍ່ທີ່ນັບບໍ່ໄດ້ ປະມານບໍ່ໄດ້ເລີຍ

ແມ່ນໍ້າໃຫຍ່ເຫຼົ່ານີ້ ຄື ແມ່ນໍ້າຄົງຄາ ແມ່ນໍ້າຍະມຸນາ ແມ່ນໍ້າອະຈິຣະວະດີ ແມ່ນໍ້າສະຣະພູ ແມ່ນໍ້າມະຮີຍ່ອມໄຫຼເລື້ອຍໄປທີ່ປາກນໍ້າໃດ ການທີ່ຈະກໍານົດປະລິມານຂອງນໍ້າທີ່ປາກນໍ້ານັ້ນວ່າ ນໍ້າມີປະລິມານທໍ່ນີ້ອາລະຫະກະ ນໍ້າມີປະລິມານທໍ່ນີ້ ໑໐໐ ອາລະຫະກະ ນໍ້າມີປະລິມານທໍ່ນີ້ ໑,໐໐໐ ອາລະຫະກະ ຫຼືນໍ້າມີປະລິມານທໍ່ນີ້ ໑໐໐,໐໐໐ ອາລະຫະກະ ດັ່ງນີ້ ບໍ່ແມ່ນຈະເຮັດໄດ້ງ່າຍ ແທ້ຈິງ ປະລິມານຂອງນໍ້າໃນມະຫາສະມຸດນັ້ນຍ່ອມເຖິງການນັບວ່າ ເປັນແມ່ນໍ້າໃຫຍ່ທີ່ນັບບໍ່ໄດ້ ປະມານບໍ່ໄດ້ເລີຍ ແມ່ນສັນໃດ

ການທີ່ຈະກໍານົດປະມານບຸນຂອງອະຣິຍະສາວົກຜູ້ປະກອບດ້ວຍຫ້ວງບຸນກຸສົນ ໔ ປະການນີ້ວ່າ ຫ້ວງບຸນກຸສົນມີປະມານທໍ່ນີ້ ນໍາສຸກມາໃຫ້ ດັ່ງນີ້ ບໍ່ແມ່ນຈະເຮັດໄດ້ງ່າຍ ແທ້ຈິງ ຫ້ວງບຸນກຸສົນນີ້ຍ່ອມເຖິງການນັບວ່າ ເປັນກອງບຸນໃຫຍ່ທີ່ນັບບໍ່ໄດ້ ປະມານບໍ່ໄດ້ເລີຍ ຄືກັນສັນນັ້ນ

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ແມ່ນໍ້າຫຼາຍສາຍຄັບຄັ່ງໄປດ້ວຍໝູ່ປາ
ໄຫຼບ່າໄປສູ່ມະຫາສະມຸດ ອັນເປັນທີ່ຂັງນໍ້າຂະໜາດໃຫຍ່
ປະມານບໍ່ໄດ້ ມີສິ່ງທີ່ເປັນຕາຢ້ານຫຼາຍ
ເປັນແຫຼ່ງຣັດຕະນະຊັ້ນເລີດ ສັນໃດ
ສາຍນໍ້າແຫ່ງບຸນຍ່ອມຫຼັ່ງໄຫຼໄປສູ່ນໍຣະຊົນ
ຜູ້ເປັນບັນດິດ ຜູ້ໃຫ້ເຂົ້າ ນໍ້າ ຜ້າ
ບ່ອນນອນ ບ່ອນນັ່ງ ແລະເຄື່ອງປູລາດ
ປຽບຄືແມ່ນໍ້າຄືແມ່ນໍ້າໄຫຼໄປສູ່ມະຫາສະມຸດ ສັນນັ້ນ

**ທຸຕິຍະອະພິສັນທະສູດທີ ໘ ຈົບ**

# ໓. ຕະຕິຍະອະພິສັນທະສູດ

## ວ່າດ້ວຍຫ້ວງບຸນກຸສົນ ສູດທີ ໓

[໑໐໓໗] ພິກຂຸທັງຫຼາຍ ຫ້ວງບຸນກຸສົນນຳສຸກມາໃຫ້ ໔ ປະການນີ້

ຫ້ວງບຸນກຸສົນ ໔ ປະການ ອັນໃດແດ່

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນ ພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ນີ້ເປັນຫ້ວງບຸນກຸສົນນຳສຸກມາໃຫ້ປະການທີ ໑

໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ

໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ

໔. ເປັນຜູ້ມີປັນຍາ ຄື ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນທັງຄວາມເກີດແລະຄວາມດັບ ອັນເປັນອະຣິຍະ ທຳລາຍກິເລດ ໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງ ນີ້ເປັນຫ້ວງບຸນກຸສົນນຳສຸກມາໃຫ້ປະການທີ ໔

ຫ້ວງບຸນກຸສົນນຳສຸກມາໃຫ້ ໔ ປະການນີ້ແລ

ການທີ່ຈະກຳນົດປະມານບຸນຂອງອະຣິຍະສາວົກຜູ້ປະກອບດ້ວຍຫ້ວງບຸນກຸສົນ ໔ ປະການນີ້ວ່າ ຫ້ວງບຸນກຸສົນມີປະມານທໍ່ນີ້ ນຳສຸກມາໃຫ້ ດັ່ງນີ້ ບໍ່ແມ່ນຈະເຮັດໄດ້ງ່າຍ ແທ້ຈິງຫ້ວງບຸນກຸສົນນີ້ຍ່ອມເຖິງການນັບວ່າ ເປັນກອງບຸນໃຫຍ່ທີ່ນັບບໍ່ໄດ້ ປະມານບໍ່ໄດ້ເລີຍ

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດ ສາດສະດາໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາ ຖາປະພັນຕໍ່ໄປອີກວ່າ

ຜູ້ໃດຕ້ອງການບຸນ ຕັ້ງຢູ່ໃນກຸສົນ
ຍ່ອມຈະເລີນມັກເພື່ອບັນລຸອະມະຕະ
ຜູ້ນັ້ນ ບັນລຸທຳອັນເປັນສາລະ ຍິນດີໃນທຳເປັນທີ່ສິ້ນໄປ
ຍ່ອມບໍ່ຫວັ່ນໄຫວເມື່ອມັດຈຸຣາດມາເຖິງ

**ຕະຕິຍະອະພິສັນທະສູດທີ ໓ ຈົບ**

# ໔. ປະຖົມມະຫັດທະນະສູດ

## ວ່າດ້ວຍຜູ້ມີທຳເປັນຜູ້ມີຊັບຫຼາຍ ສູດທີ ໑

[໑໐໔໐] ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ປະກອບດ້ວຍທຳ ໔ ປະການ ເຮົາກ່າວວ່າ ເປັນຜູ້ຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ມີຍົດໃຫຍ່

ທຳ ໔ ປະການ ອັນໃດແດ່

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສ ອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ
໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ
໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ
໔. ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ປະກອບດ້ວຍທຳ ໔ ປະການນີ້ ເຮົາກ່າວວ່າ ເປັນຜູ້ຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ມີຍົດໃຫຍ່

**ປະຖົມມະຫັດທະນະສູດທີ ໔ ຈົບ**

# ໕. ທຸຕິຍະມະຫັດທະນະສູດ

## ວ່າດ້ວຍຜູ້ມີທຳເປັນຜູ້ມີຊັບຫຼາຍ ສູດທີ ໒

[໑໐໔໑] ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ປະກອບດ້ວຍທຳ ໔ ປະການ ເຮົາກ່າວວ່າ ເປັນຜູ້ຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ມີຍົດໃຫຍ່

ທຳ ໔ ປະການ ອັນໃດແດ່

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນ

ຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງ ເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ

໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ

໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ

໔. ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ປະກອບດ້ວຍທຳ ໔ ປະການນີ້ ເຮົາກ່າວວ່າ ເປັນຜູ້ຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ມີຍົດໃຫຍ່

**ທຸຕິຍະມະຫັດທະນະສູດທີ ໕ ຈົບ**

# ໖. ສຸດທະກະສູດ

## ວ່າດ້ວຍອົງຄຸນລ້ວນຂອງພຣະໂສດາບັນ

[໑໐໔໒] ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ປະກອບດ້ວຍທຳ ໔ ປະການ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ທຳ ໔ ປະການ ອັນໃດແດ່

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງ ເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ

໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ

໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ

໔. ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ປະກອບດ້ວຍທຳ ໔ ປະການນີ້ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

**ສຸດທະກະສູດທີ ໖ ຈົບ**

# ๗. นันทิยะสูด

## ว่าด้วยเจ้าสากะยะพระนามว่านันทิยะ

[๑๐๔๓] เลื้องเกิดขึ้นที่เมืองกะบินละพัด

พระผู้มีพระพากเจ้า ได้ตัดกับเจ้าสากะยะพระนามว่านั นทิยะผู้ปะทับนั่งอยู่บ่อนที่สิมควนว่า มะหาบํพิด อะริยะสาวิกผู้ปะกอบด้วยทํา ๔ ปะกาน เป็นโสดาบันบ่มีทางตกต่ำ มีความแน่นอนที่จะสำเล็ดสำโพทิในมื้ทางหน้า

ทํา ๔ ปะกาน อันใดแด่

คือ อะริยะสาวิกในทําวินัยนี้

๑. ปะกอบด้วยความเซื่อมใสอันบ่หวั่นไหวในพระพุดทะเจ้าว่า แม่นย้อนเหดนี้ พระผู้มีพระพากเจ้าพระองนั้น ฯลฯ เป็นสาดสะดาของเทวะดาและมะนุดทั้งหลาย เป็นพระพุดทะเจ้า เป็นพระผู้มีพระพากเจ้า
๒. ปะกอบด้วยความเซื่อมใสอันบ่หวั่นไหวในพระทํา ฯลฯ
๓. ปะกอบด้วยความเซื่อมใสอันบ่หวั่นไหวในพระสง ฯลฯ
๔. ปะกอบด้วยสินที่พระอะริยะพํใจ บ่ขาด ฯลฯ เป็นไปเพื่อสะมาทิ

มะหาบํพิด อะริยะสาวิกผู้ปะกอบด้วยทํา ๔ ปะกานนี้ เป็นโสดาบัน บ่มีทางตกต่ำ มีความแน่นอนที่จะสำเล็ดสำโพทิในมื้ทางหน้า

**นันทิยะสูดที่ ๗ จบ**

# ๘. พัดทิยะสูด

## ว่าด้วยเจ้าสากะยะพระนามว่าพัดทะยะ

[๑๐๔๔] เลื้องเกิดขึ้นที่เมืองกะบินละพัด

พระผู้มีพระพากเจ้าได้ตัดกับเจ้าสากะยะพระนามว่า พัดทะยะผู้ปะทับนั่งอยู่บ่อนที่สิมควนว่า มะหาบํพิด อะริยะสาวิกผู้ปะกอบด้วยทํา ๔ ปะกาน เป็นโสดาบันบ่มีทางตกต่ำ มีความแน่นอนที่จะสำเล็ดสำโพทิในมื้ทางหน้า

ທຳ ໔ ປະການ ອັນໃດແດ່

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າ ຯລຯ

໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ

໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ

໔. ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ

ອະຣິຍະສາວົກຜູ້ປະກອບດ້ວຍທຳ ໔ ປະການນີ້ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

**ພັດທິຍະສູດທີ ໖ ຈົບ**

## ໗. ມະຫານາມະສູດ

### ວ່າດ້ວຍເຈົ້າສາກະຍະພຣະນາມວ່າມະຫານາມ

[໑໐໔໕] ເລື້ອງເກີດຂຶ້ນທີ່ເມືອງກະບິນລະພັດ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບເຈົ້າສາກະຍະພຣະນາມວ່າ ມະຫານາມ ຜູ້ປະທັບນັ່ງຢູ່ບ່ອນທີ່ສົມຄວນວ່າ ມະຫາບໍພິດ ອະຣິຍະສາວົກຜູ້ປະກອບດ້ວຍທຳ ໔ ປະການ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ທຳ ໔ ປະການ ອັນໃດແດ່

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ

໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ

໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ

໔. ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ

ມະຫາບໍພິດ ອະຣິຍະສາວົກຜູ້ປະກອບດ້ວຍທຳ ໔ ປະການນີ້ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

**ມະຫານາມະສູດທີ ໗ ຈົບ**

# ໑໐. ອັງຄະສູດ

## ວ່າດ້ວຍອົງເຄື່ອງບັນລຸໂສດາ

[໑໐໔໖] ພິກຂຸທັງຫຼາຍ ອົງເຄື່ອງບັນລຸໂສດາ ໔ ປະການນີ້

ອົງເຄື່ອງບັນລຸໂສດາ ໔ ປະການ ອັນໃດແດ່ ຄື

໑. ສັບປຸຣິສະສັງເສວະ (ການຄົບຫາສັດຕະບຸຣຸດ)
໒. ສັດທຳມັດສະວະນະ (ການຟັງພຣະສັດທຳ)
໓. ໂຍນິໂສມະນະສິການ (ການມະນະສິການໂດຍແຍບຄາຍ)
໔. ທຳມານຸທຳມະປະຕິປັດຕິ (ການປະຕິບັດທຳສົມຄວນແກ່ທຳ)

ພິກຂຸທັງຫຼາຍ ອົງເຄື່ອງບັນລຸໂສດາ ໔ ປະການນີ້

**ອັງຄະສູດທີ ໑໐ ຈົບ**

**ສະຄາຖະກະປຸນຍາພິສັນທະວັກທີ ໕ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື

# ໓. ສັບປັນຍະວັກ

## ໝວດວ່າດ້ວຍຜູ້ມີປັນຍາ

# ໑. ສະຄາຖະກະສູດ

## ວ່າດ້ວຍຕັດອົງຄຸນຂອງພຣະໂສດາບັນທີ່ມີຄາຖາ

[໑໐໘໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ປະກອບດ້ວຍທຳ ໔ ປະການ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິ ໃນມື້ທາງໜ້າ

ທຳ ໔ ປະການ ອັນໃດແດ່

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ
໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ
໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ
໔. ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ

ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ປະກອບດ້ວຍທຳ ໔ ປະການນີ້ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດ ສາດສະດາໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາ ຖາປະພັນຕໍ່ໄປອີກ ວ່າ

ຜູ້ໃດມີສັດທາໃນພຣະຕະຖາຄົດຕັ້ງໝັ້ນ ບໍ່ຫວັ່ນໄຫວ
ມີສິນອັນງາມທີ່ພຣະອະຣິຍະພໍໃຈ(ແລະ)ສັນເສີນ
ມີຄວາມເຫຼື້ອມໃສໃນພຣະສົງ ແລະມີຄວາມເຫັນກົງ
ບັນດິດທັງຫຼາຍຮຽກຜູ້ນັ້ນວ່າ ເປັນຄົນບໍ່ຂັດສົນ
ຊີວິດຂອງເຂົາກໍບໍ່ສູນເປົ່າ
ຍ້ອນເຫດນັ້ນ ຜູ້ມີປັນຍາ

ເມື່ອຣະນຶກເຖິງຄຳສອນຂອງພຣະພຸດທະເຈົ້າທັງຫຼາຍ
ຄວນໝັ່ນປະກອບສັດທາ ສິນ
ຄວາມເຫຼື້ອມໃສ ແລະການເຫັນທຳ

**ສະຄາຖະກະສູດທີ ໑ ຈົບ**

# ໘. ວັດສັງວຸດຖະສູດ

## ວ່າດ້ວຍພິກຂຸຜູ້ຢູ່ຈຳພັນສາໃນເມືອງສາວັດຖີ

[໑໐໔໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດເມືອງສາວັດຖີ ສະໄໝນັ້ນ ພິກຂຸອົງໜຶ່ງຢູ່ຈຳພັນສາໃນເມືອງ ສາວັດຖີແລ້ວ ໄປເຖິງເມືອງກະບິນລະພັດໂດຍລຳດັບດ້ວຍວຽກງານບາງຢ່າງ ພວກເຈົ້າສາກະຍະ

ຜູ້ຄອງເມືອງກະບິນລະພັດຊົງສະດັບຂ່າວວ່າ ພິກຂຸອົງໜຶ່ງຢູ່ຈຳພັນສາໃນເມືອງສາວັດຖີມາເຖິງເມືອງກະບິນລະພັດແລ້ວ ຈຶ່ງສະເດັດເຂົ້າໄປຫາພິກຂຸນັ້ນຮອດບ່ອນຢູ່ ຊົງອະພິວາດແລ້ວປະທັບນັ່ງ ຢູ່ບ່ອນທີ່ສົມຄວນ ໄດ້ຕັດຖາມພິກຂຸນັ້ນດັ່ງນີ້ວ່າ

ທ່ານຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າບໍ່ມີພຣະໂຣຄາພາດ ແລະມີພຣະພະລານາໄມແຂງແຮງ ຢູ່ບໍ

ພິກຂຸນັ້ນຖວາຍພຣະພອນວ່າ ຂໍຖວາຍພຣະພອນ ມະຫາບໍພິດ ພຣະຜູ້ມີພຣະພາກເຈົ້າບໍ່ມີພຣະໂຣຄາພາດ ແລະມີພຣະພະລານາໄມແຂງແຮງຢູ່

ທ່ານຜູ້ຈະເລີນ ພຣະສາຣີບຸດແລະພຣະໂມກຄັນລານະບໍ່ມີໂຣຄາພາດ ແລະມີພະລານາໄມ ແຂງແຮງຢູ່ບໍ

ມະຫາບໍພິດ ແມ່ນພຣະສາຣີບຸດແລະພຣະໂມກຄັນລານະກໍບໍ່ມີໂຣຄາພາດ ແລະມີພະລານາໄມແຂງແຮງຢູ່

ທ່ານຜູ້ຈະເລີນ ພິກຂຸສົງບໍ່ມີໂຣຄາພາດ ແລະມີພະລານາໄມແຂງແຮງຢູ່ບໍ

ມະຫາບໍພິດ ແມ່ນພິກຂຸສົງກໍບໍ່ມີໂຣຄາພາດ ແລະມີພະລານາໄມແຂງແຮງຢູ່

ທ່ານຜູ້ຈະເລີນ ລະຫວ່າງພັນສານີ້ ອັນໃດ ໆ ທີ່ທ່ານໄດ້ຟັງມາ ໄດ້ຮັບມາສະເພາະ ພຣະພັກພຣະຜູ້ມີພຣະພາກເຈົ້າ ມີຢູ່ບໍ

ມະຫາບໍພິດ ອາຕະມາພາບໄດ້ຟັງມາ ໄດ້ຮັບເລື້ອງນີ້ມາສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ ພິກຂຸທັງຫຼາຍ ພິກຂຸຜູ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນ

ອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ມີຈຳນວນໜ້ອຍ ແທ້ທີ່ຈິງພິກຂຸຜູ້ເປັນໂອປະປາຕິກະຈັກນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນອີກ ຍ້ອນໂອຣຳພາຄິຍະສັງໂຍດ (ສັງໂຍດເບື້ອງຕ່ຳ) ໕ ປະການສິ້ນໄປ ມີຈຳນວນຫຼາຍກວ່າ

ອີກເລື້ອງໜຶ່ງ ທີ່ອາຕະມາພາບໄດ້ຟັງມາ ໄດ້ຮັບມາສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ ພິກຂຸທັງຫຼາຍ ພິກຂຸຜູ້ເປັນໂອປະປາຕິກະຍ້ອນໂອຣຳພາຄິຍະສັງໂຍດ ໕ ປະການສິ້ນໄປຈັກນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນອີກ ມີຈຳນວນໜ້ອຍ ແທ້ທີ່ຈິງພິກຂຸຜູ້ເປັນສະກະທາຄາມີຍ້ອນສັງໂຍດ ໓ ປະການສິ້ນໄປ ແລະຍ້ອນບັນເທົາຣາຄະ ໂທສະ ແລະໂມຫະໃຫ້ເບົາບາງ ມາສູ່ໂລກນີ້ອີກເທື່ອດຽວທໍ່ນັ້ນ ກໍຈັກເຮັດບ່ອນສຸດແຫ່ງທຸກໄດ້ ມີຈຳນວນຫຼາຍກວ່າ

ອີກເລື້ອງໜຶ່ງ ອາຕະມາພາບໄດ້ຟັງມາ ໄດ້ຮັບມາສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ ພິກຂຸທັງຫຼາຍ ພິກຂຸຜູ້ເປັນສະກະທາຄາມີຍ້ອນສັງໂຍດ ໓ ປະການສິ້ນໄປ ແລະຍ້ອນບັນເທົາຣາຄະ ໂທສະ ແລະໂມຫະໃຫ້ເບົາບາງ ມາສູ່ໂລກນີ້ອີກເທື່ອດຽວທໍ່ນັ້ນ ກໍຈັກເຮັດບ່ອນສຸດແຫ່ງທຸກໄດ້ ມີຈຳນວນໜ້ອຍກວ່າ ແທ້ທີ່ຈິງພິກຂຸຜູ້ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ ຍ້ອນສັງໂຍດ ໓ ປະການສິ້ນໄປມີຈຳນວນຫຼາຍກວ່າ

**ວັດສັງວຸດຖະສູດທີ ໘ ຈົບ**

## ໙. ທຳມະທິນນະສູດ

### ວ່າດ້ວຍທຳມະທິນນະອຸປາສົກ

[໑໐໘໙] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ປ່າອິສິປະຕະນະມະຣິຄະທາຍະວັນ ເຂດເມືອງພາຣານະສີ ຄັ້ງນັ້ນ ທຳມະທິນນະອຸປາສົກພ້ອມດ້ວຍອຸປາສົກ ໕໐໐ ຄົນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ສິ່ງໃດຈະເພິ່ງເປັນໄປເພື່ອປະໂຫຍດເພື່ອຄວາມສຸກແກ່ຂ້າພຣະອົງທັງຫຼາຍ ຂໍພຣະຜູ້ມີພຣະພາກເຈົ້າໂຜດໂອວາດ ໂຜດພ່ຳສອນ ສິ່ງນັ້ນແກ່ຂ້າພຣະອົງທັງຫຼາຍເທີ້ນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ທຳມະທິນນະ ຍ້ອນເຫດນັ້ນ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ ພຣະສູດເຫຼົ່າໃດທີ່ພຣະຕະຖາຄົດຕັດແລ້ວ ເລິກເຊິ່ງ ມີເນື້ອຄວາມລຸ້ມລຶກ ເປັນໂລກຸດຕະຣະ ປະກອບດ້ວຍຄວາມວ່າງ ເຮົາຈັກເຂົ້າເຖິງພຣະສູດເຫຼົ່ານັ້ນຕະຫຼອດການຢູ່ ທຳມະທິນນະທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້

ຂ້າແດ່ ພຣະອົງຜູ້ຈະເລີນ ຂໍ້ທີ່ຂ້າພຣະອົງທັງຫຼາຍຍັງຢູ່ຄອງເຮືອນ ນອນບຽດສຽດບຸດ ໃຊ້ສອຍຜົງແກ່ນຈັນຈາກແຄວ້ນກາສີ ທັດຊົງດອກໄມ້ ຂອງຫອມ ແລະເຄື່ອງລູບທາ ຍິນດີຄຳ ແລະເງິນ ຈະເຂົ້າເຖິງພຣະສູດທີ່ ພຣະຕະຖາຄົດຕັດແລ້ວ ເລິກເຊິ່ງ ມີເນື້ອຄວາມລຸ້ມເລິກ ເປັນ ໂລກຸດຕະຣະ ປະກອບດ້ວຍຄວາມວ່າງ ຕະຫຼອດການຢູ່ນັ້ນ ບໍ່ແມ່ນເຮັດໄດ້ງ່າຍ ຂໍພຣະຜູ້ ມີພຣະພາກເຈົ້າໂຜດສະແດງທຳອັນຍິ່ງແກ່ຂ້າພຣະອົງທັງຫຼາຍຜູ້ຕັ້ງຢູ່ໃນສິກຂາບົດທັງ ໕ ເທີ້ນ

ທຳມະທິນນະ ຍ້ອນເຫດນັ້ນ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ວ່າ ເຮົາທັງຫຼາຍ

໑. ຈັກປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນ ຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະ ດາຂອງ ເທວະດາແລະມະນຸດທັງຫຼາຍ ເປັນ ພຣະພຸດທະເຈົ້າ ເປັນພຣະຜູ້ ມີພຣະພາກເຈົ້າ
໒. ຈັກປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ
໓. ຈັກປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ
໔. ຈັກປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອສະ ມາທິ

ທຳມະທິນນະ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້

ຂ້າແດ່ ພຣະອົງຜູ້ຈະເລີນ ອົງເຄື່ອງບັນລຸໂສດາ ໔ ປະການໃດທີ່ພຣະຜູ້ມີພຣະພາກເຈົ້າ ຊົງສະແດງແລ້ວ ທຳ(ຄືອົງເຄື່ອງບັນລຸໂສດາ)ເຫຼົ່ານັ້ນມີຢູ່ໃນຂ້າພຣະອົງທັງຫຼາຍ ແລະຂ້າພຣະ ອົງທັງຫຼາຍ ເຫັນແຈ້ງທຳເຫຼົ່ານັ້ນ ຍ້ອນຂ້າພຣະອົງທັງຫຼາຍ

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນ ຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງ ເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ
໒. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ
໓. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ
໔. ປະກອບດ້ວຍສິນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ

ທຳມະທິນນະ ເປັນລາບຂອງທ່ານທັງຫຼາຍ ທ່ານທັງຫຼາຍໄດ້ດີແລ້ວ ໂສດາປັດຕິຜົນ ທ່ານທັງຫຼາຍເຮັດໃຫ້ແຈ້ງແລ້ວ

**ທຳມະທິນນະສູດທີ ໓ ຈົບ**

# ໘. ຄິລານະສູດ

## ວ່າດ້ວຍອຸປາສົກປ່ວຍ

[໑໐໕໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນິໂຄທາຣາມ ເຂດເມືອງກະບິນລະພັດ ແຄວ້ນສັກກະ ສະໄໝນັ້ນ ພິກຂຸຈຳນວນຫຼາຍ ເຮັດຈີວອນກຳເພື່ອຖວາຍພຣະຜູ້ມີພຣະພາກເຈົ້າ ດ້ວຍຫວັງວ່າ ພຣະຜູ້ມີພຣະພາກເຈົ້າຊົງມີຈີວອນສຳເລັດແລ້ວ ລ່ວງໄປ ໓ ເດືອນກໍຈັກສະເດັດຈາຣິກໄປ

ເຈົ້າສາກະຍະພຣະນາມວ່າ ມະຫານາມ ໄດ້ຊົງຮູ້ຂ່າວແນວນັ້ນຄືກັນ ລຳດັບນັ້ນ ພຣະອົງສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້ານ້ອຍໄດ້ຮູ້ຂ່າວແນວນີ້ວ່າ ໄດ້ຮູ້ວ່າ ພິກຂຸຈຳນວນຫຼາຍເຮັດຈີວອນກຳເພື່ອຖວາຍພຣະຜູ້ມີພຣະພາກເຈົ້າ ດ້ວຍຫວັງວ່າ ພຣະຜູ້ມີພຣະພາກເຈົ້າຊົງມີຈີວອນສຳເລັດແລ້ວ ລ່ວງໄປ ໓ ເດືອນກໍຈັກສະເດັດຈາຣິກໄປ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້ານ້ອຍຍັງບໍ່ໄດ້ຮູ້ຂ່າວ ບໍ່ໄດ້ຮັບເລື້ອງນີ້ມາສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ ອຸປາສົກຜູ້ມີປັນຍາ ເພິ່ງກ່າວສອນອຸປາສົກຜູ້ມີປັນຍາ ເຊິ່ງປ່ວຍໄດ້ຮັບທຸກ ເປັນໄຂ້ໜັກ

ມະຫາບໍພິດ ອຸປາສົກຜູ້ມີປັນຍາເພິ່ງໃຫ້ກຳລັງໃຈອຸປາສົກຜູ້ມີປັນຍາເຊິ່ງປ່ວຍ ໄດ້ຮັບທຸກເປັນໄຂ້ໜັກ ດ້ວຍທຳເປັນບ່ອນຕັ້ງແຫ່ງຄວາມເບົາໃຈ ໔ ປະການ ວ່າ ຈົ່ງເບົາໃຈເທີ້ນທ່ານຜູ້ມີອາຍຸ ທ່ານ

໑. ມີຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ ເປັນສາດສະດາຂອງເທວະດາ ແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ

໒. ມີຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳ ຯລຯ

໓. ມີຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງ ຯລຯ

໔. ມີສີນທີ່ພຣະອະຣິຍະພໍໃຈ ບໍ່ຂາດ ຯລຯ ເປັນໄປເພື່ອສະມາທິ

ມະຫາບໍພິດ ອຸປາສົກຜູ້ມີປັນຍາເມື່ອໃຫ້ກຳລັງໃຈອຸປາສົກຜູ້ມີປັນຍາເຊິ່ງປ່ວຍ ໄດ້ຮັບທຸກເປັນໄຂ້ໜັກ ດ້ວຍທຳເປັນບ່ອນຕັ້ງແຫ່ງຄວາມເບົາໃຈ ໔ ປະການນີ້ແລ້ວ ເພິ່ງຖາມວ່າ ທ່ານຍັງມີຄວາມຫ່ວງໃຍມານດາບິດາຢູ່ບໍ ຖ້າເຂົາຕອບວ່າ ເຮົາຍັງມີຄວາມຫ່ວງໃຍມານດາບິດາຢູ່ ອຸປາສົກນັ້ນເພິ່ງກ່າວວ່າ ທ່ານຜູມີຣະທຸກ ຜູ້ມີຄວາມຕາຍເປັນທຳມະດາ ເຖິງແມ່ນທ່ານຈັກທຳ

ຄວາມຫ່ວງໃຍມານດາບິດາກໍຈັກຕາຍຄືກັນ ເຖິງແມ່ນທ່ານຈະບໍ່ທໍາຄວາມຫ່ວງໃຍມານດາບິດາກໍ ຈັກຕາຍຄືກັນ ຖ້າຈັ່ງຊັ້ນ ຂໍທ່ານຈົ່ງລະຄວາມຫ່ວງໃຍມານດາບິດາຂອງທ່ານສາ

ຖ້າເຂົາກ່າວແນວນີ້ວ່າ ເຮົາລະຄວາມຫ່ວງໃຍມານດາບິດາຂອງເຮົາແລ້ວ ອຸປາສົກນັ້ນ ເພິ່ງຖາມເຂົາວ່າ ທ່ານຍັງມີຄວາມຫ່ວງໃຍບຸດແລະພະຣິຍາຢູ່ບໍ ຖ້າເຂົາຕອບວ່າ ເຮົາຍັງມີຄວາມ ຫ່ວງໃຍບຸດແລະພະຣິຍາຢູ່ ອຸປາສົກນັ້ນເພິ່ງກ່າວກັບເຂົາວ່າ ທ່ານຜູ້ນິຣະທຸກ ຜູ້ມີຄວາມຕາຍ ເປັນທໍາມະດາ ເຖິງແມ່ນທ່ານຈັກທໍາຄວາມຫ່ວງໃຍບຸດແລະພະຣິຍາກໍຈັກຕາຍຄືກັນ ເຖິງແມ່ນ ທ່ານຈັກບໍ່ທໍາຄວາມຫ່ວງໃຍບຸດແລະພະຣິຍາກໍຈັກຕາຍຄືກັນ ຖ້າຈັ່ງຊັ້ນ ຂໍທ່ານຈົ່ງລະຄວາມ ຫ່ວງໃຍບຸດແລະພະຣິຍາຂອງທ່ານສາ

ຖ້າເຂົາກ່າວແນວນີ້ວ່າ ເຮົາລະຄວາມຫ່ວງໃຍບຸດແລະພະຣິຍາຂອງເຮົາແລ້ວ ອຸປາສົກ ນັ້ນເພິ່ງຖາມເຂົາວ່າ ທ່ານຍັງມີຄວາມຫ່ວງໃຍກາມມະຄຸນ ໕ ອັນເປັນຂອງມະນຸດຢູ່ບໍ ຖ້າເຂົາ ຕອບວ່າ ເຮົາຍັງມີຄວາມຫ່ວງໃຍກາມມະຄຸນ ໕ ອັນເປັນຂອງມະນຸດຢູ່ ອຸປາສົກນັ້ນເພິ່ງ ກ່າວ ວ່າ ທ່ານກາມອັນເປັນທິບຍັງດີກວ່າ ແລະປະນີດກວ່າກາມອັນເປັນຂອງມະນຸດ

ຖ້າຈັ່ງຊັ້ນ ຂໍທ່ານຈົ່ງພາກຈິດອອກຈາກກາມອັນເປັນຂອງມະນຸດແລ້ວ ນ້ອມຈິດໄປໃນໝູ່ ເທບຊັ້ນຈາຕຸມະຫາຣາດເທີ້ນ

ຖ້າເຂົາກ່າວແນວນີ້ວ່າ ເຮົາພາກຈິດອອກຈາກກາມອັນເປັນຂອງມະນຸດແລ້ວ ເຮົານ້ອມຈິ ດໄປໃນໝູ່ເທບຊັ້ນຈາຕຸມະຫາຣາດແລ້ວ ອຸປາສົກນັ້ນເພິ່ງກ່າວວ່າ ທ່ານ ໝູ່ເທບຊັ້ນຕາວະຕິງສາ ຍັງດີກວ່າແລະປະນີດກວ່າໝູ່ເທບຊັ້ນຈາຕຸມະຫາຣາດ ຖ້າຈັ່ງຊັ້ນ ຂໍທ່ານຈົ່ງພາກຈິດອອກຈາກໝູ່ ເທບຊັ້ນຈາຕຸມະຫາຣາດແລ້ວ ນ້ອມຈິດໄປໃນໝູ່ເທບຊັ້ນຕາວະຕິງສາເທີ້ນ

ຖ້າເຂົາກ່າວແນວນີ້ວ່າ ເຮົາພາກຈິດອອກຈາກໝູ່ເທບຊັ້ນຈາຕຸມະຫາຣາດແລ້ວ ເຮົານ້ອມ ຈິດໄປໃນໝູ່ເທບຊັ້ນຕາວະຕິງສາແລ້ວ ອຸປາສົກນັ້ນເພິ່ງກ່າວວ່າ ໝູ່ເທບຊັ້ນຍາມາຍັງດີກວ່າແລະ ປະນີດກວ່າໝູ່ເທບຊັ້ນຕາວະຕິງສາ ຯລຯ ໝູ່ເທບຊັ້ນດຸສິດ ຯລຯ ໝູ່ເທບຊັ້ນ ນິມມານະຣະດີ ຯລຯ ໝູ່ເທບຊັ້ນປະຣິນິມມິຕະວະສະວັຕດີ ຯລຯ ພົມມະໂລກຍັງດີກວ່າແລະປະນີດກວ່າໝູ່ເທບ ຊັ້ນປະຣະນິມມິຕະວະສະວັດຕີ ຖ້າຈັ່ງຊັ້ນ ຂໍທ່ານຈົ່ງພາກຈິດອອກຈາກໝູ່ເທບຊັ້ນປະຣະນິມມິຕະ ວະສະວັດຕີແລ້ວ ນ້ອມຈິດໄປໃນພົມມະໂລກເທີ້ນ

ຖ້າເຂົາກ່າວແນວນີ້ວ່າ ເຮົາພາກຈິດອອກຈາກໝູ່ເທບຊັ້ນປະຣະນິມມິຕະວະສະວັດຕີແລ້ວ ເຮົານ້ອມຈິດໄປໃນພົມມະໂລກແລ້ວ ອຸປາສົກນັ້ນເພິ່ງກ່າວວ່າ ທ່ານ ແມ່ນພົມມະໂລກກໍບໍ່ທ່ຽງ ບໍ່ໝັ້ນຍືນ ນັບເນື່ອງດ້ວຍຈັກກາຍະ໑ ຖ້າຈັ່ງຊັ້ນ ຂໍທ່ານຈົ່ງພາກຈິດອອກຈາກພົມມະໂລກແລ້ວ ນໍາຈິດເຂົ້າໄປໃນສັກກາຍະນິໂຣດ (ຄວາມດັບກາຍຂອງຕົນ) ເທີ້ນ

ຖ້າເຂົາກ່າວແບບນີ້ວ່າ ເຮົາພາກຈິດອອກຈາກພົມມະໂລກແລ້ວ ເຮົານຳຈິດເຂົ້າໄປໃນສັກກາຍະນິໂຣດຢູ່ແລ້ວ

ມະຫາບໍພິດ ອຸປາສົກຜູ້ມີຈິດລຸດພົ້ນແບບນີ້ ກັບພິກຂຸຜູ້ມີຈິດລຸດພົ້ນຈາກອາສະວະ ອາຕະມາພາບ ບໍ່ກ່າວວ່າແຕກຕ່າງກັນເລີຍ ຄື ລຸດພົ້ນດ້ວຍວິມຸດຕິຢ່າງດຽວກັນ

**ຄິລານະສູດທີ ໔ ຈົບ**

# ໕. ໂສຕາປັດຕິຜະລະສູດ

## ວ່າດ້ວຍທຳທີ່ເປັນໄປເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ

[໑໐໕໑] ພິກຂຸທັງຫຼາຍ ທຳ ໔ ປະການນີ້ ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ

ທຳ ໔ ປະການ ອັນໃດແດ່ ຄື

໑. ສັບປຸຣິສະສັງເສວະ (ການຄົບຫາສັດຕະບຸຣຸດ)
໒. ສັດທຳມັດສະວະນະ (ການຟັງພຣະສັດທຳ)
໓. ໂຍນິໂສມະນະສິການ (ການມະນະສິການໂດຍແຍບຄາຍ)
໔. ທຳມານຸທຳມະປະຕິປັດຕິ (ການປະຕິບັດທຳສົມຄວນແກ່ທຳ)

ພິກຂຸທັງຫຼາຍ ທຳ ໔ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ

**ໂສຕາປັດຕິຜະລະສູດທີ ໕ ຈົບ**

# ໖. ສະກະທາຄາມິຜະລະສູດ

## ວ່າດ້ວຍທຳທີ່ເປັນໄປເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ

[໑໐໕໒] ພິກຂຸທັງຫຼາຍ ທຳ ໔ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ

ທຳ ໔ ປະການ ອັນໃດແດ່

ฯลฯ
ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ

**ສະກະທາຄາມິຜະລະສູດທີ ๖ ຈົບ**

## ๗. ອະນາຄາມິຜະລະສູດ

### ວ່າດ້ວຍທຳທີ່ເປັນໄປເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ

[໑໐๕໓] ฯลฯ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ

**ອະນາຄາມິຜະລະສູດທີ ๗ ຈົບ**

## ๘. ອະຣະຫັດຕະຜະລະສູດ

### ວ່າດ້ວຍທຳທີ່ເປັນໄປເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ

[໑໐๕๔] ฯลฯ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ

**ອະຣະຫັດຕະຜະລະສູດທີ ๘ ຈົບ**

## ๙. ປັນຍາປະຕິລາພະສູດ

### ວ່າດ້ວຍທຳທີ່ເປັນໄປເພື່ອໄດ້ສະເພາະເຊິ່ງປັນຍາ

[໑໐๕๕] ฯลฯ ຍ່ອມເປັນໄປເພື່ອໄດ້ສະເພາະເຊິ່ງປັນຍາ

**ປັນຍາປະຕິລາພະສູດທີ ๙ ຈົບ**

## ໑໐. ປັນຍາວຸດທິສູດ

### ວ່າດ້ວຍທຳທີ່ເປັນໄປເພື່ອຄວາມຈະເລີນແຫ່ງປັນຍາ

[໑໐๕๖] ฯลฯ ຍ່ອມເປັນໄປເພື່ອຄວາມຈະເລີນແຫ່ງປັນຍາ

**ປັນຍາວຸດທິສູດທີ ໑໐ ຈົບ**

# ໑໑. ປັນຍາເວປຸນລະສູດ

## ວ່າດ້ວຍທຳທີ່ເປັນໄປເພື່ອຄວາມໄພບູນແຫ່ງປັນຍາ

[໑໐໕໗] ໆລໆ ຍ່ອມເປັນໄປເພື່ອຄວາມໄພບູນແຫ່ງປັນຍາ

**ປັນຍາເວປຸນລະສູດທີ ໑໑ ຈົບ**

**ສົບປັນຍະວັກທີ ໖ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ສະຄາຖະກະສູດ
໒. ທຳມະທິນນະສູດ
໓. ໂສຕາປັດຕິຜະລະສູດ
໗. ອະນາຄາມິຜະລະສູດ
໙. ປັນຍາປະຕິລາພະສູດ
໑໑. ປັນຍາເວປຸນລະສູດ
໔. ວັດສັງວຸດຖະສູດ
໕. ຄິລານະສູດ
໖. ສະກະທາຄາມິຜະລະສູດ
໘. ອະຣະຫັດຕະຜະລະສູດ
໑໐. ປັນຍາວຸດທິສູດ

# ໗. ມະຫາປັນຍະວັກ

## ໝວດວ່າດ້ວຍທຳທີ່ເປັນໄປເພື່ອຄວາມມີປັນຍາຫຼາຍ

# ໑. ມະຫາປັນຍາສູດ

## ວ່າດ້ວຍທຳທີ່ເປັນໄປເພື່ອຄວາມມີປັນຍາຫຼາຍ

[໑໐໕໘] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ທຳ ໔ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມມີປັນຍາຫຼາຍ

ທຳ ໔ ປະການ ອັນໃດແດ່ ຄື

໑. ສັບປຸຣິສະສັງເສວະ
໒. ໂຍນິໂສມະນະສິການ
໓. ສັດທຳມັດສະວະນະ
໔. ທຳມານຸທຳມະປະຕິປັດຕິ

ພິກຂຸທັງຫຼາຍ ທຳ ໔ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມມີປັນຍາຫຼາຍ

**ມະຫາປັນຍາສູດທີ ໑ ຈົບ**

## ໘. ປຸຖຸປັນຍາສູດ

### ວ່າດ້ວຍທຳທີ່ເປັນໄປເພື່ອຄວາມມີປັນຍາແໜ້ນ

[໑໐໕໙] ຯລຯ ຍ່ອມເປັນໄປເພື່ອຄວາມມີປັນຍາແໜ້ນ

**ປຸຖຸປັນຍາສູດທີ ໘ ຈົບ**

## ໓. ວິປຸລະປັນຍາສູດ

### ວ່າດ້ວຍທຳທີ່ເປັນໄປເພື່ອຄວາມມີປັນຍາໄພບູນ

[໑໐໖໐] ຯລຯ ຍ່ອມເປັນໄປເພື່ອຄວາມມີປັນຍາໄພບູນ

**ວິປຸລະປັນຍາສູດທີ ໓ ຈົບ**

## ໔. ຄຳພີຣະປັນຍາສູດ

### ວ່າດ້ວຍທຳທີ່ເປັນໄປເພື່ອຄວາມມີປັນຍາເລິກເຊິ່ງ

[໑໐໖໑] ຯລຯ ຍ່ອມເປັນໄປເພື່ອຄວາມມີປັນຍາເລິກເຊິ່ງ

**ຄຳພີຣະປັນຍາສູດທີ ໔ ຈົບ**

## ໕. ອັບປະມັດຕະປັນຍາສູດ

### ວ່າດ້ວຍທຳທີ່ເປັນໄປເພື່ອຄວາມມີປັນຍາຫາປະມານບໍ່ໄດ້

[໑໐໖໘] ຯລຯ ຍ່ອມເປັນໄປເພື່ອຄວາມມີປັນຍາຫາປະມານບໍ່ໄດ້

**ອັບປະມັດຕະປັນຍາສູດທີ ໕ ຈົບ**

## ๖. พูริปันยาสูด

### ว่าด้วยทำที่เป็นไปเพื่อความมีปันยาคือแผ่นดิน

[๑๐๖๖] ๆลๆ ย่อมเป็นไปเพื่อความมีปันยาคือแผ่นดิน

**พูริปันยาสูดที่ ๖ จົບ**

## ๗. ปันยาพาหุละสูด

### ว่าด้วยทำที่เป็นไปเพื่อความมีปันยาหลาย

[๑๐๖๔] ๆลๆ ย่อมเป็นไปเพื่อความมีปันยาหลายๆ

**ปันยาพาหุละสูดที่ ๗ จົບ**

## ๘. สีคะปันยาสูด

### ว่าด้วยทำที่เป็นไปเพื่อความมีปันยาไว

[๑๐๖๕] ๆลๆ ย่อมเป็นไปเพื่อความมีปันยาไว

**สีคะปันยาสูดที่ ๘ จົບ**

## ๙. ละหุปันยาสูด

### ว่าด้วยทำที่เป็นไปเพื่อความมีปันยาทันที

[๑๐๖๖] ๆลๆ ย่อมเป็นไปเพื่อความมีปันยาทันที

**ละหุปันยาสูดที่ ๙ จົບ**

## ๑๐. หาสะปันยาสูด

### ว่าด้วยทำที่เป็นไปเพื่อความมีปันยาแจ่มใส

[໑໐໕໗] ຯລຯ ຍ່ອມເປັນໄປເພື່ອຄວາມມີປັນຍາແຈ່ມໃສ

**ຫາສະປັນຍາສູດທີ ໑໐ ຈົບ**

# ໑໑. ຊະວະນະປັນຍາສູດ

## ວ່າດ້ວຍທຳທີ່ເປັນໄປເພື່ອຄວາມມີປັນຍາແລ່ນໄປ

[໑໐໕໘] ຯລຯ ຍ່ອມເປັນໄປເພື່ອຄວາມມີປັນຍາແລ່ນໄປ

**ຊະວະນະປັນຍາສູດທີ ໑໑ ຈົບ**

# ໑໔. ຕິກຂະປັນຍາສູດ

## ວ່າດ້ວຍທຳທີ່ເປັນໄປເພື່ອຄວາມມີປັນຍາກ້າ

[໑໐໕໙] ຯລຯ ຍ່ອມເປັນໄປເພື່ອຄວາມມີປັນຍາກ້າ

**ຕິກຂະປັນຍາສູດທີ ໑໔ ຈົບ**

# ໑໓. ນິບເພທິກະປັນຍາສູດ

## ວ່າດ້ວຍທຳທີ່ເປັນໄປເພື່ອຄວາມມີປັນຍາທຳລາຍກິເລດ

[໑໐໖໐] ພິກຂຸທັງຫຼາຍ ທຳ ໔ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມມີປັນຍາທຳລາຍກິເລດ

ທຳ ໔ ປະການ ອັນໃດແດ່ ຄື

໑. ສັບປຸຣິສະສັງເສວະ
໒. ສັດທຳມັດສະວະນະ
໓. ໂຍນິໂສມະນະສິການ
໔. ທຳມານຸທຳມະປະຕິປັດຕິ

ພິກຂຸທັງຫຼາຍ ທຳ ໔ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມມີປັນຍາທຳລາຍກິເລດ

**ນິບເພທິກະປັນຍາສູດທີ ໑໓ ຈົບ**

**ມະຫາປັນຍະວັດທີ ໗ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື

໑. ມະຫາປັນຍາສູດ
໒. ປຸຖຸປັນຍາສູດ
໓. ວິປຸລະປັນຍາສູດ
໔. ຄຳພີຣະປັນຍາສູດ
໕. ອັບປະມັດຕະປັນຍາສູດ
໖. ພູຣິປັນຍາສູດ
໗. ປັນຍາພາຫຸລະສູດ
໘. ສີຄະປັນຍາສູດ
໙. ລະຫຸປັນຍາສູດ
໑໐. ຫາສະປັນຍາສູດ
໑໑. ຊະວະນະປັນຍາສູດ
໑໒. ຕິກຂະປັນຍາສູດ
໑໓. ນິບເພທິກະປັນຍາສູດ

**ໂສຕາປັດຕິສັງຍຸດທີ ໑໑ ຈົບ**

# ໑໔. ສັດຈະສັງຍຸດ

## ໑. ສະມາທິວັກ

### ໝວດວ່າດ້ວຍສະມາທິ

## ໑. ສະມາທິສູດ

### ວ່າດ້ວຍສະມາທິ

[໑໐໗໑] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງຈະເລີນສະມາທິ ພິກຂຸຜູ້ມີສະມາທິຍ່ອມຮູ້ແຈ້ງຕາມຄວາມເປັນຈິງ

ຮູ້ແຈ້ງອັນໃດ? ຕາມຄວາມເປັນຈິງ

ຄື ຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ນີ້ທຸກຂະສະມຸໄທ (ເຫດເກີດທຸກ) ນີ້ທຸກຂະນິໂຣທະ (ຄວາມດັບທຸກ) ນີ້ທຸກຂະນິໂຣທະຄາມີນີປະຕິປະທາ (ຂໍ້ປະຕິບັດທີ່ໃຫ້ເຖິງຄວາມດັບທຸກ)

ທ່ານທັງຫຼາຍ ຈົ່ງຈະເລີນສະມາທິ ພິກຂຸຜູ້ມີສະມາທິຍ່ອມຮູ້ແຈ້ງຕາມຄວາມເປັນຈິງ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍເພິ່ງທຳຄວາມພຽນເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ

**ສະມາທິສູດທີ ໑ ຈົບ**

## ໔. ປະຕິສັນລານະສູດ

### ວ່າດ້ວຍຜູ້ຫຼີບຫຼີກ

[໑໐໗໔] ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງປະກອບຄວາມພຽນໃນການຫຼີບຫຼີກ ພິກຂຸຜູ້ຫຼີບຫຼີກຍ່ອມຮູ້ແຈ້ງຕາມຄວາມເປັນຈິງ

ຮູ້ແຈ້ງອັນໃດຕາມຄວາມເປັນຈິງ

ຄື ຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

ທ່ານທັງຫຼາຍ ຈົ່ງປະກອບຄວາມພຽນໃນການຫຼີບຫຼີກ ພິກຂຸຜູ້ຫຼີບຫຼີກຍ່ອມຮູ້ແຈ້ງຕາມຄວາມເປັນຈິງ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍເພິ່ງທຳຄວາມພຽນເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

**ປະຕິສັນລານະສູດທີ ໒ ຈົບ**

# ໓. ປະຖົມກຸລະປຸດຕະສູດ

## ວ່າດ້ວຍກຸນລະບຸດ ສູດທີ ໑

[໑໐໗໓] ພິກຂຸທັງຫຼາຍ ກຸນລະບຸດເຫຼົ່າໃດເຫຼົ່າໜຶ່ງໃນອະດີດຕະການໄດ້ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງ ກຸນລະບຸດເຫຼົ່ານັ້ນທັງໝົດໄດ້ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງກໍເພື່ອຮູ້ແຈ້ງອະຣິຍະສັດ ໔ ປະການຕາມຄວາມເປັນຈິງ ກຸນລະບຸດເຫຼົ່າໃດເຫຼົ່າໜຶ່ງໃນອະນາຄົດຕະການຈັກອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງ ກຸນລະບຸດເຫຼົ່ານັ້ນທັງໝົດ ຈັກອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງ ກໍເພື່ອຮູ້ແຈ້ງອະຣິຍະສັດ ໔ ປະການຕາມຄວາມເປັນຈິງ ກຸນລະບຸດເຫຼົ່າໃດເຫຼົ່າໜຶ່ງໃນປັດຈຸບັນການຍ່ອມອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງ ກຸນລະບຸດເຫຼົ່ານັ້ນທັງໝົດຍ່ອມອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງກໍເພື່ອຮູ້ແຈ້ງອະຣິຍະສັດ ໔ ປະການຕາມຄວາມເປັນຈິງ

ອະຣິຍະສັດ ໔ ປະການ ອັນໃດແດ່ ຄື

໑. ທຸກຂະອະຣິຍະສັດ
໒. ທຸກຂະສະມຸທະຍະອະຣິຍະສັດ
໓. ທຸກຂະນິໂຣທະອະຣິຍະສັດ
໔. ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ

ພິກຂຸທັງຫຼາຍ ກຸນລະບຸດເຫຼົ່າໃດເຫຼົ່າໜຶ່ງໃນອະດີດຕະການໄດ້ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງ ຯລຯ ກຸນລະບຸດເຫຼົ່າໃດເຫຼົ່າໜຶ່ງໃນອະນາຄົດຕະການຈັກອອກຈາກ

ເຮືອນບວດເປັນບັນພະຊິດໂດຍຖືກຕ້ອງ ຯລຯ ກຸນລະບຸດເຫຼົ່າໃດເຫຼົ່າໜຶ່ງໃນປັດຈຸບັນການຍ່ອມອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງ ກຸນລະບຸດເຫຼົ່ານັ້ນທັງໝົດ ຍ່ອມອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງ ກໍເພື່ອຮູ້ແຈ້ງອະຣິຍະສັດ ໔ ປະການນີ້ ຕາມຄວາມເປັນຈິງ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

**ປະຖົມກຸລະປຸດຕະສູດທີ ໗ ຈົບ**

# ໘. ທຸຕິຍະກຸລະປຸດຕະສູດ

## ວ່າດ້ວຍກຸນລະບຸດ ສູດທີ ໘

[໑໐໗໘] ພິກຂຸທັງຫຼາຍ ກຸນລະບຸດເຫຼົ່າໃດເຫຼົ່າໜຶ່ງໃນອະດີດຕະການອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງ ໄດ້ຮູ້ແຈ້ງຕາມຄວາມເປັນຈິງ ກຸນລະບຸດເຫຼົ່ານັ້ນທັງໝົດໄດ້ຮູ້ແຈ້ງອະຣິຍະສັດ ໔ ປະການຕາມຄວາມເປັນຈິງ ກຸນລະບຸດເຫຼົ່າໃດເຫຼົ່າໜຶ່ງໃນອະນາຄົດຕະການອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງ ຈັກຮູ້ແຈ້ງຕາມຄວາມເປັນຈິງ ກຸນລະບຸດເຫຼົ່ານັ້ນທັງໝົດຈັກຮູ້ແຈ້ງອະຣິຍະສັດ ໔ ປະການຕາມຄວາມເປັນຈິງ ກຸນລະບຸດເຫຼົ່າໃດເຫຼົ່າໜຶ່ງໃນປັດຈຸບັນການອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງ ຍ່ອມຮູ້ແຈ້ງຕາມຄວາມເປັນຈິງ ກຸນລະບຸດເຫຼົ່ານັ້ນທັງໝົດຍ່ອມຮູ້ແຈ້ງອະຣິຍະສັດ ໔ ປະການຕາມຄວາມເປັນຈິງ

ອະຣິຍະສັດ ໔ ປະການ ອັນໃດແດ່ ຄື

໑. ທຸກຂະອະຣິຍະສັດ
໒. ທຸກຂະສະມຸທະຍະອະຣິຍະສັດ
໓. ທຸກຂະນິໂຣທະອະຣິຍະສັດ
໔. ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ

ກຸນລະບຸດເຫຼົ່າໃດເຫຼົ່າໜຶ່ງໃນອະດີດຕະການອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງ ໄດ້ຮູ້ແຈ້ງຕາມຄວາມເປັນຈິງ ຯລຯ ກຸນລະບຸດເຫຼົ່າໃດເຫຼົ່າໜຶ່ງໃນອະນາຄົດຕະການອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງ ຈັກຮູ້ແຈ້ງ ຯລຯ ກຸນລະບຸດເຫຼົ່າໃດເຫຼົ່າໜຶ່ງໃນປັດຈຸບັນການ ອອກຈາກເຮືອນບວດເປັນບັນພະຊິດໂດຍຖືກຕ້ອງ ຍ່ອມຮູ້ແຈ້ງຕາມຄວາມເປັນຈິງ ກຸນລະບຸດເຫຼົ່ານັ້ນທັງໝົດຍ່ອມຮູ້ແຈ້ງອະຣິຍະສັດ ໔ ປະການນີ້ຕາມຄວາມເປັນຈິງ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍເພິ່ງທຳຄວາມພຽນເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

**ທຸຕິຍະກຸລະປຸດຕະສູດທີ ໔ ຈົບ**

# ໕. ປະຖົມສະມະນະພາມມະນະສູດ

## ວ່າດ້ວຍສະມະນະພາມ ສູດທີ ໑

[໑໐໗໕] ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະດີດຕະການໄດ້ຮູ້ແຈ້ງຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່ານັ້ນທັງໝົດໄດ້ຮູ້ແຈ້ງອະຣິຍະສັດ ໔ ປະການຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະນາຄົດຕະການ ຈັກຮູ້ແຈ້ງຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່ານັ້ນທັງໝົດຈັກຮູ້ແຈ້ງອະຣິຍະສັດ ໔ ປະການຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນປັດຈຸບັນການ ຍ່ອມຮູ້ແຈ້ງຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່ານັ້ນທັງໝົດຍ່ອມຮູ້ແຈ້ງອະຣິຍະສັດ ໔ ປະການຕາມຄວາມເປັນຈິງ

ອະຣິຍະສັດ ໔ ປະການ ອັນໃດແດ່ ຄື

໑. ທຸກຂະອະຣິຍະສັດ
໒. ທຸກຂະສະມຸທະຍະອະຣິຍະສັດ
໓. ທຸກຂະນິໂຣທະອະຣິຍະສັດ
໔. ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະດີດຕະການໄດ້ຮູ້ແຈ້ງຕາມຄວາມເປັນຈິງ ຯລຯ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະນາຄົດຕະການຈັກຮູ້ແຈ້ງ ຯລຯ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນປັດຈຸບັນການຍ່ອມຮູ້ແຈ້ງຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່ານັ້ນທັງໝົດຍ່ອມຮູ້ແຈ້ງອະຣິຍະສັດ ໔ ປະການນີ້ຕາມຄວາມເປັນຈິງ

ພິກຂຸທັງຫຼາຍ ຍ້ອນເຫດນີ້ ທ່ານທັງຫຼາຍເພິ່ງທຳຄວາມພຽນເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

**ປະຖົມສະມະນະພາມມະນະສູດທີ ໕ ຈົບ**

# ๗. ທຸຕິຍະສະມະນະພາມມະນະສູດ

## ວ່າດ້ວຍສະມະນະພາມ ສູດທີ ໒

[໑໐໗໗] ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະດີດຕະການ ໄດ້ປະກາດສິ່ງທີ່ຕົນຮູ້ແຈ້ງແລ້ວຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່ານັ້ນທັງໝົດໄດ້ປະກາດອະຣິຍະສັດ ໔ ປະການວ່າເປັນສິ່ງທີ່ຕົນຮູ້ແຈ້ງແລ້ວຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະນາຄົດຕະການຈັກປະກາດສິ່ງທີ່ຕົນຮູ້ແຈ້ງແລ້ວຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່ານັ້ນທັງໝົດຈັກປະກາດອະຣິຍະສັດ ໔ ປະການວ່າເປັນສິ່ງທີ່ຕົນຮູ້ແຈ້ງແລ້ວຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນປັດຈຸບັນການ ຍ່ອມປະກາດສິ່ງທີ່ຕົນຮູ້ແຈ້ງແລ້ວຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່ານັ້ນທັງໝົດຍ່ອມປະກາດອະຣິຍະສັດ ໔ ປະການວ່າເປັນສິ່ງທີ່ຕົນຮູ້ແຈ້ງ ແລ້ວຕາມຄວາມເປັນຈິງ

ອະຣິຍະສັດ ໔ ປະການ ອັນໃດແດ່ ຄື

໑. ທຸກຂະອະຣິຍະສັດ
໒. ທຸກຂະສະມຸທະຍະອະຣິຍະສັດ
໓. ທຸກຂະນິໂຣທະອະຣິຍະສັດ
໔. ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ

ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະດີດຕະການໄດ້ປະກາດສິ່ງທີ່ຕົນຮູ້ແຈ້ງແລ້ວຕາມຄວາມເປັນຈິງ ຯລຯ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນອະນາຄົດຕະການຈັກປະກາດ ຯລຯ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງໃນປັດຈຸບັນການຍ່ອມປະກາດ ຯລຯ ສະມະນະຫຼືພາມເຫຼົ່ານັ້ນທັງໝົດຍ່ອມປະກາດອະຣິຍະສັດ ໔ ປະການນີ້ວ່າ ເປັນສິ່ງທີ່ຕົນຮູ້ແຈ້ງແລ້ວຕາມຄວາມເປັນຈິງ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍເພິ່ງທຳຄວາມພຽນເພື່ອປະກາດສິ່ງທີ່ຕົນຮູ້ແຈ້ງແລ້ວຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

**ທຸຕິຍະສະມະນະພາມມະນະສູດທີ ๗ ຈົບ**

# ໗. ວິຕັກກະສູດ

## ວ່າດ້ວຍການນຶກເຖິງອະຣິຍະສັດ

[໑໐໗໗] ພິກຂຸທັງຫຼາຍ ທ່ານທັງຫຼາຍຢ່ານຶກເຖິງບາບອະກຸສົນວິຕົກ ຄື

໑. ກາມວິຕົກ (ຄວາມນຶກໃນທາງກາມ)
໒. ພະຍາບາດວິຕົກ (ຄວາມນຶກໃນທາງພະຍາບາດ)
໓. ວິຫິງສາວິຕົກ (ຄວາມນຶກໃນທາງບຽດບຽນ)

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນວິຕົກເຫຼົ່ານີ້ບໍ່ມີປະໂຫຍດ ບໍ່ແມ່ນຈຸດເລີ່ມຕົ້ນແຫ່ງພົມມະຈັນ ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ບໍ່ເປັນໄປເພື່ອຄາຍກຳໜັດ ບໍ່ເປັນໄປເພື່ອດັບ ບໍ່ເປັນໄປເພື່ອສະງົບລະງັບ ບໍ່ເປັນໄປເພື່ອຮູ້ຍິ່ງ ບໍ່ເປັນໄປເພື່ອຕັດສະຣູ້ ບໍ່ເປັນໄປເພື່ອນິບພານ

ພິກຂຸທັງຫຼາຍ ທ່ານທັງຫຼາຍເມື່ອຈະນຶກ ເພິ່ງນຶກວ່າ ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນຄວາມນຶກເຫຼົ່ານີ້ມີປະໂຫຍດ ເປັນຈຸດເລີ່ມຕົ້ນແຫ່ງພົມມະຈັນ ຍ່ອມເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍເພິ່ງທຳຄວາມພຽນເພື່ອນຶກວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ

**ວິຕັກກະສູດທີ ໗ ຈົບ**

# ໘. ຈິນຕະສູດ

## ວ່າດ້ວຍການຄິດເລື້ອງອະຣິຍະສັດ

[໑໐໗໘] ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງຢ່າຄິດເປັນບາບອະກຸສົນຈິດວ່າ ໂລກທ່ຽງ ຫຼື ໂລກບໍ່ທ່ຽງ ໂລກມີບ່ອນສຸດ ຫຼື ໂລກບໍ່ມີບ່ອນສຸດ ຊີວະກັບສະຣີຣະເປັນແນວດຽວກັນ ຫຼື ຊີວະ

ກັບສະຣີຣະເປັນຄົນລະແນວກັນ ຫຼັງຈາກຕາຍແລ້ວຕະຖາຄົດ໌ເກີດອີກ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກແລະບໍ່ເກີດອີກ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນຄວາມຄິດນີ້ບໍ່ມີປະໂຫຍດ ບໍ່ແມ່ນຈຸດເລີ່ມຕົ້ນແຫ່ງພົມມະຈັນ ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ບໍ່ເປັນໄປເພື່ອຄາຍກຳໜັດ ບໍ່ເປັນໄປເພື່ອດັບ ບໍ່ເປັນໄປເພື່ອສະງົບລະງັບ ບໍ່ເປັນໄປເພື່ອຮູ້ຍິ່ງ ບໍ່ເປັນໄປເພື່ອຕັດສະຮູ້ ບໍ່ເປັນໄປເພື່ອນິບພານ

ທ່ານທັງຫຼາຍເມື່ອຈະຄິດ ເພິ່ງຄິດວ່າ ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນຄວາມຄິດນີ້ມີປະໂຫຍດ ເປັນຈຸດເລີ່ມຕົ້ນແຫ່ງພົມມະຈັນ ເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍເພິ່ງທຳຄວາມພຽນເພື່ອຄິດວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

**ຈິນຕະສູດທີ ໗ ຈົບ**

# ໘. ວິກຄາຫິກະກະຖາສູດ

## ວ່າດ້ວຍການກ່າວທຸ່ມຖຽງແກ່ງແຍ່ງກັນ

[໑໐໗໘] ພິກຂຸທັງຫຼາຍ ແມ່ນທ່ານທັງຫຼາຍກໍຢ່າກ່າວທຸ່ມຖຽງແກ່ງແຍ່ງກັນວ່າ ທ່ານບໍ່ຮູ້ທົ່ວເຖິງທຳວິໄນນີ້ ແຕ່ຂ້ານ້ອຍຮູ້ທົ່ວເຖິງ ທ່ານຈັກຮູ້ທົ່ວເຖິງທຳວິໄນນີ້ໄດ້ແນວໃດ ທ່ານປະຕິບັດຜິດ ແຕ່ຂ້ານ້ອຍປະຕິບັດຖືກ ຄຳເວົ້າຂອງຂ້ານ້ອຍມີປະໂຫຍດ ແຕ່ຄຳເວົ້າຂອງທ່ານບໍ່ມີປະໂຫຍດ ຄຳທີ່ຄວນເວົ້າກ່ອນ ທ່ານກັບເວົ້າພາຍຫຼັງ ຄຳທີ່ຄວນເວົ້າພາຍຫຼັງ ທ່ານກັບເວົ້າກ່ອນ ເລື່ອງທີ່ທ່ານເຄີຍຊິນໄດ້ຜັນແປໄປແລ້ວ ຂ້ານ້ອຍຈັບຜິດຄຳເວົ້າຂອງທ່ານໄດ້ແລ້ວ ຂ້ານ້ອຍຂົ່ມທ່ານໄດ້ແລ້ວ ຖ້າທ່ານມີຄວາມສາມາດ ກໍຈົ່ງຫາທາງແກ້ຄຳເວົ້າຫຼືປົດເປື້ອງຕົນໃຫ້ພົ້ນຜິດເທີ້ນ[໑]

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນການກ່າວແນວນີ້ບໍ່ມີປະໂຫຍດ ບໍ່ແມ່ນຈຸດເລີ່ມຕົ້ນແຫ່ງພົມມະຈັນ ບໍ່ເປັນໄປ ເພື່ອ

ຄວາມເບື່ອໜ່າຍ ບໍ່ເປັນໄປເພື່ອຄາຍກຳໜັດ ບໍ່ເປັນໄປເພື່ອດັບ ບໍ່ເປັນໄປເພື່ອສະງົບລະງັບ ບໍ່ເປັນໄປເພື່ອຮູ້ຍິ່ງ ບໍ່ເປັນໄປເພື່ອຕັດສະຣູ້ ບໍ່ເປັນໄປເພື່ອນິບພານ

ທ່ານທັງຫຼາຍ ເມື່ອຈະກ່າວເພິ່ງກ່າວວ່າ ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ ຯລຯ

ທ່ານທັງຫຼາຍ ເພິ່ງທຳຄວາມພຽນວ່າ ຯລຯ

**ວິກາຄາຫິກະກະຖາສູດທີ ໙ ຈົບ**

# ໑໐. ຕິຣິດສານະກະຖາສູດ

## ວ່າດ້ວຍຕິຣັດສານກະຖາ

[໑໐໘໐] ພິກຂຸທັງຫຼາຍ ທ່ານທັງຫຼາຍຢ່າກ່າວຕິຣັດສານກະຖາ ເຊິ່ງມີຫຼາຍແນວ ຄື (໑) ຣາຊະກະຖາ ເລື້ອງພຣະຣາຊາ (໒) ໂຈຣະກະຖາ ເລື້ອງໂຈນ (໓) ມະຫາມັດຕະກະຖາ ເລື້ອງມະຫາອຳມາດ (໔) ເສນາກະຖາ ເລື້ອງກອງທັບ (໕) ພະຍະກະຖາ ເລື້ອງໄພ (໖) ຍຸດທະກະຖາ ເລື້ອງການຮົບ (໗) ອັນນະກະຖາ ເລື້ອງເຂົ້າ (໘) ປານະກະຖາ ເລື້ອງນ້ຳ (໙) ວັດຖະກະຖາ ເລື້ອງຜ້າ (໑໐) ສະຍະນະກະຖາ ເລື້ອງບ່ອນນອນ (໑໑) ມາລາກະຖາ ເລື້ອງພວງດອກໄມ້ (໑໒) ຄັນທະກະຖາ ເລື້ອງຂອງຫອມ (໑໓) ຍາຕິກະຖາ ເລື້ອງຍາດ (໑໔) ຍານະກະຖາ ເລື້ອງຍານ (໑໕) ຄາມະກະຖາ ເລື້ອງເຮືອນ (໑໖) ນິຄະມະກະຖາ ເລື້ອງນິຄົມ (໑໗) ນະຄອນກະຖາ ເລື້ອງເມືອງ (໑໘) ຊະນະປະທະກະຖາ ເລື້ອງຊົນນະບົດ (໑໙) ອິດຖີກະຖາ ເລື້ອງສະຕີ (໒໐) ປຸຣິສະກະຖາ ເລື້ອງບຸຣຸດ (໒໑) ສູຣະກະຖາ ເລື້ອງຄົນກ້າຫານ (໒໒) ວິສິຂາກະຖາ ເລື້ອງຮ່ອມ (໒໓) ກຸມພັດຖານະກະຖາ ເລື້ອງທ່ານ້ຳ (໒໔) ປຸບພະເປຕະກະຖາ ເລື້ອງຄົນທີ່ລ່ວງລັບໄປແລ້ວ (໒໕) ນານັດຕະກະຖາ ເລື້ອງຕ່າງ ໆ (໒໖) ໂລກັກຂາຍິກະ ເລື້ອງໂລກ (໒໗) ສະມຸດທັກຂາຍິກະ ເລື້ອງທະເລ (໒໘) ອິຕິພະວາພະວະກະຖາ ເລື້ອງຄວາມຈະເລີນແລະຄວາມເສື່ອມ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນຕິຣັດສານກະຖານີ້ບໍ່ມີປະໂຫຍດ ບໍ່ແມ່ນຈຸດເລີ່ມຕົ້ນແຫ່ງພົມມະຈັນ ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ບໍ່ເປັນໄປເພື່ອຄາຍກຳໜັດ ບໍ່ເປັນໄປເພື່ອດັບ ບໍ່ເປັນໄປເພື່ອສະງົບລະງັບ ບໍ່ເປັນໄປເພື່ອຮູ້ຍິ່ງ ບໍ່ເປັນໄປເພື່ອຕັດສະຣູ້ ບໍ່ເປັນໄປເພື່ອນິບພານ

ພິກຂຸທັງຫຼາຍ ທ່ານທັງຫຼາຍເມື່ອຈະກ່າວເພິ່ງກ່າວວ່າ ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນຄຳເວົ້ານີ້ມີປະໂຫຍດ ເປັນຈຸດເລີ່ມຕົ້ນແຫ່ງພົມມະຈັນ ເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນເພື່ອກ່າວວ່າ ນີ້ທຸກໆລໆ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

**ຕິຣິດສານະກະຖາສູດທີ ໑໐ ຈົບ**

**ສະມາທິວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໒. ທຳມະຈັກກັບປະວັດຕະນະວັກ

### ໝວດວ່າດ້ວຍການປະກາດພຣະທຳຈັກ

## ໑. ທຳມະຈັກກັບປະວັດຕະນະສູດ

### ວ່າດ້ວຍການປະກາດພຣະທຳຈັກ

[໑໐໘໑] ຂ້າພະເຈົ້າໄດ້ຟັງມາແບວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ປ່າອິສິປະຕະນະມະຣິຄະທາຍະວັນ ເຂດເມືອງພາຣານະສີໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸປັນຈະວັກຄີມາຕັດວ່າ

ພິກຂຸທັງຫຼາຍ ບ່ອນສຸດ ໒ ປະການ ບັນພະຊິດບໍ່ເພິ່ງເສບ

ບ່ອນສຸດ ໒ ປະການ ອັນໃດແດ່ ຄື

໑. ການສຸຂັນລິການຸໂຍຄ (ການໝົກມຸ້ນຢູ່ດ້ວຍການສຸກໃນການທັງຫຼາຍ) ເປັນທຳອັນຊາມ ເປັນຂອງຊາວບ້ານ ເປັນຂອງປຸຖຸຊົນ ບໍ່ແມ່ນຂອງພຣະອະຣິຍະບໍ່ປະກອບດ້ວຍປະໂຫຍດ

໒. ອັດຕກິລົມຖານຸໂຍຄ (ການປະກອບຄວາມເດືອດຮ້ອນແກ່ຕົນ) ເປັນທຸກບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດ

ມັດຊິມາປະຕິປະທາບໍ່ອຽງເຂົ້າໃກ້ບ່ອນສຸດ ໒ ປະການນີ້ທີ່ຕະຖາຄົດໄດ້ຕັດສະຮູ້ ອັນເປັນປະຕິປະທາກໍ່ໃຫ້ເກີດຈັກຂຸ ກໍ່ໃຫ້ເກີດຍານ ເປັນໄປເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ

ມັດຊິມາປະຕິປະທາທີ່ຕະຖາຄົດໄດ້ຕັດສະຮູ້ ອັນເປັນປະຕິປະທາກໍ່ໃຫ້ເກີດຈັກຂຸ ກໍ່ໃຫ້ເກີດຍານ ເປັນໄປເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານນັ້ນ ເປັນແນວໃດ?

ຄື ອະຣິຍະມັກມີອົງ ໘ ນີ້ແລ ໄດ້ແກ່

໑. ສຳມາທິດຖິ
໒. ສຳມາສັງກັບປະ
໓. ສຳມາວາຈາ
໔. ສຳມາກຳມັນຕະ
໕. ສຳມາອາຊີວະ
໖. ສຳມາວາຍາມະ
໗. ສຳມາສະຕິ
໘. ສຳມາສະມາທິ

ນີ້ຄືມັດຊິມາປະຕິປະທານັ້ນທີ່ຕະຖາຄົດໄດ້ຕັດສະຮູ້ແລ້ວ ອັນເປັນປະຕິປະທາທີ່ກໍ່ໃຫ້ເກີດຈັກຂຸ ກໍ່ໃຫ້ເກີດຍານ ເປັນໄປເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ

ພິກຂຸທັງຫຼາຍ ຂໍ້ນີ້ ເປັນທຸກຂະອະຣິຍະສັດ ຄື ແມ່ນຄວາມເກີດກໍເປັນທຸກ ແມ່ນຄວາມແກ່ກໍເປັນທຸກ ແມ່ນຄວາມເຈັບກໍເປັນທຸກ ແມ່ນຄວາມຕາຍກໍເປັນທຸກ ຄວາມປະສົບສິ່ງອັນບໍ່ເປັນທີ່ຮັກກໍເປັນທຸກ ຄວາມພັດພາກຈາກສິ່ງອັນເປັນທີ່ຮັກກໍເປັນທຸກ ປາຖະໜາສິ່ງໃດບໍ່ໄດ້ສິ່ງນັ້ນກໍເປັນທຸກ ໂດຍຫຍໍ້ອຸປາທານຂັນ ໕ ເປັນທຸກ

ພິກຂຸທັງຫຼາຍ ຂໍ້ນີ້ເປັນທຸກຂະສະມຸທະຍະອະຣິຍະສັດ ຄື ຕັນຫາອັນເຮັດໃຫ້ເກີດອີກປະກອບ ດ້ວຍຄວາມເພີດເພີນແລະຄວາມກຳໜັດ ມີປົກກະຕິໃຫ້ເພີດເພີນໃນອາລົມນັ້ນ ໆ ຄືກາມະຕັນຫາ ພະວະຕັນຫາ ວິພະວະຕັນຫາ

ພິກຂຸທັງຫຼາຍ ຂໍ້ນີ້ ເປັນທຸກຂະນິໂຣທະອະຣິຍະສັດ ຄື ຄວາມດັບຕັນຫາບໍ່ເຫຼືອດ້ວຍວິຣາຄະ ຄວາມສະລະ ຄວາມສະລະຄືນ ຄວາມພົ້ນ ຄວາມບໍ່ອາໄລໃນຕັນຫາ

ພິກຂຸທັງຫຼາຍ ຂໍ້ນີ້ ເປັນທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ ຄື ອະຣິຍະມັກມີອົງ ໘ ນີ້ແລ ໄດ້ແກ່

໑. ສໍາມາທິດຖິ ໗ລ໗ ໘. ສໍາມາສະມາທິ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວ ແກ່ເຮົາໃນທໍາທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ທຸກຂະອະຣິຍະສັດ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວ ແກ່ເຮົາໃນທໍາທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະອະຣິຍະສັດນີ້ຄວນກໍານົດຮູ້

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວ ແກ່ເຮົາໃນທໍາທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະອະຣິຍະສັດນີ້ເຮົາໄດ້ກໍານົດຮູ້ແລ້ວ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວ ແກ່ເຮົາໃນທໍາທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ທຸກຂະສະມຸທະຍະອະຣິຍະສັດ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວ ແກ່ເຮົາໃນທໍາທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະສະມຸທະຍະອະຣິຍະສັດ ນີ້ຄວນລະ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວ ແກ່ເຮົາໃນທໍາທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະສະມຸທະຍະອະຣິຍະສັດ ນີ້ເຮົາລະໄດ້ແລ້ວ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວ ແກ່ເຮົາໃນທໍາທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ທຸກຂະນິໂຣທະອະຣິຍະສັດ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວ ແກ່ເຮົາໃນທໍາທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະນິໂຣທະອະຣິຍະສັດນີ້ຄວນເຮັດໃຫ້ແຈ້ງ

ຈັກຂຸເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະນິໂຣທະອະຣິຍະສັດນີ້ເຮົາໄດ້ເຮັດໃຫ້ແຈ້ງແລ້ວ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດນີ້ ຄວນຈະເລີນ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດນີ້ ເຮົາໄດ້ຈະເລີນແລ້ວ

ພິກຂຸທັງຫຼາຍ ຍານທັດສະນະ(ຄວາມຮູ້ເຫັນ) ຕາມຄວາມເປັນຈິງຂອງເຮົາໃນອະຣິຍະສັດ ໔ ປະການນີ້ ວົນ ໓ ຮອບ ມີ ໑໒ ອາການແນວນີ້ ຍັງບໍ່ມົດຈົດດີຕາບໃດ ເຮົາກໍຍັງບໍ່ຢັ້ງຢືນວ່າເປັນຜູ້ຕັດສະຮູ້ສຳມາສຳໂພທິຍານອັນປະເສີດໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດຕາບນັ້ນ

ພິກຂຸທັງຫຼາຍ ເມື່ອໃດຍານທັດສະນະຕາມຄວາມເປັນຈິງຂອງເຮົາໃນອະຣິຍະສັດ ໔ ປະການນີ້ ວົນ ໓ ຮອບ ມີ ໑໒ ອາການແນວນີ້ມົດຈົດດີແລ້ວ ເມື່ອນັ້ນເຮົາຈຶ່ງຢັ້ງຢືນໄດ້ວ່າ ເປັນຜູ້ຕັດສະຮູ້ສຳມາສຳໂພທິຍານອັນປະເສີດໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ຍານທັດສະນະເກີດຂຶ້ນແກ່ເຮົາວ່າ ຄວາມລຸດພົ້ນຂອງເຮົາບໍ່ກຳເຮີບ ຊາດນີ້ເປັນຊາດສຸດທ້າຍ ບັດນີ້ພົບໃໝ່ບໍ່ມີອີກ

ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດທຳມະຈັກກັບປະວັດຕະນະສູດນີ້ ພິກຂຸປັນຈະວັກຄີມີໃຈຍິນດີ ຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດໄວຍາກອນຢູ່ ທຳຈັກຂຸອັນປາສະຈາກທຸລີ ປາສະຈາກມົນທິນ ໄດ້ເກີດແກ່ທ່ານພຣະໂກນທັນຍະວ່າ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງປວງມີຄວາມດັບໄປເປັນທຳມະດາ

ເມື່ອພຣະຜູ້ມີພຣະພາກເຈົ້າຊົງປະກາດພຣະທຳຈັກໃຫ້ເປັນໄປແລ້ວ ທວຍເທບຊັ້ນພຸມມະກະຈາຍຂ່າວວ່າ ນັ້ນພຣະທຳຈັກອັນປະເສີດພຣະຜູ້ມີພຣະພາກເຈົ້າ ຊົງໃຫ້ເປັນໄປແລ້ວຢູ່ປ່າອິສິ

ປະຕະນະມະຣິຄະທາຍະວັນ ເຂດເມືອງພາຣານະສີ ອັນສະມະນະພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກເຮັດໃຫ້ໝຸນກັບບໍ່ໄດ້

ທວຍເທບຊັ້ນຈາຕຸມະຫາຣາດສະດັບສຽງຂອງທວຍເທບຊັ້ນພຸມມະແລ້ວ ໄດ້ກະຈາຍຂ່າວຕໍ່ໄປວ່າ ນັ້ນ ພຣະທຳມະຈັກອັນປະເສີດ ພຣະຜູ້ມີພຣະພາກເຈົ້າຊົງໃຫ້ເປັນໄປແລ້ວ ໃນປ່າອິສິປະຕະນະມະຣິຄະທາຍະວັນ ເຂດເມືອງພາຣານະສີ ອັນສະມະນະ ພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກເຮັດໃຫ້ໝຸນກັບບໍ່ໄດ້

ທວຍເທບຊັ້ນຕາວະຕິງສາ ສະດັບສຽງຂອງທວຍເທບຊັ້ນຈາຕຸມະຫາຣາດແລ້ວໄດ້ກະຈາຍຂ່າວຕໍ່ໄປ ຯລຯ

ທວຍເທບຊັ້ນ ຍາມາ ຯລຯ
ທວຍເທບຊັ້ນ ດຸສິດ ຯລຯ
ທວຍເທບຊັ້ນ ນິມມານະຣະດີ ຯລຯ
ທວຍເທບຊັ້ນ ປະຣະນິມມິຕະວະສະວັດດີ ຯລຯ

ທວຍເທບທີ່ນັບ ເນື່ອງໃນໝູ່ພົມສະດັບສຽງຂອງທວຍເທບຊັ້ນປະຣະນິມມິຕະວະສະວັດດີແລ້ວກໍກະຈາຍຂ່າວວ່າ ນັ້ນພຣະທຳມະຈັກອັນປະເສີດພຣະຜູ້ມີພຣະພາກເຈົ້າຊົງປະກາດແລ້ວ ຢູ່ປ່າອິສິປະຕະນະມະຣິຄະທາຍະວັນ ເຂດເມືອງພາຣານະສີ ອັນສະມະນະ ພາມ ເທວະດາ ມານ ພົມ ຫຼືໃຜ ໆ ໃນໂລກເຮັດໃຫ້ໝຸນກັບບໍ່ໄດ້

ພຽງບຶດດຽວທໍ່ນັ້ນ ສຽງເປົ່າປະກາດໄດ້ກະຈາຍຂຶ້ນໄປເຖິງພົມມະໂລກດ້ວຍປະການຢ່າງນີ້ ໃນໝື່ນໂລກກະທາດນີ້ກໍສັ່ນສະເທືອນເລື່ອນລັ່ນ ທັງແສງສະຫວ່າງອັນເຈີດຈ້າຫາປະມານບໍ່ໄດ້ ກໍຜາກົດໃນໂລກ ກ້າວລ່ວງເທວານຸພາບຂອງເທວະດາທັງຫຼາຍ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງເປ່ງພຣະອຸທານນີ້ວ່າ ຜູ້ຈະເລີນທັງຫຼາຍ ໂກນທັນຍະໄດ້ຮູ້ແລ້ວນໍ ຜູ້ຈະເລີນທັງຫຼາຍ ໂກນທັນຍະໄດ້ຮູ້ແລ້ວນໍ ດັ່ງນັ້ນ ຄຳວ່າ ອັນຍາໂກນທັນຍະນີ້ຈຶ່ງໄດ້ເປັນຊື່ຂອງພຣະໂກນທັນຍະນັ້ນແລ

**ທຳມະຈັກກັບປະວັດຕະນະສູດທີ ໑ ຈົບ**

# ໘. ຕະຖາຄະຕະສູດ

## ວ່າດ້ວຍພຣະຕະຖາຄົດ

[໑໐໗໘] ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ຕະຖາຄົດທັງຫຼາຍ ໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ທຸກຂະອະຣິຍະສັດ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວ ແກ່ຕະຖາຄົດທັງຫຼາຍໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະອະຣິຍະສັດນີ້ ຄວນກຳນົດຮູ້

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວ ແກ່ຕະຖາຄົດທັງຫຼາຍໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະອະຣິຍະສັດນີ້ຕະຖາຄົດທັງຫຼາຍ ໄດ້ກຳນົດຮູ້ແລ້ວ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວ ແກ່ຕະຖາຄົດທັງຫຼາຍໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ທຸກຂະສະມຸທະຍະອະຣິຍະສັດ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວ ແກ່ຕະຖາຄົດທັງຫຼາຍໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະສະມຸທະຍະອະຣິຍະສັດນີ້ ຄວນລະ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວ ແກ່ຕະຖາຄົດທັງຫຼາຍໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະສະມຸທະຍະອະຣິຍະສັດນີ້ ຕະຖາຄົດລະໄດ້ແລ້ວ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ຕະຖາຄົດທັງຫຼາຍໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ທຸກຂະນິໂຣທະອະຣິຍະສັດ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ຕະຖາຄົດທັງຫຼາຍໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະນິ

ໂຣທະອະຣິຍະສັດນີ້ ຄວນເຮັດໃຫ້ແຈ້ງ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ຕະຖາຄົດທັງຫຼາຍໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະນິໂຣທະອະຣິຍະສັດນີ້ຕະຖາຄົດທັງຫຼາຍ ໄດ້ເຮັດໃຫ້ແຈ້ງແລ້ວ

ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ຕະຖາຄົດທັງຫຼາຍໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວ ແກ່ຕະຖາຄົດທັງຫຼາຍໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດນີ້ ຄວນຈະເລີນ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ຕະຖາຄົດທັງຫຼາຍໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະນິໂຣທະຄາມິນີປະຕິປະທານີ້ ຕະຖາຄົດທັງຫຼາຍໄດ້ຈະເລີນແລ້ວ

**ຕະຖາຄະຕະສູດທີ ໘ ຈົບ**

# ໙. ຂັນທະສູດ

## ວ່າດ້ວຍອຸປາທານຂັນ

[໑໐໗໙] ພິກຂຸທັງຫຼາຍ ອະຣິຍະສັດ ໔ ປະການນີ້

ອະຣິຍະສັດ ໔ ປະການ ອັນໃດແດ່ ຄື

໑. ທຸກຂະອະຣິຍະສັດ
໒. ທຸກຂະສະມຸທະຍະອະຣິຍະສັດ
໓. ທຸກຂະນິໂຣທະອະຣິຍະສັດ
໔. ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ

ທຸກຂະອະຣິຍະສັດ ເປັນແນວໃດ?

ຄື ຄວນກ່າວໄດ້ວ່າ ທຸກຂະອະຣິຍະສັດນັ້ນ ໄດ້ແກ່ ອຸປາທານຂັນ ໕ ປະການ

ອຸປາທານຂັນ ໕ ປະການ ອັນໃດແດ່ ຄື

໑. ຮູປູປາທານະຂັນ ຯລຯ ໕. ວິນຍານູປາທານະຂັນ

ນີ້ຮຽກວ່າ ທຸກຂະອະຣິຍະສັດ

ທຸກຂະສະມຸທະຍະອະຣິຍະສັດ ເປັນແນວໃດ?

ຄື ຕັນຫາອັນເຮັດໃຫ້ເກີດອີກ ປະກອບດ້ວຍຄວາມເພີດເພີນແລະຄວາມກຳໜັດ ມີປົກກະຕິໃຫ້ເພີດເພີນໃນອາລົມນັ້ນ ໆ ຄື ກາມະຕັນຫາ ພະວະຕັນຫາ ວິພະວະຕັນຫາ ນີ້ຮຽກວ່າ ທຸກຂະສະມຸທະຍະອະຣິຍະສັດ

ທຸກຂະນິໂຣທະອະຣິຍະສັດ ເປັນແນວໃດ?

ຄື ຄວາມດັບຕັນຫາບໍ່ເຫຼືອດ້ວຍວິຣາຄະ ຄວາມສະລະ ຄວາມສະລະຄືນ ຄວາມພົ້ນ ຄວາມບໍ່ອາໄລໃນຕັນຫາ ນີ້ຮຽກວ່າ ທຸກຂະນິໂຣທະອະຣິຍະສັດ

ທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດ ເປັນແນວໃດ?
ຄື ອະຣິຍະມັກມີອົງ ໘ ນີ້ແລ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ຮຽກວ່າ ທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດ
ພິກຂຸທັງຫຼາຍ ອະຣິຍະສັດ ໔ ປະການນີ້
ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍເພິ່ງທຳຄວາມພຽນເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ

**ຂັນທະສູດທີ ໓ ຈົບ**

# ໔. ອັດຊັດຕິກາຍະຕະນະສູດ

## ວ່າດ້ວຍອາຍະຕະນະພາຍໃນ

[໑໐໘໔] ພິກຂຸທັງຫຼາຍ ອະຣິຍະສັດ ໔ ປະການນີ້

ອະຣິຍະສັດ ໔ ປະການ ອັນໃດແດ່ ຄື

໑. ທຸກຂະອະຣິຍະສັດ
໒. ທຸກຂະສະມຸທະຍະອະຣິຍະສັດ
໓. ທຸກຂະນິໂຣທະອະຣິຍະສັດ
໔. ທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດ

ທຸກຂະອະຣິຍະສັດ ເປັນແນວໃດ?

ຄື ຄວນກ່າວໄດ້ວ່າ ທຸກຂະອະຣິຍະສັດນັ້ນ ໄດ້ແກ່ ອາຍະຕະນະພາຍໃນ ໖ ປະການ

ອາຍະຕະນະພາຍໃນ ໖ ປະການ ອັນໃດແດ່ ຄື

໑. ຈັກຂວາຍະຕະນະ (ອາຍະຕະນະຄືຕາ)
ຯລຯ
໖. ມະນາຍະຕະນະ (ອາຍະຕະນະຄືໃຈ)

ນີ້ຮຽກວ່າ ທຸກຂະອະຣິຍະສັດ

ທຸກຂະສະມຸທະຍະອະຣິຍະສັດ ເປັນແນວໃດ?

ຄື ຕັນຫາອັນເຮັດໃຫ້ເກີດອີກ ປະກອບດ້ວຍຄວາມຄວາມເພີດເພີນ ແລະຄວາມກຳໜັດ ມີປົກກະຕິໃຫ້ເພີດເພີນຢູ່ໃນອາລົມນັ້ນ ໆ ຄື ກາມະຕັນຫາ ພະວະຕັນຫາ ວິພະວະຕັນຫາ ນີ້ຮຽກວ່າ ທຸກຂະສະມຸທະຍະອະຣິຍະສັດ

ທຸກຂະນິໂຣທະອະຣິຍະສັດ ເປັນແນວໃດ?

ຄື ຄວາມດັບຕັນຫາບໍ່ເຫຼືອດ້ວຍວິຣາຄະ ຄວາມສະລະ ຄວາມສະລະຄືນ ຄວາມພົ້ນ ຄວາມບໍ່ອາໄລໃນຕັນຫາ ນີ້ຮຽກວ່າ ທຸກຂະນິໂຣທະອະຣິຍະສັດ

ທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດ ເປັນແນວໃດ?

ຄື ອະຣິຍະມັກມີອົງ ໘ ນີ້ແລ ໄດ້ແກ່

໑. ສຳມາທິດຖິ ຯລຯ ໘. ສຳມາສະມາທິ

ນີ້ຮຽກວ່າ ທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດ

ອະຣິຍະສັດ ໔ ປະການນີ້

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍເພິ່ງທຳຄວາມພຽນເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

**ອັດຊັດຕິກາຍະຕະນະສູດທີ ໔ ຈົບ**

# ໕. ປະຖົມທາຣະນະສູດ

## ວ່າດ້ວຍການຊົງຈຳອະຣິຍະສັດ ສູດທີ ໑

[໑໐໗໕] ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງຊົງຈຳອະຣິຍະສັດ ໔ ປະການທີ່ເຮົາສະແດງໄວ້ແລ້ວເທີ້ນ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພິກຂຸອົງໜຶ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຊົງຈຳອະຣິຍະສັດ ໔ ປະການທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ແລ້ວ

ພິກຂຸ ທ່ານຊົງຈຳອະຣິຍະສັດ ໔ ປະການທີ່ເຮົາສະແດງໄວ້ແລ້ວ ແນວໃດ

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງ ຊົງຈຳທຸກຂະອະຣິຍະສັດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ແລ້ວເປັນຂໍ້ທີ ໑ ຊົງຈຳທຸກຂະສະມຸທະຍະອະຣິຍະສັດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ແລ້ວ ເປັນຂໍ້ທີ ໒ ຊົງຈຳທຸກຂະນິໂຣທະອະຣິຍະສັດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ແລ້ວເປັນຂໍ້ທີ່ ໓ ຊົງຈຳທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ແລ້ວເປັນຂໍ້ທີ ໔ ຂ້າພຣະອົງຊົງຈຳອະຣິຍະສັດ ໔ ປະການທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ແລ້ວ ແນວນີ້ແລ ຂ້ານ້ອຍ

ດີແລ້ວ ດີແລ້ວ ພິກຂຸ ດີຫຼາຍ ພິກຂຸ ທ່ານຊົງຈຳອະຣິຍະສັດ ໔ ປະການທີ່ເຮົາສະແດງໄວ້ແລ້ວ ເຮົາສະແດງທຸກຂະອະຣິຍະສັດເປັນຂໍ້ທີ່ ໑ ທ່ານກໍຈົ່ງຊົງຈຳໄວ້ແນວນັ້ນ ເຮົາສະແດງທຸກຂະສະມຸທະຍະອະຣິຍະສັດເປັນຂໍ້ທີ ໒ ທ່ານກໍຈົ່ງຊົງຈຳໄວ້ແນວນັ້ນ ເຮົາສະແດງທຸກຂະນິໂຣທະອະຣິຍະສັດເປັນຂໍ້ທີ ໓ ທ່ານກໍຈົ່ງຊົງຈຳໄວ້ແນວນັ້ນ ເຮົາສະແດງທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດເປັນຂໍ້ທີ ໔ ທ່ານກໍຈົ່ງຊົງຈຳໄວ້ແນວນັ້ນ ທ່ານຈົ່ງຊົງຈຳອະຣິຍະສັດ ໔ ປະການທີ່ເຮົາສະແດງໄວ້ແລ້ວ ແນວນີ້ແລ

ພິກຂຸ ຍ້ອນເຫດນັ້ນ ທ່ານເພິ່ງທຳຄວາມພຽນເພື່ອຊົງຈຳວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມິນີປະຕິປະທາ ໄວ້ເທີ້ນ

**ປະຖົມທາຣະນະສູດທີ ໕ ຈົບ**

# ๘. ທຸຕິຍະທາຣະນະສູດ

## ວ່າດ້ວຍການຊົງຈຳອະຣິຍະສັດ ສູດທີ ๘

[໑໐໗໘] ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງຊົງຈຳອະຣິຍະສັດ ๔ ປະການທີ່ເຮົາສະແດງໄວ້ແລ້ວເທີ້ນ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພິກຂຸອົງໜຶ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງຊົງຈຳອະຣິຍະສັດ ๔ ປະການທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ແລ້ວ

ພິກຂຸ ທ່ານຊົງຈຳອະຣິຍະສັດ ๔ ປະການທີ່ເຮົາສະແດງໄວ້ແລ້ວ ແນວໃດ?

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງ ຊົງຈຳທຸກຂະອະຣິຍະສັດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ແລ້ວເປັນຂໍ້ທີ ໑ ເປັນໄປບໍ່ໄດ້ເລີຍທີ່ສະມະນະ ຫຼື ພາມຜູ້ໃດຜູ້ໜຶ່ງເພິ່ງກ່າວແນວນີ້ວ່າ ນີ້ບໍ່ແມ່ນທຸກຂະອະຣິຍະສັດຂໍ້ທີ ໑ ທີ່ພຣະສະມະນະໂຄດົມຊົງສະແດງໄວ້ແລ້ວ ເຮົາຈັກບອກຄືນທຸກຂະອະຣິຍະສັດນັ້ນແລ້ວ ບັນຍັດທຸກຂະອະຣິຍະສັດຂໍ້ທີ ໑ ເປັນແນວອື່ນ ຂ້າພຣະອົງຊົງຈຳທຸກຂະສະມຸທະຍະອະຣິຍະສັດ ຯລຯ ຂ້າພຣະອົງ ຊົງຈຳທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ແລ້ວເປັນຂໍ້ທີ ๔ ເປັນໄປບໍ່ໄດ້ເລີຍທີ່ສະມະນະ ຫຼື ພາມຜູ້ໃດຜູ້ໜຶ່ງເພິ່ງກ່າວວ່າ ນີ້ບໍ່ແມ່ນທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດຂໍ້ທີ ๔ ທີ່ພຣະສະມະນະໂຄດົມຊົງສະແດງໄວ້ແລ້ວ ເຮົາຈັກບອກຄືນທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດນັ້ນແລ້ວ ບັນຍັດທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດຂໍ້ທີ ๔ ເປັນແນວອື່ນ ຂ້າພຣະອົງຊົງຈຳອະຣິຍະສັດ ๔ ປະການທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ແລ້ວແນວນີ້ແລ ຂ້ານ້ອຍ

ດີແລ້ວ ດີແລ້ວ ພິກຂຸ ດີຫຼາຍ ພິກຂຸ ທ່ານຊົງຈຳອະຣິຍະສັດ ๔ ປະການທີ່ເຮົາສະແດງໄວ້ແລ້ວ ເຮົາສະແດງທຸກຂະອະຣິຍະສັດເປັນຂໍ້ທີ ໑ ທ່ານກໍຈົ່ງຊົງຈຳໄວ້ແນວນັ້ນ ເປັນໄປບໍ່ໄດ້ເລີຍທີ່ສະມະໜະ ຫຼືພາມຜູ້ໃດຜູ້ໜຶ່ງເພິ່ງກ່າວວ່າ ນີ້ບໍ່ແມ່ນທຸກຂະອະຣິຍະສັດຂໍ້ທີ ໑ ທີ່ພຣະສະມະນະໂຄດົມ ຊົງສະແດງໄວ້ແລ້ວ ເຮົາຈັກບອກຄືນທຸກຂະອະຣິຍະສັດຂໍ້ທີ ໑ ນັ້ນແລ້ວບັນຍັດທຸກຂະອະຣິຍະສັດ ຂໍ້ທີ ໑ ເປັນແນວອື່ນ ເຮົາສະແດງທຸກຂະສະມຸທະຍະອະຣິຍະສັດ ຯລຯ ທຸກຂະນິໂຣທະອະຣິຍະສັດ ຯລຯ ເຮົາສະແດງທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດເປັນຂໍ້ທີ ๔ ທ່ານກໍຈົ່ງຊົງຈຳໄວ້ແນວນັ້ນ ເປັນ ໄປບໍ່ໄດ້ເລີຍທີ່ສະມະນະຫຼືພາມຜູ້ໃດຜູ້ໜຶ່ງເພິ່ງກ່າວວ່າ ນີ້ບໍ່ແມ່ນທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດຂໍ້ທີ ๔ ທີ່ພຣະສະມະນະໂຄດົມ

ຊົງສະແດງໄວ້ ເຮົາຈັກບອກຄືນທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ ໔ ນັ້ນແລ້ວບັນຍັດທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດຂໍ້ທີ ໔ ເປັນແນວອື່ນ ທ່ານຈົ່ງຊົງຈໍາອະຣິຍະສັດ ໔ ປະການທີ່ເຮົາສະແດງໄວ້ແລ້ວ ແນວນີ້ແລ

ພິກຂຸ ຍ້ອນເຫດນັ້ນ ທ່ານເພິ່ງທໍາຄວາມພຽນເພື່ອຊົງຈໍາວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມິນີປະຕິປະທາ ໄວ້ເທີ້ນ

**ທຸຕິຍະທາຣະນະສູດທີ ໖ ຈົບ**

# ໗. ອະວິດຊາສູດ

## ວ່າດ້ວຍອະວິດຊາ

[໑໐໘໗] ພິກຂຸນັ້ນ ນັ່ງຢູ່ບ່ອນທີ່ສົມຄວນແລ້ວ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງຕັດວ່າ ອະວິດຊາ ອະວິດຊາ ອະວິດຊາເປັນແນວໃດ? ແລະດ້ວຍເຫດພຽງທໍ່ໃດ ບຸກຄົນຈຶ່ງຊື່ວ່າ ຕົກຢູ່ໃນອະວິດຊາ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸ ຄວາມບໍ່ຮູ້ໃນທຸກ ຄວາມບໍ່ຮູ້ໃນທຸກຂະສະມຸໄທ ຄວາມບໍ່ຮູ້ໃນທຸກຂະນິໂຣທະ ຄວາມບໍ່ຮູ້ໃນທຸກຂະນິໂຣທະຄາມິນີປະຕິປະທາ ນີ້ຮຽກວ່າ ອະວິດຊາແລະດ້ວຍເຫດພຽງທໍ່ນີ້ ບຸກຄົນຈຶ່ງຊື່ວ່າ ຕົກຢູ່ໃນອະວິດຊາ

ພິກຂຸ ຍ້ອນເຫດນັ້ນ ທ່ານເພິ່ງທໍາຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

**ອະວິດຊາສູດທີ ໗ ຈົບ**

# ໘. ວິດຊາສູດ

## ວ່າດ້ວຍວິດຊາ

[໑໐໘໘] ຄັ້ງນັ້ນ ພິກຂຸອົງໜຶ່ງ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງຕັດວ່າ ວິດຊາ ວິດຊາ ວິດຊາເປັນແນວໃດ? ແລະດ້ວຍເຫດພຽງທໍ່ໃດ ບຸກຄົນຈຶ່ງຊື່ວ່າ ມີວິດຊາ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພິກຂຸ ຄວາມຮູ້ໃນທຸກ ຄວາມຮູ້ໃນທຸກຂະສະມຸໄທ ຄວາມຮູ້ໃນທຸກຂະນິໂຣທະ ຄວາມຮູ້ໃນທຸກຂະນິໂຣທະຄາມິນີປະຕິປະທາ ນີ້ຮຽກວ່າ ວິດຊາ ແລະດ້ວຍເຫດພຽງທໍ່ນີ້ ບຸກຄົນຈຶ່ງຊື່ວ່າ ມີວິດຊາ

ພິກຂຸ ຍ້ອນເຫດນັ້ນ ທ່ານເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

**ວິດຊາສູດທີ ໘ ຈົບ**

# ໙. ສັງກາສະນະສູດ

## ວ່າດ້ວຍການຈຳແນກອະຣິຍະສັດ

[໑໐໗໙] ພິກຂຸທັງຫຼາຍ ຄຳທີ່ເຮົາບັນຍັດໄວ້ວ່າ ນີ້ທຸກຂະອະຣິຍະສັດ ໃນຄຳບັນຍັດນັ້ນ ເມື່ອຈະຂະຫຍາຍຄວາມວ່າ ນີ້ຊື່ວ່າ ທຸກຂະອະຣິຍະສັດ ແມ່ນຍ້ອນເຫດນີ້ ອັກສອນ ພະຍັນຊະນະ ແລະການຈຳແນກ ບໍ່ມີທີ່ສິ້ນສຸດ ຄຳທີ່ເຮົາບັນຍັດວ່າ ນີ້ທຸກຂະສະມຸທະຍະອະຣິຍະສັດ ຯລຯ

ຄຳທີ່ເຮົາບັນຍັດວ່າ ນີ້ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ ໃນຄຳບັນຍັດນັ້ນ ເມື່ອຈະຂະຫຍາຍຄວາມວ່າ ນີ້ຊື່ວ່າ ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ ແມ່ນຍ້ອນເຫດນີ້ ອັກສອນ ພະຍັນຊະນະ ແລະ ການຈຳແນກ ບໍ່ມີທີ່ສິ້ນສຸດ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

**ສັງກາສະນະສູດທີ ໙ ຈົບ**

# ໑໐. ຕະຖະສູດ

## ວ່າດ້ວຍສິ່ງຈິງແທ້

[໑໐໘໐] ພິກຂຸທັງຫຼາຍ ທຳ ໔ ປະການນີ້ ເປັນຂອງແທ້ ເປັນຂອງຈິງ ບໍ່ເປັນແນວອື່ນ

ທຳ ໔ ແນວ ອັນໃດແດ່ ຄື

ຂໍ້ທີ່ວ່າ ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ ເປັນຂອງແທ້ ເປັນຂອງຈິງ ບໍ່ເປັນແນວອື່ນ

ພິກຂຸທັງຫຼາຍ ທຳ ໔ ປະການນີ້ແລ ເປັນຂອງແທ້ ເປັນຂອງຈິງ ບໍ່ເປັນແນວອື່ນ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍເພິ່ງທຳຄວາມພຽນເພື່ອຮູ້ແຈ້ງຕາມຄວາມ ເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

**ຕະຖະສູດທີ ໑໐ ຈົບ**

**ທຳມະຈັກກັບປະວັດຕະນະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ທຳມະຈັກກັບປະວັດຕະນະສູດ | ໒. ຕະຖາຄະຕະສູດ |
| ໓. ຂັນທະສູດ | ໔. ອັດຊັດຕິກາຍະຕະນະສູດ |
| ໕. ປະຖົມທາຣະນະສູດ | ໖. ທຸຕິຍະທາຣະນະສູດ |
| ໗. ອະວິດຊາສູດ | ໘. ວິດຊາສູດ |
| ໙. ສັງກາສະນະສູດ | ໑໐. ຕະຖະສູດ |

# ໓. ໂກຕິຄາມວັກ

**ໝວດວ່າດ້ວຍພຣະທຳເທດສະໜາທີ່ໂກຕິຄາມ**

# ໑. ປະຖົມໂກຕິຄາມະສູດ

## ວ່າດ້ວຍພຣະທຳເທດສະໜາທີ່ໂກຕິຄາມ ສູດທີ ໑

[໑໐໙໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໂກຕິຄາມ ແຄວ້ນວັດຊີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ຍ້ອນບໍ່ຮູ້ແຈ້ງແທງຕະຫຼອດອະຣິຍະສັດ ໔ ປະການ ເຮົາແລະທ່ານທັງຫຼາຍ ຈຶ່ງທ່ຽວພະເນຈອນໄປຕະຫຼອດການຍາວນານແນວນີ້

ອະຣິຍະສັດ ໔ ປະການ ອັນໃດແດ່ ຄື

໑. ຍ້ອນບໍ່ຮູ້ແຈ້ງແທງຕະຫຼອດ ທຸກຂະອະຣິຍະສັດ ເຮົາແລະທ່ານທັງຫຼາຍຈຶ່ງທ່ຽວພະເນຈອນໄປຕະຫຼອດການຍາວນານແນວນີ້
໒. ຍ້ອນບໍ່ຮູ້ແຈ້ງແທງຕະຫຼອດ ທຸກຂະສະມຸທະຍະອະຣິຍະສັດ ຯລຯ
໓. ຍ້ອນບໍ່ຮູ້ແຈ້ງແທງຕະຫຼອດ ທຸກຂະນິໂຣທະອະຣິຍະສັດ ຯລຯ
໔. ຍ້ອນບໍ່ຮູ້ແຈ້ງແທງຕະຫຼອດ ທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດ ເຮົາແລະທ່ານທັງຫຼາຍຈຶ່ງທ່ຽວພະເນຈອນໄປຕະຫຼອດການຍາວນານແນວນີ້

ພິກຂຸທັງຫຼາຍ ເຮົາໄດ້ຮູ້ແຈ້ງແທງຕະຫຼອດທຸກຂະອະຣິຍະສັດ ເຮົາໄດ້ຮູ້ແຈ້ງແທງຕະຫຼອດທຸກຂະສະມຸທະຍະອະຣິຍະສັດ ເຮົາໄດ້ຮູ້ແຈ້ງແທງຕະຫຼອດທຸກຂະນິໂຣທະອະຣິຍະສັດ ເຮົາໄດ້ຮູ້ແຈ້ງແທງຕະຫຼອດທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດ ເຮົາຖອນພະວະຕັນຫາໄດ້ແລ້ວ ພະວະເນດຕິ໌ສິ້ນໄປແລ້ວ ບັດນີ້ພົບໃໝ່ບໍ່ມີອີກ

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ຍ້ອນບໍ່ເຫັນອະຣິຍະສັດ ໔ ປະການຕາມຄວາມເປັນຈິງ
ເຮົາແລະທ່ານທັງຫຼາຍຈຶ່ງທ່ຽວພະເນຈອນໄປ
ໃນຊາດນັ້ນ ໆ ຕະຫຼອດການຍາວນານ
ອະຣິຍະສັດ ໔ ປະການນີ້ເຮົາແລະທ່ານທັງຫຼາຍເຫັນແລ້ວ
ພະວະເນດຕິເຮົາຖອນໄດ້ແລ້ວ ຮາກເຫງົ້າແຫ່ງທຸກເຮົາຕັດຂາດແລ້ວ
ບັດນີ້ພົບໃໝ່ບໍ່ມີອີກ

**ປະຖົມໂກຕິຄາມະສູດທີ ໑ ຈົບ**

# ໒. ທຸຕິຍະໂກຕິຄາມະສູດ

## ວ່າດ້ວຍພຣະທຳມະເທດສະໜາທີ່ໂກຕິຄາມ ສູດທີ ໒

[໑໐໘໒] ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ ສະມະນະຫຼືພາມເຫຼົ່ານັ້ນ ບໍ່ຈັດວ່າເປັນສະມະນະໃນໝູ່ສະມະນະ ບໍຈັດວ່າເປັນພາມໃນໝູ່ພາມ ແລະທ່ານເຫຼົ່ານັ້ນ ຍ່ອມບໍ່ຮູ້ແຈ້ງປະໂຫຍດແຫ່ງຄວາມເປັນສະມະນະ ຫຼື ປະໂຫຍດແຫ່ງຄວາມເປັນພາມດ້ວຍຕົນເອງເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ສ່ວນສະມະນະ ຫຼື ພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ ສະມະນະຫຼືພາມເຫຼົ່ານັ້ນ ຈັດວ່າເປັນສະມະນະໃນໝູ່ສະມະນະ ແລະຈັດວ່າເປັນພາມໃນໝູ່ພາມ ທັງທ່ານເຫຼົ່ານັ້ນຍ່ອມຮູ້ແຈ້ງເຊິ່ງປະໂຫຍດແຫ່ງຄວາມເປັນສະມະນະ ແລະປະໂຫຍດແຫ່ງຄວາມເປັນພາມ ດ້ວຍຕົນເອງເຂົ້າເຖິງຢູ່ໃນປັດຈຸບັນ

ພຣະຜູ້ມີພຣະພາກເຈົ້າ ຜູ້ສຸຄົດສາດສະດາໄດ້ຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກ ວ່າ

ຊົນເຫຼົ່າໃດບໍ່ຮູ້ທຸກ ເຫດເກີດທຸກ
ທຳມະຊາດເປັນທີ່ດັບທຸກລົງໄດ້ໝົດສິ້ນ
ແລະບໍ່ຮູ້ຈັກທາງປະຕິບັດໃຫ້ເຖິງຄວາມດັບທຸກ
ຊົນເຫຼົ່ານັ້ນ ເປັນຜູ້ເສື່ອມຈາກເຈໂຕວິມຸດຕິແລະປັນຍາວິມຸດຕິ
ເປັນຜູ້ບໍ່ຄວນທີ່ຈະເຮັດບ່ອນສຸດແຫ່ງທຸກໄດ້
ເປັນຜູ້ເຂົ້າເຖິງຊາດແລະຊະຣາແທ້
ສ່ວນຊົນເຫຼົ່າໃດຮູ້ທຸກ ເຫດເກີດທຸກ
ທຳມະຊາດເປັນທີ່ດັບທຸກລົງໄດ້ໝົດສິ້ນ
ແລະຮູ້ຈັກທາງປະຕິບັດໃຫ້ເຖິງຄວາມດັບທຸກ
ຊົນເຫຼົ່ານັ້ນ ເປັນຜູ້ເຖິງພ້ອມດ້ວຍເຈໂຕວິມຸດຕິແລະປັນຍາວິມຸດຕິ
ເປັນຜູ້ຄວນທີ່ຈະເຮັດບ່ອນສຸດແຫ່ງທຸກໄດ້
ບໍ່ເປັນຜູ້ເຂົ້າເຖິງຊາດແລະຊະຣາ

**ທຸຕິຍະໂກຕິຄາມະສູດທີ ໘ ຈົບ**

# ໙. ສຳມາສຳພຸດທະສູດ

## ວ່າດ້ວຍເຫດໃຫ້ຮຽກວ່າພຣະສຳມາສຳພຸດທະເຈົ້າ

[໑໐໙໓] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ອະຣິຍະສັດ ໔ ປະການນີ້

ອະຣິຍະສັດ ໔ ປະການ ອັນໃດແດ່ ຄື

໑. ທຸກຂະອະຣິຍະສັດ

ຯລຯ

໔. ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ

ອະຣິຍະສັດ ໔ ປະການນີ້

ຍ້ອນເຮົາຮູ້ແຈ້ງອະຣິຍະສັດ ໔ ປະການນີ້ຕາມຄວາມເປັນຈິງ ຊາວໂລກຈຶ່ງຮຽກຕະຖາຄົດວ່າ ພຣະອະຣະຫັນຕະສຳມາສຳພຸດທະເຈົ້າ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

**ສຳມາສຳພຸດທະສູດທີ ໓ ຈົບ**

# ໔. ອະຣະຫັນຕະສູດ

## ວ່າດ້ວຍພຣະອະຣະຫັນຕະສຳມາສຳພຸດທະເຈົ້າ

[໑໐໘໔] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າເຫຼົ່າໃດເຫຼົ່າໜຶ່ງໃນອະດີດຕະການໄດ້ ຕັດສະຣູ້ຕາມຄວາມເປັນຈິງ ພຣະອະຣະຫັນຕະສຳມາສຳພຸດທະເຈົ້າເຫຼົ່ານັ້ນທັງໝົດໄດ້ຕັດສະຣູ້ອະຣິຍະສັດ ໔ ປະການຕາມຄວາມເປັນຈິງ ແມ່ນພຣະອະຣະຫັນຕະສຳມາສຳພຸດທະເຈົ້າເຫຼົ່າໃດເຫຼົ່າໜຶ່ງໃນອະນາຄົດຕະການຈັກຕັດສະຣູ້ຕາມຄວາມເປັນຈິງ ພຣະອະຣະຫັນຕະສຳມາສຳພຸດທະເຈົ້າທັງໝົດເຫຼົ່ານັ້ນ ຈັກຕັດສະຣູ້ອະຣິຍະສັດ ໔ ປະການຕາມຄວາມເປັນຈິງ ແມ່ນພຣະອະຣະຫັນຕະສຳມາສຳພຸດທະເຈົ້າເຫຼົ່າໃດເຫຼົ່າໜຶ່ງໃນປັດຈຸບັນການ ຍ່ອມຕັດສະຣູ້ຕາມຄວາມເປັນຈິງ ພຣະອະຣະຫັນຕະສຳມາສຳພຸດທະເຈົ້າເຫຼົ່ານັ້ນທັງໝົດ ຍ່ອມຕັດສະຣູ້ອະຣິຍະສັດ ໔ ປະການຕາມຄວາມເປັນຈິງ

ອະຣິຍະສັດ ໔ ປະການ ອັນໃດແດ່ ຄື

໑. ທຸກຂະອະຣິຍະສັດ

໒. ທຸກຂະສະມຸທະຍະອະຣິຍະສັດ

໓. ທຸກຂະນິໂຣທະອະຣິຍະສັດ

໔. ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ

ພຣະອະຣະຫັນຕະສຳມາສຳພຸດທະເຈົ້າເຫຼົ່າໃດເຫຼົ່າໜຶ່ງ ໃນອະດີດຕະການໄດ້ຕັດສະຮູ້ ຕາມຄວາມເປັນຈິງ ຯລຯ ພຣະອະຣະຫັນຕະສຳມາສຳພຸດທະເຈົ້າເຫຼົ່າໃດເຫຼົ່າໜຶ່ງໃນອະນາຄົດ ຕະການຈັກຕັດສະຮູ້ ຯລຯ ພຣະອະຣະຫັນຕະສຳມາສຳພຸດທະເຈົ້າເຫຼົ່າໃດເຫຼົ່າໜຶ່ງໃນປັດຈຸບັນ ການຍ່ອມຕັດສະຮູ້ ຕາມຄວາມເປັນຈິງ ພຣະອະຣະຫັນຕະສຳມາສຳພຸດທະເຈົ້າເຫຼົ່ານັ້ນທັງໝົດ ຍ່ອມຕັດສະຮູ້ອະຣິຍະສັດ ໔ ປະການນີ້ຕາມຄວາມເປັນຈິງ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມ ເປັນຈິງວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມີນີປະຕິປະທາ ຢູ່ເທີ້ນ

**ອະຣະຫັນຕະສູດທີ ໔ ຈົບ**

# ໕. ອາສະວັກຂະຍະສູດ

## ວ່າດ້ວຍຄວາມສິ້ນອາສະວະ

[໑໐໙໕] ພິກຂຸທັງຫຼາຍ ເຮົາກ່າວຄວາມສິ້ນອາສະວະຂອງຜູ້ຮູ້ ຜູ້ເຫັນ ບໍ່ໄດ້ກ່າວຄວາມ ສິ້ນອາສະວະຂອງຜູ້ບໍ່ຮູ້ ຜູ້ບໍ່ເຫັນ

ຄວາມສິ້ນອາສະວະຂອງຜູ້ຮູ້ ຜູ້ເຫັນອັນໃດ?

ຄື ຄວາມສິ້ນອາສະວະຂອງຜູ້ຮູ້ ຜູ້ເຫັນວ່າ ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ

ຄວາມສິ້ນອາສະວະຂອງຜູ້ຮູ້ ຜູ້ເຫັນຢູ່ແນວນີ້ແລ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມ ເປັນຈິງວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມີນີປະຕິທາ ຢູ່ເທີ້ນ

**ອາສະວັກຂະຍະສູດທີ ໕ ຈົບ**

# ໒. ມິດຕະສູດ

## ວ່າດ້ວຍການຊັກຊວນມິດໃຫ້ຮູ້ອະຣິຍະສັດ

[໑໐໙໖] ພິກຂຸທັງຫຼາຍ ທ່ານທັງຫຼາຍ ເພິ່ງອະນຸເຄາະຄົນເຫຼົ່າໃດ ແລະຄົນເຫຼົ່າໃດຈະເປັນມິດ ອຳມາດ ຍາດ ສາໂລຫິດກໍຕາມ ໃຫ້ຄວາມສຳຄັນຄຳທີ່ຄວນຮັບຟັງ ທ່ານທັງຫຼາຍ ເພິ່ງຊັກຊວນຄົນເຫຼົ່ານັ້ນ ໃຫ້ຕັ້ງໝັ້ນ ໃຫ້ດຳລົງຢູ່ໃນການຮູ້ອະຣິຍະສັດ ໔ ປະການ ຕາມຄວາມເປັນຈິງ

ອະຣິຍະສັດ ໔ ປະການ ອັນໃດແດ່ ຄື

໑. ທຸກຂະອະຣິຍະສັດ
໒. ທຸກຂະສະມຸທະຍະອະຣິຍະສັດ
໓. ທຸກຂະນິໂຣທະອະຣິຍະສັດ
໔. ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ

ທ່ານທັງຫຼາຍ ເພິ່ງອະນຸເຄາະຄົນເຫຼົ່າໃດ ບໍ່ວ່າ ຈະເປັນມິດ ອຳມາດ ຍາດ ສາໂລຫິດກໍຕາມ ຜູ້ໃຫ້ຄວາມສຳຄັນຄຳທີ່ຄວນຮັບຟັງ ທ່ານທັງຫຼາຍ ເພິ່ງຊັກຊວນຄົນເຫຼົ່ານັ້ນ ໃຫ້ຕັ້ງໝັ້ນ ໃຫ້ດຳລົງຢູ່ໃນການຢັ່ງຮູ້ອະຣິຍະສັດ ໔ ປະການນີ້ ຕາມຄວາມເປັນຈິງ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມິນີປະຕິທາ ຢູ່ເທີ້ນ

**ມິດຕະສູດທີ ໒ ຈົບ**

# ໗. ຕະຖະສູດ

## ວ່າດ້ວຍສິ່ງຈິງແທ້

[໑໐໙໗] ພິກຂຸທັງຫຼາຍ ອະຣິຍະສັດ ໔ ປະການນີ້

ອະຣິຍະສັດ ໔ ປະການ ອັນໃດແດ່ ຄື

໑. ທຸກຂະອະຣິຍະສັດ
໒. ທຸກຂະສະມຸທະຍະອະຣິຍະສັດ
໓. ທຸກຂະນິໂຣທະອະຣິຍະສັດ

໔. ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ

ອະຣິຍະສັດ ໔ ປະການນີ້ ເປັນຂອງແທ້ ເປັນຂອງຈິງ ບໍ່ເປັນແນວອື່ນ ສະນັ້ນ ຈຶ່ງຮຽກວ່າ ອະຣິຍະສັດ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມິນີປະຕິທາ ຢູ່ເທີ້ນ

**ຕະຖະສູດທີ ໗ ຈົບ**

# ໘. ໂລກະສູດ

## ວ່າດ້ວຍພຣະຕະຖາຄົດເປັນອະຣິຍະໃນໂລກ

[໑໐໙໘] ພິກຂຸທັງຫຼາຍ ອະຣິຍະສັດ ໔ ປະການນີ້

ອະຣິຍະສັດ ໔ ປະການ ອັນໃດແດ່ ຄື

໑. ທຸກຂະອະຣິຍະສັດ
໒. ທຸກຂະສະມຸທະຍະອະຣິຍະສັດ
໓. ທຸກຂະນິໂຣທະອະຣິຍະສັດ
໔. ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ

ພຣະຕະຖາຄົດເປັນອະຣິຍະໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ສະນັ້ນ ຈຶ່ງຮຽກວ່າ ອະຣິຍະສັດ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມິນີປະຕິທາ ຢູ່ເທີ້ນ

**ໂລກະສູດທີ ໘ ຈົບ**

# ໙. ປະຣິນເຍີຍຍະສູດ

## ວ່າດ້ວຍອະຣິຍະສັດທີ່ຄວນກຳນົດຮູ້

[໑໐໙໙] ພິກຂຸທັງຫຼາຍ ອະຣິຍະສັດ ໔ ປະການນີ້

ອະຣິຍະສັດ ໔ ປະການ ອັນໃດແດ່ ຄື

໑. ທຸກຂະອະຣິຍະສັດ
໒. ທຸກຂະສະມຸທະຍະອະຣິຍະສັດ
໓. ທຸກຂະນິໂຣທະອະຣິຍະສັດ
໔. ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ

ອະຣິຍະສັດ ໔ ປະການນີ້

ບັນດາອະຣິຍະສັດ ໔ ປະການນີ້ ອະຣິຍະສັດທີ່ຄວນກຳນົດຮູ້ກໍມີ ອະຣິຍະສັດທີ່ຄວນລະກໍມີ ອະຣິຍະສັດທີ່ຄວນເຮັດໃຫ້ແຈ້ງກໍມີ ອະຣິຍະສັດທີ່ຄວນຈະເລີນກໍມີ

ອະຣິຍະສັດທີ່ຄວນກຳນົດຮູ້ ມີອັນໃດແດ່ ຄື

ທຸກຂະອະຣິຍະສັດຄວນກຳນົດຮູ້ ທຸກຂະສະມຸທະຍະອະຣິຍະສັດຄວນລະ ທຸກຂະນິໂຣທະອະຣິຍະສັດຄວນເຮັດໃຫ້ແຈ້ງ ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດຄວນຈະເລີນ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ฯລฯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

**ປະຣິນເຍີຍຍະສູດທີ ໙ ຈົບ**

# ໑໐. ຄະວຳປະຕິສູດ

## ວ່າດ້ວຍພຣະຄະວຳປະຕິ

[໑໑໐໐] ສະໄໝໜຶ່ງ ພິກຂຸຜູ້ເຖຣະຫຼາຍ ອີງຢູ່ເມືອງສະຫະຊະນິຍະ ແຄວ້ນເຈຕີ ສະໄໝນັ້ນ ເມື່ອພິກຂຸຜູ້ເຖຣະຫຼາຍອີງກັບຈາກບິນທະບາດ ພາຍຫຼັງສັນພັດຕາຫານສຳເລັດແລ້ວ ນັ່ງປະຊຸມກັນທີ່ຜາມມົນ ໄດ້ສົນທະນາກັນຂຶ້ນໃນລະຫວ່າງວ່າ ທ່ານທັງຫຼາຍ ຜູ້ໃດເຫັນທຸກ ຜູ້ນັ້ນຊື່ວ່າເຫັນທຸກຂະສະມຸໄທແດ່ ເຫັນທຸກຂະນິໂຣທະແດ່ ເຫັນທຸກຂະນິໂຣທະຄາມິນີປະຕິປະທາແດ່

ເມື່ອພິກຂຸຜູ້ເຖຣະທັງຫຼາຍກ່າວແບບນີ້ແລ້ວ ທ່ານພຣະຄະວຳປະຕິເຖຣະໄດ້ກ່າວກັບພິກຂຸທັງຫຼາຍດັ່ງນີ້ວ່າ ຜູ້ມີອາຍຸທັງຫຼາຍ ຂ້ານ້ອຍໄດ້ຟັງ ໄດ້ຮັບມາສະເພາະພຣະພັກພຣະຜູ້ມີພຣະພາກເຈົ້າວ່າ ພິກຂຸທັງຫຼາຍ ຜູ້ໃດເຫັນທຸກ ຜູ້ນັ້ນຊື່ວ່າ ເຫັນທຸກຂະສະມຸໄທແດ່ ເຫັນທຸກຂະນິໂຣທະແດ່ ເຫັນທຸກຂະນິໂຣທະຄາມິນີປະຕິປະທາແດ່ ຜູ້ໃດເຫັນທຸກຂະສະມຸໄທ ຜູ້ນັ້ນຊື່ວ່າເຫັນທຸກ

ແດ່ ເຫັນທຸກຂະນິໂຣທະແດ່ ເຫັນທຸກຂະນິໂຣທະຄາມີນີປະຕິປະທາແດ່ ຜູ້ໃດເຫັນທຸກຂະນິໂຣທະ ຜູ້ນັ້ນຊື່ວ່າເຫັນທຸກແດ່ ເຫັນທຸກຂະສະມຸໄທແດ່ ເຫັນທຸກຂະນິໂຣທະຄາມີນີປະຕິປະທາແດ່ ຜູ້ໃດເຫັນທຸກຂະນິໂຣທະຄາມີນີປະຕິປະທາ ຜູ້ນັ້ນຊື່ວ່າເຫັນທຸກແດ່ ເຫັນທຸກຂະສະມຸໄທແດ່ ເຫັນທຸກຂະນິໂຣທະແດ່

**ຄະວໍາປະຕິສູດທີ ໑໐ ຈົບ**

**ໂກຕິຄາມະວັກທີ ໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ປະຖົມໂກຕິຄາມະສູດ | ໒. ທຸຕິຍະໂກຕິຄາມະສູດ |
| ໓. ສໍາມາສໍາພຸດທະສູດ | ໔. ອະຣະຫັນຕະສູດ |
| ໕. ອາສະວັກຂະຍະສູດ | ໖. ມິດຕະສູດ |
| ໗. ຕະຖະສູດ | ໘. ໂລກະສູດ |
| ໙. ປະຣິນເຍີຍຍະສູດ | ໑໐. ຄະວໍາປະຕິສູດ |

# ໔. ສີສະປາວະນະວັກ

### ໝວດວ່າດ້ວຍພຣະທໍາເທດສະໜາທີ່ສີສະປາວັນ

## ໑. ສີສະປາວະນະສູດ

### ວ່າດ້ວຍພຣະທໍາເທດສະໜາທີ່ສີສະປາວັນ

[໑໑໐໑] ພຣະຜູ້ມີພຣະພາກເຈົ້າປະທັບຢູ່ສີສະປາວັນ ເຂດເມືອງໂກສໍາພີ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຈັບໃບດູ່ລາຍ ໒-໓ ໃບຂຶ້ນມາ ແລ້ວຮັບສັ່ງຮຽກພິກຂຸທັງຫຼາຍ ມາດ້ວຍຕັດວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ໃບດູ່ລາຍ ໒-໓ ໃບທີ່ເຮົາຈັບຂຶ້ນມາກັບໃບທີ່ຢູ່ເທິງຕົ້ນ ແນວໃດຈະຫຼາຍກວ່າກັນ ລໍາດັບນັ້ນ ພິກຂຸທັງຫຼາຍຂາບທູນວ່າ ໃບທີ່ຢູ່ເທິງຕົ້ນໄມ້ນັ້ນແລ ຫຼາຍກວ່າ ໃບດູ່ລາຍ ໒-໓ ໃບທີ່ພຣະອົງຊົງຈັບຂຶ້ນມາມີພຽງເລັກໜ້ອຍຂ້ານ້ອຍ

ພິກຂຸທັງຫຼາຍ ສິ່ງທີ່ເຮົາຮູ້ແລ້ວ ແຕ່ບໍ່ໄດ້ບອກພວກທ່ານມີຢູ່ຫຼາຍ

ຍ້ອນເຫດໃດ? ເຮົາຈຶ່ງບໍ່ໄດ້ບອກ

ຍ້ອນສິ່ງນີ້ບໍ່ມີປະໂຫຍດ ບໍ່ແມ່ນຈຸດເລີ່ມຕົ້ນແຫ່ງພົມມະຈັນ ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ບໍ່ເປັນໄປເພື່ອຄາຍກຳໜັດ ບໍ່ເປັນໄປເພື່ອດັບ ບໍ່ເປັນໄປເພື່ອສະງົບລະງັບ ບໍ່ເປັນໄປເພື່ອຮູ້ຍິ່ງ ບໍ່ເປັນໄປເພື່ອຕັດສະຮູ້ ບໍ່ເປັນໄປເພື່ອນິບພານ ຍ້ອນເຫດນັ້ນ ເຮົາຈຶ່ງບໍ່ໄດ້ບອກ

ສິ່ງໃດນໍ? ທີ່ເຮົາບອກແລ້ວ

ຄື ເຮົາໄດ້ບອກວ່າ ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

ຍ້ອນເຫດໃດ ເຮົາຈຶ່ງບອກ

ຍ້ອນສິ່ງນີ້ມີປະໂຫຍດ ເປັນຈຸດເລີ່ມຕົ້ນແຫ່ງພົມມະຈັນ ເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ ຍ້ອນເຫດນັ້ນ ເຮົາຈຶ່ງບອກ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມິນີປະຕິທາ ຢູ່ເທີ້ນ

**ສີສະປາວະນະສູດທີ ໑ ຈົບ**

# ໘. ຂະທິຣະປັດຕະສູດ

## ວ່າດ້ວຍອຸປະມາດ້ວຍໃບແຄນ

[໑໑໐໘] ພິກຂຸທັງຫຼາຍ ເປັນໄປບໍ່ໄດ້ເລີຍ ທີ່ບຸກຄົນຈະເພິ່ງກ່າວແນວນີ້ວ່າ ເຮົາຍັງບໍ່ຮູ້ແຈ້ງທຸກຂະອະຣິຍະສັດ ທຸກຂະສະມຸທະຍະອະຣິຍະສັດ ທຸກຂະນິໂຣທະອະຣິຍະສັດ ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ ຕາມຄວາມເປັນຈິງ ແລ້ວຈັກເຮັດບ່ອນສຸດແຫ່ງທຸກໂດຍຖືກຕ້ອງໄດ້

ເປັນໄປບໍ່ໄດ້ເລີຍ ທີ່ບຸກຄົນຈະເພິ່ງກ່າວວ່າ ເຮົາຈັກໃຊ້ໃບແຄນ ໃບທອງຫຼາງ ຫຼື ໃບໝາກຂາມປ້ອມຫໍ່ນ້ຳ ຫຼື ຫໍ່ໃບຕານນຳໄປ ແມ່ນສັນໃດ ເປັນໄປບໍ່ໄດ້ເລີຍທີ່ບຸກຄົນຈະເພິ່ງກ່າວວ່າ ເຮົາບໍ່ໄດ້ຮູ້ແຈ້ງທຸກຂະອະຣິຍະສັດ ຯລຯ ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດຕາມຄວາມເປັນ

ຈິງ ແລ້ວຈັກເຮັດບ່ອນສຸດແຫ່ງທຸກໂດຍຖືກຕ້ອງໄດ້ ກໍຄືກັນສັນນັ້ນ

ແຕ່ເປັນໄປໄດ້ທີ່ບຸກຄົນຈະເພິ່ງກ່າວແນວນີ້ວ່າ ເຮົາໄດ້ຮູ້ແຈ້ງທຸກຂະອະຣິຍະສັດ ທຸກຂະສະມຸທະຍະອະຣິຍະສັດ ທຸກຂະນິໂຣທະອະຣິຍະສັດ ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດຕາມຄວາມເປັນຈິງ ແລ້ວຈັກເຮັດບ່ອນສຸດແຫ່ງທຸກໂດຍຖືກຕ້ອງໄດ້

ເປັນໄປໄດ້ທີ່ບຸກຄົນຈະເພິ່ງກ່າວວ່າ ເຮົາຈັກໃຊ້ໃບບົວ ໃບດອກຈານ ຫຼື ໃບໄຮຍ້ອຍ ຫໍ່ນໍ້າ ຫຼື ຫໍ່ໃບຕານນໍາໄປ ແມ່ນສັນໃດ ເປັນໄປໄດ້ທີ່ບຸກຄົນຈະເພິ່ງກ່າວວ່າ ເຮົາໄດ້ຮູ້ແຈ້ງ ທຸກຂະອະຣິຍະສັດ ຯລຯ ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດຕາມຄວາມເປັນຈິງ ແລ້ວຈັກເຮັດບ່ອນສຸດແຫ່ງທຸກໂດຍຖືກຕ້ອງໄດ້ ກໍຄືກັນສັນນັ້ນ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທໍາຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມິນີປະຕິທາ ຢູ່ເທີ້ນ

**ຂະທິຣະປັດຕະສູດທີ ໘ ຈົບ**

# ໙. ທັນຖະສູດ

## ວ່າດ້ວຍອຸປະມາດ້ວຍໄມ້ຄ້ອນ

[໑໑໐໙] ພິກຂຸທັງຫຼາຍ ໄມ້ຄ້ອນທີ່ດີກໄປເທິງອາກາດ ບາງເວລາເອົາທາງກົກລົງມາ ບາງເວລາເອົາທາງກາງລົງມາ ບາງເວລາເອົາທາງປາຍລົງມາ ແມ່ນສັນໃດ ສັດທັງຫຼາຍ ຜູ້ມີອະວິດຊາອັດກັ້ນ ມີຕັນຫາໂຍງໃຍຈຶ່ງແລ່ນໄປ ທ່ອງທ່ຽວໄປ ບາງເວລາຈາກໂລກນີ້ໄປສູ່ໂລກອື່ນ ບາງເວລາຈາກໂລກອື່ນມາສູ່ໂລກນີ້ ກໍຄືກັນສັນນັ້ນ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນບໍ່ເຫັນອະຣິຍະສັດ ໔ ປະການ

ອະຣິຍະສັດ ໔ ປະການ ອັນໃດແດ່ ຄື

໑. ທຸກຂະອະຣິຍະສັດ
໒. ທຸກຂະສະມຸທະຍະອະຣິຍະສັດ
໓. ທຸກຂະນິໂຣທະອະຣິຍະສັດ
໔. ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມີນີປະຕິທາ ຢູ່ເທີ້ນ

**ທັນຖະສູດທີ ໓ ຈົບ**

# ໔. ເຈລະສູດ

## ວ່າດ້ວຍອຸປະມາດ້ວຍຜ້າທີ່ຖືກໄຟໄໝ້

[໑໑໐໔] ພິກຂຸທັງຫຼາຍ ເມື່ອຜ້າຖືກໄຟໄໝ້ ຫຼື ຫົວຖືກໄຟໄໝ້ ຄວນເຮັດແນວໃດ

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອຜ້າຖືກໄຟໄໝ້ ຫຼື ຫົວຖືກໄຟໄໝ້ ຄວນທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິ ແລະສຳປະຊັນຍະໃຫ້ມີປະມານຍິ່ງ ເພື່ອດັບໄຟທີ່ໄໝ້ຜ້າ ຫຼື ໄຟທີ່ໄໝ້ຫົວນັ້ນ ຂ້ານ້ອຍ

ພິກຂຸທັງຫຼາຍ ຄວນວາງເສີຍ ບໍ່ຄວນໃສ່ໃຈເຖິງຜ້າທີ່ຖືກໄຟໄໝ້ ຫຼື ຫົວທີ່ຖືກໄຟໄໝ້ ຄວນທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິ ແລະສຳປະຊັນຍະໃຫ້ມີປະມານຍິ່ງ ເພື່ອຮູ້ແຈ້ງອະຣິຍະສັດ ໔ ປະການ ທີ່ຍັງບໍ່ຮູ້ແຈ້ງຕາມຄວາມເປັນຈິງ

ອະຣິຍະສັດ ໔ ປະການ ອັນໃດແດ່ ຄື

໑. ທຸກຂະອະຣິຍະສັດ
໒. ທຸກຂະສະມຸທະຍະອະຣິຍະສັດ
໓. ທຸກຂະນິໂຣທະອະຣິຍະສັດ
໔. ທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມີນີປະຕິທາ ຢູ່ເທີ້ນ

**ເຈລະສູດທີ ໔ ຈົບ**

# ໕. ສັດຕິສະຕະສູດ

## ວ່າດ້ວຍອຸປະມາດ້ວຍຜູ້ຖືກຫອກ ໑໐໐ ເຫຼັ້ມສຽບແທງ

[໑໑໐໕] ພິກຂຸທັງຫຼາຍ ປຽບຄື ໃຜ ໆ ເພິ່ງກ່າວກັບບຸຣຸດຜູ້ມີອາຍຸ ໑໐໐ ປີ ມີຊີວິດຢູ່ ໑໐໐ ປີວ່າ ມາເທີ້ນ ທ່ານຜູ້ຈະເລີນທັງຫຼາຍ ຂໍທັງຫຼາຍຈັກໃຊ້ຫອກ ໑໐໐ ເຫຼັ້ມ ສຽບແທງທ່ານໃນເວລາເຊົ້າ ໃຊ້ຫອກ ໑໐໐ ເຫຼັ້ມ ສຽບແທງໃນເວລາທ່ຽງ ໃຊ້ຫອກ ໑໐໐ ເຫຼັ້ມສຽບແທງໃນເວລາຄ່ຳ ທ່ານນັ້ນ ຖືກຫອກສຽບແທງມື້ລະ ໓໐໐ ເຫຼັ້ມ ມີອາຍຸ ໑໐໐ ປີ ມີຊີວິດຢູ່ ໑໐໐ ປີ ເມື່ອລ່ວງໄປ ໑໐໐ ປີ ກໍຈັກຮູ້ແຈ້ງອະຣິຍະສັດ ໔ ປະການທີ່ຍັງບໍ່ໄດ້ຮູ້ແຈ້ງໄດ້ ກຸນລະບຸດຜູ້ເຫັນປະໂຫຍດຕົນ ຄວນຍອມຮັບຂໍ້ສະເໜີນັ້ນ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນສົງສານນີ້ ມີເບື້ອງຕົ້ນກັບເບື້ອງປາຍ ກຳນົດຮູ້ບໍ່ໄດ້ ເບື້ອງຕົ້ນ ແລະບ່ອນສຸດແຫ່ງການປະຫານດ້ວຍຫອກ ການປະຫານດ້ວຍດາບ ການປະຫານດ້ວຍຫຼາວ ແລະການປະຫານດ້ວຍຂວານຍ່ອມບໍ່ປາກົດ ອຸປະມານີ້ສັນໃດ ອຸປະໄມກໍຄືກັນສັນນັ້ນ ເຮົາບໍ່ກ່າວວ່າ ການຮູ້ແຈ້ງອະຣິຍະສັດ ໔ ປະການ ມີໄດ້ພ້ອມກັບທຸກ ແລະໂທມະນັດ ແຕ່ເຮົາກ່າວວ່າ ການຮູ້ແຈ້ງອະຣິຍະສັດ ໔ ປະການ ມີໄດ້ພ້ອມກັບສຸກ ແລະໂສມະນັດທໍ່ນັ້ນ

ອະຣິຍະສັດ ໔ ປະການ ອັນໃດແດ່ ຄື

໑. ທຸກຂະອະຣິຍະສັດ
໒. ທຸກຂະສະມຸທະຍະອະຣິຍະສັດ
໓. ທຸກຂະນິໂຣທະອະຣິຍະສັດ
໔. ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມິນີປະຕິທາ ຢູ່ເທີ້ນ

**ສັດຕິສະຕະສູດທີ ໕ ຈົບ**

# ໗. ປານະສູດ

## ວ່າດ້ວຍອຸປະມາດ້ວຍຫຼາວສຽບສັດ

[໑໑໐໗] ພິກຂຸທັງຫຼາຍ ປຽບຄືບຸຣຸດເພິ່ງຕັດຫຍ້າ ໄມ້ຄ້ອນ ງ່າໄມ້ ແລະ ໃບໄມ້ໃນຊົມພູທະວີບນີ້ມາລວມກັນເປັນກອງດຽວກັນ ເມື່ອລວມເປັນກອງດຽວກັນແລ້ວ ເພິ່ງເຮັດໃຫ້ເປັນຫຼາວ ເມື່ອເຮັດໃຫ້ເປັນຫຼາວແລ້ວ ເພິ່ງສຽບສັດຂະໜາດໃຫຍ່ທີ່ມີຢູ່ໃນມະຫາສະມຸດເຂົ້າທີ່ຫຼາວຂະໜາດໃຫຍ່ ສຽບສັດຂະໜາດກາງທີ່ມີຢູ່ໃນມະຫາສະມຸດເຂົ້າທີ່ຫຼາວຂະໜາດກາງ ສຽບສັດຂະໜາດນ້ອຍທີ່ມີຢູ່ໃນມະຫາສະມຸດເຂົ້າທີ່ຫຼາວຂະໜາດນ້ອຍ ສັດຂະໜາດເຂື່ອງ ໃນມະຫາສະມຸດຍັງບໍ່ທັນໝົດ ຫຍ້າ ໄມ້ຄ້ອນ ງ່າໄມ້ ແລະ ໃບໄມ້ໃນຊົມພູທະວີບນີ້ເພິ່ງໝົດສິ້ນໄປກ່ອນ

ພິກຂຸທັງຫຼາຍ ການທີ່ຈະສຽບສັດຂະໜາດນ້ອຍໃນມະຫາສະມຸດ ເຊິ່ງມີຫຼາຍກວ່າສັດຂະໜາດເຂື່ອງນັ້ນເຂົ້າທີ່ຫຼາວ ບໍ່ແມ່ນເຮັດໄດ້ງ່າຍ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນໂຕມັນມີຂະໜາດນ້ອຍ ອຸປະມານີ້ສັນໃດ ອຸປະໄມກໍສັນນັ້ນ ອະບາຍກໍໃຫຍ່ຫຼາຍ ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິ ລຸດພົ້ນຈາກອະບາຍທີ່ໃຫຍ່ແນວນັ້ນແລ້ວ ຍ່ອມຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມິນີປະຕິທາ ຢູ່ເທີ້ນ

**ປານະສູດທີ ໗ ຈົບ**

# ໘. ປະຖົມສຸຣິຍະສູດ

## ວ່າດ້ວຍອຸປະມາດ້ວຍດວງອາທິດ ສູດທີ ໑

[໑໑໐໘] ພິກຂຸທັງຫຼາຍ ເມື່ອດວງອາທິດກຳລັງຈະອຸໄທ ຍ່ອມມີແສງອາລຸນຂຶ້ນມາ ກ່ອນເປັນບຸບພະນິມິດ ສັນໃດ ສຳມາທິດຖິກໍສັນນັ້ນຄື ເປັນໂຕນຳ ເປັນບຸບພະນິມິດ ເພື່ອຄວາມຕັດສະຣູ້ອະຣິຍະສັດ ໔ ປະການ ພິກຂຸຜູ້ມີສຳມາທິດຖິເພິ່ງຫວັງໄດ້ວ່າ ຈັກຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

**ປະຖົມສຸຣິຍະສູດທີ ໗ ຈົບ**

## ໘. ທຸຕິຍະສຸຣິຍະສູດ

### ວ່າດ້ວຍອຸປະມາດ້ວຍດວງອາທິດ ສູດທີ ໘

[໑໑໐໘] ພິກຂຸທັງຫຼາຍ ດວງຈັນ ແລະດວງອາທິດຍັງບໍ່ເກີດຂຶ້ນໃນໂລກຕາບໃດ ຄວາມສະຫວ່າງສະໄຫວເຈີດຈ້າກໍຍັງບໍ່ຜາກົດຕາບນັ້ນ ເວລານັ້ນ ມີແຕ່ຄວາມມືດມົນອົນທະການ ກາງເວັນແລະກາງຄືນບໍ່ຜາກົດ ເດືອນແລະເຄິ່ງເດືອນບໍ່ຜາກົດ ລະດູແລະປີກໍບໍ່ຜາກົດ

ແຕ່ເມື່ອໃດ ດວງຈັນແລະດວງອາທິດເກີດຂຶ້ນໃນໂລກ ເມື່ອນັ້ນ ຄວາມສະຫວ່າງສະໄຫວເຈີດຈ້າ ຍ່ອມຜາກົດ ເວລານັ້ນ ບໍ່ມີຄວາມມືດມົນອົນທະການ ກາງເວັນແລະກາງຄືນກໍຜາກົດ ເດືອນແລະເຄິ່ງເດືອນກໍຜາກົດ ລະດູແລະປີກໍຜາກົດ ສັນໃດ

ພິກຂຸທັງຫຼາຍ ຕະຖາຄົດອະຣະຫັນຕະ ສຳມາສຳພຸດທະເຈົ້າຍັງບໍ່ອຸບັດຂຶ້ນໃນໂລກຕາບໃດ ຄວາມສະຫວ່າງສະໄຫວເຈີດຈ້າກໍຍັງບໍ່ຜາກົດຕາບນັ້ນ ເວລານັ້ນ ມີແຕ່ຄວາມມືດມົນອົນທະການ ການບອກ ການສະແດງ ການບັນຍັດ ການແຕ່ງຕັ້ງ ການເປີດເຜີຍ ການຈຳແນກ ການເຮັດໃຫ້ງ່າຍເຊິ່ງອະຣິຍະສັດ ໔ ປະການ ກໍຍັງບໍ່ມີ

ແຕ່ເມື່ອໃດ ຕະຖາຄົດ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ອຸບັດຂຶ້ນໃນໂລກ ເມື່ອນັ້ນຄວາມສະຫວ່າງສະໄຫວເຈີດຈ້າກໍຜາກົດ ເວລານັ້ນບໍ່ມີຄວາມມືດມົນອະນະທະການ ການບອກການສະແດງ ການບັນຍັດ ການແຕ່ງຕັ້ງ ການເປີດເຜີຍ ການຈຳແນກ ການເຮັດໃຫ້ງ່າຍເຊິ່ງອະຣິຍະສັດ ໔ ປະການກໍຍ່ອມມີ ຄືກັນສັນນັ້ນ

ອະຣິຍະສັດ ໔ ປະການ ອັນໃດແດ່ ຄື

໑. ທຸກຂະອະຣິຍະສັດ
໒. ທຸກຂະສະມຸທະຍະອະຣິຍະສັດ
໓. ທຸກຂະນິໂຣທະອະຣິຍະສັດ
໔. ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມ

ເປັນຈິງວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມີນີປະຕິທາ ຢູ່ເທີ້ນ

**ທຸຕິຍະສຸຣິຍະສູດທີ ๓ ຈົບ**

# ໗. ອິນທະຂີລະສູດ

## ວ່າດ້ວຍອຸປະມາດ້ວຍເສົາເຂື່ອນທີ່ປັກໄວ້ເລິກ

[໑໑໐໗] ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ ສະມະນະຫຼືພາມເຫຼົ່ານັ້ນ ຍ່ອມແນມໜ້າຂອງສະມະນະຫຼືພາມເຫຼົ່າອື່ນດ້ວຍຄິດວ່າ ທ່ານຜູ້ນີ້ເມື່ອຮູ້ ກໍຮູ້ຈິງ ເມື່ອເຫັນ ກໍເຫັນຈິງ

ພິກຂຸທັງຫຼາຍ ປຽບຄື ປຸຍນຸ່ນ ຫຼື ປຸຍຝ້າຍເປັນຂອງເບົາ ມັກລອຍໄປຕາມລົມ ວາງໄວ້ເທິງພື້ນອັນຮາບພຽງ ລົມທາງທິດຕາເວັນອອກພັດປຸຍນຸ່ນ ຫຼື ປຸຍຝ້າຍນັ້ນ ໄປທາງທິດຕາເວັນຕົກ ລົມທາງທິດຕາເວັນຕົກພັດໄປທາງທິດຕາເວັນອອກ ລົມທາງທິດເໜືອພັດໄປທາງທິດໃຕ້ ລົມທາງທິດໃຕ້ພັດໄປທາງທິດເໜືອ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນປຸຍຝ້າຍເປັນຂອງເບົາ ອຸປະມານີ້ສັນໃດ ອຸປະໄມກໍຄືກັນສັນນັ້ນ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ ສະມະນະຫຼືພາມເຫຼົ່ານັ້ນ ຍ່ອມແນມໜ້າຂອງສະມະນະຫຼືພາມເຫຼົ່າອື່ນດ້ວຍຄິດວ່າ ທ່ານຜູ້ນີ້ເມື່ອຮູ້ ກໍຮູ້ຈິງ ເມື່ອເຫັນ ກໍເຫັນຈິງ

ຂໍ້ນັ້ນ ຍ້ອນເຫດໃດ?
ຍ້ອນບໍ່ເຫັນອະຣິຍະສັດ ໔ ປະການ

ພິກຂຸທັງຫຼາຍ ສ່ວນສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ ສະມະນະຫຼືພາມເຫຼົ່ານັ້ນ ບໍ່ຕ້ອງແນມໜ້າຂອງສະມະນະຫຼືພາມເຫຼົ່າອື່ນດ້ວຍຄິດວ່າ ທ່ານຜູ້ນີ້ເມື່ອຮູ້ ກໍຮູ້ຈິງ ເມື່ອເຫັນ ກໍເຫັນຈິງ

ພິກຂຸທັງຫຼາຍ ປຽບຄື ເສົາເຫຼັກຫຼືເສົາເຂື່ອນມີລຳຕົ້ນປັກໄວ້ເລິກ ຝັງໄວ້ດີ ບໍ່ໄຫວ ບໍ່ຄອນ ແມ່ນຫາກພາຍຸຝົນພັດມາຈາກທິດຕາເວັນອອກຢ່າງຮຸນແຮງກໍບໍ່ສັ່ນ ບໍ່ສະເທືອນ ບໍ່ສະທ້ານ ແມ່ນຫາກພາຍຸຝົນພັດມາຈາກທິດຕາເວັນຕົກ ຯລຯ ແມ່ນຫາກພາຍຸຝົນພັດມາຈາກທິດເໜືອ ຯລຯ ແມ່ນຫາກພາຍຸຝົນພັດມາຈາກທິດໃຕ້ຢ່າງຮຸນແຮງກໍບໍ່ສັ່ນ ບໍ່ສະເທືອນ ບໍ່ສະທ້ານ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນເສົາເຫຼັກ ຫຼື ເສົາເຂື່ອນມີລຳຕົ້ນປັກໄວ້ເລິກ ຝັງໄວ້ດີ ອຸປະມານີ້ສັນໃດ ອຸປະໄມກໍຄືກັນສັນນັ້ນ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ ສະມະນະຫຼືພາມເຫຼົ່ານັ້ນ ບໍ່ຕ້ອງແນມໜ້າຂອງສະມະນະຫຼືພາມເຫຼົ່າອື່ນດ້ວຍຄິດວ່າ ທ່ານຜູ້ນີ້ເມື່ອຮູ້ ກໍຮູ້ຈິງ ເມື່ອເຫັນ ກໍເຫັນຈິງ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນເຫັນອະຣິຍະສັດ ໔ ປະການດີແລ້ວ

ອະຣິຍະສັດ ໔ ປະການ ອັນໃດແດ່ ຄື

໑. ທຸກຂະອະຣິຍະສັດ
໒. ທຸກຂະສະມຸທະຍະອະຣິຍະສັດ
໓. ທຸກຂະນິໂຣທະອະຣິຍະສັດ
໔. ທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມີນີປະຕິທາ ຢູ່ເທີ້ນ

**ອິນທະຂີລະສູດທີ ໙ ຈົບ**

# ໑໐. ວາທັດຖິກະສູດ

## ວ່າດ້ວຍສະມະນະພາມຜູ້ຕ້ອງການໂຕ້ວາທະ

[໑໑໑໐] ພິກຂຸທັງຫຼາຍ ພິກຂຸອົງໃດອົງໜຶ່ງຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ ແມ່ນຫາກສະມະນະຫຼືພາມຜູ້ຕ້ອງການວາທະ ສະແຫວງຫາວາທະ ມາຈາກທິດຕາເວັນອອກດ້ວຍຄິດວ່າ ຈັກໂຕ້ວາທະກັບພິກຂຸນັ້ນ ເປັນໄປບໍ່ໄດ້ເລີຍ ທີ່ພິກຂຸອົງນັ້ນ ຈັກສະທົກສະທ້ານຫຼືຫວັ່ນໄຫວຕໍ່ສະມະນະ ຫຼື ພາມນັ້ນດ້ວຍສະຫະທຳ ແມ່ນຫາກສະມະນະ ຫຼື ພາມຜູ້ຕ້ອງການວາທະ ສະແຫວງຫາວາທະ ມາຈາກທິດຕາເວັນຕົກ ຯລຯ ແມ່ນຫາກສະມະນະ ຫຼື ພາມຜູ້ຕ້ອງການວາທະ ສະແຫວງຫາວາທະ ມາຈາກທິດເໜືອ ຯລຯ ແມ່ນຫາກສະມະນະ ຫຼື ພາມຜູ້ຕ້ອງການວາທະ ສະແຫວງຫາວາທະມາຈາກທິດໃຕ້ດ້ວຍ ຄິດວ່າ ຈັກໂຕ້ວາທະກັບພິກຂຸນັ້ນ ເປັນໄປບໍ່ໄດ້ເລີຍທີ່ພິກຂຸອົງນັ້ນຈັກສະທົກສະທ້ານຫຼືຫວັ່ນໄຫວຕໍ່ສະມະນະ ຫຼື ພາມນັ້ນ ດ້ວຍສະຫະທຳ

ພິກຂຸທັງຫຼາຍ ປຽບຄື ເສົາຫີນຍາວ ໑໖ ສອກ ເສົາຫີນນັ້ນມີລຳຕົ້ນປັກລົງ ໄປຂ້າງລຸ່ມ ໘ ສອກ ຢູ່ຂ້າງເທິງ ໘ ສອກ ແມ່ນຫາກພາຍຸຝົນພັດມາຈາກທິດຕາເວັນອອກຢ່າງຮຸນແຮງກໍບໍ່ສັ່ນ ບໍ່ສະເທືອນ ບໍ່ສະທ້ານ ແມ່ນຫາກພາຍຸຝົນພັດມາຈາກທິດຕາເວັນຕົກ ຯລຯ ແມ່ນຫາກພາຍຸຝົນພັດມາຈາກທິດເໜືອ ຯລຯ ແມ່ນຫາກພາຍຸຝົນພັດມາຈາກທິດໃຕ້ ຢ່າງຮຸນແຮງກໍບໍ່ສັ່ນ ບໍ່ສະເທືອນ ບໍ່ສະທ້ານ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນເສົາຫີນມີລຳຕົ້ນປັກໄວ້ເລິກ ຝັງໄວ້ດີ ອຸປະມານີ້ສັນໃດ ອຸປະໄມກໍຄືກັນສັນນັ້ນ ພິກຂຸອົງໃດອົງໜຶ່ງ ຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ ແມ່ນຫາກສະມະນະ ຫຼື ພາມຕ້ອງການວາທະ ສະແຫວງຫາວາທະ ມາຈາກທິດຕາເວັນອອກດ້ວຍຄິດວ່າ ຈັກໂຕ້ວາທະກັບພິກຂຸນັ້ນ ເປັນໄປບໍ່ໄດ້ເລີຍທີ່ພິກຂຸອົງນັ້ນຈັກສະທົກສະທ້ານຫຼືຫວັ່ນໄຫວຕໍ່ສະມະນະ ຫຼື ພາມນັ້ນດ້ວຍສະຫະທຳ ແມ່ນຫາກສະມະນະ ຫຼື ພາມຕ້ອງການວາທະ ສະແຫວງຫາວາທະ ມາຈາກທິດຕາເວັນຕົກ ຯລຯ ແມ່ນຫາກສະມະນະ ຫຼື ພາມຕ້ອງການວາທະ ສະແຫວງຫາວາທະ ມາຈາກທິດເໜືອ ຯລຯ ແມ່ນຫາກສະມະນະ ຫຼື ພາມຜູ້ຕ້ອງການວາທະ ສະແຫວງຫາວາທະມາຈາກທິດໃຕ້ດ້ວຍຄິດວ່າ ຈັກໂຕ້ວາທະກັບພິກຂຸນັ້ນ ເປັນໄປບໍ່ໄດ້ເລີຍທີ່ພິກຂຸອົງນັ້ນຈັກສະທົກສະທ້ານ ຫຼື ຫວັ່ນໄຫວຕໍ່ສະມະນະຫຼືພາມນັ້ນດ້ວຍສະຫະທຳ

ຂໍ້ນັ້ນ ຍ້ອນເຫດໃດ?
ຍ້ອນເຫັນອະຣິຍະສັດ ໔ ປະການດີແລ້ວ
ອະຣິຍະສັດ ໔ ປະການ ອັນໃດແດ່ ຄື

໑. ທຸກຂະອະຣິຍະສັດ
໒. ທຸກຂະສະມຸທະຍະອະຣິຍະສັດ
໓. ທຸກຂະນິໂຣທະອະຣິຍະສັດ
໔. ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມິນີປະຕິທາ ຢູ່ເທີ້ນ

**ວາທັດຖິກະສູດທີ ໑໐ ຈົບ**

**ສີສະປາວະນະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໕. ປະປາຕະວັກ

## ໝວດວ່າດ້ວຍເຫວຄືສັງສາຣະວັດ

# ໑. ໂລກະຈິນຕາສູດ

## ວ່າດ້ວຍການຄິດເລື້ອງໂລກ

[໑໑໑໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ເຂດເມືອງຣາດຊະຄຶ ໃນບ່ອນນັ້ນເອງ ພຣະຜູ້ມີພຣະພາກເຈົ້າ ຣັບສັ່ງຮຽກພິກຂຸທັງຫຼາຍມາດ້ວຍຕັດວ່າ ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ບຸຣຸດຄົນໜຶ່ງອອກຈາກເມືອງຣດາຊະຄຶເຂົ້າໄປສູ່ສະໂບກຂະຣະນີຊື່ ສຸມາຄະທາ ດ້ວຍຕັ້ງໃຈວ່າ ຈັກຄິດເລື້ອງໂລກ ແລ້ວນັ່ງຄິດເລື້ອງໂລກຢູ່ແຄມສະໂບກຂະຣະນີຊື່ ສຸມາຄະທາ ເຂົາໄດ້ເຫັນກອງທັບ ໔ ເຫຼົ່າເຂົ້າໄປສູ່ກ້ານບົວທີ່ແຄມສະໂບກຂະຣະນີຊື່ ສຸມາຄະທາ ແລ້ວຄິດດັ່ງນີ້ວ່າ ເຮົາຊື່ວ່າເປັນຄົນບ້າ ມີຈິດຟຸ້ງຊ່ານ ເຫັນສິ່ງທີ່ບໍ່ມີໃນໂລກ ຕໍ່ມາ ເຂົາເຂົ້າໄປສູ່ເມືອງບອກແກ່ໝູ່ມະຫາຊົນວ່າ ທ່ານທັງຫຼາຍ ຂ້າພະເຈົ້າເປັນຄົນບ້າ ມີຈິດຟຸ້ງຊ່ານ ເຫັນສິ່ງທີ່ບໍ່ມີໃນໂລກ

ໝູ່ມະຫາຊົນຖາມວ່າ ທ່ານຜູ້ຈະເລີນ ທ່ານເປັນບ້າແນວໃດ ມີຈິດຟຸ້ງຊ່ານແນວໃດ ແລະອັນໃດທີ່ທ່ານເຫັນແລ້ວແຕ່ບໍ່ມີໃນໂລກ

ທ່ານຜູ້ຈະເລີນທັງຫຼາຍ ຈະເລົ່າໃຫ້ຟັງ ຂ້າພະເຈົ້າອອກຈາກເມືອງຣາດຊະຄຶເຂົ້າໄປສູ່ສະໂບກຂະຣະນີຊື່ສຸມາຄະທາດ້ວຍຕັ້ງໃຈວ່າ ຈັກຄິດເລື້ອງໂລກ ແລ້ວນັ່ງຄິດເລື້ອງໂລກຢູ່ແຄມສະໂບກຂະຣະນີຊື່ສຸ ມາຄະທາ ຂ້າພະເຈົ້າໄດ້ເຫັນກອງທັບ ໔ ເຫຼົ່າເຂົ້າໄປສູ່ກ້ານບົວທີ່ແຄມສະໂບກຂະຣະນີ ຊື່ສຸ ມາຄະທາ ຂ້າພະເຈົ້າເປັນບ້າແນວນີ້ ມີຈິດຟຸ້ງຊ່ານແນວນີ້ ແລະສິ່ງນີ້ທີ່ຂ້າພະເຈົ້າເຫັນແລ້ວ ແຕ່ບໍ່ມີໃນໂລກ

ບຸຣຸດຜູ້ຈະເລີນ ທ່ານເປັນຄົນບ້າແນ່ ມີຈິດຟຸ້ງຊ່ານແນ່ ແລະສິ່ງນີ້ທີ່ທ່ານເຫັນແລ້ວແຕ່ບໍ່ມີໃນໂລກ

ພິກຂຸທັງຫຼາຍ ບຸຣຸດນັ້ນ ໄດ້ເຫັນສິ່ງນັ້ນຈິງຢ່າງແນ່ນອນ ບໍ່ແມ່ນບໍ່ຈິງ

ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ສົງຄາມລະຫວ່າງເທວະດາກັບອະສູນປະຊິດກັນ ໃນສົງຄາມນັ້ນ ພວກເທວະດາຊະນະ ພວກອະສູນປຣາໄຊ ພວກອະສູນທີ່ປຣາໄຊຢ້ານແລ້ວພາກັນເຂົ້າສູ່ບຸຣີອະສູນທາງກ້ານບົວເຮັດຈິດຂອງເທວະດາທັງຫຼາຍໃຫ້ງົງງວຍຢູ່

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍຢ່າຄິດເລື້ອງໂລກວ່າ ໂລກທ່ຽງ ຫຼື ໂລກບໍ່ທ່ຽງ ໂລກມີບ່ອນສຸດ ຫຼື ໂລກບໍ່ມີບ່ອນສຸດ ຊີວະກັບສະຣີຣະເປັນແນວດຽວກັນ ຫຼື ຊີວະກັບສະຣີຣະເປັນຄົນລະແນວກັນ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກແລະບໍ່ເກີດອີກ ຫຼື ຫຼັງຈາກຕາຍແລ້ວຕະຖາຄົດຈະວ່າເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນຄວາມຄິດນີ້ບໍ່ມີປະໂຫຍດ ບໍ່ແມ່ນຈຸດເລີ່ມຕົ້ນແຫ່ງພົມມະຈັນ ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ບໍ່ເປັນໄປເພື່ອຄາຍກຳໜັດ ບໍ່ເປັນໄປເພື່ອດັບ ບໍ່ເປັນໄປເພື່ອສະງົບລະງັບ ບໍ່ເປັນໄປເພື່ອຮູ້ຍິ່ງ ບໍ່ເປັນໄປເພື່ອຕັດສະຮູ້ ບໍ່ເປັນໄປເພື່ອນິບພານ

ທ່ານທັງຫຼາຍເມື່ອຈະຄິດ ເພິ່ງຄິດວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນຄວາມຄິດນີ້ມີປະໂຫຍດ ເປັນຈຸດເລີ່ມຕົ້ນແຫ່ງພົມມະຈັນ ເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມິນີປະຕິທາ ຢູ່ເທີ້ນ

**ໂລກະຈິນຕາສູດທີ ໑ ຈົບ**

# ໘. ປະປາຕະສູດ

## ວ່າດ້ວຍເຫວຄືສັງສາຣະວັດ

[໑໑໑໘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພູຄິດຊະກູດ ເຂດເມືອງຣາດຊະຄຶ ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ມາເທີ້ນ ພິກຂຸທັງຫຼາຍ ເຮົາຈັກເຂົ້າໄປສູ່ຈອມພູກັ້ນເຂດແດນເພື່ອພັກຜ່ອນກາງເວັນ

ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ຕໍ່ມາພຣະຜູ້ມີພຣະພາກເຈົ້າພ້ອມດ້ວຍພິກຂຸຈຳນວນຫຼາຍ ສະເດັດເຂົ້າໄປສູ່ຈອມພູກັ້ນເຂດແດນ ພິກຂຸອົງໜຶ່ງໄດ້ແນມເຫັນເຫວໃຫຍ່ເທິງຈອມພູກັ້ນເຂດແດນ ຈຶ່ງທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ເຫວນີ້ໃຫຍ່ນໍ ເຫວນີ້ໃຫຍ່ແທ້ນໍ ເຫວອື່ນທີ່ໃຫຍ່ກວ່າແລະເປັນຕາຢ້ານກວ່າເຫວນີ້ມີຢູ່ບໍ ຂ້ານ້ອຍ

ພຣະຜູ້ມີພຣະພາກເຈົ້າ ຕັດຕອບວ່າ ເຫວອື່ນທີ່ໃຫຍ່ ແລະເປັນຕາຢ້ານກວ່າເຫວນີ້ມີຢູ່ ພິກຂຸ

ຂ້າແດ່ ພຣະອົງຜູ້ຈະເລີນ ເຫວອື່ນທີ່ໃຫຍ່ກວ່າ ແລະເປັນຕາຢ້ານກວ່າເຫວນີ້ ເປັນແນວໃດນໍ? ຂ້ານ້ອຍ

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິທາ ສະມະນະຫຼືພາມເຫຼົ່ານັ້ນຍ່ອມຍິນດີຍິ່ງໃນສັງຂານທັງຫຼາຍທີ່ເປັນໄປເພື່ອຊາດ ຍິນດີຍິ່ງໃນສັງຂານທັງຫຼາຍທີ່ເປັນໄປເພື່ອຊະຣາ ຍິນດີຍິ່ງໃນສັງຂານທັງຫຼາຍທີ່ເປັນໄປເພື່ອມໍລະນະ ຍິນດີຍິ່ງໃນສັງຂານທັງຫຼາຍທີ່ເປັນໄປເພື່ອໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ

ສະມະນະຫຼືພາມເຫຼົ່ານັ້ນ ຜູ້ຍິນດີຍິ່ງແລ້ວໃນສັງຂານທັງຫຼາຍທີ່ເປັນໄປເພື່ອຊາດ ຜູ້ຍິນດີຍິ່ງແລ້ວໃນສັງຂານທັງຫຼາຍທີ່ເປັນໄປເພື່ອຊະຣາ ຜູ້ຍິນດີຍິ່ງແລ້ວໃນສັງຂານທັງຫຼາຍທີ່ເປັນໄປເພື່ອມໍລະນະ ຜູ້ຍິນດີຍິ່ງແລ້ວໃນສັງຂານທັງຫຼາຍທີ່ເປັນໄປເພື່ອໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ຍ່ອມປຸງແຕ່ງສັງຂານທັງຫຼາຍທີ່ເປັນໄປເພື່ອຊາດແດ່ ຍ່ອມປຸງແຕ່ງສັງຂານທັງຫຼາຍທີ່ເປັນໄປເພື່ອຊະຣາແດ່ ຍ່ອມປຸງແຕ່ງສັງຂານທັງຫຼາຍທີ່ເປັນໄປເພື່ອມໍລະນະແດ່ ຍ່ອມປຸງແຕ່ງສັງຂານທັງຫຼາຍທີ່ເປັນໄປເພື່ອໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດແດ່

ສະມະນະຫຼືພາມເຫຼົ່ານັ້ນ ເມື່ອປຸງແຕ່ງສັງຂານທັງຫຼາຍທີ່ເປັນໄປເພື່ອຊາດກໍດີ ເມື່ອປຸງແຕ່ງສັງຂານທັງຫຼາຍທີ່ເປັນໄປເພື່ອຊະຣາກໍດີ ເມື່ອປຸງແຕ່ງສັງຂານທັງຫຼາຍທີ່ເປັນໄປເພື່ອ

ມໍລະນະກໍດີ ເມື່ອປຸງແຕ່ງສັງຂານທັງຫຼາຍທີ່ເປັນໄປເພື່ອໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດກໍດີ ຍ່ອມຕົກໄປສູ່ເຫວຄືຊາດແດ່ ຕົກໄປສູ່ເຫວຄືຊະຣາແດ່ ຕົກໄປສູ່ເຫວຄືມໍລະນະແດ່ ຕົກໄປສູ່ເຫວຄືໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດແດ່ ເຮົາກ່າວວ່າ ສະມະນະຫຼືພາມເຫຼົ່ານັ້ນຍ່ອມບໍ່ພົ້ນຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ແລະຊື່ວ່າ ບໍ່ພົ້ນຈາກທຸກ

ພິກຂຸທັງຫຼາຍ ສ່ວນສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ ສະມະນະຫຼືພາມເຫຼົ່ານັ້ນຍ່ອມບໍ່ຍິນດີຍິ່ງໃນສັງຂານທັງຫຼາຍທີ່ເປັນໄປເພື່ອຊາດ ບໍ່ຍິນດີຍິ່ງໃນສັງຂານທັງຫຼາຍທີ່ເປັນໄປເພື່ອຊະຣາ ບໍ່ຍິນດີຍິ່ງໃນສັງຂານທັງຫຼາຍທີ່ເປັນໄປເພື່ອມໍລະນະ ບໍ່ຍິນດີຍິ່ງໃນສັງຂານທັງຫຼາຍທີ່ເປັນໄປເພື່ອໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ຍ່ອມບໍ່ປຸງແຕ່ງສັງຂານທັງຫຼາຍທີ່ເປັນໄປເພື່ອຊາດແດ່ ບໍ່ປຸງແຕ່ງສັງຂານທັງຫຼາຍທີ່ເປັນໄປເພື່ອຊະຣາແດ່ ບໍ່ປຸງແຕ່ງສັງຂານທັງຫຼາຍທີ່ເປັນໄປເພື່ອມໍລະນະແດ່ ບໍ່ປຸງແຕ່ງສັງຂານທັງຫຼາຍທີ່ເປັນໄປເພື່ອໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດແດ່

ສະມະນະຫຼືພາມເຫຼົ່ານັ້ນເມື່ອບໍ່ປຸງແຕ່ງສັງຂານທັງຫຼາຍທີ່ເປັນໄປເພື່ອຊາດກໍດີ ເມື່ອບໍ່ປຸງແຕ່ງສັງຂານທັງຫຼາຍທີ່ເປັນໄປເພື່ອຊະຣາກໍດີ ເມື່ອບໍ່ປຸງແຕ່ງສັງຂານທັງຫຼາຍທີ່ເປັນໄປເພື່ອມໍລະນະກໍດີ ເມື່ອບໍ່ປຸງແຕ່ງສັງຂານທັງຫຼາຍທີ່ເປັນໄປເພື່ອໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດກໍດີ ຍ່ອມບໍ່ຕົກໄປສູ່ເຫວຄືຊາດແດ່ ບໍ່ຕົກໄປສູ່ເຫວຄືຊະຣາແດ່ ບໍ່ຕົກໄປສູ່ເຫວຄືມໍລະນະແນ ບໍ່ຕົກໄປສູ່ເຫວຄືໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດແດ່ ເຮົາກ່າວວ່າ ສະມະນະຫຼືພາມເຫຼົ່ານັ້ນ ຍ່ອມພົ້ນຈາກຊາດ ຊະຣາ ມໍ ລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ແລະຊື່ວ່າ ພົ້ນຈາກທຸກ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ

**ປະປາຕະສູດທີ່ ໘ ຈົບ**

# ໙. ມະຫາປະຣິລາຫະສູດ

## ວ່າດ້ວຍນະຮົກຊື່ມະຫາປະຣິລາຫະ

[໑໑໑໙] ພິກຂຸທັງຫຼາຍ ນະຮົກຊື່ ມະຫາປະຣິລາຫະ (ມີຄວາມຮ້ອນຮົນຫຼາຍ) ມີຢູ່ ໃນນະຮົກນັ້ນ ບຸກຄົນເຫັນຮູບແນວໃດແນວໜຶ່ງທາງຕາໄດ້ ແຕ່ເຫັນໄດ້ສະເພາະຮູບທີ່ບໍ່ໜ້າປາຖະ

ໜາ ບໍ່ເຫັນຮູບທີ່ໜ້າປາຖະໜາ ເຫັນໄດ້ສະເພາະຮູບທີ່ບໍ່ໜ້າຕ້ອງການ ບໍ່ເຫັນຮູບທີ່ໜ້າຕ້ອງການ ເຫັນໄດ້ສະເພາະຮູບທີ່ບໍ່ໜ້າພໍໃຈ ບໍ່ເຫັນຮູບທີ່ໜ້າພໍໃຈ ຟັງສຽງແນວໃດແນວໜຶ່ງທາງຫູໄດ້ ຯລຯ ຖືກຕ້ອງໂຜດຖັບພະແນວໃດແນວໜຶ່ງທາງກາຍໄດ້ ຯລຯ ຮູ້ແຈ້ງທຳມາຣົມແນວໃດແນວໜຶ່ງທາງໃຈໄດ້ ແຕ່ຮູ້ແຈ້ງໄດ້ສະເພາະທຳມາຣົມທີ່ບໍ່ໜ້າປາຖະໜາ ບໍ່ຮູ້ແຈ້ງທຳມາຣົມທີ່ໜ້າປາຖະໜາ ຮູ້ແຈ້ງໄດ້ສະເພາະທຳມາຣົມທີ່ບໍ່ໜ້າຕ້ອງການ ບໍ່ຮູ້ແຈ້ງທຳມາຣົມທີ່ໜ້າຕ້ອງການ ຮູ້ແຈ້ງໄດ້ສະເພາະທຳມາຣົມທີ່ບໍ່ໜ້າພໍໃຈ ບໍ່ຮູ້ແຈ້ງທຳມາຣົມທີ່ໜ້າພໍໃຈ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພິກຂຸອົງໜຶ່ງໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຄວາມຮ້ອນຮົນນັ້ນຫຼາຍບໍ ຄວາມຮ້ອນຮົນນັ້ນຫຼາຍແທ້ບໍ ຄວາມຮ້ອນຮົນອື່ນທີ່ຫຼາຍກວ່າ ແລະເປັນຕາຢ້ານກວ່າຄວາມຮ້ອນຮົນນີ້ມີຢູ່ບໍ? ຂ້ານ້ອຍ

ຄວາມຮ້ອນຮົນອື່ນທີ່ຫຼາຍກວ່າ ແລະເປັນຕາຢ້ານກວ່າຄວາມຮ້ອນຮົນນີ້ມີຢູ່ ພິກຂຸ

ຂ້າແດ່ ພຣະອົງຜູ້ຈະເລີນ ຄວາມຮ້ອນຮົນອື່ນທີ່ຫຼາຍກວ່າແລະເປັນຕາຢ້ານກວ່າຄວາມຮ້ອນຮົນນີ້ ເປັນແນວໃດ?

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ

ສະມະນະຫຼືພາມເຫຼົ່ານັ້ນ ຜູ້ຍິນດີຍິ່ງແລ້ວໃນສັງຂານທັງຫຼາຍ ທີ່ເປັນໄປເພື່ອຊາດ ຯລຯ ຜູ້ຍິນດີຍິ່ງແລ້ວ ຯລຯ ຍ່ອມປຸງແຕ່ງ ຯລຯ ເມື່ອປຸງແຕ່ງແລ້ວ ຍ່ອມຮ້ອນຮົນຍ້ອນຄວາມຮ້ອນຮົນຄືຊາດແດ່ ຍ່ອມຮ້ອນຮົນຍ້ອນຄວາມຮ້ອນຮົນຄືຊະຣາແດ່ ຍ່ອມຮ້ອນຮົນຍ້ອນຄວາມຮ້ອນຮົນຄືມໍລະນະແດ່ ຍ່ອມຮ້ອນຮົນຍ້ອນຄວາມຮ້ອນຮົນຄືໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດແດ່ ເຮົາກ່າວວ່າ ສະມະນະຫຼືພາມເຫຼົ່ານັ້ນ ຍ່ອມບໍ່ພົ້ນຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ແລະຊື່ວ່າ ບໍ່ພົ້ນຈາກທຸກ

ພິກຂຸທັງຫຼາຍ ສ່ວນສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ

ສະມະນະຫຼືພາມເຫຼົ່ານັ້ນ ຍ່ອມບໍ່ຍິນດີຍິ່ງໃນສັງຂານທັງຫຼາຍທີ່ເປັນໄປເພື່ອຊາດ ຯລຯ ຜູ້ບໍ່ຍິນດີຍິ່ງແລ້ວ ຯລຯ ຍ່ອມບໍ່ປຸງແຕ່ງ ຯລຯ ເມື່ອບໍ່ປຸງແຕ່ງແລ້ວ ຍ່ອມບໍ່ຮ້ອນຮົນຍ້ອນຄວາມຮ້ອນຮົນຄືຊາດແດ່ ຍ່ອມບໍ່ຮ້ອນຮົນຍ້ອນຄວາມຮ້ອນຮົນ ຄື ຊະຣາແດ່ ຍ່ອມບໍ່ຮ້ອນຮົນຍ້ອນຄວາມຮ້ອນຮົນຄືມໍລະນະແດ່ ຍ່ອມບໍ່ຮ້ອນຮົນຍ້ອນຄວາມຮ້ອນຮົນຄືໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດແດ່ ເຮົາກ່າວວ່າ

ສະມະນະຫຼືພາມເຫຼົ່ານັ້ນ ຍ່ອມພົ້ນຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ແລະຊື່ວ່າ ພົ້ນຈາກທຸກ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມີນີປະຕິທາ ຢູ່ເທີ້ນ

**ມະຫາປະຣິລາຫະສູດທີ ໓ ຈົບ**

# ໔. ກູຕາຄາຣະສູດ

## ວ່າດ້ວຍອຸປະມາດ້ວຍເຮືອນຍອດ

[໑໑໑໔] ພິກຂຸທັງຫຼາຍ ເປັນໄປບໍ່ໄດ້ເລີຍທີ່ບຸກຄົນຈະເພິ່ງກ່າວແນວນີ້ວ່າ ເຮົາຍັງບໍ່ຮູ້ແຈ້ງທຸກຂະອະຣິຍະສັດ ຯລຯ ບໍ່ຮູ້ແຈ້ງທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດຕາມຄວາມເປັນຈິງ ແລ້ວຈັກເຮັດບ່ອນສຸດແຫ່ງທຸກໂດຍຖືກຕ້ອງໄດ້

ເປັນໄປບໍ່ໄດ້ເລີຍ ທີ່ບຸກຄົນຈະເພິ່ງກ່າວວ່າ ເຮົາຍັງບໍ່ໄດ້ສ້າງເຮືອນຊັ້ນລຸ່ມ ແລ້ວຈັກຕໍ່ຊັ້ນເທິງແຫ່ງເຮືອນຍອດ ແມ່ນສັນໃດ ເປັນໄປບໍ່ໄດ້ເລີຍທີ່ບຸກຄົນຈະເພິ່ງກ່າວວ່າ ເຮົາຍັງບໍ່ຮູ້ແຈ້ງທຸກຂະອະຣິຍະສັດ ຯລຯ ບໍ່ຮູ້ແຈ້ງທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດຕາມຄວາມເປັນຈິງ ແລ້ວຈັກເຮັດບ່ອນສຸດແຫ່ງທຸກໂດຍຖືກຕ້ອງໄດ້ ກໍຄືກັນສັນນັ້ນ

ແຕ່ເປັນໄປໄດ້ທີ່ບຸກຄົນຈະເພິ່ງກ່າວແນວນີ້ວ່າ ເຮົາໄດ້ຮູ້ແຈ້ງທຸກຂະອະຣິຍະສັດ ຯລຯ ໄດ້ຮູ້ແຈ້ງທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດຕາມຄວາມເປັນຈິງ ແລ້ວຈັກເຮັດບ່ອນສຸດແຫ່ງທຸກໂດຍຖືກຕ້ອງໄດ້

ເປັນໄປໄດ້ທີ່ບຸກຄົນຈະເພິ່ງກ່າວວ່າ ເຮົາໄດ້ສ້າງເຮືອນຊັ້ນລຸ່ມແລ້ວ ຈັກຕໍ່ຊັ້ນເທິງແຫ່ງເຮືອນຍອດ ແມ່ນສັນໃດ ເປັນໄປໄດ້ທີ່ບຸກຄົນຈະເພິ່ງກ່າວວ່າ ເຮົາໄດ້ຮູ້ແຈ້ງທຸກຂະອະຣິຍະສັດ ຯລຯ ໄດ້ຮູ້ແຈ້ງທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດຕາມຄວາມເປັນຈິງ ແລ້ວຈັກເຮັດບ່ອນສຸດແຫ່ງທຸກໂດຍຖືກຕ້ອງໄດ້ ກໍຄືກັນສັນນັ້ນ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມີນີປະຕິທາ ຢູ່ເທີ້ນ

**ກູຕາຄາຣະສູດທີ ໔ ຈົບ**

# ໕. ວາລະສູດ

## ວ່າດ້ວຍອຸປະມາດ້ວຍປາຍຂົນຊາຍ

[໑໑໑໕] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ກູຕາຄາຣະສາລາ ປ່າມະຫາວັນ ເຂດເມືອງເວສາລີ ເມື່ອໃນເວລາເຊົ້າ ທ່ານພຣະອານົນຄອງອັນຕະຣະວາສົກ ຖືບາດແລະຈີວອນ ເຂົ້າໄປບິນທະບາດຍັງເມືອງເວສາລີ ໄດ້ເຫັນລິດສະຫວີກຸມານຈຳນວນຫຼາຍເຝິກຍິງລູກສອນຢູ່ໃນສັນຖາຄານໃຫ້ເຂົ້າທາງປ່ອງໄລນ້ອຍ ໆ ຈາກບ່ອນໄກ ຕິດຕໍ່ກັນໄດ້ ບໍ່ຜິດພາດ ຈຶ່ງຄິດດັ່ງນີ້ວ່າ ລິດສະຫວີກຸມານເຫຼົ່ານີ້ເຝິກແລ້ວນໍ ເຝິກດີແລ້ວນໍ ທີ່ຍິງລູກສອນໃຫ້ເຂົ້າທາງປ່ອງໄລນ້ອຍ ໆ ຈາກບ່ອນໄກ ຕິດຕໍ່ກັນໄດ້ ບໍ່ຜິດພາດ

ທ່ານພຣະອານົນ ເມື່ອທ່ຽວບິນທະບາດໃນເມືອງເວສາລີແລ້ວ ກັບຈາກບິນທະບາດພາຍຫຼັງສັນພັດຕາຫານສຳເລັດແລ້ວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດ ເວລາເຊົ້າ ຂ້າພຣະອົງຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປບິນທະບາດຍັງເມືອງເວສາລີ ໄດ້ເຫັນລິດສະຫວີກຸມານຈຳນວນຫຼາຍເຝິກຍິງລູກສອນຢູ່ໃນສັນຖາຄານ ໃຫ້ເຂົ້າທາງປ່ອງໄລນ້ອຍ ໆ ຈາກບ່ອນໄກ ຕິດຕໍ່ກັນໄດ້ ບໍ່ຜິດພາດ ຈຶ່ງຄິດດັ່ງນີ້ວ່າ ລິດສະຫວີກຸມານເຫຼົ່ານີ້ເຝິກແລ້ວນໍ ເຝິກດີແລ້ວນໍ ທີ່ຍິງລູກສອນໃຫ້ເຂົ້າທາງປ່ອງໄລນ້ອຍ ໆ ຈາກທີ່ໄກ ຕິດຕໍ່ກັນໄດ້ ບໍ່ຜິດພາດ

ພຣະຜູ້ມີພຣະພາກເຈົ້າຕັດວ່າ ອານົນ ທ່ານຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຄື ຜູ້ທີ່ຍິງລູກສອນໃຫ້ເຂົ້າທາງປ່ອງໄລນ້ອຍ ໆ ຈາກບ່ອນໄກ ຕິດຕໍ່ກັນໄດ້ ບໍ່ຜິດພາດ ຫຼືຜູ້ທີ່ໃຊ້ປາຍຂົນຊາຍເຊິ່ງແບ່ງເປັນ ໗ ສ່ວງ ແທງເຂົ້າທີ່ປາຍຂົນຊາຍ ແນວໃດເຮັດໄດ້ຍາກ ກວ່າຫຼືເກີດໄດ້ຍາກກວ່າກັນ

ຜູ້ທີ່ໃຊ້ປາຍຂົນຊາຍເຊິ່ງແບ່ງເປັນ ໗ ສ່ວງ ແທງເຂົ້າທີ່ປາຍຂົນຊາຍນີ້ແລ ເຮັດ ໄດ້ຍາກກວ່າ ແລະເກີດໄດ້ຍາກກວ່າ ຂ້ານ້ອຍ

ອານົນ ແທ້ທີ່ຈິງເຫຼົ່າຊົນຜູ້ແທງຕະຫຼອດຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ ຊື່ວ່າແທງຕະຫຼອດສິ່ງທີ່ແທງຕະຫຼອດໄດ້ຍາກກວ່າ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມີນີປະຕິທາ ຢູ່ເທີ້ນ

**ວາລະສູດທີ ໕ ຈົບ**

# ៦. ອັນທະກາຣະສູດ

## ວ່າດ້ວຍຄວາມມືດຄືສັງສາຣະວັດ

[໑໑໑໖] ພິກຂຸທັງຫຼາຍ ໂລກັນຕະນະຣົກມີ ແຕ່ຄວາມທຸກມືດມົນອົນທະການ ມືດມົວເປັນໝອກ ສັດໃນນະຣົກນັ້ນ ບໍ່ໄດ້ຮັບປະໂຫຍດຈາກແສງສະຫວ່າງຂອງດວງຈັນແລະດວງອາທິດທີ່ມີລິດຫຼາຍ ມີອານຸພາບຫຼາຍ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພິກຂຸອົງໜຶ່ງໄດ້ທູນຖາມວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ຄວາມມືດນັ້ນຫຼາຍນໍ ຄວາມມືດນັ້ນຫຼາຍແທ້ນໍ ຄວາມມືດອື່ນທີ່ຫຼາຍກວ່າ ແລະເປັນຕາຢ້ານກວ່າຄວາມມືດນີ້ມີຢູ່ບໍ? ຂ້ານ້ອຍ

ພິກຂຸ ຄວາມມືດແນວອື່ນທີ່ຫຼາຍກວ່າ ແລະເປັນຕາຢ້ານກວ່າຄວາມມືດນີ້ມີຢູ່

ຂ້າແດ່ ພຣະອົງຜູ້ຈະເລີນ ຄວາມມືດແນວອື່ນທີ່ຫຼາຍກວ່າແລະເປັນຕາຢ້ານກວ່າຄວາມມືດນີ້ ເປັນແນວໃດ?

ພິກຂຸ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

ສະມະນະຫຼືພາມເຫຼົ່ານັ້ນ ຍິນດີຍິ່ງໃນສັງຂານທັງຫຼາຍທີ່ເປັນໄປເພື່ອຊາດ ຯລຯ ຜູ້ຍິນດີຍິ່ງແລ້ວ ຯລຯ ຍ່ອມປຸງແຕ່ງ ຯລຯ ເມື່ອປຸງແຕ່ງແລ້ວ ຍ່ອມຕົກໄປສູ່ຄວາມມືດຄືຊາດແດ່ ຕົກໄປສູ່ຄວາມມືດຄືຊະຣາແດ່ ຕົກໄປສູ່ຄວາມມືດຄືມໍລະນະແດ່ ຕົກໄປສູ່ຄວາມມືດຄືໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດແດ່ ເຮົາກ່າວວ່າ ສະມະນະຫຼືພາມເຫຼົ່ານັ້ນຍ່ອມບໍ່ພົ້ນຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ແລະຊື່ວ່າບໍ່ພົ້ນຈາກທຸກ

ພິກຂຸ ສ່ວນສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງຮູ້ແຈ້ງຕາມຄວາມເປັນຈິງ ວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ ສະມະນະຫຼືພາມເຫຼົ່ານັ້ນຍ່ອມບໍ່ຍິນດີຍິ່ງໃນສັງຂານທັງຫຼາຍທີ່ເປັນໄປເພື່ອຊາດ ຯລຯ ຜູ້ບໍ່ຍິນດີຍິ່ງແລ້ວ ຯລຯ ຍ່ອມບໍ່ປຸງແຕ່ງ ຯລຯ ເມື່ອບໍ່ປຸງແຕ່ງແລ້ວຍ່ອມບໍ່ຕົກໄປສູ່ຄວາມມືດຄືຊາດແດ່ ບໍ່ຕົກໄປສູ່ຄວາມມືດຄືຊະຣາແດ່ ບໍ່ຕົກໄປສູ່ຄວາມມືດຄືມໍລະນະແດ່ ບໍ່ຕົກໄປສູ່ຄວາມມືດຄືໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດແດ່ ເຮົາກ່າວວ່າ ສະມະນະຫຼືພາມເຫຼົ່ານັ້ນຍ່ອມພົ້ນຈາກຊາດ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ແລະຊື່ວ່າພົ້ນຈາກທຸກ

ພິກຂຸ ຍ້ອນເຫດນັ້ນ ທ່ານເພິ່ງທຳຄວາມພຽນເພື່ອຮູ້ແຈ້ງຕາມຄວາມເປັນຈິງ ວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ

**ອັນທະກາຣະສູດທີ ໓ ຈົບ**

# ກ. ປະຖົມສິກຄະລະຍຸຄະສູດ

## ວ່າດ້ວຍອຸປະມາດ້ວຍແອກມີຮູດຽວ ສູດທີ ໑

[໑໑໑ກ] ພິກຂຸທັງຫຼາຍ ປຽບຄື ບຸຣຸດເພິ່ງໂຍນແອກທີ່ມີຮູດຽວລົງໄປໃນມະຫາສະມຸດ ໃນມະຫາສະມຸດນັ້ນ ມີເຕົ່າຕາບອດຢູ່ໂຕໜຶ່ງ ມັນໂປ່ໂລ່ຂຶ້ນມາ ໑໐໐ ປີຕໍ່ຄັ້ງ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ເຕົ່າຕາບອດໂປ່ໂລ່ຂຶ້ນມາ ໑໐໐ ປີຕໍ່ຄັ້ງຈະສອດຄໍເຂົ້າໄປໃນແອກທີ່ມີຮູດຽວນັ້ນໄດ້ແດ່ບໍ?

ຂ້າແດ່ ພຣະອົງຜູ້ຈະເລີນ ຖ້າເວລາລ່ວງເລີຍໄປດົນ ບາງເທື່ອບາງເວລາມັນກໍຈະສອດຄໍເຂົ້າໄປໃນແອກນັ້ນໄດ້ແນ່

ພິກຂຸທັງຫຼາຍ ເຕົ່າຕາບອດນັ້ນ ເມື່ອໂປ່ໂລ່ຂຶ້ນມາ ໑໐໐ ປີຕໍ່ຄັ້ງ ຈະສອດຄໍເຂົ້າໄປໃນແອກທີ່ມີຮູດຽວນັ້ນຍັງໄວກວ່າ ແຕ່ເຮົາບໍ່ກ່າວວ່າຄົນພານຜູ້ຕົກໄປສູ່ວິນິບາດເວລາດຽວແລ້ວກັບໄດ້ເປັນມະນຸດອີກ (ຈະໄວກວ່ານັ້ນ)

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນໃນວິນິບາດນັ້ນ ບໍ່ມີການປະພຶດທຳ ການປະພຶດຊອບ ການທຳກຸສົນ ແລະການທຳບຸນ ໃນວິນິບາດນັ້ນ ມີແຕ່ການກັດກິນກັນເອງ ການກັດກິນຜູ້ມີກຳລັງນ້ອຍກວ່າ

ຂໍ້ນັ້ນ ຍ້ອນເຫດໃດ?

ຍ້ອນບໍ່ໄດ້ເຫັນອະຣິຍະສັດ ໔ ປະການ

ອະຣິຍະສັດ ໔ ປະການ ອັນໃດແດ່ ຄື

໑. ທຸກຂະອະຣິຍະສັດ
໒. ທຸກຂະສະມຸທະຍະອະຣິຍະສັດ
໓. ທຸກຂະນິໂຣທະອະຣິຍະສັດ
໔. ທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມິນີປະຕິທາ ຢູ່ເທີ້ນ

**ປະຖົມສິກຄະລະຍຸຄະສູດທີ ໗ ຈົບ**

# ໘. ທຸຕິຍະສິກຄະລະຍຸຄະສູດ

## ວ່າດ້ວຍອຸປະມາດ້ວຍແອກມີຮູດຽວ ສູດທີ ໘

[໑໑໑໘] ພິກຂຸທັງຫຼາຍ ປຽບຄື ມະຫາປະຖະພີນີ້ເນື່ອງເປັນອັນດຽວກັນ ບຸຣຸດເພິ່ງໂຍນແອກທີ່ມີຮູດຽວລົງເທິງມະຫາປະຖະພີນັ້ນ ລົມທາງທິດຕາເວັນອອກພັດແອກນັ້ນໄປທາງທິດຕາເວັນຕົກ ລົມທາງທິດຕາເວັນຕົກພັດໄປທາງທິດຕາເວັນອອກ ລົມທາງທິດເໜືອພັດໄປທາງທິດໃຕ້ ລົມທາງທິດໃຕ້ພັດໄປທາງທິດເໜືອ ເທິງມະຫາປະຖະພີນັ້ນມີເຕົ່າຕາບອດຢູ່ໂຕໜຶ່ງ ມັນໂປ່ໂລ່ຂຶ້ນມາ ໑໐໐ ປີຕໍ່ຄັ້ງ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ເຕົ່າຕາບອດໂປ່ໂລ່ຂຶ້ນມາ ໑໐໐ ປີຕໍ່ຄັ້ງ ຈະສອດຄໍເຂົ້າໄປໃນແອກທີ່ມີຮູດຽວນັ້ນໄດ້ແດ່ບໍ

ຂ້າແດ່ ພຣະອົງຜູ້ຈະເລີນ ຂໍ້ທີ່ເຕົ່າຕາບອດນັ້ນໂປ່ໂລ່ຂຶ້ນມາ ໑໐໐ ປີ ຕໍ່ຄັ້ງ ຈະສອດຄໍເຂົ້າໄປໃນແອກທີ່ມີຮູດຽວນັ້ນ ເປັນສິ່ງທີ່ເກີດຂຶ້ນໄດ້ຍາກ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍຄືກັນສັນນັ້ນ ການໄດ້ຄວາມເປັນມະນຸດກໍຍາກ ການທີ່ຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າອຸບັດຂຶ້ນໃນໂລກກໍຍາກ ການທີ່ທຳວິໄນທີ່ຕະຖາຄົດປະກາດແລ້ວຮຸ່ງເຮືອງໃນໂລກກໍຍາກ ບັດນີ້ເຕົ່ານັ້ນໄດ້ຄວາມເປັນມະນຸດນີ້ແລ້ວ ຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າອຸບັດຂຶ້ນແລ້ວໃນໂລກ ແລະທຳວິໄນທີ່ຕະຖາຄົດປະກາດແລ້ວກໍຮຸ່ງເຮືອງໃນໂລກ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

**ທຸຕິຍະສິກຄະລະຍຸຄະສູດທີ ໘ ຈົບ**

# ໙. ປະຖົມສິເນຣຸປັບພະຕະຣາຊະສູດ

## ວ່າດ້ວຍອຸປະມາດ້ວຍຂຸນເຂົາສິເນຣຸ ສູດທີ ໑

[໑໑໑໙] ພິກຂຸທັງຫຼາຍ ປຽບຄື ບຸຣຸດເພິ່ງເກັບກ້ອນຫີນຂະໜາດເມັດຖົ່ວຂຽວ ໗ ກ້ອນຂອງພູຫຼວງສິເນຣຸ ທ່ານທັງຫຼາຍ ຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ກ້ອນຫີນຂະໜາດ ເມັດຖົ່ວຂຽວ ໗ ກ້ອນທີ່ບຸຣຸດນັ້ນເກັບມາກັບພູຫຼວງສິເນຣຸ ແນວໃດ? ຈະຫຼາຍກວ່າກັນ

ຂ້າແດ່ ພຣະອົງຜູ້ຈະເລີນ ຂຸນເຂົາສິເນຣຸນີ້ແລຫຼາຍກວ່າ ກ້ອນຫີນຂະໜາດເມັດຖົ່ວຂຽວ ໗ ກ້ອນທີ່ບຸຣຸດນັ້ນເກັບມາມີພຽງເລັກໜ້ອຍ ກ້ອນຫີນຂະໜາດເມັດຖົ່ວຂຽວ ໗ ກ້ອນທີ່ບຸຣຸດນັ້ນເກັບມາ ເມື່ອທຽບກັບຂຸນເຂົາສິເນຣຸແລ້ວ ຄຳນວນບໍ່ໄດ້ ທຽບຄຽງກັນບໍ່ໄດ້ ຫຼື ບໍ່ເຖິງສ່ວນສ້ຽວ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍຄືກັນສັນນັ້ນ ບຸກຄົນຜູ້ເປັນອະຣິຍະສາວົກໃດຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ ທຸກທີ່ໝົດສິ້ນໄປຂອງບຸກຄົນຜູ້ເປັນອະຣິຍະສາວົກນັ້ນ ຜູ້ສົມບູນດ້ວຍທິດຖິ ຜູ້ຮູ້ຍິ່ງ ມີຫຼາຍກວ່າ ທີ່ເຫຼືອຢູ່ ມີປະມານໜ້ອຍ ເມື່ອທຽບກັບກອງທຸກ ເຊິ່ງມີຢູ່ກ່ອນທີ່ໝົດສິ້ນໄປແລ້ວ ຄຳນວນບໍ່ໄດ້ ທຽບຄຽງກັນບໍ່ໄດ້ ບໍ່ເຖິງສ່ວນສ້ຽວ ຢ່າງຫຼາຍມີໄດ້ພຽງ ໗ ຊາດ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມີນີປະຕິທາ ຢູ່ເທີ້ນ

**ປະຖົມສິເນຣຸປັບພະຕະຣາຊະສູດທີ ໙ ຈົບ**

## ໑໐. ທຸຕິຍະສິເນຣຸປັບພະຕະຣາຊະສູດ

### ວ່າດ້ວຍອຸປະມາດ້ວຍຂຸນເຂົາສິເນຣຸ ສູດທີ ໘

[໑໑໘໐] ພິກຂຸທັງຫຼາຍ ປຽບຄືຂຸນເຂົາສິເນຣຸໝົດສິ້ນໄປ ເຫຼືອກ້ອນຫີນ ຂະໜາດເມັດຖົ່ວຂຽວ ໗ ກ້ອນ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຂຸນເຂົາສິເນຣຸທີ່ໝົດສິ້ນໄປກັບກ້ອນຫີນຂະໜາດເມັດຖົ່ວຂຽວ ໗ ກ້ອນທີ່ເຫຼືອຢູ່ ແນວໃດຈະຫຼາຍກວ່າກັນ

ຂ້າແດ່ ພຣະອົງຜູ້ຈະເລີນ ຂຸນເຂົາສິເນຣຸທີ່ໝົດສິ້ນໄປນີ້ແລຫຼາຍກວ່າ ກ້ອນຫີນຂະໜາດເມັດຖົ່ວຂຽວ ໗ ກ້ອນທີ່ເຫຼືອຢູ່ ມີພຽງເລັກໜ້ອຍ ກ້ອນຫີນຂະໜາດເມັດຖົ່ວຂຽວ ໗ ກ້ອນທີ່ຍັງເຫຼືອຢູ່ ເມື່ອທຽບກັບຂຸນເຂົາສິເນຣຸທີ່ໝົດສິ້ນໄປແລ້ວ ຄຳນວນບໍ່ໄດ້ ທຽບຄຽງກັນບໍ່ໄດ້ ບໍ່ເຖິງສ່ວນສ້ຽວ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍຄືກັນສັນນັ້ນ ບຸກຄົນຜູ້ເປັນອະຣິຍະສາວົກໃດຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ ທຸກທີ່ໝົດສິ້ນໄປຂອງບຸກຄົນຜູ້ເປັນອະຣິຍະສາວົກນັ້ນ ຜູ້ສົມບູນດ້ວຍທິດຖິ ຜູ້ຮູ້ຍິ່ງ ມີຫຼາຍກວ່າ ທີ່ເຫຼືອຢູ່ ມີປະມານໜ້ອຍ ເມື່ອທຽບກັບກອງທຸກເຊິ່ງມີຢູ່ກ່ອນທີ່ໝົດສິ້ນໄປແລ້ວ ຄຳນວນບໍ່ໄດ້ ທຽບຄຽງກັນບໍ່ໄດ້ ບໍ່ເຖິງສ່ວນສ້ຽວ ຢ່າງຫຼາຍມີໄດ້ພຽງ ໗ ຊາດ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

**ທຸຕິຍະສິເນຣຸປັບພະຕະຣາຊະສູດທີ ໑໐ ຈົບ**

**ປະປາຕະວັກທີ ໕ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໘. ອະພິສະມະຍະວັກ

## ໝວດວ່າດ້ວຍການຮູ້ຍິ່ງ

# ໑. ນະຂະສິຂະສູດ

## ວ່າດ້ວຍອຸປະມາດ້ວຍຝຸ່ນທີ່ປາຍເລັບ

[໑໑໔໑] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງໃຊ້ປາຍພຣະນະຂາຊ້ອນຝຸ່ນຂຶ້ນມາເລັກໜ້ອຍ ແລ້ວຮັບສັ່ງຮຽກພິກຂຸທັງຫຼາຍມາຕັດຖາມວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຝຸ່ນເລັກໜ້ອຍນີ້ທີ່ເຮົາໃຊ້ປາຍເລັບຊ້ອນຂຶ້ນມາ ກັບແຜ່ນດິນໃຫຍ່ນີ້ ແນວໃດຈະຫຼາຍກວ່າກັນ

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ພຣະອົງຜູ້ຈະເລີນ ແຜ່ນດິນໃຫຍ່ນີ້ແລຫຼາຍກວ່າ ຝຸ່ນທີ່ພຣະອົງຊົງໃຊ້ປາຍພຣະນະຂາຊ້ອນຂຶ້ນມາມີພຽງເລັກໜ້ອຍ ຝຸ່ນເລັກໜ້ອຍທີ່ພຣະອົງຊົງໃຊ້ປາຍພຣະນະຂາຊ້ອນຂຶ້ນມາ ເມື່ອທຽບກັບແຜ່ນດິນໃຫຍ່ແລ້ວ ຄຳນວນບໍ່ໄດ້ ທຽບຄຽງກັນບໍ່ໄດ້ ບໍ່ເຖິງສ່ວນສ້ຽວ

ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ບຸກຄົນຜູ້ເປັນອະຣິຍະສາວົກໃດຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ ທຸກທີ່ໝົດສິ້ນໄປຂອງບຸກຄົນຜູ້ເປັນອະຣິຍະສາວົກນັ້ນ ຜູ້ສົມບູນດ້ວຍທິດຖິ ຜູ້ຮູ້ຍິ່ງ ມີຫຼາຍກວ່າ ທີ່ເຫຼືອຢູ່ ມີປະມານໜ້ອຍ ເມື່ອທຽບກັບກອງທຸກເຊິ່ງມີຢູ່ກ່ອນທີ່ໝົດສິ້ນໄປແລ້ວ ຄຳນວນບໍ່ໄດ້ ທຽບຄຽງກັນບໍ່ໄດ້ ບໍ່ເຖິງສ່ວນສ້ຽວຢ່າງຫຼາຍມີໄດ້ພຽງ ໗ ຊາດ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມິນີປະຕິທາ ຢູ່ເທີ້ນ

**ນະຂະສິຂະສູດທີ ໑ ຈົບ**

# ໘. ໂປກະຂະຣະນີສູດ

## ວ່າດ້ວຍອຸປະມາດ້ວຍນ້ຳໃນສະໂບກຂະຣະນີ

[໑໑໘໘] ພິກຂຸທັງຫຼາຍ ປຽບຄື ສະໂບກຂະຣະນີຍາວ ໕໐ ໂຍດ ກວ້າງ ໕໐ ໂຍດ ສູງ ໕໐ ໂຍດ ເຕັມດ້ວຍນ້ຳສະເໝີຝັ່ງ ກາດື່ມກິນໄດ້ ບຸຣຸດໃຊ້ປາຍຫຍ້າຄາ ຈຸ່ມນ້ຳຂຶ້ນຈາກສະໂບກຂະຣະນີນັ້ນ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ນ້ຳທີ່ບຸຣຸດໃຊ້ປາຍຫຍ້າຄາຈຸ່ມຂຶ້ນມາກັບນ້ຳໃນສະໂບກຂະຣະນີ ແນວໃດຈະຫຼາຍກວ່າກັນ

ຂ້າແດ່ ພຣະອົງຜູ້ຈະເລີນ ນ້ຳໃນສະໂບກຂະຣະນີນີ້ແລຫຼາຍກວ່າ ນ້ຳທີ່ບຸຣຸດໃຊ້ປາຍຫຍ້າຄາຈຸ່ມຂຶ້ນມາມີພຽງເລັກໜ້ອຍ ນ້ຳທີ່ບຸຣຸດໃຊ້ປາຍຫຍ້າຄາຈຸ່ມຂຶ້ນມາ ເມື່ອທຽບກັບນ້ຳໃນສະໂບກຂະຣະນີແລ້ວ ຄຳນວນບໍ່ໄດ້ ທຽບຄຽງກັນບໍ່ໄດ້ ບໍ່ເຖິງສ່ວນສ້ຽວ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມິນີປະຕິທາ ຢູ່ເທີ້ນ

**ໂປກະຂະຣະນີສູດທີ ໘ ຈົບ**

# ໙. ປະຖົມສຳເພດຊະສູດ

## ວ່າດ້ວຍອຸປະມາດ້ວຍນ້ຳທີ່ໄຫຼມາບັນຈົບກັນ ສູດທີ ໑

[໑໑໘໙] ພິກຂຸທັງຫຼາຍ ປຽບຄື ແມ່ນ້ຳໃຫຍ່ເຫຼົ່ານີ້ ຄື ແມ່ນ້ຳຄົງຄາ ແມ່ນ້ຳຍະມຸນາ

ແມ່ນ້ຳອະຈິຣະວະດີ ແມ່ນ້ຳສະຣະພູ ແມ່ນ້ຳມະຮີໄຫຼມາບັນຈົບກັນຢູ່ບ່ອນໃດ ບຸຣຸດ ຊ້ອນນ້ຳ ໒-໓ ຢົດຂຶ້ນມາຈາກບ່ອນນັ້ນ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ? ນ້ຳ ໒-໓ ຢົດທີ່ບຸຣຸດນັ້ນ ຊ້ອນຂຶ້ນມາກັບນ້ຳທີ່ໄຫຼມາບັນຈົບກັນ ແນວໃດຈະຫຼາຍກວ່າກັນ

ຂ້າແດ່ ພຣະອົງຜູ້ຈະເລີນ ນ້ຳທີ່ໄຫຼມາບັນຈົບກັນນີ້ແລຫຼາຍກວ່າ ນ້ຳ ໒-໓ ຢົດ ທີ່ບຸຣຸດນັ້ນຊ້ອນຂຶ້ນມາມີພຽງເລັກໜ້ອຍ ນ້ຳ ໒-໓ ຢົດທີ່ບຸຣຸດນັ້ນຊ້ອນຂຶ້ນມາ ເມື່ອທຽບກັບນ້ຳທີ່ໄຫຼມາປະຈົບກັນແລ້ວ ຄຳນວນບໍ່ໄດ້ ທຽບຄຽງກັນບໍ່ໄດ້ ບໍ່ເຖິງສ່ວນສ້ຽວ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ ທຸກ ໆລໆ ນີ້ ທຸກຂະນິໂຣທະຄາມິນີປະຕິທາ ຢູ່ເທີ້ນ

**ປະຖົມສຳເພດຊະສູດທີ ໓ ຈົບ**

# ໔. ທຸຕິຍະສຳເພດຊະສູດ

## ວ່າດ້ວຍອຸປະມາດ້ວຍນ້ຳທີ່ໄຫຼມາບັນຈົບກັນ ສູດທີ ໔

[໑໑໒໔] ພິກຂຸທັງຫຼາຍ ປຽບຄືແມ່ນ້ຳໃຫຍ່ເຫຼົ່ານີ້ ຄື ແມ່ນ້ຳຄົງຄາ ແມ່ນ້ຳຍະມຸນາ ແມ່ນ້ຳອະຈິຣະວະດີ ແມ່ນ້ຳສະຣະພູ ແມ່ນ້ຳມະຮີໄຫຼມາບັນຈົບກັນ ຢູ່ບ່ອນໃດ ນ້ຳໃນບ່ອນນັ້ນເພິ່ງໝົດສິ້ນໄປ ເຫຼືອນ້ຳຢູ່ ໒-໓ ຢົດ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ນ້ຳທີ່ໄຫຼມາບັນຈົບກັນເຊິ່ງໝົດສິ້ນໄປ ກັບນ້ຳ ໒-໓ ຢົດທີ່ເຫຼືອຢູ່ ແນວໃດຈະຫຼາຍກວ່າກັນ

ຂ້າແດ່ ພຣະອົງຜູ້ຈະເລີນ ນ້ຳທີ່ໄຫຼມາບັນຈົບກັນເຊິ່ງໝົດສິ້ນໄປນີ້ແລຫຼາຍກວ່າ ນ້ຳ ໒-໓ ຢົດທີ່ເຫຼືອຢູ່ມີພຽງເລັກໜ້ອຍ ນ້ຳ ໒-໓ ຢົດທີ່ເຫຼືອຢູ່ ເມື່ອທຽບກັບນ້ຳທີ່ໄຫຼມາບັນຈົບກັນເຊິ່ງໝົດສິ້ນໄປແລ້ວ ຄຳນວນບໍ່ໄດ້ ທຽບຄຽງກັນບໍ່ໄດ້ ບໍ່ເຖິງສ່ວນສ້ຽວ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ ທຸກ ໆລໆ ນີ້ ທຸກຂະນິໂຣທະຄາມິນີປະຕິທາ ຢູ່ເທີ້ນ

**ທຸຕິຍະສຳເພດຊະສູດທີ ໔ ຈົບ**

# ໕. ປະຖົມມະຫາປະຖະວີສູດ

## ວ່າດ້ວຍອຸປະມາດ້ວຍແຜ່ນດິນໃຫຍ່ ສູດທີ ໑

[໑໑໔໕] ພິກຂຸທັງຫຼາຍ ປຽບຄືບຸຣຸດເພິ່ງເກັບກ້ອນດິນຂະໜາດເມັດໝາກກະເບົາ ໗ ກ້ອນຈາກແຜ່ນດິນໃຫຍ່ ທ່ານທັງຫຼາຍ ຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ກ້ອນດິນຂະໜາດເມັດໝາກກະເບົາ ໗ ກ້ອນທີ່ບຸຣຸດນັ້ນເກັບມາກັບແຜ່ນດິນໃຫຍ່ນີ້ ແນວໃດຈະຫຼາຍກວ່າກັນ

ຂ້າແດ່ ພຣະອົງຜູ້ຈະເລີນ ແຜ່ນດິນໃຫຍ່ນີ້ແລຫຼາຍກວ່າ ກ້ອນດິນຂະໜາດເມັດໝາກກະເບົາ ໗ ກ້ອນທີ່ບຸຣຸດນັ້ນເກັບມາມີພຽງເລັກໜ້ອຍ ກ້ອນດິນຂະໜາດເມັດໝາກກະເບົາ ໗ ກ້ອນທີ່ບຸຣຸດນັ້ນເກັບມາ ເມື່ອທຽບກັບແຜ່ນດິນໃຫຍ່ແລ້ວ ຄຳນວນບໍ່ໄດ້ ທຽບຄຽງກັນບໍ່ໄດ້ ບໍເຖິງສ່ວນສ້ຽວ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມີນີປະຕິທາ ຢູ່ເທີ້ນ

**ປະຖົມມະຫາປະຖະວີສູດທີ ໕ ຈົບ**

# ໖. ທຸຕິຍະມະຫາປະຖະວີສູດ

## ວ່າດ້ວຍອຸປະມາດ້ວຍແຜ່ນດິນໃຫຍ່ ສູດທີ ໒

[໑໑໔໖] ພິກຂຸທັງຫຼາຍ ປຽບຄືແຜ່ນດິນໃຫຍ່ເພິ່ງໝົດສິ້ນໄປ ເຫຼືອແຕ່ ກ້ອນດິນຂະໜາດເມັດໝາກກະເບົາຢູ່ ໗ ກ້ອນ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ແຜ່ນດິນໃຫຍ່ທີ່ໝົດສິ້ນໄປກັບກ້ອນດິນຂະໜາດເມັດໝາກກະເບົາ ໗ ກ້ອນທີ່ເຫຼືອຢູ່ແນວໃດ? ຈະຫຼາຍກວ່າກັນ

ຂ້າແດ່ ພຣະອົງຜູ້ຈະເລີນ ແຜ່ນດິນໃຫຍ່ທີ່ໝົດສິ້ນໄປນີ້ແລ ຫຼາຍກວ່າ ກ້ອນດິນຂະໜາດເມັດໝາກກະເບົາ ໗ ກ້ອນທີ່ຍັງເຫຼືອຢູ່ມີພຽງເລັກໜ້ອຍ ກ້ອນດິນຂະໜາດເມັດໝາກກະເບົາ ໗ ກ້ອນທີ່ເຫຼືອຢູ່ ເມື່ອທຽບກັບແຜ່ນດິນໃຫຍ່ທີ່ໝົດສິ້ນໄປແລ້ວ ຄຳນວນບໍ່ໄດ້ ທຽບຄຽງກັນບໍ່ໄດ້ ບໍເຖິງສ່ວນສ້ຽວ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມີນີປະຕິທາ ຢູ່ເທີ້ນ

**ທຸຕິຍະມະຫາປະຖະວີສູດທີ ໖ ຈົບ**

# ໗. ປະຖົມມະຫາສະມຸດທະສູດ

## ວ່າດ້ວຍອຸປະມາດ້ວຍນ້ຳໃນມະຫາສະມຸດ ສູດທີ ໑

[໑໑໔໗] ພິກຂຸທັງຫຼາຍ ປຽບຄື ບຸຣຸດເພິ່ງຊ້ອນນ້ຳໃນມະຫາສະມຸດຂຶ້ນມາ ໔-໓ ຢົດ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ນ້ຳ ໔-໓ ຢົດທີ່ບຸຣຸດນັ້ນຊ້ອນຂຶ້ນມາກັບນ້ຳໃນມະຫາສະມຸດ ແນວໃດ? ຈະຫຼາຍກວ່າກັນ

ຂ້າແດ່ ພຣະອົງຜູ້ຈະເລີນ ນ້ຳໃນມະຫາສະມຸດນີ້ແລຫຼາຍກວ່າ ນ້ຳ ໔-໓ ຢົດທີ່ບຸຣຸດຊ້ອນຂຶ້ນມາມີພຽງເລັກໜ້ອຍ ນ້ຳ ໔-໓ ຢົດທີ່ບຸຣຸດນັ້ນຊ້ອນຂຶ້ນມາ ເມື່ອທຽບກັບນ້ຳໃນມະຫາສະມຸດແລ້ວ ຄຳນວນບໍ່ໄດ້ ທຽບຄຽງກັນບໍ່ໄດ້ ບໍ່ເຖິງສ່ວນສ້ຽວ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມີນີປະຕິທາ ຢູ່ເທີ້ນ

**ປະຖົມມະຫາສະມຸດທະສູດທີ ໗ ຈົບ**

# ໘. ທຸຕິຍະມະຫາສະມຸດທະສູດ

## ວ່າດ້ວຍອຸປະມາດ້ວຍນ້ຳໃນມະຫາສະມຸດ ສູດທີ ໔

[໑໑໔໘] ພິກຂຸທັງຫຼາຍ ປຽບຄືນ້ຳໃນມະຫາສະມຸດເພິ່ງໝົດສິ້ນໄປ ເຫຼືອ ນ້ຳຢູ່ ໔-໓ ຢົດ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ນ້ຳໃນມະຫາສະມຸດທີ່ໝົດສິ້ນໄປ ກັບນ້ຳ ໔-໓ ຢົດທີ່ຍັງເຫຼືອຢູ່ ແນວໃດ? ຈະຫຼາຍກວ່າກັນ

ຂ້າແດ່ ພຣະອົງຜູ້ຈະເລີນ ນ້ຳໃນມະຫາສະມຸດທີ່ໝົດສິ້ນໄປນີ້ແລຫຼາຍກວ່າ ນ້ຳ ໔-໓ ຢົດທີ່ເຫຼືອຢູ່ມີພຽງເລັກໜ້ອຍ ນ້ຳ ໔-໓ ຢົດທີ່ເຫຼືອຢູ່ ເມື່ອທຽບກັບນ້ຳໃນມະຫາສະມຸດທີ່ໝົດສິ້ນໄປແລ້ວ ຄຳນວນບໍ່ໄດ້ ທຽບຄຽງກັນບໍ່ໄດ້ ບໍ່ເຖິງສ່ວນສ້ຽວ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມີນີປະຕິທາ ຢູ່ເທີ້ນ

**ທຸຕິຍະມະຫາສະມຸດທະສູດທີ ໘ ຈົບ**

# ໙. ປະຖົມປັບພະຕູປະມະສູດ

## ວ່າດ້ວຍອຸປະມາດ້ວຍພູຫຼວງຫິມະພານ ສູດທີ ໑

[໑໑໘໙] ພິກຂຸທັງຫຼາຍ ປຽບຄື ບຸຣຸດເພິ່ງເກັບກ້ອນຫີນຂະໜາດເມັດຜັກກາດ ໗ ກ້ອນ ຂອງພູຫຼວງຫິມະພານ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ກ້ອນຫີນຂະໜາດເມັດຜັກກາດ ໗ ກ້ອນ ທີ່ບຸຣຸດນັ້ນເກັບມາກັບພູຫຼວງຫິມະພານ ແນວໃດ? ຈະຫຼາຍກວ່າກັນ

ຂ້າແດ່ ພຣະອົງຜູ້ຈະເລີນ ພູຫຼວງຫິມະພານນີ້ແລຫຼາຍກວ່າ ກ້ອນຫີນຂະໜາດເມັດຜັກກາດ ໗ ກ້ອນທີ່ບຸຣຸດເກັບມາ ມີພຽງເລັກໜ້ອຍ ກ້ອນຫີນຂະໜາດເມັດຜັກກາດ ໗ ກ້ອນທີ່ບຸຣຸດນັ້ນເກັບມາ ເມື່ອທຽບກັບພູຫຼວງຫິມະພານແລ້ວ ຄຳນວນບໍ່ໄດ້ ທຽບຄຽງກັນບໍ່ໄດ້ ບໍ່ເຖິງສ່ວນສ້ຽວ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມີນີປະຕິທາ ຢູ່ເທີ້ນ

**ປະຖົມປັບພະຕູປະມະສູດທີ ໙ ຈົບ**

# ໑໐. ທຸຕິຍະປັບພະຕູປະມະສູດ

## ວ່າດ້ວຍອຸປະມາດ້ວຍພູຫຼວງຫິມະພານ ສູດທີ ໒

[໑໑໙໐] ພິກຂຸທັງຫຼາຍ ປຽບຄື ພູຫຼວງຫິມະພານເພິ່ງໝົດສິ້ນໄປ ເຫຼືອແຕ່ກ້ອນຫີນຂະໜາດເມັດຜັກກາດຢູ່ ໗ ກ້ອນ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ພູຫຼວງຫິມະພານທີ່ໝົດສິ້ນໄປ ກັບກ້ອນຫີນຂະໜາດເມັດຜັກກາດ ໗ ກ້ອນທີ່ເຫຼືອ ຢູ່ ແນວໃດ? ຈະຫຼາຍກວ່າກັນ

ຂ້າແດ່ ພຣະອົງຜູ້ຈະເລີນ ພູຫຼວງຫິມະພານທີ່ໝົດສິ້ນໄປນີ້ແລຫຼາຍກວ່າ ກ້ອນຫີນຂະໜາດເມັດຜັກກາດ ໗ ກ້ອນທີ່ຍັງເຫຼືອຢູ່ ເມື່ອທຽບກັບພູຫຼວງຫິມະພານທີ່ໝົດສິ້ນໄປແລ້ວ ຄຳນວນບໍ່ໄດ້ ທຽບຄຽງກັນບໍ່ໄດ້ ບໍ່ເຖິງສ່ວນສ້ຽວ

ພິກຂຸທັງຫຼາຍ ອຸປະມານີ້ສັນໃດ ອຸປະໄມກໍຄືກັນສັນນັ້ນ ບຸກຄົນຜູ້ເປັນອະຣິຍະສາວົກໃດ ຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມີນີປະຕິປະທາ ທຸກທີ່ໝົດສິ້ນໄປ ຂອງບຸກຄົນຜູ້ເປັນອະຣິຍະສາວົກນັ້ນ ຜູ້ສົມບູນດ້ວຍທິດຖິ ຜູ້ຮູ້ຍິ່ງ ມີຫຼາຍກວ່າ ທີ່ເຫຼືອຢູ່ ມີປະມານໜ້ອຍ ເມື່ອທຽບກັບກອງທຸກເຊິ່ງມີຢູ່ກ່ອນທີ່ໝົດສິ້ນໄປແລ້ວ ຄຳນວນບໍ່ໄດ້ ທຽບຄຽງກັນບໍ່ໄດ້ ບໍ່ເຖິງສ່ວນສ້ຽວ ຢ່າງຫຼາຍມີໄດ້ພຽງ ໗ ຊາດ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຯລຯ ທຸກຂະນິໂຣທະຄາມິນີປະຕິປະທາ

**ທຸຕິຍະປັບພະຕູປະມະສູດທີ ໑໐ ຈົບ**

**ອະພິສະມະຍະວັກທີ ໖ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໗. ປະຖົມອາມະກະທັນຍະເປີຍຍາລະວັກ

## ໝວດວ່າດ້ວຍອາມະກະທັນຍະເປີຍຍາລະທີ ໑

## ໑. ອັນຍະຕະຣະສູດ

### ວ່າດ້ວຍສັດທີ່ກັບມາເກີດນອກຈາກມະນຸດ

[໑໑໖໑] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງໃຊ້ປາຍພຣະນະຂາຊ້ອນຝຸ່ນຂຶ້ນມາເລັກໜ້ອຍ ແລ້ວຮັບສັ່ງຮຽກພິກຂຸທັງຫຼາຍມາຕັດຖາມວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍ ຈະສຳຄັນຄວາມຂໍ້ນັ້ນວ່າແນວໃດ ຝຸ່ນເລັກໜ້ອຍທີ່ເຮົາໃຊ້ປາຍເລັບຊ້ອນຂຶ້ນມາກັບແຜ່ນດິນໃຫຍ່ນີ້ ແນວໃດຈະຫຼາຍກວ່າກັນ

ພິກຂຸທັງຫຼາຍ ທູນຕອບວ່າ ຂ້າແດ່ພຣະອົງຜູ້ຈະເລີນ ແຜ່ນດິນໃຫຍ່ນີ້ແລຫຼາຍກວ່າຝຸ່ນທີ່ພຣະອົງຊົງໃຊ້ປາຍພຣະນະຂາຊ້ອນຂຶ້ນມາ ຝຸ່ນເລັກໜ້ອຍທີ່ພຣະອົງຊົງໃຊ້ປາຍພຣະນະຂາຊ້ອນຂຶ້ນມາ ເມື່ອທຽບກັບແຜ່ນດິນໃຫຍ່ແລ້ວ ຄຳນວນບໍ່ໄດ້ ທຽບຄຽງກັນບໍ່ໄດ້ ບໍ່ເຖິງສ່ວນສ່ຽວ

ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທັງຫຼາຍທີ່ກັບມາເກີດໃນໝູ່ມະນຸດ ມີພຽງເລັກໜ້ອຍ ສ່ວນສັດທີ່ກັບມາເກີດນອກຈາກມະນຸດມີຈຳນວນຫຼາຍກວ່າ

ຂໍ້ນັ້ນ ຍ້ອນເຫດໃດ?
ຍ້ອນບໍ່ໄດ້ເຫັນອະຣິຍະສັດ ໔ ປະການ
ອະຣິຍະສັດ ໔ ປະການ ອັນໃດແດ່ ຄື

໑. ທຸກຂະອະຣິຍະສັດ
໒. ທຸກຂະສະມຸທະຍະອະຣິຍະສັດ
໓. ທຸກຂະນິໂຣທະອະຣິຍະສັດ
໔. ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ ທຸກ ຯລຯ ນີ້ ທຸກຂະນິໂຣທະຄາມິນີປະຕິທາ ຢູ່ເທີ້ນ

**ອັນຍະຕະຣະສູດທີ ໑ ຈົບ**

# ໒. ປັດຈັນຕະສູດ

## ວ່າດ້ວຍສັດທີ່ກັບມາເກີດໃນປັດຈັນຕະຊົນນະບົດ

[໑໑໓໒] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງໃຊ້ປາຍພຣະນະຂາຊ້ອນຝຸ່ນຂຶ້ນມາເລັກໜ້ອຍ ແລ້ວຮັບສັ່ງຮຽກພິກຂຸທັງຫຼາຍມາຕັດຖາມວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຝຸ່ນເລັກໜ້ອຍນີ້ທີ່ເຮົາໃຊ້ປາຍເລັບຊ້ອນຂຶ້ນມາກັບແຜ່ນດິນໃຫຍ່ນີ້ ແນວໃດຈະຫຼາຍກວ່າກັນ

ພິກຂຸທັງຫຼາຍທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ແຜ່ນດິນໃຫຍ່ນີ້ແລຫຼາຍກວ່າ ຝຸ່ນທີ່ພຣະອົງຊົງໃຊ້ປາຍພຣະນະຂາຊ້ອນຂຶ້ນມາມີພຽງເລັກໜ້ອຍ ຝຸ່ນເລັກໜ້ອຍທີ່ພຣະອົງຊົງໃຊ້ປາຍພຣະນະຂາຊ້ອນຂຶ້ນມາ ເມື່ອທຽບກັບແຜ່ນດິນໃຫຍ່ແລ້ວ ຄຳນວນບໍ່ໄດ້ ທຽບຄຽງກັນບໍ່ໄດ້ ບໍ່ເຖິງສ່ວນສ້ຽວ

ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ກັບມາເກີດໃນມັດຊິມະຊົນນະບົດມີພຽງເລັກໜ້ອຍ ສ່ວນສັດທີ່ກັບມາເກີດໃນປັດຈັນຕະຊົນນະບົດໃນໝູ່ຊາວມິລັກຂະຜູ້ໂງ່ຈ້າ ມີຈຳນວນຫຼາຍກວ່າ ຯລຯ

**ປັດຈັນຕະສູດທີ ໒ ຈົບ**

# ໓. ປັນຍາສູດ

## ວ່າດ້ວຍສັດທີ່ມີປັນຍາຈັກຂຸ

[໑໑໓໓] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ປະກອບດ້ວຍປັນຍາຈັກຂຸ ແນວປະເສີດມີຈຳນວນໜ້ອຍ ສ່ວນສັດທີ່ຕົກຢູ່ໃນອະວິດຊາ ລຸ້ມຫຼົງ ມີຈຳນວນຫຼາຍກວ່າ ຯລຯ

**ປັນຍາສູດທີ ໓ ຈົບ**

# ໔. ສຸຣາເມຣະຍະສູດ

## ວ່າດ້ວຍສັດທີ່ເວັ້ນຂາດຈາກການດື່ມສຸຣາແລະເມໄຣ

[໑໑໓໔] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເວັ້ນຂາດຈາກການດື່ມນ້ຳເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ເວັ້ນຂາດຈາກການດື່ມນ້ຳເມົາຄືສຸຣາ ແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດມີຈຳນວນຫຼາຍກວ່າ ຯລຯ

**ສຸຣາເມຣະຍະສູດທີ ໔ ຈົບ**

# ໕. ໂອທະກະສູດ

## ວ່າດ້ວຍສັດທີ່ເກີດໃນນ້ຳ

[໑໑໓໕] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເກີດເທິງບົກມີຈຳນວນໜ້ອຍ ສ່ວນສັດທີ່ເກີດໃນນ້ຳມີຈຳນວນຫຼາຍກວ່າ ຂໍ້ນັ້ນ ຍ້ອນເຫດໃດ ຯລຯ

**ໂອທະກະສູດທີ ໕ ຈົບ**

# ໖. ມັດເຕີຍຍະສູດ

## ວ່າດ້ວຍສັດທີ່ເກື້ອກູນແກ່ມານດາ

[໑໑໓໖] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເກື້ອກູນແກ່ມານດາ

ມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ເກື້ອກູນແກ່ມານດາມີຈຳນວນຫຼາຍກວ່າ ຯລຯ

**ມັດເຕີຍຍະສູດທີ ໖ ຈົບ**

# ໗. ເປດເຕີຍຍະສູດ

## ວ່າດ້ວຍສັດທີ່ເກື້ອກູນແກ່ບິດາ

[໑໑໖໗] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເກື້ອກູນແກ່ບິດາມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ເກື້ອກູນແກ່ບິດາມີຈຳນວນຫຼາຍກວ່າ ຯລຯ

**ເປດເຕີຍຍະສູດທີ ໗ ຈົບ**

# ໘. ສາມັນຍະສູດ

## ວ່າດ້ວຍສັດທີ່ເກື້ອກູນແກ່ສະມະນະ

[໑໑໖໘] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເກື້ອກູນແກ່ສະມະນະມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ເກື້ອກູນແກ່ສະມະນະມີຈຳນວນຫຼາຍກວ່າ ຯລຯ

**ສາມັນຍະສູດທີ ໘ ຈົບ**

# ໙. ພົມມັນຍະສູດ

## ວ່າດ້ວຍສັດທີ່ເກື້ອກູນແກ່ພາມ

[໑໑໖໙] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເກື້ອກູນແກ່ພາມມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ເກື້ອກູນແກ່ພາມມີຈຳນວນຫຼາຍກວ່າ ຯລຯ

**ພົມມັນຍະສູດທີ ໙ ຈົບ**

# ໑໐. ປາຈາຍິກະສູດ

## ວ່າດ້ວຍສັດທີ່ອ່ອນນ້ອມຕໍ່ຜູ້ຈະເລີນ

[໑໑໘໐] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ອ່ອນນ້ອມຕໍ່ບຸກຄົນຜູ້ຈະເລີນບ່ອນສຸດໃນຕະກູນມີຈໍານວນໜ້ອຍ ສ່ວນສັດທີ່ບໍ່ອ່ອນນ້ອມຕໍ່ບຸກຄົນຜູ້ຈະເລີນບ່ອນສຸດໃນຕະກູນມີຈໍານວນຫຼາຍກວ່າ

**ປາຈາຍິກະສູດທີ ໑໐ ຈົບ**

**ປະຖົມອາມະກະທັນຍະເປີຍຍາລະວັກທີ ໗ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໙. ທຸຕິຍະອາມະກະທັນຍະເປີຍຍາລະວັກ

## ໝວດວ່າດ້ວຍອາມະກະທັນຍະເປີຍຍາລະທີ ໘

# ໑. ປານາຕິປາຕະສູດ

## ວ່າດ້ວຍສັດທີ່ເວັ້ນຂາດຈາກການຂ້າສັດ

[໑໑໘໑] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເວັ້ນຂາດຈາກການຂ້າສັດມີຈໍານວນໜ້ອຍ ສ່ວນສັດທີ່ບໍ່ເວັ້ນຂາດຈາກການຂ້າສັດມີຈໍານວນຫຼາຍກວ່າ ຂໍ້ນັ້ນຍ້ອນເຫດໃດ ຯລຯ

**ປານາຕິປາຕະສູດທີ ໑ ຈົບ**

# ໘. ອະທິນນາທານະສູດ

## ວ່າດ້ວຍສັດທີ່ເວັ້ນຂາດຈາກການລັກຊັບ

[໑໑໕໘] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເວັ້ນຂາດຈາກການລັກຊັບມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ເວັ້ນຂາດຈາກການລັກຊັບມີຈຳນວນຫຼາຍກວ່າ ຯລຯ

**ອະທິນນາທານະສູດທີ ໘ ຈົບ**

# ໙. ກາເມສຸມິດສາຈາຣະສູດ

## ວ່າດ້ວຍສັດທີ່ເວັ້ນຂາດຈາກການປະພຶດຜິດໃນກາມ

[໑໑໕໙] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເວັ້ນຂາດຈາກການປະພຶດຜິດໃນກາມມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ເວັ້ນຂາດຈາກການປະພຶດຜິດໃນກາມ ມີຈຳນວນຫຼາຍກວ່າ ຯລຯ

**ກາເມສຸມິດສາຈາຣະສູດທີ ໙ ຈົບ**

# ໔. ມຸສາວາທະສູດ

## ວ່າດ້ວຍສັດທີ່ເວັ້ນຂາດຈາກການເວົ້າຕົວະ

[໑໑໕໔] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເວັ້ນຂາດຈາກການເວົ້າຕົວະມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ເວັ້ນຂາດຈາກການເວົ້າຕົວະມີຈຳນວນຫຼາຍກວ່າ ຯລຯ

**ມຸສາວາທະສູດທີ ໔ ຈົບ**

# ໕. ເປສຸນຍະສູດ

## ວ່າດ້ວຍສັດທີ່ເວັ້ນຂາດຈາກຄຳສັບສໍ່

[໑໑໕໕] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເວັ້ນຂາດຈາກຄຳສັບສໍ່ມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ເວັ້ນຂາດຈາກຄຳສັບສໍ່ມີຈຳນວນຫຼາຍກວ່າ ຯລຯ

**ເປສຸນຍະສູດທີ ໕ ຈົບ**

## ໖. ຜະຣຸສະວາຈາສູດ

### ວ່າດ້ວຍສັດທີ່ເວັ້ນຂາດຈາກຄຳຫຍາບ

[໑໑໘໖] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເວັ້ນຂາດຈາກຄຳຫຍາບ ມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ເວັ້ນຂາດຈາກຄຳຫຍາບມີຈຳນວນຫຼາຍກວ່າ ຯລຯ

**ຜະຣຸສະວາຈາສູດທີ ໖ ຈົບ**

## ໗. ສຳຜັບປະລາປະສູດ

### ວ່າດ້ວຍສັດທີ່ເວັ້ນຂາດຈາກຄຳບໍ່ມີສາຣະ

[໑໑໘໗] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເວັ້ນຂາດຈາກຄຳບໍ່ມີສາຣະມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ເວັ້ນຂາດຈາກຄຳບໍ່ມີສາຣະມີຈຳນວນຫຼາຍກວ່າ ຯລຯ

**ສຳຜັບປະລາປະສູດທີ ໗ ຈົບ**

## ໘. ພີຊະຄາມະສູດ

### ວ່າດ້ວຍສັດທີ່ເວັ້ນຂາດຈາກການພາກພີຊະຄາມແລະພູຕະຄາມ

[໑໑໘໘] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເວັ້ນຂາດຈາກການພາກພີຊະຄາມແລະພູຕະຄາມມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ເວັ້ນຂາດຈາກການພາກພີຊະຄາມ ແລະພູຕະຄາມມີຈຳນວນຫຼາຍກວ່າ ຯລຯ

**ພີຊະຄາມະສູດທີ ໘ ຈົບ**

## ໙. ວິກາລະໂພຊະນະສູດ

### ວ່າດ້ວຍສັດທີ່ເວັ້ນຂາດຈາກການບໍຣິໂພກອາຫານໃນເວລາວິການ

[໑໑໘໙] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເວັ້ນຂາດຈາກການບໍຣິໂພກອາຫານໃນເວລາວິການມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ເວັ້ນຂາດຈາກການບໍຣິໂພກອາຫານໃນເວລາວິການມີຈຳນວນຫຼາຍກວ່າ ຯລຯ

**ວິກາລະໂພຊະນະສູດທີ ໙ ຈົບ**

# ໑໐. ຄັນທະວິເລປະນະສູດ

## ວ່າດ້ວຍສັດທີ່ເວັ້ນຂາດຈາກຂອງຫອມແລະເຄື່ອງລູບທາ

[໑໑໕໐] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເວັ້ນຂາດຈາກການທັດຊົງ ປະດັບຕົກແຕ່ງຮ່າງກາຍດ້ວຍພວງດອກໄມ້ຂອງຫອມ ແລະເຄື່ອງຕົກແຕ່ງຜິວອັນເປັນ ລັກສະນະແຫ່ງການແຕ່ງໂຕມີຈຳນວນໜ້ອຍ ສ່ວນສັດຜູ້ບໍ່ງົດເວັ້ນຈາກການທັດຊົງ ປະດັບ ຕົກແຕ່ງຮ່າງກາຍດ້ວຍດອກໄມ້ ຂອງຫອມ ແລະເຄື່ອງຕົກແຕ່ງຜິວ ອັນເປັນລັກສະນະແຫ່ງການແຕ່ງໂຕ ມີຈຳນວນຫຼາຍກວ່າ

**ຄັນທະວິເລປະນະສູດທີ ໑໐ ຈົບ**

**ທຸຕິຍະອາມະກະທັນຍະເປີຍຍາລະວັກທີ ໙ ຈົບ**

### ລວມພຣະສູດທີ່ມີໃນວັກນີ້ ຄື



# ໙. ຕະຕິຍະອາມະກະທັນຍະເປີຍຍາລະວັກ

## ໝວດວ່າດ້ວຍອາມະກະທັນຍະເປີຍຍາລະທີ ໓

# ໑. ນັດຈະຄີຕະສູດ

## ວ່າດ້ວຍສັດທີ່ເວັ້ນຂາດຈາກການຟ້ອນລຳຂັບຮ້ອງ

[໑໑໕໑] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເວັ້ນຂາດຈາກການຟ້ອນລຳ ຂັບຮ້ອງເສບດົນຕີ ແລະເບິ່ງການລະຫລິ້ນອັນເປັນຂ້າເສີກແກ່ກຸສົນມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ເວັ້ນ

ຂາດຈາກການຟ້ອນລຳ ຂັບຮ້ອງ ເສບດົນຕີ ແລະເບິ່ງການລະຫລິ້ນອັນເປັນຂ້າເສິກແກ່ກຸສົນມີຈຳນວນຫຼາຍກວ່າ ຯລຯ

**ນັດຈະຄີຕະສູດທີ ໑ ຈົບ**

## ໘. ອຸດຈາສະຍະນະສູດ

## ວ່າດ້ວຍສັດທີ່ເວັ້ນຂາດຈາກບ່ອນນອນສູງໃຫຍ່

[໑໑໕໘] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເວັ້ນຂາດຈາກບ່ອນນອນສູງໃຫຍ່ມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ເວັ້ນຂາດຈາກບ່ອນນອນສູງໃຫຍ່ມີຈຳນວນຫຼາຍກວ່າ ຯລຯ

**ອຸດຈາສະຍະນະສູດທີ ໘ ຈົບ**

## ໙. ຊາຕະຣູປະຣະຊະຕະສູດ

## ວ່າດ້ວຍສັດທີ່ເວັ້ນຂາດຈາກການຄຳແລະເງິນ

[໑໑໕໙] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເວັ້ນຂາດຈາກການຄຳແລະເງິນມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ເວັ້ນຂາດຈາກການຄຳແລະເງິນມີຈຳນວນຫຼາຍກວ່າ ຯລຯ

**ຊາຕະຣູປະຣະຊະຕະສູດທີ ໙ ຈົບ**

## ໔. ອາມະກະທັນຍະສູດ

## ວ່າດ້ວຍສັດທີ່ເວັ້ນຂາດຈາກການຮັບທັນຍາຫານດິບ

[໑໑໕໔] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເວັ້ນຂາດຈາກການຮັບທັນຍາຫານດິບມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ເວັ້ນຂາດຈາກການຮັບທັນຍາຫານດິບມີຈຳນວນຫຼາຍກວ່າ ຯລຯ

**ອາມະກະທັນຍະສູດທີ ໔ ຈົບ**

## ໕. ອາມະກະມັງສະສູດ

## ວ່າດ້ວຍສັດທີ່ເວັ້ນຂາດຈາກການຮັບຊີ້ນດິບ

[໑໑໕໕] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເວັ້ນຂາດຈາກການຮັບຊີ້ນດິບມີຈຳນວນ

ໜ້ອຍ ສ່ວນສັດທີ່ບໍ່ເວັ້ນຂາດຈາກການຮັບຊີ້ນດິບມີຈຳນວນຫຼາຍກວ່າ ฯລฯ

**ອາມະກະມັງສະສູດທີ 5 ຈົບ**

## ໖. ກຸມາຣິກະສູດ
## ວ່າດ້ວຍສັດທີ່ເວັ້ນຂາດຈາກການຮັບສະຕີແລະກຸມາຣີ

[໑໑໕໖] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເວັ້ນຂາດຈາກການຮັບສະຕີແລະກຸມາຣີມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ເວັ້ນຂາດຈາກການຮັບສະຕີແລະກຸມາຣີມີຈຳນວນ ຫຼາຍກວ່າ ฯລฯ

**ກຸມາຣິກະສູດທີ ໖ ຈົບ**

## ໗. ທາສີທາສະສູດ
## ວ່າດ້ວຍສັດທີ່ເວັ້ນຂາດຈາກການຮັບຂ້າທາດຍິງແລະຂ້າທາດຊາຍ

[໑໑໕໗] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເວັ້ນຂາດຈາກການຮັບຂ້າທາດຍິງແລະຂ້າທາດຊາຍມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ເວັ້ນຂາດຈາກການຮັບຂ້າທາດຍິງ ແລະຂ້າທາດຊາຍມີຈຳນວນຫຼາຍກວ່າ ฯລฯ

**ທາສີທາສະສູດທີ ໗ ຈົບ**

## ໘. ອະເຊລະກະສູດ

## ວ່າດ້ວຍສັດທີ່ເວັ້ນຂາດຈາກການຮັບແບ້ແລະແກະ

[໑໑໕໘] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເວັ້ນຂາດຈາກການຮັບແບ້ ແລະແກະມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ເວັ້ນຂາດຈາກການຮັບແບ້ແລະແກະມີຈຳນວນຫຼາຍກວ່າ ฯລฯ

**ອະເຊລະກະສູດທີ ໘ ຈົບ**

## ໙. ກຸກກຸຕະສູກະຣະສູດ
## ວ່າດ້ວຍສັດທີ່ເວັ້ນຂາດຈາກການຮັບໄກ່ແລະໝູ

[໑໑໕໙] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເວັ້ນຂາດຈາກການຮັບໄກ່ແລະໝູມີ

ຈຳນວນໜ້ອຍ ສ່ວນສັດທີ່ບໍ່ເວັ້ນຂາດຈາກການຮັບໄກ່ ແລະໝູມີຈຳນວນຫຼາຍກວ່າ ໆລໆ

**ກຸກກຸຕະສູກະຣະສູດທີ ໙ ຈົບ**

## ໑໐. ຫັດຖິຄະວັດສະສູດ

### ວ່າດ້ວຍສັດທີ່ເວັ້ນຂາດຈາກການຮັບຊ້າງ ງົວ ມ້າ

[໑໑໗໐] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເວັ້ນຂາດຈາກການຮັບຊ້າງ ງົວ ມ້າ ແລະລາມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ເວັ້ນຂາດຈາກການຮັບຊ້າງ ງົວ ມ້າ ແລະລາມີຈຳນວນຫຼາຍກວ່າ ໆລໆ

**ຫັດຖິຄະວັດສະສູດທີ ໑໐ ຈົບ**

**ຕະຕິຍະອາມະກະທັນຍະເປີຍຍາລະວັກທີ ໗ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ນັດຈະຄີຕະສູດ | ໒. ອຸດຈາສະຍະນະສູດ |
| ໓. ຊາຕະຣູປະຣະຊະຕະສູດ | ໔. ອາມະກະທັນຍະສູດ |
| ໕. ອາມະກະມັງສະສູດ | ໖. ກຸມາຣີກະສູດ |
| ໗. ທາສີທາສະສູດ | ໘. ອະເຊລະກະສູດ |
| ໙. ກຸກກຸຕະສູກະຣະສູດ | ໑໐. ຫັດຖິຄະວັດສະສູດ |

# ໑໐. ຈະຕຸດຖະອາມະກະທັນຍະເປີຍຍາລະວັກ

**ໝວດວ່າດ້ວຍອາມະກະທັນຍະເປີຍຍາລະທີ ໔**

## ໑. ເຂດຕະວັດຖຸສູດ

### ວ່າດ້ວຍສັດທີ່ເວັ້ນຂາດຈາກການຮັບຮົ້ວສວນ ໄຮ່ນາແລະທີ່ດິນ

[໑໑໗໑] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເວັ້ນຂາດຈາກການຮັບຮົ້ວສວນ ໄຮ່ນາ

ແລະທີ່ດິນມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ເວັ້ນຂາດຈາກການຮັບຮົ້ວສວນໄຮ່ນາ ແລະທີ່ດິນມີຈຳນວນຫຼາຍກວ່າ ຯລຯ

**ເຂດຕະວັດຖຸສູດທີ ໑ ຈົບ**

# ໘. ກະຍະວິກກະຍະສູດ

## ວ່າດ້ວຍສັດທີ່ເວັ້ນຂາດຈາກການຊື້ການຂາຍ

[໑໑໗໘] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເວັ້ນຂາດຈາກການຊື້ຂາຍມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ເວັ້ນຂາດຈາກການຊື້ຂາຍມີຈຳນວນຫຼາຍກວ່າ ຯລຯ

**ກະຍະວິກກະຍະສູດທີ ໘ ຈົບ**

# ໙. ທູເຕີຍຍະສູດ

## ວ່າດ້ວຍສັດທີ່ເວັ້ນຂາດຈາກການເຮັດໜ້າທີ່ເປັນໂຕແທນ

[໑໑໗໙] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເວັ້ນຂາດຈາກການເຮັດໜ້າທີ່ເປັນໂຕແທນແລະຜູ້ສື່ສານມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ເວັ້ນຂາດຈາກການເຮັດໜ້າທີ່ເປັນໂຕແທນແລະຜູ້ສື່ສານມີຈຳນວນຫຼາຍກວ່າ ຯລຯ

**ທູເຕີຍຍະສູດທີ ໙ ຈົບ**

# ໔. ຕຸລາກູຕະສູດ

## ວ່າດ້ວຍສັດທີ່ເວັ້ນຂາດຈາກການໂກງດ້ວຍຕາຊິງ ຯ

[໑໑໗໔] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເວັ້ນຂາດຈາກການໂກງດ້ວຍຕາຊິງ ດ້ວຍຂອງປອມ ແລະດ້ວຍເຄື່ອງຕວງວັດມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ເວັ້ນຂາດ ຈາກການໂກງດ້ວຍຕາຊິງ ດ້ວຍຂອງປອມ ແລະດ້ວຍເຄື່ອງຕວງວັດມີຈຳນວນຫຼາຍກວ່າ ຯລຯ

**ຕຸລາກູຕະສູດທີ ໔ ຈົບ**

# ໕. ອຸກໂກຕະນະສູດ

## ວ່າດ້ວຍສັດທີ່ເວັ້ນຂາດຈາກການຮັບສິນບົນ

[໑໑໙໕] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເວັ້ນຂາດຈາກການຮັບສິນບົນ ການລໍ້ລວງ ແລະການຫຼອກລວງມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ເວັ້ນຂາດຈາກການຮັບສິນບົນ ການລໍ້ລວງແລະ ການຫລອກລວງມີຈຳນວນຫຼາຍກວ່າ ຯລຯ

**ອຸກໂກຕະນະສູດທີ ໕ ຈົບ**

# ໖-໑໑. ເສທະນາທິສູດ

## ວ່າດ້ວຍສັດທີ່ເວັ້ນຂາດຈາກການຕັດເປັນຕົ້ນ

[໑໑໙໖-໑໑໗໑] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ເວັ້ນຂາດຈາກ ການຕັດ (ອະໄວ ຍະວະ) ການຂ້າ ການຄຸມຂັງ ການແລ່ນຕີຍາດຊີງ ການປຸ້ນ ແລະການກັນໂຊກມີຈຳນວນໜ້ອຍ ສ່ວນສັດທີ່ບໍ່ເວັ້ນຂາດຈາກການຕັດ (ອະໄວຍະວະ) ການຂ້າ ການຄຸມຂັງ ການແລ່ນຕີຍາດຊີງ ການປຸ້ນ ແລະການກັນໂຊກມີຈຳນວນຫຼາຍກວ່າ

ຂໍ້ນັ້ນ ຍ້ອນເຫດໃດ?
ຍ້ອນບໍ່ໄດ້ເຫັນອະຣິຍະສັດ ໔ ປະການ
ອະຣິຍະສັດ ໔ ປະການ ອັນໃດແດ່ ຄື

໑. ທຸກຂະອະຣິຍະສັດ
໒. ທຸກຂະສະມຸທະຍະອະຣິຍະສັດ
໓. ທຸກຂະນິໂຣທະອະຣິຍະສັດ
໔. ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍ ເພິ່ງທຳຄວາມພຽນ ເພື່ອຮູ້ແຈ້ງຕາມຄວາມ ເປັນຈິງວ່າ ນີ້ທຸກ ຯລຯ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

**ເສທະນາທິສູດທີ ໖-໑໑ ຈົບ**

**ຈະຕຸດຖະອາມະກະທັນຍະເປີຍຍາລະວັກທີ ໑໐ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື



# ໑໑. ປັນຈະຄະຕິເປີຍຍາລະວັກ

## ໝວດວ່າດ້ວຍປັນຈະຄະຕິເປີຍຍາລະ

# ໑. ມະນຸດສະຈຸຕິນິຣະຍະສູດ

## ວ່າດ້ວຍສັດທີ່ຈຸຕິຈາກມະນຸດໄປເກີດໃນນະຣົກ

[໑໑໗໔] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າ ຊົງໃຊ້ປາຍພຣະນະຂາຊ້ອນຝຸ່ນຂຶ້ນມາເລັກໜ້ອຍແລ້ວ ຣັບສັ່ງຮຽກພິກຂຸທັງຫຼາຍມາຕັດຖາມວ່າ ພິກຂຸທັງຫຼາຍ ທ່ານທັງຫຼາຍຈະເຂົ້າໃຈຄວາມຂໍ້ນັ້ນວ່າແນວໃດ ຝຸ່ນເລັກໜ້ອຍນີ້ທີ່ເຮົາໃຊ້ປາຍເລັບຊ້ອນຂຶ້ນມາ ກັບແຜ່ນດິນໃຫຍ່ນີ້ ແນວໃດຈະຫຼາຍກວ່າກັນ

ພິກຂຸທັງຫຼາຍ ທູນຕອບວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ແຜ່ນດິນໃຫຍ່ນີ້ແລຫຼາຍກວ່າ ຝຸ່ນທີ່ພຣະອົງຊົງໃຊ້ປາຍພຣະນະຂາຊ້ອນຂຶ້ນມາມີພຽງເລັກໜ້ອຍ ຝຸ່ນເລັກໜ້ອຍທີ່ພຣະອົງຊົງໃຊ້ປາຍພຣະນະຂາຊ້ອນຂຶ້ນມາ ເມື່ອທຽບກັບແຜ່ນໃຫຍ່ແລ້ວ ຄຳນວນບໍ່ໄດ້ ທຽບຄຽງກັນບໍ່ໄດ້ ບໍ່ເຖິງສ່ວນສ້ຽວ

ພິກຂຸທັງຫຼາຍ ຂໍ້ນີ້ ກໍຄືກັນສັນນັ້ນ ສັດທີ່ຈຸຕິຈາກມະນຸດກັບມາເກີດໃນໝູ່ມະນຸດມີຈຳນວນໜ້ອຍ ສ່ວນສັດທີ່ຈຸຕິຈາກມະນຸດແລ້ວໄປເກີດໃນນະຣົກມີຈຳນວນຫຼາຍກວ່າ ຯລຯ

**ມະນຸດສະຈຸຕິນິຣະຍະສູດທີ ໑ ຈົບ**

# ໔. ມະນຸດສະຈຸຕິຕິຣັດສານະສູດ

## ວ່າດ້ວຍສັດທີ່ຈຸຕິຈາກມະນຸດໄປເກີດໃນກຳເນີດສັດເດຍຣັດສານ

[໑໑໗໒] ພິກຂຸທັງຫຼາຍ ຂໍ້ນີ້ ກໍຄືກັນສັນນັ້ນ ສັດທີ່ຈຸຕິຈາກມະນຸດກັບມາເກີດໃນໝູ່ມະນຸດ

ມີຈຳນວນໜ້ອຍ ສ່ວນສັດທີ່ຈຸຕິຈາກມະນຸດແລ້ວ ໄປເກີດໃນກຳເນີດສັດເດຍລັດສານມີຈຳນວນຫຼາຍກວ່າ ຯລຯ

**ມະນຸດສະຈຸຕິຕິຣັດສານະສູດທີ ໘ ຈົບ**

# ໙. ມະນຸດສະຈຸຕິເປດຕິວິສະຍະສູດ

## ວ່າດ້ວຍສັດທີ່ຈຸຕິຈາກມະນຸດໄປເກີດໃນພູມແຫ່ງເຜດ

[໑໑໗໔] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັບສັນນັ້ນ ສັດທັງຫຼາຍທີ່ຈຸຕິຈາກມະນຸດແລ້ວກັບມາເກີດໃນໝູ່ມະນຸດມີຈຳນວນໜ້ອຍ ສ່ວນສັດທີ່ຈຸຕິຈາກມະນຸດແລ້ວໄປເກີດໃນພູມແຫ່ງເຜດມີຈຳນວນຫຼາຍກວ່າ ຯລຯ

**ມະນຸດສະຈຸຕິເປດຕິວິສະຍະສູດທີ ໙ ຈົບ**

# ໔-໖. ມະນຸດສະຈຸຕິເທວະນິຣະຍາທິສູດ

## ວ່າດ້ວຍສັດທີ່ຈຸຕິຈາກມະນຸດໄປເກີດເປັນເທວະດາແລະເກີດໃນນະຣົກເປັນຕົ້ນ

[໑໑໗໕-໑໑໗໗] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັບສັນນັ້ນ ສັດທີ່ຈຸຕິຈາກມະນຸດແລ້ວໄປເກີດໃນໝູ່ເທວະດາມີຈຳນວນໜ້ອຍ ສ່ວນສັດທີ່ຈຸຕິຈາກມະນຸດໄປເກີດໃນນະຣົກ ຯລຯ ເກີດໃນກຳເນີດສັດເດຍລັດສານ ຯລຯ ເກີດໃນພູມແຫ່ງເຜດມີຈຳນວນຫຼາຍກວ່າ ຯລຯ

**ມະນຸດສະຈຸຕິເທວະນິຣະຍາທິສູດທີ ໔-໖ ຈົບ**

# ໗-໙. ເທວະຈຸຕິນິຣະຍາທິສູດ

## ວ່າດ້ວຍສັດທີ່ຈຸຕິຈາກເທວະດາໄປເກີດໃນນະຣົກເປັນຕົ້ນ

[໑໑໗໘-໑໑໘໐] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັບສັນນັ້ນ ສັດທີ່ຈຸຕິຈາກເທວະດາ ມາເກີດໃນໝູ່ເທວະດາມີຈຳນວນໜ້ອຍ ສ່ວນສັດທີ່ຈຸຕິຈາກເທວະດາໄປເກີດໃນນະຣົກ ຯລຯ ເກີດໃນກຳເນີດສັດເດຍລັດສານ ຯລຯ ເກີດໃນພູມແຫ່ງເຜດມີຈຳນວນຫຼາຍກວ່າ ຯລຯ

**ເທວະຈຸຕິນິຣະຍາທິສູດທີ ໗-໙ ຈົບ**

## ໑໐-໑໔. ເທວະມະນຸດສະນິຣະຍະສູດ

### ວ່າດ້ວຍສັດທີ່ຈຸຕິຈາກເທວະດາມາເກີດເປັນມະນຸດແລະເກີດໃນນະຣົກ

[໑໑໗໑-໑໑໗໓] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ຈຸຕິຈາກເທວະດາ ມາເກີດໃນໝູ່ມະນຸດມີຈໍານວນໜ້ອຍ ສ່ວນສັດທີ່ຈຸຕິຈາກເທວະດາໄປເກີດໃນນະຣົກ ຯລຯ ເກີດ ໃນກໍາເນີດສັດເດຍຣັດສານ ຯລຯ ເກີດໃນພູມແຫ່ງເຜດມີຈໍານວນຫຼາຍກວ່າ ຯລຯ

**ເທວະມະນຸດສະນິຣະຍະສູດທີ ໑໐-໑໔ ຈົບ**

## ໑໓-໑໕. ນິຣະຍະມະນຸດສິນິຣະຍາທິສູດ

### ວ່າດ້ວຍສັດທີ່ຈຸຕິຈາກນະຣົກມາເກີດເປັນມະນຸດແລະເກີດໃນນະຣົກເປັນຕົ້ນ

[໑໑໗໔-໑໑໗໖] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ຈຸຕິຈາກນະຣົກ ມາເກີດໃນໝູ່ມະນຸດມີຈໍານວນໜ້ອຍ ສ່ວນສັດທີ່ຈຸຕິຈາກນະຣົກກັບມາເກີດໃນນະຣົກ ຯລຯ ເກີດໃນກໍາເນີດສັດເດຍຣັດສານ ຯລຯ ເກີດໃນພູມແຫ່ງເຜດມີຈໍານວນຫຼາຍກວ່າ ຯລຯ

**ນິຣະຍະມະນຸດສິນິຣະຍາທິສູດທີ ໑໓-໑໕ ຈົບ**

## ໑໖-໑໗. ນິຣະຍະເທວະນິຣະຍາທິສູດ

### ວ່າດ້ວຍສັດທີ່ຈຸຕິຈາກນະຣົກໄປເກີດເປັນເທວະດາແລະເກີດໃນນະຣົກເປັນຕົ້ນ

[໑໑໗໗-໑໑໗໙] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ຈຸຕິຈາກນະຣົກ ໄປເກີດໃນໝູ່ເທວະດາມີຈໍານວນໜ້ອຍ ສ່ວນສັດທີ່ຈຸຕິຈາກນະຣົກກັບມາເກີດໃນນະຣົກ ຯລຯ ເກີດໃນກໍາເນີດສັດເດຍຣັດສານ ຯລຯ ເກີດໃນພູມແຫ່ງເຜດມີຈໍານວນຫຼາຍກວ່າ ຯລຯ

**ນິຣະຍະເທວະນິຣະຍາທິສູດທີ ໑໖-໑໗ ຈົບ**

## ໑໙-໔໑. ຕິຣັດສານະມະນຸດສະນິຣະຍາທິສູດ

### ວ່າດ້ວຍສັດເດຍຣັດສານທີ່ຈຸຕິມາເກີດເປັນມະນຸດແລະເກີດໃນນະຣົກເປັນຕົ້ນ

[໑໑໘໐-໑໑໘໔] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ຈຸຕິຈາກກໍາເນີດ ສັດເດຍຣັດສານ

ມາເກີດໃນໝູ່ມະນຸດມີຈຳນວນໜ້ອຍ ສ່ວນສັດທີ່ຈຸຕິຈາກກຳເນີດສັດເດຍຣັດສານ ໄປເກີດໃນນະຣົກ ຯລຯ ເກີດໃນກຳເນີດສັດເດຍຣັດສານ ຯລຯ ເກີດໃນພູມແຫ່ງເຜດມີຈຳນວນຫຼາຍກວ່າ ຯລຯ

**ຕິຣັດສານະມະນຸດສະນິຣະຍາທິສູດທີ ໑໙-໘໑ ຈົບ**

# ໘໘-໘໔. ຕິຣັດສານະເທວະນິຣະຍາທິສູດ

## ວ່າດ້ວຍສັດເດຍຣັດສານທີ່ຈຸຕິໄປເກີດເປັນເທວະດາແລະເກີດໃນນະຣົກເປັນຕົ້ນ

[໑໑໙໖-໑໑໙໕] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ຈຸຕິຈາກກຳເນີດສັດເດຍຣັດສານ ໄປເກີດໃນໝູ່ເທວະດາມີຈຳນວນໜ້ອຍ ສ່ວນສັດທີ່ຈຸຕິຈາກກຳເນີດສັດເດຍຣັດສານໄປເກີດໃນ ນະຣົກ ຯລຯ ເກີດໃນກຳເນີດສັດເດຍຣັດສານ ຯລຯ ເກີດໃນພູມແຫ່ງເຜດມີຈຳນວນຫຼາຍກວ່າ ຯລຯ

**ຕິຣັດສານະເທວະນິຣະຍາທິສູດທີ ໘໘-໘໔ ຈົບ**

# ໘໕-໘໗. ເປດຕິມະນຸດສະນິຣະຍາທິສູດ

## ວ່າດ້ວຍເຜດທີ່ຈຸຕິມາເກີດເປັນມະນຸດແລະເກີດໃນນະຣົກເປັນຕົ້ນ

[໑໑໙໖-໑໑໙໗] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ຈຸຕິຈາກພູມແຫ່ງເຜດມາເກີດໃນ ໝູ່ມະນຸດມີຈຳນວນໜ້ອຍ ສ່ວນສັດທີ່ຈຸຕິຈາກພູມແຫ່ງເຜດໄປເກີດໃນນະຣົກ ຯລຯ ເກີດໃນ ກຳເນີດສັດເດຍຣັດສານ ຯລຯ ເກີດໃນພູມແຫ່ງເຜດມີຈຳນວນຫຼາຍກວ່າ ຯລຯ

**ເປດຕິມະນຸດສະນິຣະຍາທິສູດທີ ໘໕-໘໗ ຈົບ**

# ໘໘-໘໙. ເປດຕິເທວະນິຣະຍາທິສູດ

## ວ່າດ້ວຍເຜດທີ່ຈຸຕິໄປເກີດເປັນເທວະດາແລະເກີດໃນນະຣົກເປັນຕົ້ນ

[໑໑໙໙-໑໘໐໐] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ຈຸຕິຈາກພູມແຫ່ງເຜດໄປເກີດໃນ ໝູ່ເທວະດາມີຈຳນວນໜ້ອຍ ສ່ວນສັດທີ່ຈຸຕິຈາກພູມແຫ່ງເຜດໄປເກີດໃນນະຣົກມີຈຳນວນຫຼາຍ ກວ່າ ຯລຯ

ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ຈຸຕິຈາກພູມແຫ່ງເຜດໄປເກີດໃນໝູ່ເທວະດາມີຈຳນວນໜ້ອຍ ສ່ວນສັດທີ່ຈຸຕິຈາກພູມແຫ່ງເຜດໄປເກີດໃນກຳເນີດສັດເດຍຣັດສານມີຈຳນວນຫຼາຍກວ່າ ໆລໆ

**ເປດຕິເທວະນິຣະຍາທິສູດທີ ໒໗-໒໙ ຈົບ**

# ໓໐. ເປດຕິເທວະເປດຕິວິສະຍະສູດ

## ວ່າດ້ວຍເຜດທີ່ຈຸຕິໄປເກີດເປັນເທວະດາແລະເກີດໃນພູມແຫ່ງເຜດ

[໑໘໐໑] ພິກຂຸທັງຫຼາຍ ຂໍ້ນີ້ກໍຄືກັນສັນນັ້ນ ສັດທີ່ຈຸຕິຈາກພູມແຫ່ງເຜດ ໄປເກີດໃນໝູ່ເທວະດາມີຈຳນວນໜ້ອຍ ສ່ວນສັດທີ່ຈຸຕິຈາກພູມແຫ່ງເຜດກັບມາເກີດໃນພູມ ແຫ່ງເຜດມີຈຳນວນຫຼາຍກວ່າ

ຂໍ້ນັ້ນ ຍ້ອນເຫດໃດ?
ຍ້ອນບໍ່ເຫັນອະຣິຍະສັດ ໔ ປະການ
ອະຣິຍະສັດ ໔ ປະການ ອັນໃດແດ່ ຄື

໑. ທຸກຂະອະຣິຍະສັດ
໒. ທຸກຂະສະມຸທະຍະອະຣິຍະສັດ
໓. ທຸກຂະນິໂຣທະອະຣິຍະສັດ
໔. ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນ ທ່ານທັງຫຼາຍເພິ່ງທຳຄວາມພຽນເພື່ອຮູ້ແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ນີ້ທຸກຂະສະມຸໄທ ນີ້ທຸກຂະນິໂຣທະ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດພາສິດນີ້ແລ້ວ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ແລ

**ເປດຕິເທວະເປດຕິວິສະຍະສູດທີ ໓໐ ຈົບ**

**ປັນຈະຄະຕິເປີຍຍາລະວັກທີ ໑໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



**ສັດຈະສັງຍຸດທີ ໑໒ ຈົບ ມະຫາວັກທີ ໕ ຈົບ**

## ລວມສັງຍຸດທີ່ມີໃນມະຫາວາຣະວັກນີ້ ຄື



**ມະຫາວາຣະວັກສັງຍຸດ ຈົບ**

**ສັງຍຸດຕະນິກາຍ ຈົບບໍລິບູນ**